# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓໓

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໘໕

## ຂຸດທະກະນິກາຍ ອະປະທານ ພາກ ໘



ສະບັບຄົ້ນຄົ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

## ໔໙. ປັງສຸກູລະວັກ ........ ໑໑໙

**ໝວດວ່າດ້ວຍຜ້າບັງສຸກຸນເປັນຕົ້ນ** ........ ໑໑໙

## ຂຸດທະກະນິກາຍ ເຖຣີອະປະທານ ................................................ ๑๒๘

### ๑. ສຸເມທາວັກ ........................................................................................ ๑๒๘

#### ໝວດວ່າດ້ວຍພຣະເຖຣີຊື່ສຸເມທາເປັນຕົ້ນ ................................................ ๑๒๘

# ພຣະໄຕຣປິດົກ

## ເຫຼັ້ມທີ ໓໓

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໒໕

## ຂຸດທະກະນິກາຍ ອະປະທານ ພາກ ໔

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໔໔. ພັດທາລິວັກ

### ໝວດວ່າດ້ວຍພຣະພັດທາລິເປັນຕົ້ນ

### ໑. ພັດທາລິເຖຣາປະທານ

**ປະຫວັດໃນອະດີດຊາດຂອງພຣະພັດທາລິເຖຣະ**

(ພຣະພັດທາລິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະພຸດທະເຈົ້າພຣະນາມວ່າ ສຸເມທະ ຜູ້ເລີດ
ຜູ້ຊົງປ່ຽມດ້ວຍພຣະກະລຸນາ ຊົງເປັນຜູ້ເລີດໃນໂລກ
ຊົງເປັນມຸນີ ເມື່ອປະສົງວິເວກ
ຈຶ່ງໄດ້ສະເດັດໄປສູ່ພູເຂົາຫິມະພານ

[໒] ພຣະສຳມາສຳພຸດທະເຈົ້າພຣະນາມວ່າສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ ຊົງອົງອາດກວ່າບຸຣຸດໃດ ໆ
ເມື່ອສະເດັດໄປສູ່ພູເຂົາຫິມະພານແລ້ວ ໄດ້ປະທັບນັ່ງຂັດສະມາທິ

[໓] ພຣະພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກ

ຜູ້ເປັນບຸຣຸດສູງສຸດ ພຣະອົງນັ້ນ
ປະທັບນັ່ງເຂົ້າສະມາບັດຕະຫຼອດ ໆ ວັນ ໆ ຄືນ

[໔] ຂ້າພະເຈົ້າຄອນຫາບເຂົ້າໄປເຖິງກາງປ່າ
ໃນບ່ອນນັ້ນໄດ້ເຫັນພຣະພຸດທະເຈົ້າ
ຜູ້ຂ້າມໂອຄະ ໄດ້ແລ້ວ ບໍ່ມີອາສະວະ

[໕] ຄັ້ງນັ້ນ ຂ້າພະເຈົ້າໄດ້ຈັບໄມ້ປັດກວາດອາສົມ
ປັກໄມ້ເປັນ ໔ ເສົາເຮັດເປັນມົນດົບ

[໖] ຂ້າພະເຈົ້າເກັບດອກສາລະມາມຸງເປັນຫຼັງຄາມົນດົບ
ເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໄຫວ້ພຣະຜູ້ຊົງເປັນຜູ້ນຳສັດໂລກແລ້ວ

[໗] ພຣະພຸດທະເຈົ້າພຣະນາມວ່າສຸເມທະ
ທີ່ຊົນທັງຫຼາຍສັນເສີນກັນວ່າ
ມີພຣະປັນຍາດັ່ງແຜ່ນດິນ ມີພຣະປັນຍາດີ
ປະທັບນັ່ງໃນທ່າມກາງພິກຂຸສົງ ກຳລັງຈະຕັດພຣະຄາຖາເຫຼົ່ານີ້

[໘] ເທວະດາທັງປວງຮູ້ວ່າ ພຣະພຸດທະເຈົ້າຈະຊົງເປ່ງວາຈາ
ຈຶ່ງພາກັນມາປະຊຸມດ້ວຍຄິດວ່າ ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ມີພຣະຈັກຂຸ ຈະຊົງສະແດງທຳຢ່າງແນ່ນອນ

[໙] ພຣະສຳມາສຳພຸດທະເຈົ້າພຣະນາມວ່າສຸເມທະ
ຜູ້ສົມຄວນຮັບເຄື່ອງບູຊາ ປະທັບນັ່ງໃນທ່າມກາງໝູ່ເທວະດາ
ໄດ້ຕັດພຣະຄາຖາດັ່ງຕໍ່ໄປນີ້ວ່າ

[໑໐] ເຮົາຈັກພະຍາກອນຜູ້ຕັ້ງມົນດົບ
ມີດອກສາລະເປັນເຄື່ອງມຸງສຳລັບເຮົາຕະຫຼອດ ໆ ວັນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໑] ຜູ້ນີ້ຈັກເກີດເປັນເທວະດາຫຼືມະນຸດກໍຕາມ
ຈັກເປັນຜູ້ມີຜິວພັນເໝືອນຄຳ
ຈັກສະເຫວີຍການສຸກ ມີໂພຄະລົ້ນເຫຼືອ

[໑໔]	ຊ້າງມາຕັງຄະ ໖໐,໐໐໐ ເຊືອກ
ປະດັບດ້ວຍເຄື່ອງອະລັງການທຸກຢ່າງ
ຮັດປະໂຄນພານໜ້າແລະພານຫຼັງທີ່ເຮັດດ້ວຍຄໍາ
ປະກອບດ້ວຍເຄື່ອງປະດັບຫົວແລະຕາໜ່າງຄໍາ

[໑໓]	ມີນາຍຄວານຊ້າງຜູ້ຖືຫອກຊັດແລະຂໍຂຶ້ນຂີ່ບັງຄັບປະຈໍາ
ຈັກມາສູ່ທີ່ບໍາຣຸງຂອງຜູ້ນີ້ ທັງເວລາເຊົ້າແລະເວລາຄໍ່າ
ຜູ້ນີ້ຈັກເປັນຜູ້ທີ່ຊ້າງເຫຼົ່ານັ້ນແວດລ້ອມແລ້ວ ຣື່ນຣົມຢູ່

[໑໔]	ມ້າສິນທົບຊາດອາຊາໄນ ໖໐,໐໐໐ ຕົວ
ປະດັບດ້ວຍເຄື່ອງອະລັງການທຸກຢ່າງ ເປັນພາຫະນະທີ່ມີຝີຕີນແລ່ນໄດ້ໄວ

[໑໕]	ມີທະຫານມ້າຜູ້ເນັບນິດສັ້ນ ຖືທະນູຂຶ້ນຂີ່ບັງຄັບປະຈໍາ
ຈັກແວດລ້ອມຜູ້ນີ້ຢູ່ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໖]	ລົດ ໖໐,໐໐໐ ຄັນ ປະດັບດ້ວຍເຄື່ອງອະລັງການທຸກຢ່າງ
ຫຸ້ມໜັງເສືອເຫຼືອງແດ່ ໜັງເສືອໂຄ່ງແດ່ ມີທຸງປັກໜ້າລົດ

[໑໗]	ມີພົນຂັບຖືທະນູສວມເກາະປະຈໍາລົດ
ຈັກແວດລ້ອມຜູ້ນີ້ຢູ່ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘]	ໝູ່ບ້ານ ໖໐,໐໐໐ ໝູ່ ບໍລິບູນດ້ວຍເຄື່ອງໃຊ້ທຸກຢ່າງ
ມີຊັບແລະເຂົ້າເປືອກລົ້ນເຫຼືອ ບໍລິບູນດີທຸກປະການ
ຈັກຜາກົດຢູ່ທຸກເມື່ອ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙]	ກອງທັບ ໔ ເຫຼົ່າ ຄື ພົນຊ້າງ ພົນມ້າ ພົນລົດ
ແລະພົນຍ່າງ ຈັກແວດລ້ອມຜູ້ນີ້ຢູ່ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໐]	ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໑໑໘ ກັບ
ຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໔໑] ແລະຈັກຄອງເທວະສົມບັດຕະຫຼອດ ໓໐໐ ຊາດ
ຈັກເປັນເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໔໔] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໓] ຜູ້ນີ້ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງແລ້ວ ຈັກຢູ່ຢ່າງຜູ້ບໍ່ມີອາສະວະ

[໔໔] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຫັນພຣະສາດສະດາ ຜູ້ຊຶ່ງເປັນຜູ້ນຳສັດໂລກ
ແລະໄດ້ສະແຫວງຫາອະມະຕະບົດ ຕັ້ງແຕ່ນັ້ນເປັນຕົ້ນມາ

[໔໕] ການທີ່ຂ້າພະເຈົ້າຮູ້ສາສະນະທຳນີ້
ເປັນລາບທີ່ຂ້າພະເຈົ້າໄດ້ດີແລ້ວ
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໖] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບຸຣຸດຜູ້ສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າພຣະອົງໄດ້ບັນລຸອະມະຕະບົດແລ້ວ
ຍ້ອນກ່າວສະດຸດີພຣະພຸດທະຍານ

[໔໗] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ຍ່ອມເປັນຜູ້ມີຄວາມສຸກໃນທີ່ທຸກສະຖານ
ນີ້ເປັນຜົນທີ່ຂ້າພະເຈົ້າກ່າວສະດຸດີພຣະພຸດທະຍານ

[໔໘] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນ ໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໒໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓[໒] ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔[໓] ວິໂມກ ໘[໔]
ແລະອະພິນຍາ ໖[໕] ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພັດທາລີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ພັດທາລີເຖຣາປະທານທີ ໑ ຈົບ**

## ໔. ເອກະສັດຕິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະສັດຕິຍະເຖຣະ

(ພຣະເອກະສັດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງ ກ່າວວ່າ)

[໓໒] ຂ້າພະເຈົ້າໄດ້ສ້າງອາສົມ ເຕັມໄປດ້ວຍຊາຍຂາວສະອາດ
ໃກ້ແມ່ນ້ຳຈັນທະພາຄາ ແລະໄດ້ສ້າງປັນນະສາລາໄວ້

[໓໓] ແມ່ນ້ຳຈັນທະພາຄານັ້ນ ເປັນແມ່ນ້ຳສາຍນ້ອຍທີ່ມີຝັ່ງລາດລົງ
ແລະມີທ່າຮາບພຽງ ເປັນຕາອອນຊອນ ມີປາແລະເຕົ່າຊຸກຊຸມ
ທັງຍັງເປັນບ່ອນອາໄສຂອງແຂ້

[໓໔] ໝີ ນົກຍູງ ເສືອເຫຼືອງ ນົກກາຣະເວກ ແລະນົກສາລິກາ
ໂຮຮ້ອງຣະງົມຢູ່ທຸກເວລາ ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໕] ນົກກາເວົາມີສຽງມ່ວນ ແລະທົ່ງມີສຽງມ່ວນ
ກໍສົ່ງສຽງຮ້ອງຢູ່ໃກ້ອາສົມນັ້ນ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໖] ຣາດຊະສີ ເສືອໂຄ່ງ ໝູປ່າ ໝີ ໝາປ່າ ແລະໝາໃນ
ທ່ຽວສົ່ງສຽງຄຳຣົນຢູ່ຕາມຮ່ອມພູ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໗] ເນື້ອຊາຍ ກວາງ ໝາຈິ້ງຈອກ ໝູ ກໍມີຫຼາຍ
ຕ່າງສົ່ງສຽງຮ້ອງຢູ່ຕາມຮ່ອມພູ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໘] ຕົ້ນຣາຊະພຶກ ຕົ້ນຈຳປາ ຕົ້ນແຄຝອຍ
ຕົ້ນຍ່ານຊາຍ ຕົ້ນສົ້ມກົບ ແລະຕົ້ນອະໂສກ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໓໙] ຕົ້ນປູ່ ຕົ້ນຄັດເຄົ້າ ຕົ້ນຕີນເປັດ ຕົ້ນໝາກກ່ຳຫຼວງ
ຕົ້ນຄົນທິສໍ ແລະຕົ້ນກັນນິກາ
ລ້ວນມີດອກບານສະພັ່ງ ຢູ່ໃກ້ ໆ ອາສົມຂອງຂ້າພະເຈົ້າ

[໔໐] ຕົ້ນກາກະທິງ ຕົ້ນສາລະ ແລະຕົ້ນສົນ
ລວມທັງຕົ້ນໝາກມ່ວງປ່າ ລ້ວນມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ງົດງາມຢູ່ໃກ້ ໆ ອາສົມຂອງຂ້າພະເຈົ້າ

[໔໑] ແລະທີ່ໃກ້ອາສົມນັ້ນ ມີຕົ້ນໂພ ຕົ້ນດູ່
ຕົ້ນໝາກຕ້ອງ ຕົ້ນສາລະ ແລະຕົ້ນປະຍົງ
ລ້ວນມີດອກບານສະພັ່ງ ງົດງາມຢູ່ໃກ້ ໆ ອາສົມຂອງຂ້າພະເຈົ້າ

[໔໒] ຕົ້ນໝາກມ່ວງ ຕົ້ນຫວ້າ ຕົ້ນໝາກຫອມຄວາຍ
ຕົ້ນກະທຸ່ມ ຕົ້ນຂານາງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໔໓] ຕົ້ນອະໂສກ ຕົ້ນໝາກຂວິດ ແລະຕົ້ນກຸຫຼາບ

ລ້ອນມີດອກບານສະພັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໔໔] ຕົ້ນກະທຸ່ມ ຕົ້ນກ້ວຍ ຖົ່ວເຫຼືອງ
ແລະຕົ້ນໝາກກ່ຳດຳ ລ້ອນຈໍ່ໜ່ວຍຢູ່ເນືອງນິດ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໔໕] ຕົ້ນສົ້ມມໍ ຕົ້ນໝາກຂາມປ້ອມ ຕົ້ນໝາກມ່ວງ
ຕົ້ນຫວ້າ ຕົ້ນສົ້ມມໍພິເພກ ຕົ້ນໝາກກະເບົາ ຕົ້ນຮົກຟ້າ
ຕົ້ນໝາກຕູມ ກໍຈໍ່ໜ່ວຍຢູ່ໃກ້ ໆ ອາສົມຂອງຂ້າພະເຈົ້າ

[໔໖] ໃນບ່ອນບໍ່ໄກຈາກອາສົມ ມີສະໂບກຂະຣະນີ
ເຊິ່ງມີທ່າຮາບພຽງ ເປັນຕາອອນຊອນ
ເດຍລະດາດດ້ວຍດອກບົວເຜື່ອນ ດອກບົວຫຼວງ ແລະດອກບົວຊຽວ

[໔໗] ດອກປະທຸມບາງດອກກໍກຳລັງມີດອກຈູມ ບາງດອກກໍກຳລັງມີດອກບານ
ບາງດອກກໍມີກີບແລະເກສອນ ລຸດໂຫຼ່ນ
ຢູ່ໃກ້ ໆ ອາສົມຂອງຂ້າພະເຈົ້າ

[໔໘] ປາສະຫຼາດ ຝູງປາກະບອກ ຝູງປາສະຫວາຍ
ຝູງປາເຄົ້າ ແລະຝູງປາຕະພຽນ ຕ່າງລອຍວົນຢູ່ໃນນ້ຳໃສ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໔໙] ຕົ້ນຕາເສືອ ຕົ້ນຈິງກົນນີ
ແລະຕົ້ນລຳຈຽກເຊິ່ງຂຶ້ນຢູ່ແຄມຝັ່ງ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໐] ນ້ຳຫວານໄຫຼອອກຈາກເຫງົ້າບົວ
ນົມສົດແລະເນີຍໃສໄຫຼອອກຈາກກ້ານບົວ
ສົ່ງກິ່ນຫອມອົບອວນຄ້າຍກິ່ນທິບ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໑] ໃກ້ອາສົມນັ້ນ ມີເນີນຊາຍທີ່ສວຍງາມດາດດື່ນ

ມີໄມ້ດອກທີ່ອາໄສນ້ຳເປັນເຄື່ອງຫຼໍ່ລ້ຽງ
ແຕກດອກຂາວບານສະພັ່ງ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໘] ລືສີທັງຫຼາຍຜູ້ໃສ່ຊະດາ ແລະເຄື່ອງບໍຣິຂານ
ນຸ່ງຫົ່ມຜ້າໜັງສັດ ຊຶ່ງຜ້າເປືອກໄມ້
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໕໙] ລືສີທັງຫຼາຍມີປົກກະຕິທອດສາຍຕາເບິ່ງປະມານຊົ່ວແອກ
ມີປັນຍາຮັກສາຕົນ ມີຄວາມປະພຶດສະຫງົບ ບໍ່ມີຄວາມຍິນດີ
ບໍ່ມີຄວາມກຳໜັດໃນກາມ ຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໖໐] ລືສີທັງຫຼາຍຜູ້ມີຂົນຂີ້ແຮ້ ເລັບ ແລະມີຜົມປົ່ງຍາວ
ມີຂີ້ແຂ້ວ ມີຂີ້ຝຸ່ນເທິ່ງຫົວ ເປື້ອນຝຸ່ນ ແລະລະອອງ
ລ້ວນຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໖໑] ລືສີເຫຼົ່ານັ້ນ ລ້ວນຊ່ຽວຊານອະພິນຍາ
ເຫາະໄປໃນທ້ອງຟ້າໄດ້ ເມື່ອເຫາະຂຶ້ນສູ່ທ້ອງຟ້າ
ປະດັບອາສົມຂອງຂ້າພະເຈົ້າໃຫ້ງົດງາມ

[໖໒] ໃນຄັ້ງນັ້ນ ຂ້າພະເຈົ້າມີສິດເຫຼົ່ານັ້ນແວດລ້ອມຢູ່ໃນປ່າໃຫຍ່
ເປັນຜູ້ພຽບພ້ອມດ້ວຍຄວາມຍິນດີໃນຊານ
ຈົນບໍ່ຮູ້ຈັກກາງຄືນແລະກາງເວັນ

[໖໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຊົງເປັນມະຫາມຸນີ ຊົງເປັນຜູ້ນຳສັດໂລກ
ສະເດັດອຸບັດຂຶ້ນ ກຳຈັດຄວາມມືດມົນຄືໂມຫະໃຫ້ພິນາດໄປ

[໖໔] ໃນຄັ້ງນັ້ນ ສິດບາງອົງປະສົງຈະຮ່ຳຮຽນຄຳພີລັກສະນະ
ອັນມີອົງ ໖ ໃນຄຳພີພຣະເວດ ໄດ້ມາຍັງສຳນັກຂອງຂ້າພະເຈົ້າ

[໖໕] ພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ ຜູ້ຊົງເປັນມະຫາມຸນີ
ສະເດັດອຸບັດຂຶ້ນໃນໂລກ ເມື່ອຈະຊົງປະກາດສັດຈະ ໔
ຈຶ່ງໄດ້ຊົງສະແດງອະມະຕະບົດ

[໖໐] ຂ້າພະເຈົ້າເປັນຜູ້ມີຄວາມຍິນດີ ຣ່າເຣິງບັນເທີງໃຈ
ມຸ້ງຫວັງກອງທຳອັນວິເສດ ອອກຈາກອາສົມແລ້ວເວົ້າດັ່ງນີ້ວ່າ

[໖໑] ພຣະພຸດທະເຈົ້າຜູ້ຊົງລັກສະນະອັນປະເສີດ ໓໔ ປະການ
ສະເດັດອຸບັດຂຶ້ນແລ້ວໃນໂລກ ມາເທີ້ນ ທ່ານທັງຫຼາຍ
ເຮົາທຸກຄົນຈັກໄປສູ່ສຳນັກຂອງພຣະສຳມາສຳພຸດທະເຈົ້າ

[໖໔] ສິດເຫຼົ່ານັ້ນຜູ້ປະຕິບັດຕາມຄຳສັ່ງສອນບັນລຸປາຣະມີໃນພຣະສັດທຳ
ສະແຫວງຫາປະໂຫຍດຢ່າງປະເສີດ ຕ່າງຮັບວ່າ ສາທຸ

[໖໓] ໃນຄັ້ງນັ້ນ ພວກເຂົາໃສ່ຊະດາ ແລະຊົງບໍຣິຂານ
ນຸ່ງຫົ່ມຜ້າໜັງສັດ
ສະແຫວງຫາປະໂຫຍດຢ່າງປະເສີດໄດ້ອອກໄປຈາກປ່າ

[໖໔] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ມີພຣະຍົດຍິ່ງໃຫຍ່ ເມື່ອຈະຊົງປະກາດສັດຈະ ໔
ຈິ່ງໄດ້ຊົງສະແດງອະມະຕະບົດ

[໖໕] ຂ້າພະເຈົ້າຍືນຖືສະເວດຕະສັດກັ້ງຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເມື່ອກັ້ງຖວາຍຕະຫຼອດວັນໜຶ່ງແລ້ວ
ໄດ້ຂາບໄຫວ້ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໖໖] ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໗] ເຮົາຈັກພະຍາກອນຜູ້ທີ່ມີຈິດເຫຼື້ອມໃສ
ເຊິ່ງໄດ້ກັ້ງສະເວດຕະສັດໃຫ້ເຮົາດ້ວຍມືທັງ ໔ ຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໘] ເມື່ອຜູ້ນີ້ເກີດເປັນເທວະດາຫຼືມະນຸດກໍຕາມ
ປະຊາຊົນຈັກຄອຍຖ້າກັ້ງສະເວດຕະສັດໃຫ້ທຸກເມື່ອ
ນີ້ເປັນຜົນແຫ່ງການກັ້ງສະເວດຕະສັດຖວາຍ

[໖໙] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໗໗ ກັບ
ຈັກໄດ້ເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໗໐] ແລະຈັກຄອງເທວະສົມບັດຕະຫຼອດ ໗໗ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໗໑] ໃນກັບທີ ໑໑໘ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າ ໂຄດົມສາກະຍະ ຜູ້ປະເສີດ
ຜູ້ມີພຣະຈັກຂຸ ຈັກສະເດັດອຸບັດຂຶ້ນ
ກຳຈັດຄວາມມືດມົນໃຫ້ພິນາດໄປ

[໗໔] ຜູ້ນີ້ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໗໓] ນັບແຕ່ການທີ່ຂ້າພະເຈົ້າໄດ້ກະທຳກຳ
ຄືການໄດ້ກັ້ງສະເວດຕະສັດຖວາຍພຣະພຸດທະເຈົ້າເປັນຕົ້ນມາ
ໃນລະຫວ່າງນີ້ຂ້າພະເຈົ້າບໍ່ຮູ້ພາວະທີ່ຕົນ
ບໍ່ເຄີຍໄດ້ຮັບການກັ້ງສະເວດຕະສັດໃຫ້

[໗໔] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ທຸກວັນນີ້ເໜືອຫົວຂອງຂ້າພະເຈົ້າ
ກໍໄດ້ມີການກັ້ງສະເວດຕະສັດຕະຫຼອດເວລາເປັນນິດ

[໗໕] ໂອຫໍ ກຳຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວ
ໃນສຳນັກພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ ຜູ້ໝັ້ນຄົງ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໗໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ๓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະສັດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະສັດຕິຍະເຖຣາປະທານທີ ໔ ຈົບ**

## ๓. ຕິນະສູລະກະສາທະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນະສູລະກະສາທະນິຍະເຖຣະ

(ພຣະຕິນະສູລະກະສາທະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໘໙] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ພິຈາລະນາກວາມເກີດຄວາມແກ່
ແລະຄວາມຕາຍແລ້ວຫຼີກຕົວອອກບວດເປັນບັນພະຊິດແຕ່ຜູ້ດຽວ

[໙໐] ເມື່ອຂ້າພະເຈົ້າທ່ຽວໄປໂດຍລຳດັບ ໄດ້ໄປເຖິງຝັ່ງແມ່ນ້ຳຄົງຄາ
ເຫັນພື້ນດິນທີ່ຝັ່ງແມ່ນ້ຳຄົງຄານັ້ນຮາບພຽງ

[໙໑] ຈຶ່ງໄດ້ສ້າງອາສົມທີ່ຝັ່ງແມ່ນ້ຳຄົງຄານັ້ນ
ຢູ່ໃນອາສົມຂອງຂ້າພະເຈົ້ານັ້ນ
ບ່ອນຈົງກົມເຊິ່ງປະກອບດ້ວຍໝູ່ນົກນານາຊະນິດ
ເຊິ່ງຂ້າພະເຈົ້າສ້າງໄວ້ດີແລ້ວ

[໙໔] ສັດທັງຫຼາຍຢູ່ໃກ້ຂ້າພະເຈົ້າ ກໍສິ່ງສຽງເປັນຕາອອນຊອນ
ຂ້າພະເຈົ້າຮື່ນຣົມກັບສັດເຫຼົ່ານັ້ນຢູ່ໃນອາສົມ

[໙๓] ທີ່ໃກ້ອາສົມຂອງຂ້າພະເຈົ້າມີຣາດຊະສີສາມາດກ້າວໄປໄດ້ໂດຍທິດທັງ ໔
ອອກຈາກບ່ອນຢູ່ແລ້ວ ຄຳຣາມເໝືອນສຽງສັນນິບາດ

[໙໔] ກໍເມື່ອຣາດຊະສີຄຳຣົນ ຂ້າພະເຈົ້າເກີດຄວາມຣ່າເຣິງ
ຄົ້ນຫາຣາດຊະສີຢູ່ ຈຶ່ງໄດ້ເຫັນພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ

[໗໕] ເມື່ອໄດ້ເຫັນພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ພຣະນາມວ່າ ຕິດສະ ຜູ້ເປັນເທບຍິ່ງກວ່າເທບ
ຂ້າພະເຈົ້າມີຈິດຮ່າເຣີງ ບັນເທີງໃຈ ຈຶ່ງບູຊາພຣະອົງ
ດ້ວຍເກສອນດອກກາກະທິງ

[໗໖] ໄດ້ຊື່ນຊົມພຣະອົງຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ເໝືອນດວງອາທິດກຳລັງອຸໄທ
ເໝືອນຕົ້ນພະຍາໄມ້ສາລະເຊິ່ງມີດອກເບ່ງບານ
ເໝືອນດາວປະກາຍພຶກກຳລັງທໍແສງສະຫວ່າງສະໄຫວວ່າ

[໗໗] ພຣະສັບພັນຍູ ພຣະອົງຊົງຍັງໂລກນີ້ພ້ອມທັງເທວະໂລກ
ໃຫ້ສະຫວ່າງດ້ວຍພຣະຍານຂອງພຣະອົງ
ເຂົາເຫຼົ່ານັ້ນເຮັດໃຫ້ພຣະອົງຊົງພໍພຣະທະໄທຈຶ່ງພົ້ນຈາກຊາດໄດ້

[໗໘] ຍ້ອນບໍ່ໄດ້ເຝົ້າພຣະສັບພັນຍູພຸດທະເຈົ້າຜູ້ເຫັນທຳທັງປວງ
ສັດທັງຫຼາຍຈຶ່ງຖືກຣາຄະແລະໂທສະຄອບງຳ
ແລ້ວພາກັນຕົກໄປໃນນະຣົກອະເວຈີ

[໗໙] ຍ້ອນອາໄສການໄດ້ເຂົ້າເຝົ້າພຣະອົງ
ຜູ້ສັບພັນຍູ ຜູ້ຊົງເປັນຜູ້ນຳສັດໂລກ
ສັດທັງປວງຈຶ່ງລຸດພົ້ນຈາກພົບແລ້ວບັນລຸອະມະຕະບົດ

[໘໐] ເມື່ອໃດ ພຣະພຸດທະເຈົ້າທັງຫຼາຍຜູ້ມີພຣະຈັກຂຸ
ມີພຣະຣັດສະໝີ ສະເດັດອຸບັດຂຶ້ນ
ເມື່ອນັ້ນ ພຣະພຸດທະເຈົ້າທັງຫຼາຍເຫຼົ່ານັ້ນ
ຈະຊົງແຜ່ພຣະຣັດສະໝີມີແສງສະຫວ່າງ
ແຜດເຜົາກິເລດ (ຂອງເຫຼົ່າສັດ) ໃຫ້ສິ້ນໄປ

[໘໑] ຂ້າພະເຈົ້າໄດ້ສະດຸດີພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຕິດສະ
ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງສັດໂລກແລ້ວ ມີຈິດຮ່າເຣີງ
ບັນເທີງໃຈ ໄດ້ບູຊາພຣະອົງດ້ວຍດອກມະລິຊ້ອນ

[໘໒] ພຣະພຸດທະເຈົ້າພຣະນາມວ່າຕິດສະ ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ
ປະທັບນັ່ງເທິງອາສະນະຂອງພຣະອົງແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໙໓] ເຮົາຈັກພະຍາກອນຜູ້ທີ່ເຫຼື້ອມໃສ ຖືດອກໄມ້ກັ້ນ (ແດດ) ໃຫ້ເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໙໔] ຜູ້ນັ້ນຈັກຄອງເທວະສົມບັດໃນເທວະໂລກຕະຫຼອດ ໘໕ ຊາດ
ຈັກເປັນພຣະເຈົ້າຈັກກະພັດ ໗໕ ຊາດ

[໙໕] ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ນີ້ເປັນຜົນແຫ່ງການກະທຳການບູຊາດ້ວຍດອກໄມ້

[໙໖] ກໍຄືນທີ່ໃຊ້ດອກໄມ້ກັ້ງ (ແດດ) ໃຫ້ເຮົາຕັ້ງແຕ່ເຊົ້າຈົດຮອດແລງ
ຈັກເປັນຜູ້ປະກອບດ້ວຍກຳດີຜາກົດຕໍ່ໄປໃນພາຍພາກໜ້າ

[໙໗] ເຂົາປາຖະໜາສິ່ງໃດ
ສິ່ງນັ້ນ ໆ ຈັກຜາກົດຕາມຄວາມປະສົງ
ເຂົາກະທຳຄວາມດຳຣິຊອບໃຫ້ບໍລິບູນ
ຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

**ພານະວານທີ ໑໗ ຈົບ**

[໙໘] ຂ້າພະເຈົ້ານັ່ງເທິງອາສະນະດຽວ ມີສະຕິສຳປະຊັນຍະ
ເຜົາກິເລດທັງຫຼາຍແລ້ວ ໄດ້ບັນລຸພຣະອະຣະຫັນ

[໙໙] ບໍ່ວ່າຂ້າພະເຈົ້າຈະຍ່າງ ຢືນ ນັ່ງ ນອນຢູ່ກໍຕາມ
ຍ່ອມຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດຢູ່ທຸກຂະນະ

[໑໐໐] ຄວາມຂາດແຄນໃນປັດໄຈເຫຼົ່ານີ້
ຄືຈີວອນ ບິນທະບາດ ຄິລານະປັດໄຈເພສັດບໍຣິຂານ ບ່ອນນອນ ບ່ອນນັ່ງ
ບໍ່ໄດ້ມີແກ່ຂ້າພະເຈົ້າ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐໑] ບັດນີ້ ຂ້າພະເຈົ້າບັນລຸອະມະຕະບົດທີ່ສະງົບຣະງັບຢ່າງປະເສີດ
ກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໑໐໘] ໃນກັບທີ ໙໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງ ຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິນະສູລະກະສາທະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕິນະສູລະກະສາທະນິຍະເຖຣາປະທານທີ ໓ ຈົບ**

## ໔. ມຸທຸມັງສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມຸທຸມັງສະທາຍະກະເຖຣະ

(ພຣະມຸທຸມັງສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໖] ຂ້າພະເຈົ້າເປັນຄົນຂ້າໝູ່ຢູ່ໃນນະຄອນພັນທຸມະດີ
ໄດ້ຕົ້ມເຄື່ອງໃນແລ້ວໃສ່ປະສົມລົງໃນຊີ້ນຊັ້ນດີ

[໑໐໗] ຂ້າພະເຈົ້າໄດ້ໄປສູ່ທີ່ປະຊຸມສົງ ຮັບບາດມາໜ່ວຍໜຶ່ງ
ບັນຈຸບາດນັ້ນຈົນເຕັມແລ້ວ ໄດ້ຖວາຍພິກຂຸສົງ

[໑໐໘] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຖວາຍພຣະສັງຄະເຖຣະດ້ວຍຄິດວ່າ
ດ້ວຍຜົນແຫ່ງການຖວາຍບາດທີ່ໃສ່ຊີ້ນຈົນເຕັມນີ້
ຂ້າພະເຈົ້າຈັກໄດ້ສຸກອັນໄພບູນ

[໑໐໙] ເຂົາສະເຫວີຍສົມບັດ ໔ ຢ່າງແລ້ວ

ຖືກມູນກຸສົນກຳເກົ່າດຶງໃຫ້
ມາເຖິງພົບສຸດທ້າຍແລ້ວຈັກເຜົາກິເລດໄດ້

[໑໑໐] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນທານນັ້ນ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ
ໃນບ່ອນນັ້ນ ຂ້າພະເຈົ້າກິນ ດື່ມ ໄດ້ສຸກອັນໄພບູນ

[໑໑໑] ບໍ່ວ່າຂ້າພະເຈົ້າຈະຢູ່ທີ່ພົ້ນດິນຫຼືຢູ່ທີ່ເຫງົ້າໄມ້
ຂ້າພະເຈົ້າກໍຈັກນຶກເຖິງບຸບພະກຳສະເໝີ
ໃນຂະນະທີ່ຂ້າພະເຈົ້ານຶກເຖິງບຸບພະກຳຢູ່ນັ້ນ
ທ່າຝົນແຫ່ງເຂົ້າແລະນ້ຳຕົກລົງມາເພື່ອຂ້າພະເຈົ້າ

[໑໑໒] ນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ເຖິງໃນພົບນີ້ເຂົ້າ ແລະນ້ຳກໍຕົກລົງມາເພື່ອຂ້າພະເຈົ້າຕະຫຼອດການທຸກເມື່ອ

[໑໑໓] ດ້ວຍອານິສົງແຫ່ງການຖວາຍຊີ້ນຊັ້ນດີນັ້ນ ໆ
ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບແລ້ວ
ຈຶ່ງກຳນົດຮູ້ອາສະວະທັງປວງແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ

[໑໑໔] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຫ້ທານໄວ້ໃນຄັ້ງນັ້ນ
ບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຊີ້ນຊັ້ນດີ

[໑໑໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໑໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑໗]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມຸທຸມັງສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມຸທຸມັງສະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ນາຄະປັນລະວະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນາຄະປັນລະວະກະເຖຣະ

(ພຣະນາຄະປັນລະວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ ກ່າວວ່າ)

[໑໑໘]　ຂ້າພະເຈົ້າອາໄສຢູ່ທີ່ພຣະຣາດຊະອຸທະຍານໃນນະຄອນພັນທຸມະດີ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ໄດ້ປະທັບນັ່ງຢູ່ໃກ້ອາສົມຂອງຂ້າພະເຈົ້າ

[໑໑໙]　ຂ້າພະເຈົ້າໄດ້ຖືຍອດອ່ອນໄມ້ກາກະທິງບູຊາພຣະພຸດທະເຈົ້າ
ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍອະພິວາດພຣະສຸຄົດເຈົ້າແລ້ວ

[໑໒໐]　ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ຍອດອ່ອນບູຊາ (ພຣະພຸດທະເຈົ້າ) ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໒໑]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໒໒]　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໑]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນາຄະປັນລະວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນາຄະປັນລະວະກະເຖຣາປະທານທີ ໔ ຈົບ**

## ໖. ເອກະທິປີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະທິປີຍະເຖຣະ

(ພຣະເອກະທິປີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໔]	ເມື່ອພຣະສຸຄົດເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ ປະຣິນິບພານແລ້ວ
ມະນຸດພ້ອມທັງເທວະດາທັງປວງ
ຕ່າງກໍບູຊາພຣະອົງຜູ້ສູງສຸດແຫ່ງເທວະດາແລະມະນຸດທັງຫຼາຍ

[໑໘໕]	ແລະເມື່ອເຂົາຊ່ອຍກັນຍົກພຣະສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກຂຶ້ນເທິງຈິຕະກາທານແລ້ວ
ຕ່າງກໍບູຊາຈິຕະກາທານຂອງພຣະສາດສະດາຕາມກຳລັງຂອງຕົນ

[໑໘໖]	ຂ້າພະເຈົ້າໄດ້ໄຕ້ປະທີບໃຫ້ລຸກສະຫວ່າງແຈ້ງໄວ້ໃກ້ຈິຕະກາທານ
ປະທີບຂອງຂ້າພະເຈົ້າລຸກສະຫວ່າງແຈ້ງຢູ່ຈົນເຖິງເວລາດວງອາທິດອຸໄທ

[໑໘໗]	ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດຍັງສະຫວັນຊັ້ນຕາວະຕິງສາ

[໑໘໘]	ໃນສະຫວັນຊັ້ນຕາວະຕິງສານັ້ນ
ວິມານທີ່ບຸນກຳໄດ້ເຮັດໄວ້ເປັນຢ່າງດີເພື່ອຂ້າພະເຈົ້າ
ຮຽກກັນວ່າ ເອກະທິປີວິມານ
ມີປະທີບ ໑໐໐,໐໐໐ ດວງ
ສ່ອງສະຫວ່າງຢູ່ໃນວິມານຂອງຂ້າພະເຈົ້າ

[໑໔໙] ຮ່າງກາຍຂອງຂ້າພະເຈົ້າສະຫວ່າງສະໄຫວຢູ່ທຸກເມື່ອ
ເໝືອນດວງອາທິດອຸໄທ
ສະຣີຣະຂອງຂ້າພະເຈົ້າມີແສງສະຫວ່າງດ້ວຍຣັດສະໝີໃນການທຸກເມື່ອ

[໑໕໐] ຂ້າພະເຈົ້າມີຈັກຂຸເບິ່ງຊອດຝາ ກຳແພງ
ແລະພູເຂົາ ໂດຍຮອບ ໑໐໐ ໂຍດ

[໑໕໑] ຮື່ນຮົມຢູ່ໃນເທວະໂລກຕະຫຼອດ ກ໗ ຊາດ
ໄດ້ຄອງເທວະສົມບັດຕະຫຼອດ ໕໑ ຊາດ

[໑໕໒] ໄດ້ເປັນພຣະເຈົ້າຈັກກະພັດ ໘໗ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໕໓] ຂ້າພະເຈົ້າຈຸຕິຈາກເທວະໂລກແລ້ວເກີດໃນທ້ອງມານດາ
ແມ່ນຢູ່ໃນທ້ອງມານດາຂ້າພະເຈົ້າກໍບໍ່ຫຼັບຕາ

[໑໕໔] ຂ້າພະເຈົ້າເກີດໄດ້ ໔ ປີ ກໍອອກບວດເປັນບັນພະຊິດ
ຍັງບໍ່ເຖິງເຄິ່ງເດືອນກໍໄດ້ບັນລຸອະຣະຫັນຕະຜົນ

[໑໕໕] ຂ້າພະເຈົ້າຊຳຣະທິບພະຈັກຂຸໃຫ້ມົດຈົດວິເສດແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ກິເລດທັງປວງຂ້າພະເຈົ້າກໍຕັດໄດ້ແລ້ວ
ນີ້ເປັນຜົນແຫ່ງປະທີບດວງດຽວ

[໑໕໖] ຂ້າພະເຈົ້າແນມຊອດຝາ ກຳແພງ ແລະພູເຂົາທັງໝົດໄດ້
ນີ້ເປັນຜົນແຫ່ງປະທີບດວງດຽວ

[໑໕໗] ສຳລັບຂ້າພະເຈົ້າ ພູມີພາກທີ່ສູງໂນນຍ່ອມເປັນສະພາບທົ່ງຮາບພຽງ
ຄວາມມືດຍ່ອມບໍ່ຜາກົດ ຂ້າພະເຈົ້າບໍ່ເຫັນຄວາມມືດ
ນີ້ເປັນຜົນແຫ່ງປະທີບດວງດຽວ

[໑໕໘] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍປະທີບໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງປະທີບດວງດຽວ

[໑໓໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະທິປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະທິປິຍະເຖຣາປະທານທີ ໖ ຈົບ**

## ໗. ອຸດສັງຄະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸດສັງຄະປຸບຜິຍະເຖຣະ

(ພຣະອຸດສັງຄະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໔໒] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຊ່າງດອກໄມ້ຢູ່ໃນນະຄອນພັນທຸມະດີ
ຂ້າພະເຈົ້າເກັບ (ດອກໄມ້) ໃສ່ເຕັມຖົງເນັບແອວ ແລ້ວໄດ້ໄປໃນຕະຫຼາດ

[໑໔໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ມີພິກຂຸສົງຫ້ອມລ້ອມແລ້ວ ສະເດັດອອກໄປດ້ວຍອານຸພາບໃຫຍ່

[໑໔໔] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ສ່ອງໂລກໃຫ້ສະຫວ່າງແຈ້ງທົ່ວ ຊົງຊ່ອຍສັດໂລກໃຫ້ຂ້າມພົ້ນ
ຈຶ່ງຈັບດອກໄມ້ອອກຈາກຖົງເນັບແອວບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໔໕] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ການທີ່ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸດສັງຄະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸດສັງຄະປຸບພິຍະເຖຣາປະທານທີ ໗ ຈົບ**

## ໘. ຍາຄຸທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຍາຄຸທາຍະກະເຖຣະ

(ພຣະຍາຄຸທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔໙] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ພາແຂກມາເຮືອນ
ເຫັນແມ່ນ້ຳເຕັມຝັ່ງ ຈຶ່ງເຂົ້າໄປສູ່ສັງຄາຣາມ

[໑໕໐] ພິກຂຸທັງຫຼາຍຜູ້ຖືທຸດົງຂໍ້ການຢູ່ປ່າເປັນວັດ
ເຂົ້າຊານ ມີຈີວອນເສົ້າໝອງ
ຍິນດີໃນຄວາມສະຫງັດ ເປັນນັກປາດ
ອາໄສຢູ່ໃນສັງຄາຣາມ

[໑໕໑] ທາງໄປບິນທະບາດຂອງພິກຂຸຜູ້ລຸດພົ້ນດີແລ້ວ

ຜູ້ຄົງທີ່ເຫຼົ່ານັ້ນ ຖືກຕັດຂາດແລ້ວ
ໃນເວລາຕໍ່ມາເມື່ອນ້ຳຖວມ
ທ່ານໄປບິນທະບາດບໍ່ໄດ້

[໑໕໘] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ເກີດປີຕິປາໂມດ ປະນົມມື
ຖືເຂົ້າສານ (ຕົ້ມ) ເຂົ້າຢາຄູແລ້ວຖວາຍ

[໑໕໙] ຂ້າພະເຈົ້າເຫຼື້ອມໃສ ຖວາຍເຂົ້າຢາຄູທີ່ຕົ້ມດ້ວຍມືທັງ ໔ ຂອງຕົນ
ເມື່ອຜາຣົບເຖິງກຳຂອງຕົນແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໕໔] ວິມານແກ້ວມະນີໄດ້ເກີດແກ່ຂ້າພະເຈົ້າໃນໝູ່ເທບຊັ້ນຕາວະຕິງສາ
ຂ້າພະເຈົ້າປະກອບດ້ວຍໝູ່ເທບນາຣີ ບັນເທີງຢູ່ໃນວິມານທີ່ອຸດົມ

[໑໕໕] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໖໖ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດຄອງມະຫາຣາດຊະສົມບັດ ໖໐ ຊາດ

[໑໕໖] ໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ສະເຫວີຍຍົດໃນເທວະໂລກແດ່ ໃນມະນຸດໂລກແດ່

[໑໕໗] ເມື່ອເຖິງພົບສຸດທ້າຍ ຂ້າພະເຈົ້າໄດ້ສະລະຊັບສົມບັດທັງປວງ
ອອກບວດເປັນບັນພະຊິດ ຂະນະທີ່ແຖຜົມສຳເລັດ

[໑໕໘] ຂ້າພະເຈົ້າພິຈາລະນາຮ່າງກາຍໂດຍຄວາມສິ້ນໄປແລະຄວາມເສື່ອມໄປ
ກໍໄດ້ບັນລຸອະຣະຫັນຕະຜົນກ່ອນການຮັບສິກຂາບົດ

[໑໕໙] ທານອັນປະເສີດທີ່ເກີດຈາກມືເຮົາ
ເຊິ່ງເຮົາປະກອບດີແລ້ວ ຊື່ວ່າ ເປັນອັນໃຫ້ດີແລ້ວ
ຍ້ອນການຖວາຍເຂົ້າຢາຄູນັ້ນເອງ
ຂ້າພະເຈົ້າຈຶ່ງໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໑໖໐] ຂ້າພະເຈົ້າບໍ່ຮູ້ສຶກວ່າມີຄວາມເສົ້າໂສກ ຄວາມຮ່ຳໄຮ
ຄວາມເຈັບໄຂ້ ຄວາມກະວົນກະວາຍ
ຄວາມເດືອດຮ້ອນໃຈເກີດຂຶ້ນເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າຢາຄູ

[໑໖໑] ໂອນໍ ເຂົ້າຍາຄູຂ້າພະເຈົ້າໄດ້ຖວາຍດີແລ້ວນໍ
ຂ້າພະເຈົ້າໄດ້ຖວາຍເຂົ້າຍາຄູແດ່ໝູ່ພຣະສົງ
ຜູ້ເປັນເນື້ອນາບຸນອັນປະເສີດ
ຈຶ່ງໄດ້ຮັບອານິສົງ ໕ ປະການ

[໑໖໒] ຄື (໑) ບໍ່ມີຄວາມເຈັບໄຂ້ (໒) ມີຮູບງາມ
(໓) ຕັດສະຮູ້ທຳໄດ້ໄວ (໔) ໄດ້ເຂົ້າແລະນ້ຳ (໕) ມີອາຍຸຍືນ

[໑໖໓] ບຸກຄົນໃດ ຍັງໂສມະນັດໃຫ້ເກີດຢູ່
ຖວາຍເຂົ້າຍາຄູແດ່ໝູ່ພຣະສົງ
ບຸກຄົນນັ້ນເປັນບັນດິດເພິ່ງໄດ້ຮັບອານິສົງ ໕ ປະການເຫຼົ່ານີ້

[໑໖໔] ກິດທຸກຢ່າງທີ່ຄວນເຮັດ ຂ້າພະເຈົ້າກໍໄດ້ເຮັດສຳເລັດແລ້ວ
ພົບທັງຫຼາຍຂ້າພະເຈົ້າກໍເພີກຖອນໄດ້ແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໖໕] ຂ້າພະເຈົ້າຈັກທ່ຽວໄປນະມັດສະການພຣະສຳມາສຳພຸດທະເຈົ້າ
ແລະພຣະທຳອັນດີ
ຈາກບ້ານໜຶ່ງໄປສູ່ບ້ານໜຶ່ງ ຈາກເມືອງໜຶ່ງໄປສູ່ເມືອງໜຶ່ງ

[໑໖໖] ໃນກັບທີ ໓໐,໐໐໐ ນັບຈາກກັບນີ້ໄປ
ການທີ່ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າຍາຄູ

[໑໖໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໑໖໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍາຄຸທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຍາຄຸທາຍະກະເຖຣາປະທານທີ ໘ ຈົບ**

## ໙. ປັດໂຖທະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັດໂຖທະນະທາຍະກະເຖຣະ

(ພຣະປັດໂຖທະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໐] ເມື່ອກ່ອນ ຂ້າພະເຈົ້າມັກທ່ຽວໄປໃນປ່າ ເປັນຄົນເຮັດວຽກໃນປ່າສະເໝີ
ຖືເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງແລ້ວໄດ້ໄປເຮັດວຽກ

[໑໗໑] ໃນບ່ອນນັ້ນ ຂ້າພະເຈົ້າໄດ້ເຫັນພຣະປັດເຈກພຸດທະເຈົ້າ
ຜູ້ຕັດສະຣູ້ເອງ ບໍ່ຊົງພ່າຍແພ້
ສະເດັດອອກຈາກປ່າເພື່ອບິນທະບາດ
ເມື່ອເຫັນແລ້ວກໍເຮັດຈິດໃຫ້ເຫຼື້ອມໃສ (ຄິດວ່າ)

[໑໗໒] ເຮົາເຮັດວຽກງານໃຫ້ຄົນອື່ນ ບຸນເຮົາກໍບໍ່ມີ
ຄົງມີແຕ່ເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງນີ້
ເຮົາຈະນິມົນພຣະມຸນີນີ້ໃຫ້ສະເຫວີຍ

[໑໗໓] ຂ້າພະເຈົ້າຈຶ່ງຈັບເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ
ຖວາຍພຣະສະຍຳພູ ຝ່າຍພຣະມະຫາມຸນີກໍໄດ້ສະເຫວີຍ
ຂະນະທີ່ຂ້າພະເຈົ້າຈ້ອງເບິ່ງຢູ່ (ນັ້ນເອງ)

[໑໗໔] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດາວະດຶງສາ

[໑໗໕] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໓໔ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໓໓ ຊາດ

[໑໗໖] ໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຂ້າພະເຈົ້າເປັນຜູ້ມີຄວາມສຸກ ມີຍົດ
ນີ້ເປັນຜົນແຫ່ງການຖວາຍເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ

[໑໗໗] ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ຊັບນັບບໍ່ຖ້ວນ ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ

[໑໗໘] ໂພຄະທັງຫຼາຍເກີດຂຶ້ນແກ່ຂ້າພະເຈົ້າເໝືອນກະແສນໍ້າ
ຂ້າພະເຈົ້າບໍ່ສາມາດຈະນັບໄດ້
ນີ້ເປັນຜົນແຫ່ງການຖວາຍເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ

[໑໗໙] ດ້ວຍກຳນັ້ນ ຂ້າພະເຈົ້າໄດ້ຮັບຄຳເຊີນວ່າ ເຊີນຫຍໍ້າກິນສິ່ງນີ້
ເຊີນບໍຣິໂພກສິ່ງນີ້ ເຊີນນອນເທິງບ່ອນນອນນີ້ ດັ່ງນີ້ແລ
ຂ້າພະເຈົ້າຈຶ່ງເປັນຜູ້ມີຄວາມສຸກ
ນີ້ເປັນຜົນແຫ່ງການຖວາຍເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ

[໑໘໐] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າສຸກທີ່ຫຸງຈາກເຂົ້າສາລີແລ່ງໜຶ່ງ

[໑໘໑] ກິເລດທັງຫຼາຍຂ້າພະເຈົ້າກຳເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກຳຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໗໓]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັດໂຖທະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປັດໂຖທະນະທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ມັນຈະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມັນຈະທາຍະກະເຖຣະ

(ພຣະມັນຈະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໔]	ເມື່ອພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ປະກອບດ້ວຍພຣະກະລຸນາ ປະຣິນິບພານແລ້ວ
ເມື່ອປາພິດກຳລັງແຜ່ຫຼາຍໄປ
ເທວະດາແລະມະນຸດພາກັນສັກກາຣະແລ້ວ

[໑໗໕]	ໃນຄັ້ງນັ້ນ ຂ້າພະເຈົ້າເປັນຄົນຈັນທານ
ມີອາຊີບເຮັດຕຽງນອນແລະຕັ່ງ ຂ້າພະເຈົ້າລ້ຽງຊີບ
ແລະລ້ຽງດູບຸດພັນລະຍາດ້ວຍວຽກງານນັ້ນ

[໑໗໖]	ຂ້າພະເຈົ້າເຫຼື້ອມໃສ (ໃນພຣະສາດສະໜາ)
ຈຶ່ງເຮັດຕຽງນອນຢ່າງປະນີດດ້ວຍມືຂອງຕົນ
ແລ້ວໄດ້ເຂົ້າໄປຖວາຍແດ່ພິກຂຸສົງດ້ວຍຕົນເອງ

[໑໗໗]	ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ເມື່ອຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໗໘]	ຂ້າພະເຈົ້າເຖິງເທວະໂລກ
ໄດ້ບັນເທີງຢູ່ໃນໝູ່ເທບຊັ້ນຕາວະຕິງສາ
ບ່ອນນອນເຊິ່ງມີຣາຄາຫຼາຍເກີດຂຶ້ນຕາມຄວາມປາຖະໜາ

[໑໗໙] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໕໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໗໐ ຊາດ

[໑໘໐] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ເປັນຜູ້ມີຄວາມສຸກ ມີຍົດ
ນີ້ເປັນຜົນແຫ່ງການຖວາຍຕຽງນອນ

[໑໘໑] ເມື່ອຂ້າພະເຈົ້າຈຸຕິຈາກເທວະໂລກມາຍັງພົບມະນຸດແລ້ວ
ບ່ອນນອນຢ່າງດີ ອັນເໝາະສຳລັບຜູ້ສູງສັກເກີດແກ່ຂ້າພະເຈົ້າ

[໑໘໒] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນວັນນີ້ບ່ອນນອນກໍໄດ້ຜາກົດຂຶ້ນໃນເວລາຈະນອນຄືກັນ

[໑໘໓] ໃນກັບທີ ໘໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຕຽງ

[໑໘໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມັນຈະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມັນຈະທາຍະກະເຖຣາປະທານທີ ໑໐ ຈົບ**

**ພັດທາລິວັກທີ ໔໘ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ພັດທາລິເຖຣາປະທານ
໒. ຕິນະສູລະກະສາທະນິຍະເຖຣາປະທານ
໓. ນາຄະປັນລະວະກະເຖຣາປະທານ
໗. ອຸດສັງຄະປຸບພິຍະເຖຣາປະທານ
໕. ປັດໂຖທະນະທາຍະກະເຖຣາປະທານ
໖. ເອກະສັດຕິຍະເຖຣາປະທານ
໗. ມຸທຸມັງສະທາຍະກະເຖຣາປະທານ
໘. ເອກະທີປີຍະເຖຣາປະທານ
໙. ຍາຄຸທາຍະກະເຖຣາປະທານ
໑໐. ມັນຈະທາຍະກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໔໐໑ ຄາຖາ**

# ໔໓. ສະກິງສຳມັດຊະກະວັກ

## ໝວດວ່າດ້ວຍພຣະສະກິງສຳມັດຊະກະເປັນຕົ້ນ

### ໑. ສະກິງສຳມັດຊະກະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະສະກິງສຳມັດຊະກະເຖຣະ

(ພຣະສະກິງສຳມັດຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນຕົ້ນໄມ້ອັນເລີດຊື່ວ່າປາຕະລິ (ແຄຝອຍ)
ເຊິ່ງເປັນຕົ້ນໄມ້ເປັນສະຖານທີ່ຕັດສະຣູ້ອັນສູງສຸດ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ
ແລ້ວເຮັດໃຈໃຫ້ເຫຼື້ອມໃສໃນຕົ້ນໄມ້ນັ້ນ

[໒] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຖືເອົາໄມ້ກວາດມາປັດກວາດບໍລິເວນທີ່ຕັດສະຣູ້
ເມື່ອແລ້ວໄດ້ໄຫວ້ຕົ້ນປາຕະລິອັນເປັນສະຖານທີ່ຕັດສະຣູ້ນັ້ນ

[໓] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນຕົ້ນປາຕະລິນັ້ນ
ປະນົມມືເໜືອຫົວ
ນະມັດສະການຕົ້ນໂພນັ້ນແລ້ວກັບໄປສູ່ຕູບ

[໔] ຂ້າພະເຈົ້າຍ່າງນຶກເຖິງຕົ້ນໄມ້ເປັນສະຖານທີ່ຕັດສະຣູ້
ອັນສູງສຸດໄປຕາມທົນທາງສັນຈອນ
ງູເຫຼືອມຕົວດຸຮ້າຍມີກຳລັງຫຼາຍຮັດຂ້າພະເຈົ້າ

[໕] ກຳທີ່ຂ້າພະເຈົ້າເຮັດໃນເວລາໃກ້ຕາຍ
ໄດ້ເຮັດໃຫ້ຂ້າພະເຈົ້າຍິນດີດ້ວຍຜົນ (ຂອງກຳນັ້ນ)
ງູເຫຼືອມກືນກິນຮ່າງຂ້າພະເຈົ້າ
ຂ້າພະເຈົ້າ (ຕາຍໄປແລ້ວ) ຮື່ນຣົມຢູ່ໃນເທວະໂລກ

[໖] ຈິດຂອງຂ້າພະເຈົ້າບໍ່ຂຸ່ນມົວ ບໍລິສຸດຜ່ອງໃສໃນການທຸກເມື່ອ
ຂ້າພະເຈົ້າບໍ່ຮູ້ຈັກລູກສອນຄືຄວາມເສົ້າໂສກ
ທີ່ເປັນເຫດເຮັດຈິດຂອງຂ້າພະເຈົ້າໃຫ້ຮ້ອນຮົນເລີຍ

[໗] ຂ້າພະເຈົ້າບໍ່ມີໂຣກຂີ້ທູດ ຝີ ໂຣກກາກ
ໂຣກລົມບ້າໝູ ຄຸດທະລາດ ທິດເປື່ອຍ ແລະທິດດ້ານ
ນີ້ເປັນຜົນແຫ່ງການປັດກວາດ

[໘] ຄວາມເສົ້າໂສກ ຄວາມຮ້ອນຮົນບໍ່ມີໃນຫົວໃຈຂອງຂ້າພະເຈົ້າ
ຈິດຂອງຂ້າພະເຈົ້າທ່ຽງຕົງ ບໍ່ວອກແວກ
ນີ້ເປັນຜົນແຫ່ງການປັດກວາດ

[໙] ຂ້າພະເຈົ້າເຂົ້າເຖິງສະມາທິ ໃຈກໍບໍລິສຸດ
ສະມາທິທີ່ຂ້າພະເຈົ້າປາຖະໜາຍ່ອມສຳເລັດແກ່ຂ້າພະເຈົ້າ

[໑໐] ຂ້າພະເຈົ້າບໍ່ກຳໜັດໃນອາລົມເປັນທີ່ຕັ້ງແຫ່ງຄວາມກຳໜັດ
ບໍ່ຂັດເຄືອງໃນອາລົມເປັນທີ່ຕັ້ງແຫ່ງຄວາມຂັດເຄືອງ
ແລະບໍ່ລຸ້ມຫຼົງໃນອາລົມເປັນທີ່ຕັ້ງແຫ່ງຄວາມລຸ້ມຫຼົງ
ນີ້ເປັນຜົນແຫ່ງການປັດກວາດ

[໑໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປັດກວາດ (ບໍລິເວນທີ່ຕັດສະຣູ້)

[໑໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະກິງສຳມັດຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສະກິງສຳມັດຊະກະເຖຣາປະທານທີ ໑ ຈົບ**

# ๘. ເອກະທຸດສະທາຍະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະທຸດສະທາຍະກະເຖຣະ

(ພຣະເອກະທຸດສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ຂ້າພະເຈົ້າເປັນຄົນຫາບຫຍ້າຂາຍຢູ່ໃນນະຄອນທັງສະວະດີ
ລ້ຽງຊີບດ້ວຍການຫາບຫຍ້າ ລ້ຽງດູບຸດພັນລະຍາດ້ວຍວຽກງານນັ້ນ

[໑໖] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ
ຜູ້ຊົງເປັນຜູ້ນຳສັດໂລກ ກຳຈັດຄວາມມືດມົນໃຫ້ພິນາດໄປ
ສະເດັດອຸບັດຂຶ້ນແລ້ວ

[໑໗] ໃນຄັ້ງນັ້ນ ຂ້າພະເຈົ້ານັ່ງຢູ່ໃນເຮືອນຂອງຕົນ
ຄິດແນວນີ້ວ່າ ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວ
ໄທຍະທຳກໍບໍ່ມີ

[໑໘] ຂ້າພະເຈົ້າມີແຕ່ຜ້າສາດົກຜືນດຽວນີ້
ບໍ່ມີໃຜໃຫ້ຂ້າພະເຈົ້າ ການຕົກນະຣົກເປັນທຸກ
ຂ້າພະເຈົ້າຈັກປູກທັກຂິນາ

[໑໙] ເມື່ອຄິດເຊັ່ນນີ້ແລ້ວ ຂ້າພະເຈົ້າຈຶ່ງເຮັດຈິດຂອງຕົນໃຫ້ເຫຼື້ອມໃສ
ໄດ້ຖືຜ້າຜືນດຽວໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໒໐] ເມື່ອຖວາຍແລ້ວ ໄດ້ປະກາດຢ່າງກຶກກ້ອງວ່າ
ຂ້າແຕ່ພຣະມະຫາມຸນີຜູ້ແກ່ກ້າ
ຖ້າພຣະອົງເປັນພຣະພຸດທະເຈົ້າ
ຂໍໄດ້ຊົງໂພດຊ່ອຍຂ້າພຣະອົງໃຫ້ຂ້າມພົ້ນ (ຈາກນະຣົກ) ດ້ວຍເທີ້ນ

[໒໑] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ເມື່ອຈະຊົງປະກາດທານຂອງຂ້າພະເຈົ້າ
ໄດ້ຊົງກະທຳອະນຸໂມທະນາແກ່ຂ້າພະເຈົ້າວ່າ

[໔໔] ດ້ວຍການຖວາຍຜ້າຜືນດຽວນີ້
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ບຸຣຸດນີ້ຈະບໍ່ຕົກນະຣົກເລີຍຕະຫຼອດ ໑໐໐,໐໐໐ ກັບ

[໔໓] ເຂົາຈັກໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໓໖ ຊາດ
ຈັກໄດ້ເປັນພຣະເຈົ້າຈັກກະພັດ ໓໓ ຊາດ

[໔໔] ແລະຈັກໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ເມື່ອທ່ານວຽນວ່າຍຕາຍເກີດຢູ່ໃນພົບ
ຄືເທວະໂລກຫຼືມະນຸດໂລກ

[໔໕] ຈັກເປັນຜູ້ມີຮູບງາມ ສົມບູນດ້ວຍຄຸນນະທຳ
ມີຮ່າງກາຍສົມສ່ວນ ຈັກໄດ້ຜ້ານັບບໍ່ໄດ້ ປະມານບໍ່ໄດ້
ຕາມທີ່ປາຖະໜາ

[໔໖] ເມື່ອພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນນັກປາດຕັດດັ່ງນີ້ແລ້ວ
ໄດ້ສະເດັດເຫາະຂຶ້ນສູ່ທ້ອງຟ້າ
ເໝືອນພະຍາຫົງບິນເທິງອາກາດ

[໔໗] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄື ຈະເກີດເປັນເທວະດາຫຼືມະນຸດກໍຕາມ
ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າຜືນດຽວ

[໔໘] ຜ້າເກີດຂຶ້ນແກ່ຂ້າພະເຈົ້າທຸກບາດກ້າວ
ຂ້າງລຸ່ມຂ້າພະເຈົ້າກໍຢືນຢູ່ເທິງຜ້າ
ຂ້າງເທິງກໍມີຜ້າເປັນເຄື່ອງມຸງບັງ

[໔໙] ໃນວັນນີ້ ຈັກກະວານພ້ອມທັງປ່າ ພູເຂົາ
ເມື່ອຂ້າພະເຈົ້າປາຖະໜາກໍຈະເພິ່ງຄຸມດ້ວຍຜ້າໄດ້

[໓໐] ຍ້ອນຖວາຍຜ້າຜືນດຽວເທົ່ານັ້ນເອງ
ຂ້າພະເຈົ້າເມື່ອຍັງວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ເປັນຜູ້ມີຜິວພັນເໝືອນຄຳ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່

[໑໑] ຂ້າພະເຈົ້າໄດ້ເຖິງຄວາມເປັນພິກຂຸ
ຍ້ອນຜົນແຫ່ງການຖວາຍຜ້າຜືນດຽວ
ເຖິງຊາດນີ້ຈະເປັນຊາດສຸດທ້າຍ
ຜ້າກໍຍັງໃຫ້ຜົນແກ່ຂ້າພະເຈົ້າຢູ່ໃນຂະນະນີ້

[໑໘] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າຜືນດຽວ

[໑໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໑ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະທຸດສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະທຸດສະທາຍະກະເຖຣາປະທານທີ ๘ ຈົບ**

## ໑. ເອກາສະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກາສະນະທາຍະກະເຖຣະ

(ພຣະເອກາສະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ ກະສິກະ
ຂ້າພະເຈົ້າໄດ້ສ້າງອາສົມແລະປັນນະສາລາໄວ້ຢ່າງສວຍງາມ

[໓໗] ຂ້າພະເຈົ້າມີນາມວ່າ ນາຣະທະ
ແຕ່ຄົນທັງຫຼາຍຮຽກວ່າ ກັດສະປະ
ໃນຄັ້ງນັ້ນ ຂ້າພະເຈົ້າສະແຫວງຫາທາງບໍລິສຸດອາໄສຢູ່ທີ່ພູເຂົາກະສິກະ

[໓໘] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງປະສົງວິເວກ ຈຶ່ງສະເດັດມາທາງອາກາດ

[໓໙] ຂ້າພະເຈົ້າເຫັນພຣະຣັດສະໝີຂອງພຣະອົງ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເຊິ່ງກຳລັງສະເດັດມາເໜືອປາຍໄມ້
ຈຶ່ງຈັດແຈງຕຽງໄມ້ແລະປູໜັງສັດໄວ້

[໔໐] ເມື່ອປູອາສະນະສຳເລັດແລ້ວປະນົມມືເໜືອຫົວ
ປະກາດເຖິງຄວາມໂສມະນັດແລ້ວໄດ້ຂາບທູນແນວນີ້ວ່າ

[໔໑] ຂ້າແຕ່ພຣະອົງຜູ້ເປັນນັກປາດ ຜູ້ຊົງເປັນຜູ້ນຳ
ຂໍພຣະອົງຜູ້ເປັນດັ່ງສັນລະຍາແພດຜູ້ຖອນລູກສອນ
ຜູ້ບຳບັດຄວາມເດືອດຮ້ອນ
ໄດ້ໂຜດປະທານການບຳລຸງແກ່ຂ້າພຣະອົງ
ຜູ້ຖືກຄວາມກຳໜັດຄອບງຳດ້ວຍເທີ້ນ

[໔໒] ຂ້າແຕ່ພຣະມຸນີ ຊົນເຫຼົ່າໃດມີຄວາມຕ້ອງການບຸນ
ພົບເຫັນພຣະອົງຜູ້ເປັນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຊົນເຫຼົ່ານັ້ນ ຍ່ອມເຖິງຄວາມສຳເລັດປະໂຫຍດທີ່ຍັ່ງຍືນ
(ແລະ) ເຂົາເຫຼົ່ານັ້ນຈະເພິ່ງເປັນຜູ້ບໍ່ແກ່
[໔໓] ຂ້າພຣະອົງບໍ່ມີໄທຍະທຳຖວາຍພຣະອົງເລີຍ
ຍ້ອນຂ້າພຣະອົງບໍຣິໂພກໝາກໄມ້ທີ່ຫຼົ່ນເອງ
ຂ້າພຣະອົງມີແຕ່ອາສະນະນີ້
ໂຜດປະທັບນັ່ງເທິງຕຽງໄມ້ເທີ້ນ
[໔໔] ພຣະຜູ້ມີພຣະພາກເຈົ້າ ຜູ້ບໍ່ມີຄວາມສະດຸ້ງ ຜູ້ເປັນເໜືອນຣາດຊະສີ
ໄດ້ປະທັບນັ່ງເທິງຕຽງໄມ້ແລ້ວ ບຶດໜຶ່ງຈຶ່ງໄດ້ຕັດຄຳນີ້ວ່າ

[໔໕] ທ່ານຈົ່ງເບົາໃຈເທີ້ນ ຢ່າໄດ້ຢ້ານເລີຍ
ທ່ານໄດ້ແກ້ວມະນີອັນປະເສີດແລ້ວ

ອາສະນະທີ່ທ່ານປາຖະໜາທັງໝົດ
ຈັກສຳເລັດບໍລິບູນແກ່ທ່ານ

[໔໖] ບຸນທີ່ບຸກຄົນພໍ່າເພັງໄວ້ດີແລ້ວໃນເນື້ອນາບຸນອັນປະເສີດ
ເປັນບຸນບໍ່ໜ້ອຍ
ຜູ້ທີ່ຕັ້ງຈິດໄວ້ດີແລ້ວສາມາດຈະຖອນຕົນເອງຂຶ້ນໄດ້

[໔໗] ດ້ວຍການຖວາຍອາສະນະນີ້ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ເຂົາຈະບໍ່ຕົກນະຮົກຕະຫຼອດ ໑໐໐,໐໐໐ ກັບ

[໔໘] ເຂົາຈັກເປັນຈອມເທບຄອງເທວະສົມບັດຕະຫຼອດ ໕໐ ຊາດ
ຈັກເປັນພຣະເຈົ້າຈັກກະພັດ ໗໐ ຊາດ

[໔໙] ແລະຈັກໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຈັກມີຄວາມສຸກໃນທີ່ທຸກສະຖານວຽນວ່າຍຕາຍເກີດຢູ່ໃນສັງສາຣະວັດ

[໕໐] ເມື່ອພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເປັນນັກປາດຕັດດັ່ງນີ້ແລ້ວ
ໄດ້ສະເດັດເຫາະຂຶ້ນສູ່ທ້ອງຟ້າ
ເໝືອນພະຍາຫົງໃນອາກາດ

[໕໑] ຍານຄືຊ້າງ ຍານຄືມ້າ
ວໍແລະຄານຫາມ ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍອາສະນະເທື່ອດຽວ

[໕໒] ເມື່ອຂ້າພະເຈົ້າເຂົ້າປ່າແລ້ວຕ້ອງການອາສະນະ
ບັນລັງດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າກໍຜາກົດຂຶ້ນ
[໕໓] ເມື່ອຢູ່ທ່າມກາງນ້ຳຕ້ອງການບ່ອນນັ່ງ
ບັນລັງດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າກໍຜາກົດຂຶ້ນ
[໕໔] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ບັນລັງ ໑໐໐,໐໐໐ ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ

[໕໕] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບທັງ ໒
ຄື (໑) ພົບເທວະດາ (໒) ພົບມະນຸດ

ເກີດໃນຕະກູນພຽງ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ

[໕໖] ຂ້າພະເຈົ້າຖວາຍອາສະນະພຽງເທື່ອດຽວໃນເນື້ອນາບຸນອັນປະເສີດ
ຮູ້ທົ່ວເຖິງບັນລັງຄືທຳແລ້ວ ຈຶ່ງຢູ່ຢ່າງຜູ້ບໍ່ມີອາສະວະ

[໕໗] ໃນ ໑໐໐,໐໐໐ ກັບ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍອາສະນະເທື່ອດຽວ
[໕໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໕໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
[໖໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກາສະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກາສະນະທາຍະກະເຖຣາປະທານທີ ໓ ຈົບ**

## ໔. ສັດຕະກະທຳພະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດຕະກະທຳພະປຸບຜິຍະເຖຣະ

(ພຣະສັດຕະກະທຳພະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໖໑] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ກະທຳພະ
ພຣະປັດເຈກພຸດທະເຈົ້າ ກຸ ອົງ ອາໄສຢູ່ທີ່ຂ້າງພູເຂົານັ້ນ

[໖໔]   ຂ້າພະເຈົ້າເຫັນດອກກະທຸ່ມ
ຈຶ່ງເກັບມາ ໗ ດອກ ແລ້ວປະນົມມື
ໂຮຍບູຊາດ້ວຍຈິດທີ່ປຽ່ມດ້ວຍກຸສົນ

[໖໓]   ດ້ວຍກໍາທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໖໔]   ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກໍາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໕]   ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໖]   ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໖໗]   ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະສັດຕະກະທໍາພະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສັດຕະກະທໍາພະປຸບພິຍະເຖຣາປະທານທີ ໔ ຈົບ**

# ៥. ໂກຣັນທະປຸບຜິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂກຣັນທະປຸບຜິຍະເຖຣະ

(ພຣະໂກຣັນທະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໘] ເມື່ອຊາດປາງກ່ອນ ຂ້າພະເຈົ້າກັບບິດາ ແລະປູ່ເປັນຄົນເຮັດວຽກໃນປ່າ
ລ້ຽງຊີບດ້ວຍການຂ້າສັດ ກຸສົນກຳຂອງເຮົາບໍ່ມີ

[໓໙] ໃກ້ບ່ອນຢູ່ຂອງຂ້າພະເຈົ້າ ພຣະສາດສະດາພຣະນາມວ່າ ຕິດສະ
ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກຜູ້ມີພຣະຈັກຂຸ
ໄດ້ຊົງສະແດງຮອຍພຣະບາດໄວ້ ໓ ຮອຍ
ເພື່ອອະນຸເຄາະ (ຂ້າພະເຈົ້າ)

[໔໐] ຂ້າພະເຈົ້າເຫັນຮອຍພຣະບາດຂອງພຣະສາດສະດາພຣະນາມວ່າ ຕິດສະ
ທີ່ພຣະອົງຊົງປະທັບໄວ້
ຂ້າພະເຈົ້າເປັນຜູ້ມີຈິດຮ່າເຣີງບັນເທີງໃຈ
ໄດ້ເຮັດຈິດໃຫ້ເຫຼື້ອມໃສໃນຮອຍພຣະບາດນັ້ນ

[໔໑] ຂ້າພະເຈົ້າເຫັນຕົ້ນອັງກາບເຊິ່ງງອກເລືອໄປຕາມພື້ນດິນ
ມີດອກບານສະພັ່ງ ຈຶ່ງເດັດມາພ້ອມທັງຍອດ
ໄດ້ບູຊາຮອຍພຣະບາດອັນປະເສີດທີ່ສຸດ

[໔໒] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດາວະດຶງສາ

[໔໓] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
(ໃນກຳເນີດນັ້ນ ໆ)ຂ້າພະເຈົ້າມີຜິວພັນດັ່ງດອກອັງຂາບ
ມີຣັດສະໝີຊ່ານອອກຈາກກາຍ

[໔໔] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຮອຍພຣະບາດ

[໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂກຣັນທະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂກຣັນທະປຸບພິຍະເຖຣາປະທານທີ ໕ ຈົບ**

## ໖. ຄະຕະມັນທະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄະຕະມັນທະທາຍະກະເຖຣະ

(ພຣະຄະຕະມັນທະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ພຣະຜູ້ມີພຣະພາກເຈົ້າຜູ້ຊົງດຳຣິດີແລ້ວ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດເຂົ້າໄປສູ່ປ່າໃຫຍ່ ຊົງພຣະປະຊວນດ້ວຍໂຣກລົມ

[໑໘] ຂ້າພະເຈົ້າໄດ້ເຫັນແລ້ວຈຶ່ງເຮັດຈິດໃຫ້ເຫຼື້ອມໃສ
ນຳຫົວນ້ຳມັນເນີຍເຂົ້າໄປຖວາຍ
ຍ້ອນບຸນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ແລະໄດ້ສັ່ງສົມໄວ້ແລ້ວ
ແມ່ນ້ຳຄົງຄາພາຄີຣະຖີນີ້

[໗໐] ແລະມະຫາສະມຸດທັງ ໔ ບັນດານເນີຍໃສໃຫ້ສຳເລັດແກ່ຂ້າພະເຈົ້າ
ອັນໜຶ່ງ ພື້ນປະຖະພີທີ່ກວ້າງໃຫຍ່ ປະມານບໍ່ໄດ້ ກຳນົດນັບບໍ່ໄດ້ນີ້

[໗໑] ດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງກາຍເປັນນ້ຳເຜິ້ງແລະນ້ຳຕານກ້ອນ
ຕົ້ນໄມ້ທີ່ງອກຂຶ້ນເທິງແຜ່ນດິນໃນທິດທັງ ໔

[໗໒] ດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງກາຍເປັນຕົ້ນກັນລະປະພຶກໄປ
ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໕໐ ຊາດ

[໗໓] ໄດ້ເປັນພຣະເຈົ້າຈັກກະພັດ ໕໑ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໗໔] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຫົວນ້ຳມັນເນີຍ

[໗໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄະຕະມັນທະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄະຕະມັນທະທາຍະກະເຖຣາປະທານທີ ໖ ຈົບ**

# ໆ. ເອກະທຳມັດສະວະນີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກະທຳມັດສະວະນີຍະເຖຣະ

(ພຣະເອກະທຳມັດສະວະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໗] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊຶ່ງເຖິງຝັ່ງຄວາມສຳເລັດແຫ່ງທຳທັງປວງ
ປະກາດສັດຈະ ໔ ຊຶ່ງຊ່ອຍຊົນຈຳນວນຫຼາຍໃຫ້ຂ້າມພົ້ນດີແລ້ວ

[໗໘] ສະໄໝນັ້ນ ຂ້າພະເຈົ້າເປັນຊະດີນ ມີຕະບະແກ່ກ້າ
ສະບັດຜ້າເປືອກໄມ້ ເຫາະໄປໃນທ້ອງຟ້າ ໃນຄັ້ງນັ້ນ

[໘໐] ຂ້າພະເຈົ້າບໍ່ສາມາດຈະເຫາະຜ່ານໄປເໜືອພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດໄດ້ ຂ້າພະເຈົ້າເຫາະໄປບໍ່ໄດ້
ເໝືອນນົກເຂົ້າໄປໃກ້ພູເຂົາແລ້ວບິນຜ່ານໄປບໍ່ໄດ້

[໘໑] ຂ້າພະເຈົ້າພົ່ນລົມກາຍໃຈອອກເປັນໄອນ້ຳລອຍຢູ່ໃນທ້ອງຟ້າດ້ວຍຄິດວ່າ
ເຫດທີ່ເຮັດໃຫ້ອິລິຍາບົດຂອງເຮົາຂັດຂ້ອງເຊັ່ນນີ້ ບໍ່ເຄີຍມີ

[໘໒] ເອົາລະ ເຮົາຈັກຄົ້ນຫາສາເຫດນັ້ນ
ເພື່ອຈັກໄດ້ຜົນ ຈຶ່ງລົງຈາກອາກາດ
ກໍໄດ້ຟັງພຣະສຸຣະສຽງຂອງພຣະສາດສະດາ

[໘໓] ເມື່ອພຣະສາດສະດາຕັດເຖິງສັງຂານບໍ່ທ່ຽງ
ດ້ວຍພຣະສຸຣະສຽງທີ່ໜ້າຍິນດີ ໜ້າຟັງ ມ່ວນ
ໃນຂະນະນັ້ນຂ້າພະເຈົ້າໄດ້ຮຽນອະນິດຈະລັກສະນະນັ້ນເອງ
ເມື່ອຮຽນອະນິດຈະລັກສະນະໄດ້ແລ້ວ ກໍໄດ້ໄປສູ່ອາສົມຂອງຕົນ

[໘໔] ຂ້າພະເຈົ້າຢູ່ໃນອາສົມນັ້ນ ຕາບເທົ່າສິ້ນອາຍຸ ຈຶ່ງໄດ້ຕາຍໄປ
ເມື່ອຈຸຕິຈິດເຊິ່ງເປັນຈິດດວງສຸດທ້າຍກຳລັງຈະເປັນໄປ
ຂ້າພະເຈົ້າກໍລະລຶກເຖິງການຟັງພຣະສັດທຳໄດ້

[໘໕] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙໖] ຮື່ນຮົມຢູ່ໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ໄດ້ຄອງເທວະສົມບັດຕະຫຼອດ ໕໑ ຊາດ

[໙໗] ໄດ້ເປັນພຣະເຈົ້າຈັກກະພັດ ໓໑ ຊາດ
ໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໙໘] ຂ້າພະເຈົ້າສະເຫວີຍບຸນຂອງຕົນ
ມີຄວາມສຸກໃນພົບນ້ອຍພົບໃຫຍ່
ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ກໍຍັງຣະລຶກເຖິງສັນຍານັ້ນໄດ້
ຂ້າພະເຈົ້າບໍ່ໄດ້ແທງຕະຫຼອດບົດອັນບໍ່ຈຸຕິ
ຄືພຣະນິບພານດ້ວຍທຳໃດ ໆ ເລີຍ

[໙໙] ໄດ້ມີສະມະນະຜູ້ອົບຮົມອິນຊີມານັ່ງທີ່ເຮືອນບິດາ
ທ່ານໄດ້ສະແດງທຳກະຖາ
ແລະຍົກອະນິດຈະລັກສະນະໃນທຳກະຖານັ້ນຂຶ້ນວ່າ

[໑໐໐] ສັງຂານທັງຫຼາຍບໍ່ທ່ຽງນໍ
ມີຄວາມເກີດຂຶ້ນແລະຄວາມເສື່ອມໄປເປັນທຳມະດາ
ເກີດຂຶ້ນແລ້ວຍ່ອມດັບໄປ
ພາວະທີ່ສັງຂານເຫຼົ່ານັ້ນສະງົບຣະງັບເປັນຄວາມສຸກ

[໑໐໑] ຂະນະທີ່ສະດັບຄາຖານີ້ ຂ້າພະເຈົ້າໄດ້ຣະລຶກເຖິງສັນຍາທຸກຢ່າງ
ນັ່ງໃນອາສະນະດຽວ ກໍໄດ້ບັນລຸອະຣະຫັນຕະຜົນແລ້ວ

[໑໐໒] ຂ້າພະເຈົ້າໄດ້ບັນລຸອະຣະຫັນຕະຜົນແຕ່ອາຍຸໄດ້ ໗ ປີ
ພຣະພຸດທະເຈົ້າຈຶ່ງໃຫ້ຂ້າພະເຈົ້າອຸປະສົມບົດ
ນີ້ເປັນຜົນແຫ່ງການຟັງທຳ

[໑໐໓] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຟັງທຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຟັງທຳ

[໑໐໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເອກະທຳມັດສະວະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະທຳມັດສະວະນິຍະເຖຣາປະທານທີ ໗ ຈົບ**

## ໘. ສຸຈິນຕິຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸຈິນຕິຕະເຖຣະ

(ພຣະສຸຈິນຕິຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໗] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຊາວນາຢູ່ໃນນະຄອນຫົງສະວະດີ
ລ້ຽງຊີບດ້ວຍກະສິກຳ ລ້ຽງດູບຸດພັນລະຍາດ້ວຍກະສິກຳນັ້ນ

[໑໐໘] ໃນຄັ້ງນັ້ນ ນາຂອງຂ້າພະເຈົ້າສົມບູນດີ
ເຂົ້າຂອງຂ້າພະເຈົ້າອອກຮວງແລ້ວ
ເມື່ອເຖິງເວລາເຂົ້າສຸກ ບັດນັ້ນ ຂ້າພະເຈົ້າຄິດແນວນີ້ວ່າ

[໑໐໙] ການທີ່ເຮົາຮູ້ຄຸນໂທດຢູ່ ບໍ່ໄດ້ຖວາຍສິ່ງ
ບໍຣິໂພກສ່ວນເລີດດ້ວຍຕົນເອງ ເປັນການບໍ່ເໝາະ ບໍ່ສົມຄວນ

[໑໑໐] ພຣະສຳມາສຳພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນໃນໂລກ
ຜູ້ຊົງພຣະລັກສະນະອັນປະເສີດ ໓໒ ປະການ
ແລະພຣະສົງຜູ້ຖືກຳເນີດ ຈາກພຣະພຸດທະເຈົ້າພຣະອົງນັ້ນ
ເປັນເນື້ອນາບຸນອັນປະເສີດ

[໑໑໑] ເຮົາຈັກຖວາຍເຂົ້າໃໝ່ເປັນທານແດ່ ພຣະພຸດທະເຈົ້າ
ແລະພຣະສົງເປັນປະຖົມມະເລີກ ເມື່ອຄິດເຊັ່ນນີ້ແລ້ວ
ຂ້າພະເຈົ້າເປັນຜູ້ມີໃຈຮ່າເຣີງ ຍິນດີດ້ວຍປີຕິ

[໑໑໒] ຈຶ່ງນຳເຂົ້າເປືອກມາຈາກນາ ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ເມື່ອເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ຜູ້ຊົງອົງອາດກວ່າ ນໍຣະຊົນ
ຂາບພຣະຍຸຄົນບາດພຣະສາດສະດາແລ້ວ ຂາບທູນຄຳນີ້ວ່າ

[໑໑໓] ຂ້າແຕ່ພຣະມຸນີ ເຂົ້າໃໝ່ສົມບູນແລ້ວ
ທັງພຣະອົງກໍຍັງປະທັບຢູ່ໃນບ່ອນນີ້
ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຂໍພຣະອົງຈົ່ງຊົງພຣະກະລຸນາຮັບເທີ້ນ

[໑໑໔] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ ໄດ້ຕັດຄຳນີ້ວ່າ

[໑໑໕] ບຸຣຸດບຸກຄົນຜູ້ກຳລັງປະຕິບັດ ໔ ຈຳພວກ
ແລະຜູ້ຕັ້ງຢູ່ໃນຜົນ ໔ ຈຳພວກນີ້
ຄືສົງ ເປັນຜູ້ຊື່ຕົງ ມີປັນຍາ
ມີສີນ ແລະມີສະມາທິ

[໑໑໖] ມະນຸດທັງຫຼາຍຜູ້ຫວັງບຸນໃຫ້ທານຢູ່
ທຳບຸນຜາຣົບເທດແຫ່ງການວຽນວ່າຍຕາຍເກີດ
ຖວາຍທານແກ່ພຣະສົງໃດ ຈຶ່ງມີຜົນຫຼາຍ
ແລະເຂົ້າຂອງທ່ານກໍຄວນຖວາຍພຣະສົງນັ້ນຈຶ່ງຈະມີຜົນຫຼາຍເຊັ່ນນັ້ນ

[໑໑໗] ທ່ານຈົ່ງນຳພິກຂຸທັງຫຼາຍ ຜູ້ໄດ້ຮັບມອບໝາຍຈາກພຣະສົງ
ໄປສູ່ເຮືອນຂອງຕົນແລ້ວ
ຖວາຍສິ່ງຂອງທີ່ມີຢູ່ໃນເຮືອນ
ເຊິ່ງທ່ານກະກຽມໄວ້ແດ່ພິກຂຸສົງເທີ້ນ

[໑໑໘] ຂ້າພະເຈົ້າໄດ້ນຳພິກຂຸທັງຫຼາຍ ຜູ້ໄດ້ຮັບມອບໝາຍຈາກພຣະສົງ

ໄປສູ່ເຮືອນຂອງຕົນແລ້ວ
ຖວາຍສິ່ງຂອງທີ່ຂ້າພະເຈົ້າກະກຽມໄວ້ໃນເຮືອນແດ່ພິກຂຸສົງ

[໑໑໙] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໐] ໃນສະຫວັນຊັ້ນຕາວະຕິງສານັ້ນ
ມີວິມານຄຳຮຸ່ງເຮືອງ ສູງ ໖໐ ໂຍດ ກວ້າງ ໓໐ ໂຍດ
ອັນກຳສ້າງສັນໄວ້ຢ່າງງົດງາມເພື່ອຂ້າພະເຈົ້າ

**ພານະວານທີ ໑໙ ຈົບ**

[໑໘໑] ວິມານຂອງຂ້າພະເຈົ້າໜາແໜ້ນໄປດ້ວຍໝູ່ເທບນາຣີ
ຂ້າພະເຈົ້າກິນ ດື່ມ ແລະຢູ່ໃນວິມານນັ້ນໃນສະຫວັນຊັ້ນຕາວະຕິງສາ

[໑໘໒] ຂ້າພະເຈົ້າໄດ້ຄອງເທວະສົມບັດຕະຫຼອດ ໓,໐໐໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໘໓] ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ຊັບນັບບໍ່ຖ້ວນ ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໘໔] ຍານຄືຊ້າງ ຍານຄືມ້າ ວໍ ແລະຄານຫາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໘໕] ຜ້າໃໝ່ ໝາກໄມ້ໃໝ່ ໂພຊະນະທີ່ມີຣົດເລີດໃໝ່ ໆ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໘໖] ຜ້າໄໝ ຜ້າກຳພົນ ຜ້າເປືອກໄມ້ ແລະຜ້າຝ້າຍ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໘໗] ໝູ່ທາດຍິງ ທາດຊາຍ ແລະເຫຼົ່ານາຣີ
ທີ່ປະດັບຕົກແຕ່ງຢ່າງສວຍງາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໘໘] ຄວາມໜາວ ຄວາມຮ້ອນບໍ່ບຽດບຽນຂ້າພະເຈົ້າ
ຂ້າພະເຈົ້າບໍ່ມີຄວາມຮ້ອນຮົນ
ອັນໜຶ່ງ ທຸກທາງໃຈກໍບໍ່ມີໃນຫົວໃຈຂອງຂ້າພະເຈົ້າ

[໑໘໙] (ຄຳເຊື້ອເຊີນເຊັ່ນນີ້ວ່າ) ເຊີນຫຍ້ຳກິນສິ່ງນີ້ ເຊີນບໍຣິໂພກສິ່ງນີ້
ເຊີນນອນເທິງບ່ອນນອນນີ້ ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໙໐] ບັດນີ້ ພົບນີ້ເປັນພົບສຸດທ້າຍ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນວັນນີ້ໄທຍະທຳຂອງຂ້າພະເຈົ້າ
ກໍເປັນຜົນເຮັດໃຫ້ຂ້າພະເຈົ້າຍິນດີຢູ່ທຸກເມື່ອ

[໑໙໑] ຂ້າພະເຈົ້າໄດ້ຖວາຍເຂົ້າໃໝ່ໃນໝູ່ພຣະສົງ
ຜູ້ເປັນຄະນະທີ່ປະເສີດສູງສຸດ
ຍ່ອມໄດ້ຮັບອານິສົງ
ເຊິ່ງສົມຄວນແກ່ກຳຂອງຂ້າພະເຈົ້າ ໘ ປະການ

[໑໙໒] ຄື (໑) ຂ້າພະເຈົ້າເປັນຜູ້ມີຜິວພັນຜຸດຜ່ອງ
(໒) ມີຍົດ (໓) ມີໂພຄະຫຼາຍ ເຊິ່ງຜູ້ໃດ ກໍລັກໄປບໍ່ໄດ້
(໔) ມີໝູ່ກອງຫຼາຍ (໕) ມີບໍລິວານບໍ່ແຕກແຍກກັນທຸກເມື່ອ

[໑໙໓] (໖) ສັດທີ່ອາໄສແຜ່ນດິນທຸກຈຳພວກລ້ອນຢຳເກງຂ້າພະເຈົ້າ
(໗) ຂ້າພະເຈົ້າໄດ້ໄທຍະທຳກ່ອນຜູ້ອື່ນ

[໑໙໔] (໘) ຈະເປັນໃນທ່າມກາງໝູ່ພິກຂຸ
ຫຼືສະເພາະພຣະພັກພຣະພຸດທະເຈົ້າຜູ້ປະເສີດທີ່ສຸດກໍຕາມ
ພວກທາຍົກຈະແນມຜ່ານທ່ານເຫຼົ່ານັ້ນໄປທັງໝົດ
ມຸ້ງມາຖວາຍຂ້າພະເຈົ້າເທົ່ານັ້ນ

[໑໓໔] ຂ້າພະເຈົ້າໄດ້ຮັບອານິສົງເຫຼົ່ານີ້
ຍ້ອນໄດ້ຖວາຍເຂົ້າໃໝ່ໃນໝູ່ພຣະສົງ
ຜູ້ເປັນຄະນະທີ່ປະເສີດສູງສຸດກ່ອນ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໓໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າໃໝ່

[໑໓໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໓໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸຈິນຕິຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສຸຈິນຕິຕະເຖຣາປະທານທີ ໗ ຈົບ**

## ໘. ໂສນະນະກິງກະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂສນະນະກິງກະນິຍະເຖຣະ

(ພຣະໂສນະນະກິງກະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔໐] ຂ້າພະເຈົ້າມີສັດທາໄດ້ອອກບວດເປັນບັນພະຊິດ
ອາໄສການພໍ່າເພັງຕະບະ ຈຶ່ງໄດ້ນຸ່ງຫົ່ມຜ້າເປືອກໄມ້

[໑໔໑] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດອຸບັດຂຶ້ນ ຊົງຊ່ອຍມະຫາຊົນໃຫ້ຂ້າມພົ້ນ (ວັດຕະສົງສານ)

[໑໔໒] ຂ້າພະເຈົ້າໝົດກຳລັງຍ້ອນປ່ວຍໜັກ
ຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຈຶ່ງກໍ່ພຣະສະຖູບທີ່ອຸດົມໄວ້ທີ່ຫາດຊາຍ

[໑໔໓] ເມື່ອແລ້ວ ຂ້າພະເຈົ້າເປັນຜູ້ມີຈິດຮ່າເຣິງ
ມີໃຈເບີກບານ ໂຮຍດອກກະດິ່ງຄຳລົງໃນບ່ອນນັ້ນ

[໑໔໔] ຂ້າພະເຈົ້າປົນນິບັດພຣະສະຖູບ
ເໝືອນກັບປົນນິບັດພຣະສຳມາສຳພຸດທະເຈົ້າສະເພາະພຣະພັກ
ອັນໜຶ່ງ ດ້ວຍຈິດທີ່ເຫຼື້ອມໃສຕໍ່ພຣະພຸດທະເຈົ້າ
ພຣະນາມວ່າ ອັດຖະທັດສີ ຜູ້ຄົງທີ່ນັ້ນ

[໑໔໕] ຂ້າພະເຈົ້າຈຶ່ງໄດ້ໄປເກີດຍັງເທວະໂລກ
ໄດ້ຄວາມສຸກອັນໄພບູນໃນເທວະໂລກນັ້ນ
ຂ້າພະເຈົ້າມີຜິວພັນເໝືອນຄຳ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔໖] ເທບນາຣີຂອງຂ້າພະເຈົ້າມີປະມານ ໙໐ ໂກດ
ປະດັບຕົກແຕ່ງສວຍງາມ ຕ່າງກໍບຳຣຸງຂ້າພະເຈົ້າຢູ່ທຸກເມື່ອ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔໗] ເຄື່ອງດົນຕີ ໖໐,໐໐໐ ຢ່າງ ຄື ກອງ
ຕະໂພນ ສັງ ບັນເດາະ ມະໂຫຣະທຶກ ກອງໃຫຍ່
ບັນເລງຢ່າງມ່ວນໃນວິມານນັ້ນ

[໑໔໘] ຊ້າງກຸນຊອນຕະກູນມາຕັງຄະຕົກມັນສາມແຫ່ງ ອາຍຸ ໖໐ ປີ
ຈຳນວນ ໘໔,໐໐໐ ເຊືອກ ປະດັບຕົກແຕ່ງສວຍງາມ

[໑໔໙] ຄຸມດ້ວຍຂ່າຍຄຳ ບຳຣຸງຂ້າພະເຈົ້າ
ຄວາມບົກຜ່ອງດ້ວຍກຳລັງພົນ ແລະບ່ອນຢູ່ຍ່ອມບໍ່ມີແກ່ຂ້າພະເຈົ້າ

[໑໕໐] ຂ້າພະເຈົ້າສະເຫວີຍຜົນວິບາກຂອງດອກກະດິ່ງຄຳ
ໄດ້ຄອງເທວະສົມບັດຕະຫຼອດ ໕໗ ຊາດ

[໑໕໑] ໄດ້ເປັນພຣະເຈົ້າຈັກກະພັດ ໗໑ ຊາດ
ແລະໄດ້ຄອງສົມບັດໃນມະຫາປະຖະພີຕະຫຼອດ ໑໐໑ ຊາດ

[໑໕໒] ບັດນີ້ ຂ້າພະເຈົ້າໄດ້ບັນລຸອະມະຕະບົດທີ່ເລີກເຊິ່ງ
ເຫັນໄດ້ຍາກ ສັງໂຍດສິ້ນແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໕໓] ໃນກັບທີ ໑,໗໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໕໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໕໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະໂສນະນະກິງກະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂສນະນະກິງກະນິຍະເຖຣາປະທານທີ ໗ ຈົບ**

# ໑໐. ໂສວັນນະໂກນະຕະຣິກາະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂສວັນນະໂກນະຕະຣິກາະເຖຣະ

(ພຣະໂສວັນນະໂກນະຕະຣິກາະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕໗] ພຣະສຳມາສຳພຸດທະເຈົ້າຜູ້ຕັດສະຣູ້
ອົບຮົມພຣະທະໄທ ຝຶກພຣະອົງແລ້ວ ມີພຣະທະໄທຕັ້ງໝັ້ນ
ສະເດັດດຳເນີນຢູ່ໃນທາງອັນປະເສີດ
ຊົງຍິນດີໃນການສະງົບຣະງັບຈິດ

[໑໕໘] ຜູ້ຊົງຂ້າມໂອຄະ ໄດ້ແລ້ວ ມີປົກກະຕິເພ່ງພິນິດ
ຍິນດີໃນຊານ ເປັນມຸນີ ເຂົ້າສະມາບັດ
ບໍ່ລະການສັງລວມອິນຊີ

[໑໕໙] ຂ້າພະເຈົ້າເຫັນແລ້ວ ຈຶ່ງໃຊ້ໝາກນ້ຳເຕົ້າຕັກນ້ຳ
ເຂົ້າໄປຫາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ລ້າງພຣະບາດຂອງພຣະພຸດທະເຈົ້າແລ້ວ ຖວາຍໝາກນ້ຳເຕົ້າ

[໑໖໐] ກໍພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ໄດ້ຮັບສັ່ງວ່າ
ທ່ານຈົ່ງໃຊ້ໝາກນ້ຳເຕົ້ານີ້ຕັກນ້ຳມາວາງໄວ້ໃກ້ ໆ ຕີນຂອງເຮົາ

[໑໖໑] ເນື່ອງຈາກ ຂ້າພະເຈົ້າມີຄວາມເຄົາລົບຕໍ່ພຣະສາດສະດາ
ຈຶ່ງຮັບສະໜອງພຣະພຸດທະດຳຣັດວ່າ ໂດຍຂ້ານ້ອຍ
ແລ້ວໃຊ້ໝາກນ້ຳເຕົ້າໄປຕັກນ້ຳມາຖວາຍ
ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໖໔] ພຣະມະຫາວີຣະພຸດທະເຈົ້າ
ເມື່ອຈະຊົງຍັງຈິດຂອງຂ້າພະເຈົ້າໃຫ້ສະງົບເຢັນ
ຈຶ່ງໄດ້ຊົງອະນຸໂມທະນາວ່າ ດ້ວຍການຖວາຍໝາກນ້ຳເຕົ້ານີ້
ຂໍຄວາມດຳຣິຂອງທ່ານຈົ່ງສຳເລັດ

[໑໖໓] ຂ້າພະເຈົ້າຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໑໕ ກັບ
ແລະໄດ້ເປັນພຣະເຈົ້າຈັກກະພັດ ໓໓ ຊາດ

[໑໖໔] ຈະເປັນເວລາກາງເວັນ ຫຼື ກາງຄືນກໍຕາມ
ເມື່ອຂ້າພະເຈົ້າຍ່າງ ຫຼື ຢືນຢູ່
ຄົນທັງຫຼາຍຖືເອົາທຸງໄຊຄຳຢືນຢູ່ຂ້າງໜ້າຂ້າພະເຈົ້າ

[໑໖໕] ຂ້າພະເຈົ້າໄດ້ທຸງໄຊຄຳມາ
ຍ້ອນການຖວາຍໝາກນ້ຳເຕົ້າແດ່ ພຣະພຸດທະເຈົ້າ
ສັກກາຣະທີ່ເຮັດໄວ້ໃນທ່ານຜູ້ຄົງທີ່ທັງຫຼາຍ
ເຖິງຈະໜ້ອຍກໍຍ່ອມເປັນຂອງໄພບູນ

[໑໖໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກນ້ຳເຕົ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກນ້ຳເຕົ້າ

[໑໖໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂສວັນນະໂກນະຕະຣິກກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂສວັນນະໂກນະຕະຣິກກະເຖຣາປະທານທີ ໑໐ ຈົບ**

**ສະກົງສຳມັດຊະກະວັກທີ ໔໓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສະກົງສໍາມັດຊະກະເຖຣາປະທານ
໒. ເອກາສະນະທາຍະກະເຖຣາປະທານ
໓. ໂກຣັນທະປຸບຜິຍະເຖຣາປະທານ
໗. ເອກະທໍາມັດສະວະນິຍະເຖຣາປະທານ
໕. ໂສນະນະກົງກະນິຍະເຖຣາປະທານ
໘. ເອກະທຸດສະທາຍະກະເຖຣາປະທານ
໔. ສັດຕະກະທໍາພະປຸບຜິຍະເຖຣາປະທານ
໖. ຄະຕະມັນທະທາຍະກະເຖຣາປະທານ
໙. ສຸຈິນຕິຕະເຖຣາປະທານ
໑໐. ໂສວັນນະໂກນະຕະຣິກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໑໗໑ ຄາຖາ**

# ໔໔. ເອກະວິຫາຣິວັກ

## ໝວດວ່າດ້ວຍພຣະເຖຣະຜູ້ຢູ່ຜູ້ດຽວເປັນຕົ້ນ

### ໑. ເອກະວິຫາຣິຍະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະເອກະວິຫາຣິຍະເຖຣະ

(ພຣະເອກະວິຫາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ໃນພັດທະກັບນີ້ ພຣະພຸດທະເຈົ້າພຣະນາມວ່າ ກັດສະປະ ຕາມພຣະໂຄດ
ຜູ້ເປັນເຜົ່າພັນຂອງທ້າວມະຫາພົມ ມີພຣະຍົດຍິ່ງໃຫຍ່
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໒] ພຣະອົງບໍ່ມີທຳເປັນເຄື່ອງລ້າຊ້າ
ປາສະຈາກທຳເຄື່ອງໜ່ວງໜ່ຽວ
ມີພຣະຫະໄທສະເໝີດ້ວຍອາກາດ
ມີປົກກະຕິຢູ່ໃນທີ່ວິເວກ ເປັນຜູ້ຄົງທີ່
ຍິນດີໃນອະນິມິດຕະສະມາທິ ມີຄວາມຊຳນານ (ໃນຍານ)

[໓] ມີພຣະຫະໄທບໍ່ກ່ຽວຂ້ອງໃນອາລົມ
ບໍ່ມີຕັນຫາແປດເປື້ອນ
ບໍ່ຄຸກຄີໃນຕະກູນ ໃນໝູ່ຄະນະ
ຊົງປະກອບດ້ວຍພຣະມະຫາກະລຸນາ
ຊົງເປັນນັກປາດ ຊົງສະຫຼາດໃນອຸປາຍສຳລັບແນະນຳ

[໔] ຊົງຂວນຂວາຍໃນກິດຂອງຜູ້ອື່ນ
ຊົງແນະນຳທັງມະນຸດແລະເທວະດາ
ຊົງແນະນຳທາງໄປສູ່ພຣະນິບພານ
ອັນສາມາດຍັງເປືອກຕົມຄືຄະຕິໃຫ້ເຫືອດແຫ້ງ

[໕] ແລະຊົງແນະນຳພຣະນິບພານອັນເປັນອຳມະຕະ
ມີຄວາມແຊ່ມຊື່ນຢ່າງຍິ່ງ
ເປັນທຳເຄື່ອງກັ້ນຄວາມແກ່ແລະຄວາມຕາຍ

ພຣະອົງປະທັບນັ່ງ ທ່າມກາງບໍລິສັດໃຫຍ່
ຊົງຊ່ອຍສັດໂລກໃຫ້ຂ້າມພົ້ນ

[໖] ຜູ້ຊົງເປັນບ່ອນເພິ່ງ ມີພຣະສຸຣະສຽງມ່ວນ
ເໝືອນສຽງນົກກາຣະເວກ
ມີພຣະສຸຣະສຽງກ້ອງດັ່ງສຽງພິນ
ຊົງຖອນເວໄນຍະສັດຜູ້ຈະຈິບຫາຍ
ຍ້ອນຂາດຜູ້ແນະນໍາຂຶ້ນຈາກມະຫັນຕະທຸກ

[໗] ຂ້າພະເຈົ້າໄດ້ເຫັນພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ຜູ້ຊົງສະແດງທໍາທີ່ປາສະຈາກທຸລິຕີກິເລດ
ໄດ້ຟັງທໍາຂອງພຣະອົງແລ້ວ ຈຶ່ງອອກບວດເປັນພິກຂຸ

[໘] ເມື່ອບວດແລ້ວໃນການນັ້ນ
ຂ້າພະເຈົ້າຖືກຄວາມຄຸກຄີ ບີບຄັ້ນ
ຄິດເຖິງຄໍາສອນຂອງພຣະຊິນນະເຈົ້າ
ຈຶ່ງໄດ້ໄປຢູ່ໃນປ່າທີ່ໜ້າອອນຊອນແຕ່ພຽງຜູ້ດຽວເທົ່ານັ້ນ

[໙] ການດັບແຫ່ງສັກກາຍະທິດຖີອັນເປັນເຫດແຫ່ງຄວາມຍຶດໝັ້ນ
ເກີດແກ່ຂ້າພະເຈົ້າຜູ້ມີຄວາມວິເວກແຫ່ງຈິດ
ຜູ້ເຫັນໄພໃນຄວາມກ່ຽວຂ້ອງ

[໑໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔] ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະວິຫາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະວິຫາຣິຍະເຖຣາປະທານທີ ໑ ຈົບ**

## ໘. ເອກະສັງຂິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະສັງຂິຍະເຖຣະ

(ພຣະເອກະສັງຂິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ໄດ້ມີງານສົມໂພດຕົ້ນມະຫາໂພ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າວິປັດສີ
ມະຫາຊົນມາຊຸມນຸມກັນບູຊາຕົ້ນມະຫາໂພທີ່ປະເສີດ

[໑໔] (ຂ້າພະເຈົ້າເກີດຄວາມດຳຣິວ່າ)
ຕົ້ນມະຫາໂພນີ້ທີ່ຄວນບູຊາເຊັ່ນນີ້
ຂອງພຣະສາດສະດາພຣະອົງໃດ (ຍ່ອມສະແດງວ່າ)
ພຣະສາດສະດາພຣະອົງນັ້ນຈັກເປັນຜູ້ເວັ້ນຈາກຄວາມເສົ້າໂສກທັງຫຼາຍ
ຊົງມີປັນຍາ ເປັນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໕] ໃນຄັ້ງນັ້ນ ຂ້າພະເຈົ້າຖືຫອຍສັງເປົ່າບູຊາຕົ້ນໂພຕະຫຼອດວັນ
ແລ້ວໄຫວ້ຕົ້ນມະຫາໂພທີ່ປະເສີດ

[໑໖] ເມື່ອຮ່າງກາຍຂ້າພະເຈົ້າລົ້ມຕາຍລົງ
ກຳທີ່ຂ້າພະເຈົ້າໄດ້ເຮັດໃນເວລາໃກ້ຕາຍ
ສົ່ງຜົນໃຫ້ຂ້າພະເຈົ້າເຖິງເທວະໂລກ
ແລະຂ້າພະເຈົ້າໄດ້ຮື່ນຣົມຢູ່ໃນເທວະໂລກ

[໑໗] ເຄື່ອງດົນຕີ ໖໐,໐໐໐ ຢ່າງ
ມີສຽງໜ້າຍິນດີ ໜ້າອອນຊອນ ບັນເທີງໃຈ
ຂັບກ່ອມຂ້າພະເຈົ້າຢູ່ທຸກເມື່ອ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະຣາຊາມີນາມວ່າສຸທັດສະນະ

ມີໄຊຊະນະເປັນໃຫຍ່ໃນຊົມພູທະວີບ
ມີມະຫາສະມຸດທັງ ໔ ເປັນຂອບເຂດ

[໑໗] ໃນຄັ້ງນັ້ນ ເຄື່ອງດົນຕີ ๓໐໐ ຢ່າງ
ແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ
ຂ້າພະເຈົ້າໄດ້ຮັບຜົນບຸນຂອງຕົນ
ນີ້ເປັນຜົນແຫ່ງການບຳຮຸງຕົ້ນໂພ

[໔໐] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ເຖິງຂ້າພະເຈົ້າຍັງຢູ່ໃນທ້ອງມານດາ
ກອງກໍປະໂຄມຢູ່ຕະຫຼອດເວລາ

[໔໑] ຍ້ອນອຸປັດຖາກພຣະສຳມາສຳພຸດທະເຈົ້າ
ຂ້າພະເຈົ້າຈຶ່ງໄດ້ສະເຫວີຍສົມບັດທັງຫຼາຍ
ແລະບັນລຸນິບພານບົດອັນບໍ່ຫວັ່ນໄຫວ
ເປັນແດນກະເສມຈາກໄພ ເປັນອະມະຕະທຳ ແລະບໍ່ມີມົນທິນ

[໔໔] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ๓
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະສັງຂິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະສັງຂິຍະເຖຣາປະທານທີ ໔ ຈົບ**

## ໖. ປາຕິຮີຣະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປາຕິຮີຣະສັນຍະກະເຖຣະ

(ພຣະປາຕິຮີຣະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ໃນຄັ້ງນັ້ນ ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ສົມຄວນຮັບເຄື່ອງບູຊາ ໄດ້ສະເດັດເຂົ້າໄປສູ່ພຣະນະຄອນ
ພ້ອມດ້ວຍພິກຂຸສົງຜູ້ໄດ້ວະສີ ຈຳນວນ ໑໐໐,໐໐໐ ອົງ

[໔໗] ທັນທີທີ່ພຣະພຸດທະເຈົ້າ ຜູ້ສະຫງົບ ຜູ້ຄົງທີ່
ສະເດັດເຂົ້າພຣະນະຄອນ ກໍໄດ້ມີສຽງກຶກກ້ອງ
ໃຫ້ການຕ້ອນຮັບຕາມຖະໜົນ

[໔໘] ເມື່ອພຣະພຸດທະເຈົ້າສະເດັດເຂົ້າພຣະນະຄອນ
ພື້ນທີ່ບໍ່ມີຄົນດີດຄົນເຄາະ ກໍບັນເລງຂຶ້ນເອງ ດ້ວຍພຸດທານຸພາບ

[໔໙] ຂ້າພະເຈົ້ານະມັດສະການພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ເປັນມະຫາມຸນີ
ແລະເຫັນປາຕິຫານແລ້ວ ໄດ້ເຮັດຈິດໃຫ້ເຫຼື້ອມໃສໃນປາຕິຫານນັ້ນ

[໕໐] ພຣະພຸດທະເຈົ້າ ຊ່າງໜ້າອັດສະຈັນ ພຣະທຳ ຊ່າງໜ້າອັດສະຈັນ
ການທີ່ເຮົາມາພົບພໍ້ກັບພຣະສາດສະດາ ຊ່າງໜ້າອັດສະຈັນ
ເຄື່ອງດົນຕີແມ່ນປາສະຈາກຈິດວິນຍານກໍຍັງບັນເລງໄດ້ເອງ

[໕໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຍ້ອນຂ້າພະເຈົ້າໄດ້ຄວາມປະທັບໃຈໃນພຣະພຸດທະເຈົ້າ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປະທັບໃຈໃນພຣະພຸດທະເຈົ້າ

[໕໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ

ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປາຕິຣີຣະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປາຕິຣີຣະສັນຍະກະເຖຣາປະທານທີ ໓ ຈົບ**

## ໔. ຍານັດຖະວິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຍານັດຖະວິກະເຖຣະ

(ພຣະຍານັດຖະວິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໕] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ ຜູ້ສູງສຸດ
ແຫ່ງເທວະດາ ແລະມະນຸດຮຸ່ງເຮືອງດັ່ງດອກກັນນິກາ
ສ່ອງແສງດັ່ງຕົ້ນພຶກສາປະທີບ ໄພໂຣດດັ່ງຄຳ
[໓໖] ຂ້າພະເຈົ້າວາງຄົນໂທນ້ຳ ຜ້າເປືອກໄມ້
ທຳມະກົກ (ກະບອກກອງນ້ຳ) ຮົ່ມໜັງເສືອປ່ຽງບ່າ
ແລ້ວກໍສະດຸດີພຣະພຸດທະເຈົ້າຜູ້ປະເສີດທີ່ສຸດວ່າ
[໓໗] ຂ້າແຕ່ພຣະມຸນີ ພຣະອົງຊົງຂະຈັດຄວາມມືດມົນ
ເຊິ່ງອາກູນໄປດ້ວຍຕາໜ່າງຄືໂມຫະ
ຊົງສະແດງແສງສະຫວ່າງຄືຍານ ແລ້ວສະເດັດຂ້າມໄປ
[໓໘] ພຣະອົງຊົງຖອນສັດໂລກນີ້ຂຶ້ນ (ຈາກວັດຕະສົງສານ) ແລ້ວ
ພຣະຍານອັນຢັ່ງຮູ້ສັບພະສິ່ງ (ຂອງພຣະອົງ) ເປັນສິ່ງທີ່ປະເສີດ
ຄະຕິທົ່ວຫຼ້າກໍບໍ່ອາດປຽບໄດ້ກັບພຣະຍານຂອງພຣະອົງ

[໓໙] ດ້ວຍພຣະຍານນັ້ນ ຊາວໂລກຈຶ່ງຂະໜານພຣະນາມພຣະອົງວ່າ
ສັບພັນຍູ ສັບພັນຍູ
ຂ້າພຣະພຸດທະເຈົ້າໄຫວ້ພຣະອົງ
ຜູ້ມີຄວາມພຽນອັນຍິ່ງໃຫຍ່
ຊົງຮູ້ທຳທັງປວງ ຫາອາສະວະບໍ່ໄດ້
[໔໐] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສະດຸດີພຣະພຸດທະເຈົ້າຜູ້ປະເສີດທີ່ສຸດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສະດຸດີພຣະພຸດທະຍານ
[໔໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໔໒] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍານັດຖະວິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຍານັດຖະວິກະເຖຣາປະທານທີ ໔ ຈົບ**

## ໕. ອຸດສຸຂັນທິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸດສຸຂັນທິກະເຖຣະ

(ພຣະອຸດສຸຂັນທິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ຂ້າພະເຈົ້າເປັນຄົນເຝົ້າປະຕູຢູ່ໃນນະຄອນພັນທຸມະດີ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ

[໔໕] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖືທ່ອນອ້ອຍມາຖວາຍພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດພຣະນາມວ່າວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍອ້ອຍໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທ່ອນອ້ອຍ

[໔໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດສຸຂັນທິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸດສຸຂັນທິກະເຖຣາປະທານທີ ໕ ຈົບ**

## ໖. ກະລຳພະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກະລຳພະທາຍະກະເຖຣະ

(ພຣະກະລຳພະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ພຣະສຳພຸດທະເຈົ້າພຣະນາມວ່າ ໂຣມະສະ
ປະທັບຢູ່ທີ່ຮ່ອມພູ
ຂ້າພະເຈົ້າເຫຼື້ອມໃສ ໄດ້ຖວາຍຜັກບົ້ງ
ແດ່ພຣະອົງດ້ວຍມືທັງ ໒ ຂອງຕົນ

[໕໑] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜັກບົ້ງ

[໕໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກະລຳພະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກະລຳພະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ອຳພາຕະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຳພາຕະກະທາຍະກະເຖຣະ

(ພຣະອຳພາຕະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໕] ທີ່ປ່າໃຫຍ່ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າ
ຜູ້ຊົງເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ຈຶ່ງໄດ້ຖືໝາກກອກມາຖວາຍພຣະສະຍຳພູ

[໕໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໕໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຳພາຕະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຳພາຕະກະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ທະຣິຕະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທະຣິຕະກະທາຍະກະເຖຣະ

(ພຣະທະຣິຕະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໐] ຂ້າພະເຈົ້າກຳລັງນຳໝາກສົ້ມມໍ ໝາກຂາມປ້ອມ ໝາກມ່ວງ
ໝາກຫວ້າ ສົ້ມມໍພິເພກ ໝາກກະເບົາ ໝາກຣັກຟ້າ
ແລະໝາກຕູມມາດ້ວຍຕົນເອງ

[໖໑] ຂ້າພະເຈົ້າໄດ້ພົບພຣະມະຫາມຸນີ ຜູ້ມີປົກກະຕິເຂົ້າຊານ
ຍິນດີໃນຊານ ເປັນມຸນີ ຖືກອາພາດບຽດບຽນ
ຊົງເດີນທາງໄກ ປະທັບຢູ່ທີ່ເງີບພູ

[໖໔] ຂ້າພະເຈົ້າຈຶ່ງນຳໝາກສົ້ມມໍມາຖວາຍພຣະສະຍຳພູ
ພຽງຂ້າພະເຈົ້າປຸງເພສັດສຳເລັດແລ້ວ
ຄວາມເຈັບປ່ວຍກໍຫາຍໄປໃນທັນໃດນັ້ນເອງ

[໖໓] ພຣະພຸດທະເຈົ້າຜູ້ລະຄວາມກະວົນກະວາຍໄດ້ແລ້ວ
ໄດ້ຊົງອະນຸໂມທະນາວ່າ
ກໍດ້ວຍການຖວາຍເພສັດເຊິ່ງເປັນເຄື່ອງຣະງັບຄວາມເຈັບປ່ວຍນີ້

[໖໔] ທ່ານຈະເກີດເປັນເທວະດາ ເປັນມະນຸດ
ຫຼືເກີດໃນຊາດອື່ນ ໆ ກໍຕາມ
ຂໍຈົ່ງເປັນຜູ້ມີຄວາມສຸກໃນທີ່ທຸກສະຖານ
ແລະຢ່າໄດ້ມີຄວາມເຈັບປ່ວຍເລີຍ

[໖໕] ເມື່ອພຣະສຳມາສຳພຸດທະເຈົ້າ ຜູ້ຊົງເປັນພຣະສະຍຳພູ
ຜູ້ບໍ່ຊົງພ່າຍແພ້ ຜູ້ຊົງເປັນນັກປາດຕັດດັ່ງນີ້ແລ້ວ
ໄດ້ສະເດັດເຫາະຂຶ້ນສູ່ທ້ອງຟ້າ ເໝືອນພະຍາຫົງໄປໃນອາກາດ

[໖໖] ຂ້າພະເຈົ້າໄດ້ຖວາຍໝາກສົ້ມມໍແດ່ ພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນພຣະສະຍຳພູ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໃນຊາດໃດ
ຄວາມເຈັບປ່ວຍຈຶ່ງບໍ່ໄດ້ເກີດແກ່ຂ້າພະເຈົ້າອີກເລີຍຈົນເຖິງຊາດນີ້

[໖໗] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເພສັດໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເພສັດ

[໖໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທະຣິຕະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທະຣິຕະກະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ອຳພະປິນທິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຳພະປິນທິຍະເຖຣະ

(ພຣະອຳພະປິນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໒] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພະຍາຊ້າງມີງາງອນງາມ
ເໝາະທີ່ຈະເປັນຣາດຊະພາຫະນະ
ທ່ຽວຢູ່ໃນປ່າໃຫຍ່ ໄດ້ເຫັນພຣະຜູ້ຊົງເປັນຜູ້ນຳສັດໂລກ

[໗໓] ຂ້າພະເຈົ້າໄດ້ຈັບໝາກມ່ວງມາຖວາຍພຣະສາດສະດາ
ພຣະມະຫາວີຣະພຣະນາມວ່າ ສິດທັດຖະ ຜູ້ຊົງເປັນຜູ້ນຳສັດໂລກຊົງຮັບແລ້ວ

[໗໔] ຂະນະທີ່ຂ້າພະເຈົ້າເພ່ງເບິ່ງຢູ່ ພຣະຊິນນະເຈົ້າໄດ້ສະເຫວີຍແລ້ວໃນຄັ້ງນັ້ນ
ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນພຣະຊິນນະເຈົ້າພຣະອົງນັ້ນແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໗໕] ຂ້າພະເຈົ້າຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວ
ໄດ້ສະເຫວີຍສົມບັດເປັນພຣະເຈົ້າຈັກກະພັດ ໂດຍອຸປາຍນັ້ນແລ

[໗໖] ຂ້າພະເຈົ້າມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ມີຈິດສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະ ທັງປວງແລ້ວ ຈຶ່ງຢູ່ຢ່າງຜູ້ບໍ່ມີອາສະວະ

[໑໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້
[໑໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໑໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ
[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຳພະປິນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ຢ່າງນີ້

**ອຳພະປິນທິຍະເຖຣາປະທານທີ ໗ ຈົບ**

## ໑໐. ຊຳພູຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຊຳພູຜະລິຍະເຖຣະ

(ພຣະຊຳພູຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໑] ເມື່ອພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່ ຊົງພຣະຍົດຢ່າງສູງສຸດ
ເຊິ່ງກຳລັງສະເດັດທ່ຽວບິນທະບາດ

[໒໔] ຂ້າພະເຈົ້າມີຈິດເຫຼື້ອມໃສ ໄດ້ຖືເອົາໝາກຫວ້າໄປຖວາຍພຣະສາດສະດາ
ຜູ້ເປັນທັກຂິໄນຍະບຸກຄົນ ຜູ້ຊົງເປັນນັກປາດ

[໒໓] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາ ແລະມະນຸດທັງຫຼາຍ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

ຍ້ອນກຳນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ລະຄວາມຊະນະ
ແລະຄວາມພ່າຍແພ້ ໄດ້ແລ້ວ ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໗໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກຫວ້າ

[໗໕] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຊຳພູຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຊຳພູຜະລິຍະເຖຣາປະທານທີ ໑໐ ຈົບ**

**ເອກະວິຫາຣິວັກທີ ໔໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ເອກະວິຫາຣິຍະເຖຣາປະທານ | ໒. ເອກະສັງຂິຍະເຖຣາປະທານ |
| ໓. ປາຕິຮີຣະສັນຍະກະເຖຣາປະທານ | ໔. ຍານັດຖະວິກະເຖຣາປະທານ |
| ໕. ອຸດສຸຂັນທິກະເຖຣາປະທານ | ໖. ກະລຳພະທາຍະກະເຖຣາປະທານ |
| ໗. ອຳພາຕະກະທາຍະກະເຖຣາປະທານ | ໘. ທະຣິຕະກະທາຍະກະເຖຣາປະທານ |
| ໙. ອຳພະປິນທິຍະເຖຣາປະທານ | ໑໐. ຊຳພູຜະລິຍະເຖຣາປະທານ |

**ໃນວັກນີ້ ບັນດິດນັບຄາຖາໄດ້ ໗໖ ຄາຖາ**

# ໔໕. ວິເພທະກິວັກ

## ໝວດວ່າດ້ວຍພຣະວິເພທະກະເປັນຕົ້ນ

### ໑. ວິເພທະກະພິຊິຍະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະວິເພທະກະພິຊິຍະເຖຣະ

(ພຣະວິເພທະກະພິຊິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ພຣະມະຫາວີຣະທະເຈົ້າ ຜູ້ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ພຣະນາມວ່າ ກະກຸສັນທະ ພຣະອົງສະເດັດອອກຈາກຄະນະໄປສູ່ປ່າ

[໒] ຂ້າພະເຈົ້າໄດ້ໃຊ້ເຄືອເຂົາຮ້ອຍຈາວຕານຖືຫ່ຽວໄປແລ້ວ
ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເຂົ້າຊານຢູ່ທີ່ຮ່ອມພູ

[໓] ຂ້າພະເຈົ້າເຫັນພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບແລ້ວ
ມີຈິດເຫຼື້ອມໃສ ໄດ້ຖວາຍຈາວຕານແດ່ພຣະພຸດທະເຈົ້າ
ຜູ້ເປັນທັກຂິໄນຍະບຸກຄົນ ຜູ້ຊົງເປັນນັກປາດ

[໔] ຂ້າພະເຈົ້າໄດ້ຖວາຍພຶດໄວ້ໃນຄັ້ງນັ້ນ
ໃນພັດທະກັບນີ້ ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຈາວຕານ

[໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວິເພທະກະພິຊິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ວິເພທະກະພິຊິຍະເຖຣາປະທານທີ ໑ ຈົບ**

## ໘. ໂກລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂກລະທາຍະກະເຖຣະ

(ພຣະໂກລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘] ໃນຄັ້ງນັ້ນ ຂ້າພະເຈົ້ານຸ່ງຜ້າໜັງສັດ
ຫົ່ມຜ້າເປືອກໄມ້ ບັນຈຸໝາກກະທັນຈົນເຕັມຫາບ
ແລ້ວຫາບໄປສູ່ອາສົມຂອງຂ້າພະເຈົ້າ

[໙] ການນັ້ນ ພຣະພຸດທະເຈົ້າພຣະນາມວ່າສິຂີ
ຜູ້ຊົງເຮັດໂລກໃຫ້ສະຫວ່າງສະໄຫວຕະຫຼອດການ
ໄດ້ສະເດັດເຂົ້າມາຍັງອາສົມຂອງຂ້າພະເຈົ້າພຽງລຳພັງພຣະອົງດຽວ

[໑໐] ຂ້າພະເຈົ້າເຮັດຈິດຂອງຕົນໃຫ້ເຫຼື້ອມໃສ
ແລະໄຫວ້ພຣະພຸດທະເຈົ້າຜູ້ມີວັດງົດງາມ
ແລ້ວຖວາຍໝາກກະທັນແດ່ ພຣະພຸດທະເຈົ້າດ້ວຍມືທັງ ໒

[໑໑] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກກະທັນໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກກະທັນ

[໑໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂກລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂກລະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ເວລຸວະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເວລຸວະຜະລິຍະເຖຣະ

(ພຣະເວລຸວະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໕]	ໃກ້ຝັ່ງແມ່ນ້ຳຈັນທະພາຄາ
ຂ້າພະເຈົ້າໄດ້ສ້າງອາສົມໄວ້ຢ່າງດີ
ມີຕົ້ນໝາກຕູມຢູ່ຊອນລອນ
ເປັນທີ່ລວມໝູ່ໄມ້ນານາພັນ

[໑໖]	ຂ້າພະເຈົ້າເຫັນໝາກຕູມມີກິ່ນຫອມແລ້ວ
ຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ທັງຍິນດີແລະຕື່ນເຕັ້ນ ໄດ້ເກັບໝາກຕູມໃສ່ຫາບຈົນເຕັມ

[໑໗]	ເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າກະກຸສັນທະ
ມີຈິດເຫຼື້ອມໃສໄດ້ຖວາຍໝາກຕູມສຸກແດ່ພຣະອົງ
ຜູ້ເປັນເນື້ອນາບຸນ ຜູ້ຊົງເປັນນັກປາດ

[໑໘]	ຂ້າພະເຈົ້າໄດ້ຖວາຍໝາກຕູມໄວ້ໃນຕອນຕົ້ນແຫ່ງພັດທະກັບນີ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກຕູມ

[໑໙]	ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເວລຸວະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເວລຸວະຜະລິຍະເຖຣາປະທານທີ ໓ ຈົບ**

## ໔. ພັນລາຕະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພັນລາຕະກະທາຍະກະເຖຣະ

(ພຣະພັນລາຕະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໔໒] ພຣະສຳມາສຳພຸດທະເຈົ້າ ຜູ້ມີພຣະສະຫວີວັນດັ່ງຄຳ
ມີພຣະລັກສະນະອັນປະເສີດ ໓໒ ປະການ
ເໝືອນຕົ້ນພະຍາໄມ້ສາລະທີ່ມີດອກບານສະພັ່ງ
ກຳລັງສະເດັດເຫາະໄປທາງອາກາດ

[໔໓] ຂ້າພະເຈົ້າໄດ້ປູຫຍ້າໄວ້
ທູນອາຣາດທະນາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຂໍພຣະພຸດທະເຈົ້າຈົ່ງອະນຸເຄາະຂ້າພຣະອົງ
ຂ້າພຣະອົງປາຖະໜາຈະຖວາຍພິກສາ

[໔໔] ພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ຊົງອະນຸເຄາະ ປະກອບດ້ວຍພຣະກະລຸນາ
ມີພຣະຍົດຍິ່ງໃຫຍ່ ໄດ້ຊົງຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງສະເດັດລົງມາທີ່ອາສົມຂອງຂ້າພະເຈົ້າ

[໔໕] ເມື່ອແລ້ວ ພຣະອົງໄດ້ປະທັບເທິງໃບໄມ້ທີ່ປູໄວ້
ຂ້າພະເຈົ້າໄດ້ຖືໝາກຣິກຟ້າມາຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໖] ຂະນະທີ່ຂ້າພະເຈົ້າເພ່ງເບິ່ງຢູ່ ພຣະຊິນນະເຈົ້າໄດ້ສະເຫວີຍແລ້ວໃນຄັ້ງນັ້ນ
ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນພຣະຊິນນະເຈົ້າພຣະອົງນັ້ນແລ້ວ
ກໍໃນຄັ້ງນັ້ນໄດ້ໄຫວ້ພຣະຊິນນະເຈົ້າອີກ

[໔໗] ໃນກັບທີ ໑໑໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພັນລາຕະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ພັນລາຕະກະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ອຸມາປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸມາປຸບຜິຍະເຖຣະ

(ພຣະອຸມາປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ເມື່ອຕົ້ນໄຮເຊິ່ງເປັນຕົ້ນໄມ້ອັນເປັນສະຖານທີ່ຕັດສະຮູ້ ງອກງາມຂຽວສົດໃສ
ຂ້າພະເຈົ້າໄດ້ປະຄອງດອກຜັກຕົບຂຶ້ນບູຊາຕົ້ນໄມ້ອັນເປັນສະຖານທີ່ຕັດສະຮູ້

[໖໔] ໃນພັດທະກັບນີ້ ຂ້າພະເຈົ້າໄດ້ບູຊາຕົ້ນໄມ້ອັນເປັນສະຖານທີ່ຕັດສະຮູ້ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຕົ້ນໄມ້ອັນເປັນສະຖານທີ່ຕັດສະຮູ້

[໖໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸມາປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸມາປຸບຜິຍະເຖຣາປະທານທີ ໕ ຈົບ**

## ໖. ອຳພາຕະກິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຳພາຕະກິຍະເຖຣະ

(ພຣະອຳພາຕະກິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໖] ພຣະມຸນີພຣະນາມວ່າ ເວດສະພູ ສະເດັດເຂົ້າໄປສູ່ປ່າໄມ້ສາລະ
ເຊິ່ງມີດອກບານສະພັ່ງ ປະທັບນັ່ງຢູ່ທີ່ຮ່ອມພູ
ເໝືອນພະຍາຣາດຊະສີມີຊາດສູງ

[໖໗] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ດອກໝາກກອກບູຊາພຣະມະຫາວີຣະ
ຜູ້ເປັນເນື້ອນາບຸນດ້ວຍມືທັງ ໒ ຂອງຕົນ

[໓໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຳພາຕະກິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຳພາຕະກິຍະເຖຣາປະທານທີ ໖ ຈົບ**

## ໗. ສີຫາສະນິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສີຫາສະນິກະເຖຣະ

(ພຣະສີຫາສະນິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍພຣະແທ່ນສີຫາສະນະແດ່ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ ຜູ້ພ່ຳເພັງປະໂຫຍດເພື່ອສັບພະສັດ

[໔໓] ຂ້າພະເຈົ້າຢູ່ໃນໂລກໃດ ໆ
ຄືຈະເປັນເທວະໂລກ ຫຼື ມະນຸດໂລກກໍຕາມ

ໃນໂລກນັ້ນ ໆ ຂ້າພະເຈົ້າໄດ້ວິມານອັນໄພບູນ
ນີ້ເປັນຜົນແຫ່ງການຖວາຍພຣະແທ່ນສີຫາສະນະ

[໔໔] ບັນລັງຄຳ ບັນລັງເງິນ ບັນລັງແກ້ວທັບທິມ
ແລະບັນລັງແກ້ວມະນີຈຳນວນຫຼາຍ
ບັງເກີດແກ່ຂ້າພະເຈົ້າ ໃນການທຸກເມື່ອ

[໔໕] ຂ້າພະເຈົ້າໄດ້ສ້າງອາສະນະໄວ້ທີ່ຄ່ອງໄມ້ສີນອັນເປັນທີ່ຕັດສະຣູ້
ຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ແລ້ວໄດ້ບັງເກີດໃນຕະກູນສູງ
ໜ້າອັດສະຈັນ ພຣະທຳເປັນທຳດີ

[໔໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດພຣະແທ່ນສີຫາສະນະໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພຣະແທ່ນສີຫາສະນະ

[໔໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສີຫາສະນິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສີຫາສະນິກະເຖຣາປະທານທີ ໗ ຈົບ**

# ໗. ປາທະປີຖິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປາທະປີຖິຍະເຖຣະ

(ພຣະປາທະປີຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ປະກອບດ້ວຍພຣະກະລຸນາ ເປັນພຣະມະຫາມຸນີ
ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຊົງຊ່ອຍເຫຼົ່າສັດຈຳນວນຫຼາຍ
ໃຫ້ຂ້າມພົ້ນ (ວັດຕະສົງສານ) ແລ້ວກໍສະເດັດດັບຂັນທະປະຣິນິບພານ

[໕໑] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ໃຫ້ຄົນເຮັດຕັ່ງສຳລັບວາງຕີນໄວ້ທີ່ໃກ້ພຣະແທ່ນສີຫາສະນະ
ຂອງພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໒] ຂ້າພະເຈົ້າເຮັດກຸສົນກຳທີ່ມີສຸກເປັນຜົນ
ມີສຸກເປັນກຳໄລແລ້ວ ເປັນຜູ້ປະກອບແຕ່ກຳດີ
ໄດ້ໄປເກີດຍັງສະຫວັນຊັ້ນຕາວະຕິງສາ

[໕໓] ໃນສະຫວັນຊັ້ນຕາວະຕິງສານັ້ນ
ເມື່ອຂ້າພະເຈົ້າຜູ້ມີຄວາມພຽບພ້ອມດ້ວຍກຳດີ
ກ້າວຕີນໄປ ຕັ່ງຄຳກໍຜຸດຂຶ້ນ (ຮອງຮັບ)

[໕໔] ນໍຣະຊົນເຫຼົ່າໃດໄດ້ຍິນຄຳວ່າພຣະພຸດທະເຈົ້າ
ນໍຣະຊົນເຫຼົ່ານັ້ນນັບວ່າໂຊກດີ
ການທີ່ພວກທ່ານເຮັດສັກກາຣະໃນພຣະພຸດທະເຈົ້າ
ຜູ້ສະເດັດດັບຂັນທະປະຣິນິບພານແລ້ວ
ໄດ້ສຸກອັນໄພບູນ ນັບວ່າເປັນລາບທີ່ພວກທ່ານໄດ້ດີແລ້ວ

[໕໕] ແມ່ນກຳຂ້າພະເຈົ້າກໍເຮັດໄວ້ດີແລ້ວ
ຂ້າພະເຈົ້າປະກອບການຄ້າຂາຍໄວ້ດີແລ້ວ
ຂ້າພະເຈົ້າເຮັດຕັ່ງສຳລັບວາງຕີນ (ຖວາຍ) ຈຶ່ງໄດ້ຕັ່ງຄຳ

[໔໖] ເມື່ອຂ້າພະເຈົ້າມີກິດທຸຣະບາງຢ່າງທີ່ຕ້ອງເດີນທາງໄປສູ່ທິດທາງໃດ ໆ
ຂ້າພະເຈົ້າຕ້ອງຢຽບໄປເທິງຕັ່ງຄຳໃນທິດນັ້ນ ໆ
ນີ້ເປັນຜົນແຫ່ງກຳດີ

[໔໗] ໃນກັບທີ ໑໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຕັ່ງສຳລັບວາງຕີນ

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປາທະປີຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປາທະປີຖິຍະເຖຣາປະທານທີ ໘ ຈົບ**

## ໙. ເວທິກາຣະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເວທິກາຣະກະເຖຣະ

(ພຣະເວທິກາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າໄດ້ສ້າງໄພທີຢ່າງສວຍງາມໄວ້ທີ່ຄ່ວງຕົ້ນໄມ້ສົນ
ອັນປະເສີດອັນເປັນບ່ອນຕັດສະຣູ້
ເຊິ່ງເປັນຕົ້ນໄມ້ທີ່ສູງສຸດຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ແລ້ວເຮັດຈິດຂອງຕົນໃຫ້ເຫຼື້ອມໃສ

[໖໔] ເຄື່ອງໃຊ້ຫຼາຍຊະນິດ ເຊິ່ງງາມເລີດໂອລານ
ທັງທີ່ເຮັດສໍາເລັດແລ້ວແລະຍັງເຮັດບໍ່ສໍາເລັດ
ຕົກລົງມາຈາກອາກາດ
ນີ້ເປັນຜົນແຫ່ງການສ້າງໄພທີ

[໖໓] ໃນສົງຄາມທັງ ໔ ຝ່າຍປະຊິດກັນ ເປັນຕາຢ້ານ
ເມື່ອຂ້າພະເຈົ້າເຂົ້າໄປກໍບໍ່ພົບສິ່ງທີ່ໜ້າຢ້ານກົວເລີຍ
ນີ້ເປັນຜົນແຫ່ງການສ້າງໄພທີ

[໖໔] ວິມານທີ່ງົດງາມແລະບ່ອນນອນເຊິ່ງມີຄ່າຫຼາຍ
ດັ່ງຈະຮູ້ຄວາມດໍາຣິຂອງຂ້າພະເຈົ້າກໍບັງເກີດ
ນີ້ເປັນຜົນແຫ່ງການສ້າງໄພທີ

[໖໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສ້າງໄພທີໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງໄພທີ

[໖໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໗] ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໖໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເວທິກາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເວທິກາຣະກະເຖຣາປະທານທີ ໗ ຈົບ**

# ໑໐. ໂພທິຄະຣະກາຣະກະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂພທິຄະຣະກາຣະກະເຖຣະ

(ພຣະໂພທິຄະຣະກາຣະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໙] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ໃຫ້ຄົນເຮັດເຮືອນໂພຖວາຍພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າສິດທັດຖະ ຜູ້ເປັນຈອມແຫ່ງເທວະດາແລະມະນຸດ ຜູ້ຄົງທີ່

[໗໐] ຂ້າພະເຈົ້າເກີດໃນສະຫວັນຊັ້ນດຸສິດ
ຢູ່ໃນເຮືອນແກ້ວ ຄວາມໜາວ ຄວາມຮ້ອນ
ຫຼືລົມບໍ່ໄດ້ຖືກຕ້ອງຕົວຂ້າພະເຈົ້າເລີຍ

[໗໑] ໃນກັບທີ ໙໕ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດ
ວິດສຸກຳເທບພະບຸດ ໄດ້ເນຣະມິດນະຄອນຊື່ກາສິກະ

[໗໒] ຍາວ ໑໐ ໂຍດ ກວ້າງ ໘ ໂຍດ ເພື່ອຂ້າພະເຈົ້າ
ໃນນະຄອນນັ້ນບໍ່ມີໄມ້ເຄືອແລະດິນເລີຍ

[໗໓] ວິດສຸກຳເທບພະບຸດເນຣະມິດຜາສາດຊື່ມຸງຄຸນ
ຍາວໜຶ່ງໂຍດ ກວ້າງເຄິ່ງໂຍດ ເພື່ອຂ້າພະເຈົ້າ

[໗໔] ເສົາຜາສາດ ໘໔,໐໐໐ ຕົ້ນລ້ວນເປັນຄຳ
ພື້ນສຳເລັດດ້ວຍແກ້ວມະນີ ຫຼັງຄາເຮັດດ້ວຍແຜ່ນເງິນ

[໗໕] ວິດສຸກຳເທບພະບຸດເນຣະມິດຕົວເຮືອນສຳເລັດດ້ວຍຄຳລ້ວນ
ຂ້າພະເຈົ້າໄດ້ຢູ່ຄອງຜາສາດນັ້ນ
ນີ້ເປັນຜົນແຫ່ງການຖວາຍເຮືອນໂພ

[໗໖] ຂ້າພະເຈົ້າໄດ້ສະເຫວີຍຜົນທັງປວງນັ້ນ
ໃນພົບທັງທີ່ເປັນເທວະດາແລະທີ່ເປັນມະນຸດ
ໃນວັນນີ້ ຂ້າພະເຈົ້າບັນລຸນິບພານເຊິ່ງເປັນສັນຕິບົດອັນປະເສີດ

[໗໗] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ໃຫ້ຄົນເຮັດເຮືອນໂພໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຮືອນໂພ

[໗໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂພທິຄະຣະກາຣະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂພທິຄະຣະກາຣະກະເຖຣາປະທານທີ ໑໐ ຈົບ**

**ວິເພທະກີວັກທີ ໔໕ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ວິເພທະກະພີຊີຍະເຖຣາປະທານ
໒. ເວລຸວະຜະລິຍະເຖຣາປະທານ
໓. ອຸມາປຸບຜິຍະເຖຣາປະທານ
໔. ສີຫາສະນິກະເຖຣາປະທານ
໕. ເວທິກາຣະກະເຖຣາປະທານ
໖. ໂກລະທາຍະກະເຖຣາປະທານ
໗. ພັນລາຕະກະທາຍະກະເຖຣາປະທານ
໘. ອຳພາຕະກີຍະເຖຣາປະທານ
໙. ປາທະປີຖີຍະເຖຣາປະທານ
໑໐. ໂພທິຄະຣະກາຣະກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໗໙ ຄາຖາ**

# ໔໖. ຊະກະຕິທາຍະກະວັກ

## ໝວດວ່າດ້ວຍພຣະຊະກະຕິທາຍະກະເປັນຕົ້ນ

### ໑. ຊະກະຕິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຊະກະຕິທາຍະກະເຖຣະ

(ພຣະຊະກະຕິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຫ້ສ້າງແທ່ນບູຊາໄວ້ທີ່ຄ່ອງໄມ້ໂພ
ເຊິ່ງເປັນຕົ້ນໄມ້ທີ່ປະເສີດຂອງພຣະມຸນີພຣະນາມວ່າ ທຳມະທັດສີ

[໒] ຂ້າພະເຈົ້າພາດຕົກເຫວກໍດີ ພູເຂົາກໍດີ
ຕົ້ນໄມ້ກໍດີ ຍ່ອມໄດ້ບ່ອນຮອງຮັບ
ນີ້ເປັນຜົນແຫ່ງການສ້າງແທ່ນບູຊາ

[໓] ໂຈນບໍ່ບຽດບຽນຂ້າພະເຈົ້າ ກະສັດກໍບໍ່ດູໝິ່ນຂ້າພະເຈົ້າ
ຂ້າພະເຈົ້າລອດພົ້ນຈາກສັດຕູທຸກຈຳພວກ
ນີ້ເປັນຜົນແຫ່ງການສ້າງແທ່ນບູຊາ

[໔] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ຂ້າພະເຈົ້າຍ່ອມເປັນຜູ້ທີ່ເຂົາບູຊາໃນທີ່ທຸກສະຖານ
ນີ້ເປັນຜົນແຫ່ງການສ້າງແທ່ນບູຊາ

[໕] ໃນກັບທີ ໑,໗໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຫ້ສ້າງແທ່ນບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງແທ່ນບູຊາ

[໖] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗]　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຊະກະຕິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຊະກະຕິທາຍະກະເຖຣາປະທານທີ ໑ ຈົບ**

## ໔. ໂມຣະຫັດຖິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂມຣະຫັດຖິຍະເຖຣະ

(ພຣະໂມຣະຫັດຖິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙]　ຂ້າພະເຈົ້າຖືວິທາງນົກຍູງເຂົ້າເຝົ້າພຣະຜູ້ຊົງເປັນຜູ້ນຳສັດໂລກ
ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍວິທາງນົກຍູງ

[໑໐]　ດ້ວຍວິທາງນົກຍູງນີ້ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ໄຟ ໓ ກອງຂອງຂ້າພະເຈົ້າດັບສະນິດແລ້ວ
ຂ້າພະເຈົ້າຈຶ່ງໄດ້ຄວາມສຸກອັນໄພບູນ

[໑໑]　ພຣະພຸດທະເຈົ້າ ຊ່າງໜ້າອັດສະຈັນ ພຣະທຳ ຊ່າງໜ້າອັດສະຈັນ
ການທີ່ຂ້າພະເຈົ້າພົບພໍ້ກັບພຣະສາດສະດາ ຊ່າງໜ້າອັດສະຈັນ
ຍ້ອນຖວາຍວິທາງນົກຍູງ
ຂ້າພະເຈົ້າຈຶ່ງໄດ້ສຸກອັນໄພບູນ

[໑໔]　ໄຟ ໓ ກອງ ຂອງຂ້າພະເຈົ້າດັບສະນິດແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໓] ໃນກັບທີ ៩໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍວິຫາງນິກຍູງ

[໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ៣ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ៨
ແລະອະພິນຍາ ៦ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂມຣະທັດຖິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂມຣະທັດຖິຍະເຖຣາປະທານທີ ៨ ຈົບ**

## ៩. ສີຫາສະນະພີຊີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສີຫາສະນະພີຊີຍະເຖຣະ

(ພຣະສີຫາສະນະພີຊີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໗] ຂ້າພະເຈົ້າໄດ້ໄຫວ້ຕົ້ນໂພຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ ໄດ້ຖືພັດວິຊະນີມາຖວາຍງານພັດວີວີພຣະແທ່ນສີຫາສະນະໃນບ່ອນນັ້ນ

[໑៨] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍງານພັດວີວີພຣະແທ່ນສີຫາສະນະໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍງານພັດວີວີ

[໑໙]　　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໐]　　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໑]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສີຫາສະນະພິຊິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ສີຫາສະນະພິຊິຍະເຖຣາປະທານທີ ໓ ຈົບ**

## ໔. ຕິນຸກາກະທາຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນຸກາກະທາຣິຍະເຖຣະ

(ພຣະຕິນຸກາກະທາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໒]　　ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖືຄົບເພີງ ໓ ດວງ (ບູຊາ)
ທີ່ໃກ້ຕົ້ນໂພເຊິ່ງເປັນຕົ້ນໄມ້ທີ່ປະເສີດຂອງພຣະພຸດທະເຈົ້າ
ພຣະນາມວ່າປະທຸມຸດຕະຣະ

[໘໓]　　ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖືຄົບເພີງ (ບູຊາ)
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຄົບເພີງ

[໘໔]　　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິນຸກາກະທາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕິນຸກາກະທາຣິຍະເຖຣາປະທານທີ ໔ ຈົບ**

## ໕. ອັກກະມະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັກກະມະນະທາຍະກະເຖຣະ

(ພຣະອັກກະມະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ຂ້າພະເຈົ້າໄດ້ຖວາຍສະຫຼອງພຣະບາດແດ່ ພຣະພຸດທະເຈົ້າ
ພຣະນາມວ່າກະກຸສັນທະ
ຜູ້ຊົງເປັນນັກປາດ ລອຍບາບໄດ້ແລ້ວ ຢູ່ຈົບພົມມະຈັນ
ຜູ້ຊົງດຳເນີນໄປສູ່ທີ່ປະທັບໃນເວລາກາງເວັນ

[໔໘] ໃນພັດທະກັບນີ້ ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍສະຫຼອງພຣະບາດ

[໔໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໑ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັກກະມະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອັກກະມະນະທາຍະກະເຖຣາປະທານທີ ໕ ຈົບ**

## ໒. ວະນະໂກຣັນທິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວະນະໂກຣັນທິຍະເຖຣະ

(ພຣະວະນະໂກຣັນທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ຂ້າພະເຈົ້າຖືດອກອັງຂາບປ່າມາບູຊາ
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໑໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວະນະໂກຣັນທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ວະນະໂກຣັນທິຍະເຖຣາປະທານທີ ໖ ຈົບ**

## ໗. ເອກະສັດຕິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະສັດຕິຍະເຖຣະ

(ພຣະເອກະສັດຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗] ແຜ່ນດິນຮ້ອນດັ່ງຖ່ານເພີງ ແຜ່ນດິນເໝືອນມີຂີ້ເຖົ່າໄຫຼໄປ
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ສະເດັດຈົງກົມຢູ່ທີ່ກາງແຈ້ງ

[໓໘] ຂ້າພະເຈົ້າກັ້ງຄັນຮົ່ມຂາວເດີນທາງໄກ
ຍ້ອນເຫັນພຣະສຳມາສຳພຸດທະເຈົ້າຢູ່ກາງແຈ້ງນັ້ນ
ຂ້າພະເຈົ້າຈຶ່ງເກີດຄວາມຄິດແນວນີ້ວ່າ

[໓໙] ພື້ນດິນປົກຄຸມດ້ວຍພະຍັບແດດ
ແຜ່ນດິນນີ້ຈຶ່ງເປັນເໝືອນຖ່ານເພີງ
ພາຍຸໃຫຍ່ທີ່ຈະພັດຮ່າງກາຍໃຫ້ລອຍຂຶ້ນກໍຜາກົດ

[໔໐] ຄວາມໜາວ ຄວາມຮ້ອນ ຍ່ອມເຮັດໃຫ້ລຳບາກ
ຂໍພຣະອົງໂຜດຮັບຄັນຮົ່ມນີ້ໄວ້ເປັນເຄື່ອງກັ້ງລົມແລະແດດເທີ້ນ
ຂ້າພະເຈົ້າຈັກໄດ້ສຳຜັດພຣະນິບພານແດ່

[໔໑] ໃນຄັ້ງນັ້ນ ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງອະນຸເຄາະ ປະກອບດ້ວຍພຣະກະລຸນາ
ມີພຣະຍົດຍິ່ງໃຫຍ່ ຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວຊົງຮັບໄວ້

[໔໔] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໓໐ ກັບ
ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ

[໔໓] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຂ້າພະເຈົ້າສະເຫວີຍຜົນກຳຂອງຕົນທີ່ໄດ້ເຮັດໄວ້ດີແລ້ວໃນປາງກ່ອນ

[໔໔] ຊາດນີ້ເປັນຊາດສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນວັນນີ້ຊົນທັງຫຼາຍກໍພາກັນກັ້ງຮົ່ມຂາວ
ໃຫ້ຂ້າພະເຈົ້າຕະຫຼອດການທຸກເມື່ອ

[໔໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຮົ່ມໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຄັນຮົ່ມ

[໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະສັດຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະສັດຕິຍະເຖຣາປະທານທີ ໗ ຈົບ**

## ໗. ຊາຕິປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຊາຕິປຸບຜິຍະເຖຣະ

(ພຣະຊາຕິປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ມີພຣະຍົດຍິ່ງໃຫຍ່ປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ຖືຜະອົບເຊິ່ງເຕັມດ້ວຍດອກໄມ້
ໄປບູຊາພຣະສະຣີຣະຂອງພຣະພຸດທະເຈົ້າ

[໕໐] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນການບູຊານັ້ນແລ້ວ
ໄດ້ໄປເກີດຍັງສະຫວັນຊັ້ນນິມມານະຣະດີ
ຂ້າພະເຈົ້າແມ່ນຈະຢູ່ໃນເທວະໂລກ
ກໍຍັງປະພຶດກໍາດີຢູ່

[໕໑] ຝົນດອກໄມ້ຕົກຈາກຟາກຟ້າເພື່ອຂ້າພະເຈົ້າຕະຫຼອດການທັງປວງ
ຂ້າພະເຈົ້າເກີດໃນມະນຸດໂລກແລ້ວກໍຈະເປັນພຣະຣາຊາຜູ້ມີພຣະຍົດໃຫຍ່
[໕໒] ໃນອັດຕະພາບນັ້ນ ຝົນແຫ່ງບຸບຜະຊາດຕົກລົງມາ
ເພື່ອຂ້າພະເຈົ້າຕະຫຼອດເວລາ
ຍ້ອນອານຸພາບແຫ່ງການໃຊ້ດອກໄມ້ບູຊາພຣະສະຣີຣະຂອງພຣະພຸດທະເຈົ້າ
ຜູ້ຊົງເຫັນເຫດທັງປວງ
[໕໓] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກໍາລັງເປັນໄປຢູ່
ແມ່ນໃນວັນນີ້ຝົນດອກໄມ້ກໍຍັງຕົກເພື່ອຂ້າພະເຈົ້າຕະຫຼອດເວລາ
[໕໔] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຣີຣະ

[໕໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຊາຕິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຊາຕິປຸບພິຍະເຖຣາປະທານທີ ໘ ຈົບ**

## ໙. ສັດຕິປັນນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັດຕິປັນນິຍະເຖຣະ

(ພຣະສັດຕິປັນນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໘] ເມື່ອມະຫາຊົນກຳລັງຊ່ອຍກັນນຳພຣະສະຣີຣະຂອງພຣະພຸດທະເຈົ້າໄປ
ເມື່ອກອງບັນເລງຢູ່ ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ດອກມະລິຊ້ອນບູຊາແລ້ວ

[໕໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະສະຣີຣະ

[໖໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໔]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໒ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສັດຕິປັນນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສັດຕິປັນນິຍະເຖຣາປະທານທີ ๙ ຈົບ**

## ໑໐. ຄັນທະປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄັນທະປູຊະກະເຖຣະ

(ພຣະຄັນທະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໓]　ເມື່ອມະຫາຊົນກຳລັງຊ່ອຍກັນເຮັດຈິຕະກາທານຢູ່
ເມື່ອພວກເຂົານຳຂອງຫອມນານາຊະນິດມາ
ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ຂອງຫອມກຳມືໜຶ່ງບູຊາແລ້ວ

[໒໔]　ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາຈິຕະກາທານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໒໕]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໒໒]　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໗]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໒ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄັນທະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄັນທະປູຊະກະເຖຣາປະທານທີ ໑໐ ຈົບ**

**ຊະກະຕິທາຍະກະວັກທີ ໔໖ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ຊະກະຕິທາຍະກະເຖຣາປະທານ
໒. ສີຫາສະນະພີຊີຍະເຖຣາປະທານ
໓. ອັກກະມະນະທາຍະກະເຖຣາປະທານ
໔. ເອກະສັດຕິຍະເຖຣາປະທານ
໕. ສັດຕິປັນນີຍະເຖຣາປະທານ
໖. ໂມຣະຫັດຖິຍະເຖຣາປະທານ
໗. ຕິນຸກກະທາຣິຍະເຖຣາປະທານ
໘. ວະນະໂກຣັນທິຍະເຖຣາປະທານ
໙. ຊາຕິປຸບຜິຍະເຖຣາປະທານ
໑໐. ຄັນທະປູຊະກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໖໗ ຄາຖາ**

# ໕໗. ສາລະກຸສຸມິຍະວັກ

## ໝວດວ່າດ້ວຍພຣະສາລະກຸສຸມິຍະເປັນຕົ້ນ

## ໑. ສາລະກຸສຸມິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສາລະກຸສຸມິຍະເຖຣະ

(ພຣະສາລະກຸສຸມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ ປະຣິນິບພານແລ້ວ
ເມື່ອມະຫາຊົນກຳລັງຊ່ອຍກັນຍົກພຣະສະຣີຣະ
ຂອງພຣະພຸດທະເຈົ້າຂຶ້ນເທິງຈິຕະກາທານ
ຂ້າພະເຈົ້າໄດ້ໃຊ້ດອກສາລະບູຊາແລ້ວ

[໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຈິຕະກາທານ

[໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສາລະກຸສຸມິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສາລະກຸສຸມິຍະເຖຣາປະທານທີ ໑ ຈົບ**

## ໘. ຈິດຕະກະປູຊະກະເຖຣາປະທານ
### ປະຫວັດໃນອະດີດຊາດຂອງພຣະຈິດຕະກະປູຊະກະເຖຣະ

(ພຣະຈິດຕະກະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໖] ເມື່ອເທວະດາ ແລະມະນຸດພາກັນຖວາຍພຣະເພີງ
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິຂີ ຜູ້ເປັນເຜົ່າພັນຂອງໂລກ
ຂ້າພະເຈົ້າໄດ້ໃຊ້ດອກຈຳປາ ໗ ດອກບູຊາຈິຕະກາທານ

[໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາ (ຈິຕະກາທານ) ໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈິດຕະກະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການດັ່ງນີ້

**ຈິດຕະກະປູຊະກະເຖຣາປະທານທີ ໘ ຈົບ**

## ໙. ຈິດຕະກະນິບພາປະກະເຖຣາປະທານ
### ປະຫວັດໃນອະດີດຊາດຂອງພຣະຈິດຕະກະນິບພາປະກະເຖຣະ

(ພຣະຈິດຕະກະນິບພາປະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໑໑] ເມື່ອເທວະດາ ແລະມະນຸດທັງຫຼາຍພາກັນຖວາຍພຣະເພີງ
ພຣະສະຣີຣະຂອງພຣະພຸດທະເຈົ້າພຣະນາມວ່າ ເວດສະພູ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂ້າພະເຈົ້າໄດ້ນຳເອົານ້ຳຫອມມາດັບຈິຕະກາທານ

[໑໒] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ນ້ຳຫອມດັບຈິຕະກາທານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງນ້ຳຫອມ

[໑໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໑໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈິດຕະກະນິບພາປະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຈິດຕະກະນິບພາປະກະເຖຣາປະທານທີ ໓ ຈົບ**

## ໔. ເສຕຸທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເສຕຸທາຍະກະເຖຣະ

(ພຣະເສຕຸທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຫ້ສ້າງຂົວໃນທີ່ສະເພາະພຣະພັກ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ ຜູ້ສະເດັດດຳເນີນຢູ່

[໑໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຫ້ສ້າງຂົວຖວາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຂົວ

[໑໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະເສຕຸທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເສຕຸທາຍະກະເຖຣາປະທານທີ ໔ ຈົບ**

## ໕. ສຸມະນະຕາລະວັນຕິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸມະນະຕາລະວັນຕິຍະເຖຣະ

(ພຣະສຸມະນະຕາລະວັນຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໒໑] ຂ້າພະເຈົ້າໄດ້ຖວາຍວິໃບຕານທີ່ປະດັບດ້ວຍດອກມະລິ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສິດທັດຖະ
ແລ້ວຖວາຍງານພັດວີພຣະພຸດທະອົງຜູ້ມີພຣະຍົດຍິ່ງໃຫຍ່

[໒໒] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍວິໃບຕານໄວ້

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍວີໃບຕານ

[໔໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສຸມະນະຕາລະວັນຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງງນີ້

**ສຸມະນະຕາລະວັນຕິຍະເຖຣາປະທານທີ ໕ ຈົບ**

## ໖. ອະວະຕະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະວະຕະຜະລິຍະເຖຣະ

(ພຣະອະວະຕະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ພຣະປັດເຈກພຸດທະເຈົ້າພຣະນາມວ່າ ສະຕະຣັງສີ
ເປັນພຣະສະຍຳພູ ຜູ້ມີບຸນ
ຜູ້ບໍ່ຊົງພ່າຍແພ້ ຜູ້ຊົງປະສົງວິເວກ
ຕັດສະຮູ້ດ້ວຍພຣະອົງເອງສະເດັດອອກໂຄຈອນບິນທະບາດ

[໔໗] ຂ້າພະເຈົ້າຖືໝາກໄມ້ຢູ່ ໄດ້ເຫັນແລ້ວ
ຈຶ່ງເຂົ້າໄປເຝົ້າພຣະພຸດທະເຈົ້າ ຜູ້ອົງອາດກວ່ານໍຣະຊົນ
ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍໝາກໄມ້

[໔໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະວະຕະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ອະວະຕະຜະລິຍະເຖຣາປະທານທີ ໓ ຈົບ**

## ງ. ລະພຸຊະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະລະພຸຊະຜະລະທາຍະກະເຖຣະ

(ພຣະລະພຸຊະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໔] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຊາວສວນຢູ່ໃນນະຄອນພັນທຸມະດີ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ສະເດັດເຫາະໄປໃນອາກາດ

[໕໓] ຂ້າພະເຈົ້າໄດ້ຖືເອົາໝາກມີ້ປ່າ
ຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

ພຣະພຸດທະເຈົ້າຜູ້ມີພຣະຍົດຍິ່ງໃຫຍ່
ປະທັບຢືນຢູ່ໃນອາກາດນັ້ນເອງ ຊົງຮັບແລ້ວ

[໓໔] ພຣະພຸດທະເຈົ້າພຣະອົງນັ້ນ ເຮັດໃຫ້ຂ້າພະເຈົ້າເກີດຄວາມພໍໃຈ
ນຳຄວາມສຸກມາໃຫ້ໃນປັດຈຸບັນ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ແດ່ ພຣະພຸດທະເຈົ້າດ້ວຍຈິດທີ່ເຫຼື້ອມໃສແລ້ວ

[໓໕] ໄດ້ປະສົບປີຕິອັນໄພບູນ ເປັນສຸກຢ່າງປະເສີດໃນຄັ້ງນັ້ນ
ຣັດຕະນະເກີດຂຶ້ນແກ່ຂ້າພະເຈົ້າຜູ້ເກີດໃນບ່ອນນັ້ນ ໆ

[໓໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກມີ້ປ່າ

[໓໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະລະພຸຊະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ລະພຸຊະຜະລະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ມິລັກຂຸຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມິລັກຂຸຜະລະທາຍະກະເຖຣະ

(ພຣະມິລັກຂຸຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າອັດຖະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ຢູ່ໃນປ່າ ເປັນຜູ້ມີຈິດເຫຼື້ອມໃສ
ມີໃຈຍິນດີ ໄດ້ຖວາຍໝາກໄຮຍ້ອຍ

[໔໑] ໃນກັບທີ ໑,໗໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄຮຍ້ອຍ

[໔໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມີລັກຂຸຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມີລັກຂຸຜະລະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ສະຍຳປະຕິພານິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະຍຳປະຕິພານິຍະເຖຣະ

(ພຣະສະຍຳປະຕິພານິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໕] ພຣະພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນ
ຜູ້ເປັນເທບຍິ່ງກວ່າເທບ ງາມເໝືອນດອກຊ່າງ (ກຸ່ມ)
ຜູ້ສະເດັດດຳເນີນຢູ່ທີ່ຖະໜົນ ໃຜບໍເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໖] ພຣະພຸດທະເຈົ້າຜູ້ກໍາຈັດຄວາມມືດມົນໃຫ້ພິນາດ
ຊົງຊ່ອຍໃຫ້ຊົນຈໍານວນຫຼາຍຂ້າມພົ້ນ
ສ່ອງແສງຢູ່ດ້ວຍແສງສະຫວ່າງຄືຍານ
ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໗] ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນໍາສັດໂລກ
ກໍາລັງສະເດັດອອກໄປພ້ອມກັບພຣະຂີນາສົບຜູ້ໄດ້ວະສີ
ຈໍານວນ ໑໐,໐໐໐ ອົງ
ຜູ້ຊົງຊ່ອຍສັດຈໍານວນຫຼາຍໃຫ້ຂ້າມພົ້ນຈາກເປືອກຕົມຄືການ
ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໘] ພຣະພຸດທະເຈົ້າຜູ້ຕີກອງຄື ພຣະທໍາ ຍໍ່າຍີໝູ່ເດຍຣະຖີ
ຊົງບັນລືສີຫະນາດ ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໔໙] ເທບທັງຫຼາຍພ້ອມທັງພົມທຸກໝູ່ເຫຼົ່າພາກັນມາຈາກພົມມະໂລກ
ແລ້ວທູນຖາມບັນຫາທີ່ເລິກເຊິ່ງກັບພຣະພຸດທະເຈົ້າ
ຜູ້ໃດນໍເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໐] ມະນຸດພ້ອມທັງເທວະດາພາກັນມາປະນົມມື
ແດ່ພຣະພຸດທະເຈົ້າພຣະອົງໃດ
ຍ່ອມໄດ້ສະເຫວີຍບຸນດ້ວຍການເຮັດອັນຊະລີກໍານັ້ນ
ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໑] ຊົນທັງປວງມາປະຊຸມຫ້ອມລ້ອມພຣະພຸດທະເຈົ້າ
ຜູ້ມີພຣະຈັກຂຸ ພຣະອົງໄດ້ຮັບນິມົນ (ເພື່ອຕອບບັນຫາ)
ແຕ່ບໍ່ຊົງຫວັ່ນໄຫວ ຜູ້ໃດນໍເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໒] ເມື່ອພຣະພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນພຣະອົງໃດ
ສະເດັດເຂົ້າພຣະນະຄອນ ກອງຈໍານວນຫຼາຍປະໂຄມຕີກຶກກ້ອງ
ຄົດຊະສານທີ່ຕົກມັນກໍພາກັນບັນລືສຽງ
ພຣະພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນພຣະອົງນັ້ນ
ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໓] ເມື່ອພຣະພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນພຣະອົງໃດ
ສະເດັດດຳເນີນໄປຕາມຖະໜົນ ພຣະຣັດສະໝີຍ່ອມສ່ອງສະຫວ່າງທຸກເມື່ອ
ທັງບ່ອນຫຼຸບບ່ອນໂນນກໍກາຍເປັນບ່ອນສະໝ່ຳສະເໝີ
ພຣະພຸດທະເຈົ້າພຣະອົງນັ້ນ ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໔] ເມື່ອພຣະພຸດທະເຈົ້າຕັດຢູ່ ໝູ່ສັດໃນຈັກກະວານໄດ້ຍິນກັນທົ່ວ
ພຣະອົງຊົງສາມາດຍັງສັດໂລກໃຫ້ຮູ້ຊັດແຈ້ງໄດ້ທົ່ວກັນ
ຜູ້ໃດນໍ ເຫັນແລ້ວຈະບໍ່ເຫຼື້ອມໃສ

[໕໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສະດຸດີພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສະດຸດີ

[໕໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສະຍຳປະຕິພານິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສະຍຳປະຕິພານິຍະເຖຣາປະທານທີ ໗ ຈົບ**

# ໑໐. ນິມິດຕະພະຍາກະຣະນິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນິມິດຕະພະຍາກອນນິຍະເຖຣະ

(ພຣະນິມິດຕະພະຍາກອນນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໙] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຂົ້າປ່າຫິມະພານບອກມົນຢູ່
ສິດ ໕໔,໐໐໐ ຄົນ ໄດ້ອຸປັດຖາກຂ້າພະເຈົ້າ

[໖໐] ສິດເຫຼົ່ານັ້ນລ້ວນເປັນນັກສຶກສາຈົບໄຕຣເພດ
ເຖິງຄວາມສຳເລັດໃນເວທາງຄະສາດ ໖ ສາຂາ
ພວກເຂົາກະດ້າງຍ້ອນວິດຊາຂອງຕົນ ຢູ່ໃນປ່າຫິມະພານ

[໖໑] ເທບພະບຸດຜູ້ມີຍົດຍິ່ງໃຫຍ່ ເປັນຜູ້ມີສະຕິສຳປະຊັນຍະ
ຈຸຕິຈາກສະຫວັນຊັ້ນດຸສິດແລ້ວ ອຸບັດໃນທ້ອງມານດາ

[໖໒] ເມື່ອພຣະສຳມາສຳພຸດທະເຈົ້າສະເດັດອຸບັດຂຶ້ນ
ໝື່ນຈັກກະວານກໍຫວັ່ນໄຫວ
ຄົນຕາບອດກັບເບິ່ງເຫັນໄດ້
ໃນເມື່ອພຣະຜູ້ຊົງເປັນຜູ້ນຳສະເດັດອຸບັດຂຶ້ນ

[໖໓] ແຕ່ພື້ນພະສຸທາທັງໝົດນີ້ສັ່ນສະເທືອນຍ້ອນເຫດ ໓ ປະການ
ມະຫາຊົນໄດ້ສະດັບສຽງກຶກກ້ອງແລ້ວ ພາກັນຫວາດຜະຫວາ

[໖໔] ຊົນທັງປວງປະຊຸມກັນແລ້ວ
ໄດ້ພາກັນມາຍັງສຳນັກຂອງຂ້າພະເຈົ້າຖາມວ່າ
ພື້ນພະສຸທານີ້ສັ່ນສະເທືອນ ຈັກມີຜົນເປັນແນວໃດ

[໖໕] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ພະຍາກອນແກ່ພວກເຂົາວ່າ
ຢ່າຢ້ານເລີຍ ທ່ານທັງຫຼາຍບໍ່ມີໄພ
ຂໍທ່ານທັງຫຼາຍແມ່ນທຸກຄົນຈົ່ງເບົາໃຈເທີ້ນ
ຄວາມອຸບັດຂຶ້ນນີ້ປະກອບດ້ວຍປະໂຫຍດສຸກ

[໖໖] ພື້ນພະສຸທາຖືກເຫດ ໘ ປະການກະທົບແລ້ວຍ່ອມສັ່ນສະເທືອນ
ນິມິດຍ່ອມຜາກົດໂດຍອາການເຊັ່ນດຽວກັນ
ໂອພາດກໍໄພບູນຍິ່ງໃຫຍ່

[໖໗] ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ຜູ້ມີພຣະຈັກຂຸ
ຈັກສະເດັດອຸບັດຂຶ້ນຢ່າງບໍ່ຕ້ອງສົງໄສ
ຂ້າພະເຈົ້າເຮັດໃຫ້ຊຸມນຸມຊົນເຂົ້າໃຈດີແລ້ວ ໄດ້ບອກປັນຈະສີນ

[໖໘] ພວກເຂົາໄດ້ສະດັບປັນຈະສີນ
ແລະການອຸບັດຂຶ້ນຂອງພຣະພຸດທະເຈົ້າທີ່ໄດ້ໂດຍຍາກ
ຈຶ່ງເກີດປີຕິຊາບຊ່ານ ມີໃຈຍິນດີ ພາກັນຍິນດີຮ່າເຣີງ

[໖໙] ໃນກັບທີ ໗໘ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ພະຍາກອນນິມິດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການພະຍາກອນ

[໗໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນິມິດຕະພະຍາກອນນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນິມິດຕະພະຍາກະຣະນິຍະເຖຣາປະທານທີ ໑໐ ຈົບ**

**ສາລະກຸສຸມີຍະວັກທີ ໔໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ສາລະກຸສຸມິຍະເຖຣາປະທານ

໒. ຈິດຕະກະນິບພາປະກະເຖຣາປະທານ

໓. ສຸມະນະຕາລະວັນຕິຍະເຖຣາປະທານ

໗. ລະພຸຊະຜະລະທາຍະກະເຖຣາປະທານ

໙. ສະຍຳປະຕິພານິຍະເຖຣາປະທານ

໔. ຈິດຕະກະປູຊະກະເຖຣາປະທານ

໖. ເສຕຸທາຍະກະເຖຣາປະທານ

໘. ອະວະຕະຜະລິຍະເຖຣາປະທານ

໙. ມິລັກຂຸຜະລະທາຍະກະເຖຣາປະທານ

໑໐. ນິມິດຕະພະຍາກອນນິຍະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໗໔ ຄາຖາ**

# ໔໗. ນະລະມາລິວັກ

## ໝວດວ່າດ້ວຍພຣະນະລະມາລິຍະເປັນຕົ້ນ

### ໑. ນະລະມາລິຍະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະນະລະມາລິຍະເຖຣະ

(ພຣະນະລະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ
ຜູ້ສົມຄວນຮັບເຄື່ອງບູຊາ ຜູ້ຊົງເປັນຜູ້ນຳສັດໂລກ
ກຳລັງສະເດັດເຫາະໄປທາງອາກາດ

[໒] ຂ້າພະເຈົ້າຈັບພວງມາໄລດອກອໍ້ແລ້ວອອກໄປ ໃນທັນໃດນັ້ນເອງ
ໄດ້ພົບພຣະສຳມາສຳພຸດທະເຈົ້າຜູ້ຂ້າມໂອຄະໄດ້ແລ້ວ
ບໍ່ມີອາສະວະ ໃນບ່ອນນັ້ນ

[໓] ຂ້າພະເຈົ້າມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ໃຊ້ພວງມາໄລດອກອໍ້ບູຊາພຣະສຳມາສຳພຸດທະເຈົ້າຜູ້ເປັນທັກຂິໄນຍະບຸກຄົນ
ມີຄວາມພຽນຫຼາຍ ຜູ້ຊົງອະນຸເຄາະໂລກທັງໝົດ

[໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນະລະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນະລະມາລິຍະເຖຣາປະທານທີ ໑ ຈົບ**

## ໔. ມະນິປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະນິປູຊະກະເຖຣະ

(ພຣະມະນິປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘] ພຣະຊິນະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງປະສົງວິເວກ ສະເດັດເຫາະໄປໃນອາກາດ

[໙] ມີສະໃຫຍ່ຢູ່ໃນບ່ອນບໍ່ໄກປ່າຫິມະພານ ບ່ອນຢູ່ຂອງຂ້າພະເຈົ້າ
ເຊິ່ງບຸນກຳປະກອບດີແລ້ວມີຢູ່ໃນສະໃຫຍ່ນັ້ນ

[໑໐] ຂ້າພະເຈົ້າອອກຈາກບ່ອນຢູ່ແລ້ວໄດ້ເຫັນພຣະຜູ້ຊົງເປັນຜູ້ນຳສັດໂລກ
ຊົງຮຸ່ງເຮືອງເໝືອນຕົ້ນຣາຊະພຶກ
ສ່ອງແສງຄືກັບໄຟທີ່ລຸກສະຫວ່າງແຈ້ງ

[໑໑] ຂ້າພະເຈົ້າໄດ້ເຫັນດອກໄມ້ທີ່ສົດໃສ
ຈຶ່ງຄິດວ່າຈັກບູຊາພຣະຜູ້ຊົງເປັນຜູ້ນຳສັດໂລກ
ເຮັດຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ
ຈຶ່ງໄດ້ໄຫວ້ພຣະສາດສະດາ

[໑໒] ຂ້າພະເຈົ້າຈັບແກ້ວມະນີປະດັບຫົວຂອງຂ້າພະເຈົ້າ
ບູຊາພຣະຜູ້ຊົງເປັນຜູ້ນຳສັດໂລກ
ປາຖະໜາວ່າ ດ້ວຍການບູຊາດ້ວຍແກ້ວມະນີນີ້ ຂໍຈົ່ງມີວິບາກທີ່ດີ

[໑໖] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ປະທັບຢືນຢູ່ໃນອາກາດ ໄດ້ຕັດພຣະຄາຖານີ້ວ່າ

[໑໔] ຂໍຄວາມດໍາຣິຂອງທ່ານນັ້ນຈົ່ງສໍາເລັດເທີ້ນ
ຂໍທ່ານຈົ່ງໄດ້ສຸກອັນໄພບູນເທີ້ນ
ດ້ວຍການບູຊາດ້ວຍແກ້ວມະນີນີ້
ຂໍທ່ານຈົ່ງໄດ້ຮັບຍົດທີ່ຍິ່ງໃຫຍ່ເທີ້ນ

[໑໕] ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດພຣະນາມວ່າ ປະທຸມຸດຕະຣະ
ຕັດສະຣູ້ດ້ວຍພຣະອົງເອງ
ເມື່ອຕັດແກ່ຂ້າພະເຈົ້າຜູ້ຕັ້ງຈິດປາຖະໜາໄວ້ແລ້ວກໍສະເດັດໄປ

[໑໖] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໖໐ ກັບ
ແລະໄດ້ເປັນພຣະເຈົ້າຈັກກະພັດຫຼາຍຮ້ອຍຊາດ

[໑໗] ເມື່ອຂ້າພະເຈົ້າເກີດເປັນເທວະດາ
ຣະລຶກເຖິງບຸບພະກໍາຂຶ້ນມາ
ແກ້ວມະນີຍ່ອມບັງເກີດແກ່ຂ້າພະເຈົ້າ
(ແລະ) ໃຫ້ແສງສະຫວ່າງແກ່ຂ້າພະເຈົ້າ

[໑໘] ສະຕີສາວລ້ວນ ໘໖,໐໐໐ ນາງ
ສວມໃສ່ຜ້າອາພອນຢ່າງງົດງາມ
ຫ້ອຍຕຸ້ມຫູແກ້ວມະນີ ເປັນຜູ້ຮັບໃຊ້ຂອງຂ້າພະເຈົ້າ

[໑໙] ລ້ວນມີໜ້າມົນໃຫຍ່ ມີປີກກະຕິຣ່າເຣີງ ຮູບຮ່າງງົດງາມ
ແອວນ້ອຍແອວບາງ ແວດລ້ອມຂ້າພະເຈົ້າຢູ່ເປັນນິດ
ນີ້ເປັນຜົນແຫ່ງການບູຊາດ້ວຍແກ້ວມະນີ

[໔໐] ສິ່ງຂອງເຄື່ອງປະດັບທີ່ເຮັດດ້ວຍຄໍາ
ແກ້ວມະນີ ແລະແກ້ວທັບທິມ
ເປັນອັນເຮັດດີແລ້ວເພື່ອຂ້າພະເຈົ້າ
ຕາມທີ່ຂ້າພະເຈົ້າຕ້ອງການ

[໔໑] ເຮືອນຍອດ ຖ້ຳທີ່ໜ້າອອນຊອນ
ແລະບ່ອນນອນມີຄ່າຫຼາຍ ດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ກໍບັງເກີດຕາມຄວາມປາຖະໜາ

[໔໘] ການທີ່ເຫຼົ່າສັດໄດ້ເຂົ້າໄປຟັງ
ເປັນລາບທີ່ພວກເຂົາໄດ້ດີແລ້ວ
ເປັນເນື້ອນາບຸນຂອງມະນຸດ
ເປັນໂອສົດຂອງສັບພະສັດ

[໔໙] ເຖິງກຳທີ່ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະຜູ້ຊົງເປັນຜູ້ນຳ
ກໍຊື່ວ່າເຮັດໄວ້ດີແລ້ວ ຂ້າພະເຈົ້າເປັນຜູ້ລອດພົ້ນຈາກນະຮົກ
ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໔໔] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄື ຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ແສງສະຫວ່າງຍ່ອມມີແກ່ຂ້າພະເຈົ້າທຸກເມື່ອ
ທັງກາງເວັນແລະກາງຄືນ

[໔໕] ຍ້ອນການບູຊາດ້ວຍແກ້ວມະນີນັ້ນ
ຂ້າພະເຈົ້າຈຶ່ງໄດ້ສະເຫວີຍສົມບັດ
ພົບແສງສະຫວ່າງຄືຍານ ໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໔໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ແກ້ວມະນີບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາດ້ວຍແກ້ວມະນີ

[໔໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະນິປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມະນິປູຊະກະເຖຣາປະທານທີ ໔ ຈົບ**

## ໕. ອຸກກາສະຕິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸກກາສະຕິກະເຖຣະ

(ພຣະອຸກກາສະຕິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໐] ໃນຄັ້ງນັ້ນ ພຣະປັດເຈກພຸດທະເຈົ້ານາມວ່າ ໂກສິກະ
ຜູ້ມີບຸນ ມີປົກກະຕິເຂົ້າຊານ ຍິນດີໃນຊານ ຜູ້ຊີງເປັນພຸດທະ
ຍິນດີໃນວິເວກ ເປັນພຣະມຸນີປະທັບຢູ່ທີ່ພູເຂົາຈິດຕະກູດ

[໕໑] ຂ້າພະເຈົ້າມີໝູ່ນາຣີຫ້ອມລ້ອມເຂົ້າໄປສູ່ປ່າຫິມະພານ
ໄດ້ເຫັນພຣະປັດເຈກພຸດທະເຈົ້າພຣະນາມວ່າໂກສິກະ
ຜູ້ຮຸ່ງເຮືອງດັ່ງດວງຈັນໃນວັນເພັງ

[໕໔] ໃນຄັ້ງນັ້ນ ຂ້າພະເຈົ້າຖືຄົບເພີງ ໑໐໐ ດວງ
ແວດລ້ອມພຣະປັດເຈກພຸດທະເຈົ້າຢູ່ຕະຫຼອດ ໆ ວັນ ໆ ຄືນ
ວັນທີ ໗ ກໍໄດ້ຈາກໄປ

[໕໕] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ
ຂາບໄຫວ້ພຣະປັດເຈກພຸດທະເຈົ້າພຣະນາມວ່າໂກສິກະ
ຜູ້ເປັນພຣະສະຍຳພູ ຜູ້ບໍ່ຊີງພ່າຍແພ້
ສະເດັດອອກຈາກສະມາບັດແລ້ວໄດ້ຖວາຍພິກສາມື້ໜຶ່ງ

[໕໔] ຂ້າແຕ່ພຣະອົງຜູ້ເປັນຈອມແຫ່ງເທວະດາແລະມະນຸດ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ

ຍ້ອນກຳນັ້ນ ຂ້າພະເຈົ້າໄດ້ເກີດຂຶ້ນໃນໝູ່ເທບຊັ້ນດຸສິດ
ນີ້ເປັນຜົນແຫ່ງການຖວາຍພິກສາມື້ໜຶ່ງ

[໓໕] ແສງສະຫວ່າງຍ່ອມມີແກ່ຂ້າພະເຈົ້າທຸກເມື່ອທັງກາງເວັນແລະກາງຄືນ
ຂ້າພະເຈົ້າແຜ່ຣັດສະໝີໄປໄດ້ ໑໐໐ ໂຍດໂດຍຮອບ

[໓໖] ໃນກັບທີ ໕໕ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເປັນພຣະເຈົ້າຈັກກະພັດຜູ້ມີໄຊຊະນະ
ເປັນໃຫຍ່ໃນຊົມພູທະວີບ ມີມະຫາສະມຸດທັງ ໔ ເປັນຂອບເຂດ

[໓໗] ໃນຄັ້ງນັ້ນ ນະຄອນຂອງຂ້າພະເຈົ້າເປັນນະຄອນທີ່ມັ່ງຄັ່ງແຜ່ໄພສານ
ແລະສ້າງໄວ້ຢ່າງສວຍງາມ ຍາວ ໓໐ ໂຍດ
ກວ້າງ ໒໐ ໂຍດ

[໓໘] ເມືອງຫຼວງຊື່ໂສພະນະທີ່ວິດສຸກຳເທບພະບຸດເນຣະມິດໃຫ້
ເປັນນະຄອນທີ່ສະຫງັດຈາກສຽງ ໑໐ ປະການ[๑]
ແຕ່ປະກອບດ້ວຍສຽງກັງສະດານຢ່າງມ່ວນ

[໓໙] ໃນນະຄອນນັ້ນບໍ່ມີໄມ້ເຄືອ ໄມ້ຕົ້ນແລະດິນ
ເມືອງຫຼວງນັ້ນສຳເລັດດ້ວຍຄຳລ້ວນ ໆ
ສ່ອງແສງຢູ່ຕະຫຼອດການເປັນນິດ

[໔໐] ເມືອງຫຼວງນັ້ນມີກຳແພງລ້ອມເຖິງ ໔ ຊັ້ນ
໓ ຊັ້ນເປັນກຳແພງທີ່ເຮັດດ້ວຍແກ້ວມະນີ
ສ່ວນສູນກາງວິດສຸກຳເທບພະບຸດໄດ້ເນຣະມິດແຖວແຫ່ງດົງຕານໄວ້

[໔໑] ມີສະໂບກຂະຣະນີໜຶ່ງໝື່ນ
ທີ່ປົກຄຸມໄປດ້ວຍດອກປະທຸມມະຊາດແລະດອກອຸບົນ
ເດຍລະດາດດ້ວຍດອກບຸນທະຣິກເປັນຕົ້ນ
ເມື່ອລົມພັດໂຊຍກໍມີກິ່ນຕ່າງ ໆ ຫອມຫວນ

[໔໒] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖືຄົບເພີງຖວາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖືຄົບເພີງຖວາຍ

[໔໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຸກກາສະຕິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸກກາສະຕິກະເຖຣາປະທານທີ ໓ ຈົບ**

## ໔. ສຸມະນະວີຊະນີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸມະນະວີຊະນີຍະເຖຣະ

(ພຣະສຸມະນະວີຊະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າມີໃຈຍິນດີ ໄດ້ຈັບພັດວີຊະນີພັດວີຕົ້ນໂພທີ່ປະເສີດ
ຢູ່ທີ່ເຫງົ້າຕົ້ນໂພເຊິ່ງເປັນຕົ້ນໄມ້ທີ່ປະເສີດ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ

[໔໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ພັດວີຕົ້ນໂພທີ່ປະເສີດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການພັດວີ

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລໄດ້ຮູ້ວ່າ ທ່ານພຣະສຸມະນະວິຊະນີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສຸມະນະວິຊະນີຍະເຖຣາປະທານທີ ໔ ຈົບ**

## ໕. ກຸມມາສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸມມາສະທາຍະກະເຖຣະ

(ພຣະກຸມມາສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າເຫັນບາດທີ່ວ່າງເປົ່າຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ສະເດັດທ່ຽວສະແຫວງຫາບິນທະບາດຢູ່
ຈຶ່ງຖວາຍເຂົ້າໜົມກຸມມາດຈົນເຕັມບາດ

[໕໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍພິກສາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າໜົມກຸມມາດ

[໕໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸມມາສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸມມາສະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ກຸສັດຖະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸສັດຖະກະທາຍະກະເຖຣະ

(ພຣະກຸສັດຖະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໖] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍສະລາກພັດ ໘ ເທື່ອ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ
ຜູ້ປະເສີດ ຢູ່ຈົບພົມມະຈັນແລ້ວ

[໕໗] ໃນກັບນີ້ເອງ ຂ້າພະເຈົ້າໄດ້ຖວາຍສະລາກພັດ ໘ ເທື່ອ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍສະລາກພັດ ໘ ເທື່ອ

[໕໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸສັດຖະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸສັດຖະກະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ຄິຣິປຸນນາຄິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄິຣິປຸນນາຄິຍະເຖຣະ

(ພຣະຄິຣິປຸນນາຄິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໖໑] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ໂສພິຕະ
ປະທັບຢູ່ທີ່ພູເຂົາຈິດຕະກູດ
ຂ້າພະເຈົ້າໄດ້ຖືດອກບຸນນາກໃຫຍ່ໄປບູຊາພຣະສະຍຳພູ

[໖໒] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະສຳມາສຳພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໓] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໒ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄິຣິປຸນນາຄິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄິຣິປຸນນາຄິຍະເຖຣາປະທານທີ ໗ ຈົບ**

## ໘. ວັນລິກາຣະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວັນລິກາຣະຜະລະທາຍະກະເຖຣະ

(ພຣະວັນລິກາຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໒໒] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸມະນະ
ປະທັບຢູ່ໃນນະຄອນຕັກກະຣາ
ຂ້າພະເຈົ້າໄດ້ຈັບໝາກໄມ້ເຄືອເຖົາຖວາຍພຣະສະຍຳພູ

[໒໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້ເຄືອເຖົາ

[໒໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໒໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະວັນລິກາຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ວັນລິກາຣະຜະລະທາຍະກະເຖຣາປະທານທີ ໘ ຈົບ**

## ໙. ປານະທິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປານະທິທາຍະກະເຖຣະ

(ພຣະປານະທິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ ຜູ້ມີພຣະຈັກຂຸ
ສະເດັດອອກຈາກທີ່ປະທັບກາງເວັນແລ້ວສະເດັດຂຶ້ນສູ່ຖະໜົນ

[໗໒] ຂ້າພະເຈົ້າສຸບເກີບທີ່ເຮັດຢ່າງດີອອກເດີນທາງໄກ
ໄດ້ເຫັນພຣະສໍາມາສໍາພຸດທະເຈົ້າຜູ້ມີພຣະຮູບງົດງາມໜ້າເບິ່ງໜ້າຊົມໃນບ່ອນນັ້ນ
ສະເດັດດໍາເນີນດ້ວຍພຣະບາດເປົ່າ

[໗໓] ຂ້າພະເຈົ້າເຮັດຈິດຂອງຕົນໃຫ້ເຫຼື້ອມໃສ
ປົດເກີບອອກວາງໄວ້ແທບພຣະບາດ
ແລ້ວໄດ້ຂາບທູນຄໍານີ້ວ່າ

[໗໔] ຂ້າແຕ່ພຣະສຸຄົດເຈົ້າ ຜູ້ມີຄວາມພຽນຫຼາຍ
ຜູ້ເປັນໃຫຍ່ ຜູ້ຊົງເປັນຜູ້ນໍາວິເສດ
ຂໍເຊີນພຣະອົງສຸບເກີບເທີ້ນ
ຂ້າພຣະອົງຈັກໄດ້ຜົນຈາກເກີບຄູ່ນີ້
ຂໍຄວາມຕ້ອງການຂອງຂ້າພຣະອົງຈົ່ງສໍາເລັດເທີ້ນ

[໗໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອະໂນມະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ຊົງສຸບເກີບແລ້ວ ໄດ້ຕັດພຣະດໍາຣັດນີ້ວ່າ

[໗໖] ເຮົາຈັກພະຍາກອນຜູ້ທີ່ເຫຼື້ອມໃສໄດ້ຖວາຍເກີບແກ່ເຮົາ
ດ້ວຍມືທັງ ໔ ຂອງຕົນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໗໗] ເທວະດາທັງປວງທີ່ຮູ້ພຸດທະດຳຣັດແລ້ວຈຶ່ງພາກັນມາປະຊຸມ
ຕ່າງກໍມີຈິດເບີກບານ ມີໃຈຍິນດີ
ເກີດຄວາມໂສມະນັດປະນົມມື

[໗໘] ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ
ຍ້ອນການຖວາຍເກີບນີ້ແລ
ຜູ້ນີ້ຈັກເປັນຜູ້ມີຄວາມສຸກ
ແລະຈັກຄອງເທວະສົມບັດຕະຫຼອດ ໕໕ ຊາດ

[໗໙] ຈັກໄດ້ເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ
ແລະຈັກໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໘໐] ໃນກັບທີນັບບໍ່ໄດ້ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຈັກຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໘໑] ຜູ້ນີ້ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງຈັກເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໘໔] ຜູ້ນີ້ຈັກບັງເກີດໃນເທວະໂລກຫຼືມະນຸດໂລກກໍຕາມ
ຈັກເປັນຜູ້ມີປັນຍາ ຈັກໄດ້ຍານເຊິ່ງປຽບດ້ວຍຍານຂອງເທວະດາ

[໘໓] ຂ້າພະເຈົ້າມີຜາສາດ ວໍ ຊ້າງ ທີ່ປະດັບຕົກແຕ່ງຢ່າງສວຍງາມ
ຫຼື ລົດທີ່ທຽມດ້ວຍມ້າອາຊາໄນ
ຍ່ອມຜາກົດມີແກ່ຂ້າພະເຈົ້າທຸກເມື່ອ

[໘໔] ແມ່ນເມື່ອຂ້າພະເຈົ້າອອກບວດ ກໍໄດ້ອອກໄປດ້ວຍລົດ
ໄດ້ບັນລຸອະຣະຫັນຕະຜົນຂະນະແຖຜົມ

[໘໕] ຂໍ້ທີ່ຂ້າພະເຈົ້າປະກອບການຄ້າຂາຍດ້ວຍດີ
(ແລະ) ຂໍ້ທີ່ຂ້າພະເຈົ້າຖວາຍເກີບ ໑ ຄູ່ແລ້ວ

ໄດ້ບັນລຸບົດອັນບໍ່ຫວັ່ນໄຫວນັ້ນ
ເປັນລາບອັນຂ້າພະເຈົ້າໄດ້ດີແລ້ວ

[໘໕] ໃນກັບທີ່ນັບບໍ່ໄດ້ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເກັບໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເກັບ

[໘໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປານະທິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປານະທິທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ປຸນລິນະຈັງກະມິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸນລິນະຈັງກະມິຍະເຖຣະ

(ພຣະປຸນລິນະຈັງກະມິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໙໐] ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ
ສະແຫວງຫາເນື້ອສະມັນຢູ່ໃນປ່າໃຫຍ່ ໄດ້ເຫັນບ່ອນຈົງກົມ

[໙໑] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໃຊ້ສົ້ນແພທີ່ຊາຍມາໂຮຍລົງບ່ອນຈົງກົມຂອງພຣະສຸຄົດເຈົ້າຜູ້ມີພຣະສິຣິ

[໙໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໂຮຍຊາຍໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໂຮຍຊາຍ

[໙໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸນລິນະຈັງກະມິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປຸນລິນະຈັງກະມິຍະເຖຣາປະທານທີ ໑໐ ຈົບ**

**ນະລະມາລິວັກທີ ໔໗ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ນະລະມາລິຍະເຖຣາປະທານ
໓. ອຸກາາສະຕິກະເຖຣາປະທານ
໕. ກຸມມາສະທາຍະກະເຖຣາປະທານ
໗. ຄິຣິປຸນນາຄິຍະເຖຣາປະທານ
໙. ປານະທິທາຍະກະເຖຣາປະທານ
໒. ມະນີປູຊະກະເຖຣາປະທານ
໔. ສຸມະນະວິຊະນິຍະເຖຣາປະທານ
໖. ກຸສັດຖະກະທາຍະກະເຖຣາປະທານ
໘. ວິນລິກາຣະຜະລະທາຍະກະເຖຣາປະທານ
໑໐. ປຸນລິນະຈັງກະມິຍະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໗໕ ຄາຖາ**

# ໔໗. ປັງສຸກູລະວັກ

## ໝວດວ່າດ້ວຍຜ້າບັງສຸກຸນເປັນຕົ້ນ

### ໑. ປັງສຸກູລະສັນຍະກະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະປັງສຸກູລະສັນຍະກະເຖຣະ

(ພຣະປັງສຸກູລະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ຕິດສະ
ຜູ້ຊຶ່ງເປັນພຣະສະຍໍາພູ ຊຶ່ງເປັນຜູ້ນໍາສັດໂລກ
ພຣະຊິນນະເຈົ້າຊຶ່ງວາງຜ້າບັງສຸກຸນໄວ້ແລ້ວ
ສະເດັດເຂົ້າໄປສູ່ພຣະວິຫານ

[໒] ຂ້າພະເຈົ້າພາຍທະນູທີ່ຈັດແຈງໄວ້ແລ້ວ
ແລະກະບອກທີ່ໃສ່ນໍ້າໄວ້ແລ້ວຖືດາບເຂົ້າປ່າໃຫຍ່

[໓] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນຜ້າບັງສຸກຸນເຊິ່ງແຂວນຢູ່ທີ່ປາຍໄມ້ໃນປ່ານັ້ນ
ຈຶ່ງວາງທະນູລົງ ໃນບ່ອນນັ້ນເອງ ແລ້ວປະນົມມືຂຶ້ນເໜືອຫົວ

[໔] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ແລະມີປີຕິອັນໄພບູນ ຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ແລ້ວໄດ້ໄຫວ້ຜ້າບັງສຸກຸນ

[໕] ໃນກັບທີ ໗໒ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໄຫວ້ຜ້າບັງສຸກຸນໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໄຫວ້ຜ້າບັງສຸກຸນ

[໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປັງສຸກູລະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປັງສຸກູລະສັນຍະກະເຖຣາປະທານທີ ໑ ຈົບ**

## ໒. ພຸດທະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພຸດທະສັນຍະກະເຖຣະ

(ພຣະພຸດທະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໙] ຂ້າພະເຈົ້າເປັນຜູ້ສາທະຍາຍພຣະເວດ ຊົງມົນ ຈົບໄຕຣເພດ
ຊຳນານໃນຄຳພີພະຍາກອນລັກສະນະ ຄຳພີອິຕິຫາສະ
ພ້ອມດ້ວຍຄຳພີນິຄັນຖຸສາດ ແລະຄຳພີເກຕຸພະສາດ

[໑໐] ໃນຄັ້ງນັ້ນ ສັດທັງຫຼາຍພາກັນມາຫາຂ້າພະເຈົ້າບໍ່ຂາດສາຍ
ເໝືອນກະແສນ້ຳຂ້າພະເຈົ້າບໍ່ຂີ້ຄ້ານ
ສອນມົນແກ່ສິດເຫຼົ່ານັ້ນທັງກາງເວັນແລະກາງຄືນ

[໑໑] ໃນເວລານັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສິດທັດຖະ
ສະເດັດອຸບັດຂຶ້ນໃນໂລກ ພຣະອົງຊົງກຳຈັດຄວາມມືດມົນໃຫ້ພິນາດແລ້ວ
ໃຫ້ແສງສະຫວ່າງຄືພຣະຍານເປັນໄປ

[໑໒] ໃນຄັ້ງນັ້ນ ສິດຂອງຂ້າພະເຈົ້າຄົນໜຶ່ງ
ໄດ້ບອກແກ່ສິດທັງຫຼາຍຂອງຂ້າພະເຈົ້າ
ພວກເຂົາໄດ້ຟັງຄວາມນັ້ນ ຈຶ່ງບອກແກ່ຂ້າພະເຈົ້າ

[໑໓] ຂ້າພະເຈົ້າຄິດວ່າ ພຣະສັບພັນຍູພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ສະເດັດອຸບັດຂຶ້ນໃນໂລກແລ້ວ
ຊົນຍ່ອມປະພຶດຕາມພຣະພຸດທະເຈົ້າພຣະອົງນັ້ນ ແຕ່ເຮົາບໍ່ມີລາບເລີຍ

[໑໔] ພຣະພຸດທະເຈົ້າທັງຫຼາຍ ເປັນຜູ້ມີການອຸບັດເລີດລອຍ
ມີພຣະຈັກຂຸ ມີພຣະຍົດຍິ່ງໃຫຍ່ ດັ່ງນັ້ນແລ້ວ
ເຮົາຄວນເຂົ້າເຝົ້າພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ຜູ້ຊົງເປັນຜູ້ນຳສັດໂລກ

[໑໕] ຂ້າພະເຈົ້າຖືໜັງສັດ ຜ້າເປືອກໄມ້
ແລະຄົນໂທນ້ຳຂອງຂ້າພະເຈົ້າແລ້ວ ຈຶ່ງອອກຈາກອາສົມ
ຮຽກສິດທັງຫຼາຍມາ (ກ່າວວ່າ)

[໑໖] ຄວາມເປັນພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກນີ້ຫາໄດ້ຍາກ
ເໝືອນຫາດອກໝາກເດື່ອທີ່ດີ ເໝືອນຫາກະຕ່າຍໃນດວງຈັນ
ຫຼືເໝືອນຫານ້ຳນົມກາ

[໑໗] ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວ
ແມ່ນຄວາມເປັນມະນຸດກໍຫາໄດ້ຍາກ ເມື່ອທັງ ໔ ຢ່າງມີຢູ່
ແຕ່ການໄດ້ສະດັບພຣະສັດທຳກໍຫາໄດ້ຍາກຍິ່ງ

[໑໘] ພຣະພຸດທະເຈົ້າສະເດັດອຸບັດຂຶ້ນໃນໂລກແລ້ວ
ຄວາມຈະເລີນຈັກມີແກ່ພວກເຮົາຜູ້ໄດ້ດວງຕາ ມາເທີ້ນທ່ານທັງຫຼາຍ
ເຮົາທຸກຄົນຈັກໄປສູ່ສຳນັກຂອງພຣະສຳມາສຳພຸດທະເຈົ້າ

[໑໙] ສິດທຸກຄົນພາຍຄົນໂທນ້ຳ ນຸ່ງຜ້າໜັງສັດທີ່ມີເລັບ
ໃນຄັ້ງນັ້ນ ພວກເຂົາເກົ້າຊະດາແລະຫາບບໍຣິຂານພາກັນອອກຈາກປ່າໃຫຍ່

[໔໐] ພວກເຂົາທອດສາຍຕາເບິ່ງປະມານຊົ່ວແອກ
ສະແຫວງຫາປະໂຫຍດສູງສຸດ ຍ່າງມາເໝືອນລູກຊ້າງ
ເປັນຜູ້ບໍ່ສະດຸ້ງ ເໝືອນພະຍາໄກສອນຣາດຊະສີ

[໔໑] ພວກເຂົາບໍ່ມີຄວາມສະດຸ້ງ ໝົດຄວາມລະໂມບ
ມີປັນຍາຮັກສາຕົນ ມີຄວາມປະພຶດສະງົບ
ທ່ຽວໄປພ້ອມດ້ວຍສະບຽງເຂົ້າໄປໃກ້ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໔] ໃນຣະຍະທາງ ໑ ໂຍດເຄິ່ງ ຂ້າພະເຈົ້າໄດ້ເກີດເຈັບປ່ວຍຂຶ້ນ
ຈຶ່ງຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດແລ້ວສິ້ນຊີວິດໃນບ່ອນນັ້ນ

[໔໓] ໃນກັບທີ ໗໔ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ສັນຍາໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການໄດ້ສັນຍາໃນພຣະພຸດທະເຈົ້າ

[໔໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພຸດທະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ພຸດທະສັນຍະກະເຖຣາປະທານທີ ໔ ຈົບ**

## ໓. ພິສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພິສະທາຍະກະເຖຣະ

(ພຣະພິສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ໃນຄັ້ງນັ້ນ ຂ້າພະເຈົ້າລົງສູ່ສະໂບກຂະຣະນີ
ທີ່ຊ້າງນານາຊະນິດອາໄສອາບກິນ
ລົກເຫງົ້າບົວໃນສະນັ້ນ ຍ້ອນເຫດຕ້ອງການຈະກິນ

[໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຜ້າກຳພົນສີແດງ ສະເດັດໄປໃນອາກາດ

[໔໘] ຂະນະນັ້ນ ຂ້າພະເຈົ້າໄດ້ຍິນສຽງຊາຍຜ້າບັງສຸກຸນສະບັດ
ຈຶ່ງແຫງນໜ້າຂຶ້ນເບິ່ງ ກໍໄດ້ເຫັນພຣະຜູ້ຊົງເປັນຜູ້ນຳສັດໂລກ

[໕໐] ຂ້າພະເຈົ້າຢືນຢູ່ທີ່ສະໃບກຂະຣະນີນັ້ນແລ້ວ
ໄດ້ທູນອ້ອນວອນພຣະຜູ້ຊົງເປັນຜູ້ນຳສັດໂລກວ່າ
ນ້ຳຫວານໄຫຼອອກຈາກເຫງົ້າບົວ
ນ້ຳນົມແລະເນີຍໃສໄຫຼອອກຈາກກ້ານບົວ

[໕໑] ຂໍພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ໂຜດຊົງຮັບ (ພິກສາ) ເພື່ອອະນຸເຄາະຂ້າພຣະອົງດ້ວຍເທີ້ນ
ລຳດັບນັ້ນ ພຣະບໍຣົມສາດສະດາຊົງປະກອບດ້ວຍພຣະມະຫາກະລຸນາ
ມີພຣະຍົດຍິ່ງໃຫຍ່ ຈຶ່ງສະເດັດລົງ (ຈາກອາກາດ)

[໕໔] ຊົງຮັບພິກສາຂອງຂ້າພະເຈົ້າ ເພື່ອອະນຸເຄາະ
ເມື່ອແລ້ວພຣະສຳມາສຳພຸດທະເຈົ້າໄດ້ຊົງເຮັດອະນຸໂມທະນາແກ່ຂ້າພະເຈົ້າວ່າ

[໕໕] ທ່ານຜູ້ມີບຸນຫຼາຍ ຂໍຈົ່ງມີຄວາມສຸກເທີ້ນ
ຄະຕິຈົ່ງສຳເລັດແກ່ທ່ານ ດ້ວຍການຖວາຍເຫງົ້າບົວນີ້
ຂໍທ່ານຈົ່ງໄດ້ຮັບຄວາມສຸກອັນໄພບູນເທີ້ນ

[໕໔] ເມື່ອຕັດແລ້ວຢ່າງນີ້
ພຣະຊິນະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຕັດສະຣູ້ເອງ ໄດ້ຊົງຮັບພິກສາແລ້ວສະເດັດໄປທາງອາກາດ

[໕໕] ລຳດັບນັ້ນ ຂ້າພະເຈົ້າເກັບເຫງົ້າບົວກັບມາຍັງອາສົມ
ແຂວນເຫງົ້າບົວໄວ້ເທິງຕົ້ນໄມ້ ຣະລຶກເຖິງທານຂອງຕົນ

[໕໖] ໃນຄັ້ງນັ້ນ ລົມພາຍຸໃຫຍ່ຕັ້ງຂຶ້ນແລ້ວພັດປ່າໃຫ້ປັ່ນປ່ວນ
ອາກາດບັນລືລັ່ນເມື່ອສາຍຟ້າຜ່າລົງມາ

[໕໗] ລຳດັບນັ້ນ ສາຍຟ້າຜ່າລົງໃສ່ຫົວຂອງຂ້າພະເຈົ້າ
ດັ່ງນັ້ນ ຂ້າພະເຈົ້ານັ້ນເປັນຜູ້ນັ່ງຕາຍໃນບ່ອນນັ້ນເອງ

[໓໗] ຂ້າພະເຈົ້າເປັນຜູ້ປະກອບດ້ວຍກຳດີ
ໄປເກີດຍັງສະຫວັນຊັ້ນດຸສິດ ຖິ້ມໄວ້ແຕ່ຊາກສົບ
ແລະຂ້າພະເຈົ້າໄດ້ຮື່ນຣົມຢູ່ໃນເທວະໂລກ

[໓໙] ນາງອັບປະສອນ ໗໖,໐໐໐ ນາງ ລ້ວນປະດັບຕົກແຕ່ງ
ຢ່າງສວຍງາມ ຕ່າງກໍບຳຣຸງຂ້າພະເຈົ້າຢູ່ທຸກເຊົ້າຄ່ຳ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໔໐] ໃນຄັ້ງນັ້ນ ຂ້າພະເຈົ້າມາສູ່ກຳເນີດມະນຸດ
ເປັນຜູ້ມີຄວາມສຸກ ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໔໑] ຂ້າພະເຈົ້າເປັນຜູ້ທີ່ພຣະສຳມາສຳພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບ
ຜູ້ຄົງທີ່ພຣະອົງນັ້ນຊົງອະນຸເຄາະແລ້ວ
ອາສະວະທັງປວງສິ້ນແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຫງົ້າບົວໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໔໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະພິສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ໄວ້ ດ້ວຍປະການດັ່ງນີ້

**ພິສະທາຍະກະເຖຣາປະທານທີ ໓ ຈົບ**

## ໔. ຍານັດຖະວິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຍານັດຖະວິກະເຖຣະ

(ພຣະຍານັດຖະວິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໖] ຂ້າພະເຈົ້າສ້າງອາສົມຢ່າງສວຍງາມໄວ້
ໃນທິດໃຕ້ແຫ່ງພູເຂົາຫິມະພານ
ໃນຄັ້ງນັ້ນ ຂ້າພະເຈົ້າສະແຫວງຫາປະໂຫຍດສູງສຸດ
ຈຶ່ງອາໄສຢູ່ໃນປ່າໃຫຍ່

[໔໗] ຂ້າພະເຈົ້າຍິນດີດ້ວຍຫົວມັນ ແລະໝາກໄມ້ຕາມມີຕາມໄດ້
ບໍ່ທ່ຽວສະແຫວງຫາ ຢູ່ພຽງຜູ້ດຽວ

[໔໘] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ສະເດັດອຸບັດຂຶ້ນໃນໂລກແລ້ວ
ພຣະອົງຊົງປະກາດສັດຈະ ໔ ຊ່ອຍດຶງມະຫາຊົນຂຶ້ນ

[໔໙] ຂ້າພະເຈົ້າບໍ່ໄດ້ສະດັບຂ່າວພຣະສຳມາສຳພຸດທະເຈົ້າ
ແມ່ນໃຜ ໆ ກໍບໍ່ບອກຂ້າພະເຈົ້າ ເມື່ອລ່ວງໄປໄດ້ ໘ ປີ
ຂ້າພະເຈົ້າຈຶ່ງໄດ້ສະດັບຂ່າວພຣະຜູ້ຊົງເປັນຜູ້ນຳສັດໂລກ

[໕໐] ຂ້າພະເຈົ້ານຳໄຟແລະຟືນອອກແລ້ວ
ປັດອາສົມ ທາບບໍຣິຂານອອກຈາກປ່າໃຫຍ່ໄປ

[໕໑] ໃນຄັ້ງນັ້ນ ຂ້າພະເຈົ້າພັກຢູ່ໃນບ້ານ ແລະນິຄົມ ໑ ຄືນ
ເຂົ້າໄປໃກ້ນະຄອນຈັນທະວະດີໂດຍລຳດັບ

[໕໒] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກພຣະນາມວ່າ ສຸເມທະ
ຊົງສະແດງອະມະຕະບົດຊ່ອຍດຶງສັດຈຳນວນຫຼາຍຂຶ້ນ

[໕໓] ຂ້າພະເຈົ້າໄດ້ຜ່ານໝູ່ຊິນເຂົ້າໄປໄຫວ້ພຣະຊິນນະເຈົ້າຜູ້ສະເດັດມາດີແລ້ວ
ຮົ່ມຜ້າໜັງສັດບ່ຽງບ່າຂ້າງໜຶ່ງ
ແລ້ວສັນເສີນພຣະຜູ້ຊົງເປັນຜູ້ນຳສັດໂລກວ່າ

[໕໔] ພຣະອົງຜູ້ເປັນພຣະສາດສະດາຜູ້ສູງສຸດ
ແຫ່ງເທວະດາແລະມະນຸດ ຜູ້ຜາກົດເໝືອນທຸງ
ເປັນເໝືອນທຸງໄຊ ແລະເປັນເໝືອນເສົາພິທີຜູກສັດບູຊາຍັນ
ເປັນທີ່ໝາຍປອງ ເປັນບ່ອນເພິ່ງ ແລະເປັນເໝືອນດວງປະທີບຂອງໝູ່ສັດ

**ພານະວານທີ ໘໑ ຈົບ**

[໕໕] ພຣະອົງເປັນຜູ້ສະຫຼາດ ເປັນນັກປາດໃນຍານທັດສະນະ
ຊົງຊ່ອຍໝູ່ຊິນໃຫ້ຂ້າມພົ້ນໄປໄດ້
ຂ້າແຕ່ພຣະມຸນີ ຜູ້ອື່ນທີ່ຈະຊ່ອຍໝູ່ສັດ
ໃຫ້ຂ້າມພົ້ນ (ວັດຕະສົງສານ) ໄປໄດ້ຍິ່ງກວ່າພຣະອົງບໍ່ມີໃນໂລກ

[໕໖] ມະຫາສະມຸດທີ່ເລິກທີ່ສຸດ ກໍເພິ່ງອາດທີ່ຈະປະມານໄດ້ດ້ວຍປາຍຫຍ້າຄາ
ຂ້າແຕ່ພຣະສັບພັນຍູ ສ່ວນພຣະຍານຂອງພຣະອົງ
ໃຜ ໆ ບໍ່ອາດຈະປະມານໄດ້ເລີຍ

[໕໗] ແຜ່ນດິນກໍອາດຈະວາງລົງເທິງກາຊັ່ງແລ້ວຊັ່ງເບິ່ງໄດ້
ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ແຕ່ສິ່ງທີ່ສະເໝີດ້ວຍພຣະປັນຍາຂອງພຣະອົງບໍ່ມີເລີຍ

[໕໘] ອາກາດກໍອາດຈະແທກໄດ້ດ້ວຍເຊືອກ ແລະນິ້ວມື
ຂ້າແຕ່ພຣະສັບພັນຍູ ສ່ວນສີນຂອງພຣະອົງ
ໃຜ ໆ ບໍ່ອາດຈະປະມານໄດ້ເລີຍ

[໕໙] ນ້ຳໃນມະຫາສະມຸດ ອາກາດ ແລະພື້ນແຜ່ນດິນ
ສິ່ງທັງ ໓ ນີ້ ກໍເພິ່ງອາດປະມານໄດ້
ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ພຣະອົງເປັນຜູ້ທີ່ໃຜ ໆ ຈະປະມານບໍ່ໄດ້ເລີຍ

[໖໐] ຂ້າພະເຈົ້າກ່າວສັນເສີນພຣະສັບພັນຍູ
ຜູ້ມີພຣະຍົດຍິ່ງໃຫຍ່ ດ້ວຍຄາຖາ ໖ ຄາຖາແລ້ວ
ປະນົມມືຢືນນິ່ງຢູ່ໃນເວລານັ້ນ

[໖໑] ພຣະພຸດທະເຈົ້າຜູ້ມີປັນຍາສະເໝີດ້ວຍພື້ນປະຖະພີ
ເປັນເມທີຊັ້ນເລີດ ເຊິ່ງຊົນທັງຫຼາຍຖວາຍພຣະນາມວ່າ ສຸເມທະ
ປະທັບນັ່ງໃນທ່າມກາງໝູ່ພິກຂຸແລ້ວ ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໖໒] ເຮົາຈັກພະຍາກອນຜູ້ທີ່ມີຈິດເຫຼື້ອມໃສ
ໄດ້ກ່າວສັນເສີນຍານຂອງເຮົາ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໖໓] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໗໗ ກັບ
ຈັກເປັນຈອມເທບຄອງເທວະສົມບັດຢູ່ໃນເທວະໂລກຕະຫຼອດ ໑,໐໐໐ ຊາດ

[໖໔] ຈັກໄດ້ເປັນພຣະເຈົ້າຈັກກະພັດຫຼາຍຮ້ອຍຊາດ
ແລະຈັກໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໖໕] ເຂົາຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
ກໍຈັກເປັນຜູ້ໝັ້ນຄົງໃນກໍາດີ
ຈັກເປັນຜູ້ມີຄວາມດໍາຣິບໍ່ບົກຜ່ອງ ມີປັນຍາແຫຼມຄົມ

[໖໖] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໖໗] ຜູ້ນີ້ຈັກບໍ່ມີຄວາມກັງວົນ ອອກບວດ
ຈັກບັນລຸອະຣະຫັນຕະຜົນຕັ້ງແຕ່ອາຍຸໄດ້ ໗ ປີ

[໖໘] ໃນລະຫວ່າງການທີ່ຂ້າພະເຈົ້າຈໍາຄວາມໄດ້
ຈົນເຖິງການບັນລຸສາສະນະທໍານີ້
ຂ້າພະເຈົ້າບໍ່ຮູ້ຈັກຄວາມບໍ່ສະບາຍໃຈເລີຍ

[໖໙] ຂ້າພະເຈົ້າວຽນວ່າຍຕາຍເກີດ ສະເຫວີຍສົມບັດໃນພົບນ້ອຍພົບໃຫຍ່
ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນໃນການສັນເສີນພຣະຍານ

[໗໐] ໄຟ ໓ ກອງ ຂ້າພະເຈົ້າດັບໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ອາສະວະທັງປວງສິ້ນແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໗໑] ໃນກັບທີ ໖໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ສັນເສີນພຣະຍານໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນໃນການສັນເສີນພຣະຍານ

[໗໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໖ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍານັດຖະວິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຍານັດຖະວິກະເຖຣາປະທານທີ ໔ ຈົບ**

## ໕. ຈັນທະນະມາລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈັນທະນະມາລິຍະເຖຣະ

(ພຣະຈັນທະນະມາລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໕] ຂ້າພະເຈົ້າລະປັນຈະກາມມະຄຸນທີ່ໜ້າຍິນດີ ໜ້າພໍໃຈ
ແລະລະຊັບປະມານ ໘໐ ໂກດແລ້ວ ຈຶ່ງອອກບວດເປັນບັນພະຊິດ

[໗໙] ເມື່ອບວດແລ້ວ ໄດ້ເວັ້ນກາຍທຸດຈະຣິດ
ລະວະຈີທຸດຈະຣິດ ອາໄສຢູ່ແຄມຝັ່ງແມ່ນ້ຳ

[໓໗] ຂ້າພະເຈົ້າຢູ່ຄົນດຽວ ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ໄດ້ສະເດັດມາໃກ້ ຂ້າພະເຈົ້າບໍ່ຮູ້ວ່າເປັນພຣະພຸດທະເຈົ້າ
ແຕ່ກໍໄດ້ກະທໍາການປະຕິສັນຖານ

[໓໘] ເມື່ອກະທໍາການປະຕິສັນຖານແລ້ວ ຈຶ່ງໄດ້ທູນຖາມເຖິງຊື່ ແລະໂຄດວ່າ
ທ່ານເປັນເທວະດາ ຫຼື ຄົນທັນ ຫຼື ເປັນທ້າວສັກກະປຸຣິນທະທະ

[໓໙] ທ່ານເປັນໃຜ ຫຼື ເປັນບຸດຂອງໃຜ
ຫຼື ເປັນທ້າວມະຫາພົມມາໃນທີ່ນີ້
ສະຫວ່າງສະໄຫວໄປທົ່ວທຸກທິດ ເໝືອນດວງອາທິດອຸໄທ

[໔໐] ຂ້າແຕ່ທ່ານຜູ້ນິຣະທຸກ ກົງຈັກມີກໍາພັນໜຶ່ງຜາກົດຢູ່ຕີນຂອງທ່ານ
ທ່ານເປັນໃຜ ຫຼື ເປັນບຸດຂອງໃຜ ເຮົາຈັກຮູ້ຈັກທ່ານໄດ້ແນວໃດ
ຂໍທ່ານຈົ່ງບອກຊື່ແລະໂຄດ ຂະຈັດຄວາມສົງໄສຂອງເຮົາເທີ້ນ

[໔໑] ພຣະພຸດທະເຈົ້າຕັດວ່າ ເຮົາບໍ່ແມ່ນເທວະດາ
ບໍ່ແມ່ນຄົນທັນ ບໍ່ແມ່ນທ້າວສັກກະປຸຣິນທະທະ
ແລະເຮົາບໍ່ໄດ້ເປັນພົມ
ເຮົາເປັນຜູ້ສູງສົ່ງກວ່າຊົນເຫຼົ່ານັ້ນ

[໔໒] ລ່ວງວິໄສຂອງຊົນເຫຼົ່ານັ້ນ
ທໍາລາຍເຄື່ອງຜູກມັດຄືກາມໄດ້ແລ້ວ
ເຜົາກິເລດໝົດແລ້ວ ບັນລຸສໍາໂພທິຍານອັນສູງສຸດ

[໔໓] ຂ້າພະເຈົ້າໄດ້ຟັງພຣະດໍາຣັດຂອງພຣະອົງແລ້ວ
ຈຶ່ງໄດ້ຂາບທູນຄໍານີ້ວ່າ ຂ້າແຕ່ພຣະມະຫາມຸນີ
ຖ້າພຣະອົງເປັນພຣະສັບພັນຍູພຸດທະເຈົ້າ
ຂໍເຊີນພຣະອົງປະທັບນັ່ງເທີ້ນ

[໔໔] ພຣະອົງເຮັດບ່ອນສຸດທຸກໄດ້ ຂ້າພຣະອົງຈັກບູຊາພຣະອົງ
ຂ້າພະເຈົ້າຈຶ່ງໄດ້ປູໜັງສັດຖວາຍພຣະສາດສະດາ

[໔໕] ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງໜັງສັດນັ້ນ
ເໝືອນພະຍາຣາດຊະສີນັ່ງຢູ່ໃນຖໍ້າ
ຂ້າພະເຈົ້າຟ້າວຂຶ້ນພູເກັບໝາກມ່ວງ

[໗໖] ດອກສາລະທີ່ສວຍງາມ ແລະແກ່ນຈັນເຊິ່ງມີຣາຄາຫຼາຍ
ຂ້າພະເຈົ້າຟ້າວຫອບຂອງທັງໝົດເຂົ້າເຝົ້າພຣະຜູ້ຊົງເປັນຜູ້ນຳສັດໂລກ

[໗໗] ໄດ້ຖວາຍໝາກໄມ້ແດ່ພຣະພຸດທະເຈົ້າ ແລ້ວໃຊ້ດອກສາລະບູຊາ
ໄດ້ໃຊ້ແກ່ນຈັນລູບທາແລ້ວໄຫວ້ພຣະສາດສະດາ

[໗໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ມີປິຕິໄພບູນແລ້ວ
ພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກ
ພຣະນາມວ່າສຸເມທະ ປະທັບນັ່ງເທິງໜັງສັດ

[໗໙] ພຣະອົງເມື່ອຈະໃຫ້ຂ້າພະເຈົ້າຍິນດີຍິ່ງ
ໄດ້ຊົງພະຍາກອນກຳຂອງຂ້າພະເຈົ້າໃນຄັ້ງນັ້ນວ່າ
ດ້ວຍການຖວາຍໝາກໄມ້ກັບຂອງຫອມແລະດອກໄມ້ທັງ ໔ ຢ່າງນີ້

[໘໐] ຜູ້ນີ້ຈັກຣື່ນຣົມໃນເທວະໂລກຕະຫຼອດ ໑໔໕ ກັບ
ເຂົາຈັກເປັນຜູ້ມີຄວາມດຳຣິທາງໃຈບໍ່ບົກຜ່ອງ ມີອຳນາດ

[໘໑] ຈັກໄປເກີດເປັນມະນຸດ ໄດ້ເປັນພຣະເຈົ້າຈັກກະພັດຜູ້ມີລິດຫຼາຍ
ມີມະຫາສະມຸດທັງ ໔ ເປັນຂອບເຂດຕະຫຼອດ ໑໔໖ ກັບ

[໘໔] ວິດສຸກຳເທບພະບຸດເນຣະມິດນະຄອນມີນາມວ່າ ເວພາລະ
ນະຄອນນັ້ນຈັກເປັນຄຳລ້ວນ
ປະດັບດ້ວຍຣັດຕະນະຊາດນານາຊະນິດ

[໘໓] ເຂົາຈັກວຽນເກີດວຽນຕາຍໃນກຳເນີດທັງຫຼາຍດ້ວຍອຸປາຍນີ້ແລ
ຈັກເປັນຜູ້ມີຄວາມສຸກທຸກພົບ
ຄືໃນພົບເທວະດາຫຼືພົບມະນຸດ

[໘໔] ເມື່ອເຖິງພົບສຸດທ້າຍ ເຂົາຈັກເກີດເປັນເຜົ່າພັນຂອງທ່ານຜູ້ປະເສີດ
ຈັກອອກບວດເປັນບັນພະຊິດ
ຈັກເປັນຜູ້ບໍ່ອອກປາກຂໍປັດໄຈ ບໍ່ມີອາສະວະແລ້ວນິບພານ

[໘໕] ເມື່ອພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນຳສັດໂລກຕັດແນວນີ້ແລ້ວ
ຂະນະທີ່ຂ້າພະເຈົ້າກຳລັງເພ່ງເບິ່ງຢູ່ ໄດ້ສະເດັດເຫາະໄປໃນອາກາດ

[໙໖] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໙໗] ຈຸຕິຈາກສະຫວັນຊັ້ນດຸສິດແລ້ວ ອຸບັດໃນທ້ອງມານດາ
ເມື່ອຂ້າພະເຈົ້າຢູ່ໃນທ້ອງ ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ

[໙໘] ເມື່ອຂ້າພະເຈົ້າຍັງຢູ່ໃນທ້ອງມານດາ ໂພຊະນາຫານຄືເຂົ້າແລະນໍ້າ
ບັງເກີດແກ່ມານດາຕາມຄວາມພໍໃຈ ຕາມປາຖະໜາຂອງຂ້າພະເຈົ້າ

[໙໙] ຂ້າພະເຈົ້າບວດເປັນບັນພະຊິດເມື່ອອາຍຸໄດ້ ໕ ປີ
ຂະນະແຖຜົມສຳເລັດກໍໄດ້ບັນລຸອະຣະຫັນຕະຜົນ

[໑໐໐] ຂ້າພະເຈົ້າຄົ້ນຫາບຸບພະກຳຢູ່ ກໍບໍ່ໄດ້ເຫັນບຸບພະກຳອັນໃດ ໆ
ແຕ່ຂ້າພະເຈົ້າມາຣະລຶກເຖິງກຳຂອງຕົນໄດ້
ນອກເໜືອໄປໃນກັບທີ ໓໐,໐໐໐

[໑໐໑] ຂ້າແຕ່ ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າພຣະອົງອາໄສຄຳສັ່ງສອນຂອງພຣະອົງ
ຈຶ່ງໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໑໐໒] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ບູຊາພຣະສຳມາສຳພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໐໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈັນທະນະມາລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ຈັນທະນະມາລິຍະເຖຣາປະທານທີ ໕ ຈົບ**

## ໖. ທາຕຸປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທາຕຸປູຊະກະເຖຣະ

(ພຣະທາຕຸປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໖] ເມື່ອພຣະໂລກະນາດພຣະນາມວ່າ ສິດທັດຖະ
ຜູ້ຊົງເປັນຜູ້ນຳສັດໂລກ ປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ນຳພວກຍາດຕິພີ່ນ້ອງຂອງຂ້າພະເຈົ້າມາກະທຳການບູຊາພຣະທາດ

[໑໐໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະທາດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະທາດ

[໑໐໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທາຕຸປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທາຕຸປູຊະກະເຖຣາປະທານທີ ໖ ຈົບ**

## ໗. ປຸລິນຸບປາທະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸລິນຸບປາທະກະເຖຣະ

(ພຣະປຸລິນຸບປາທະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໑໑] ຂ້າພະເຈົ້າເປັນດາບົດຊື່ ເທວະລະ ອາໄສຢູ່ທີ່ພູເຂົາຫິມະພານ
ທີ່ພູເຂົານັ້ນ ບ່ອນຈົງກົມຂອງຂ້າພະເຈົ້າເປັນບ່ອນທີ່ພວກອະມະນຸດເນຣະມິດໃຫ້

[໑໑໒] ໃນຄັ້ງນັ້ນ ຂ້າພະເຈົ້າມັດມວຍຜົມ ພາຍຄົນໂທນ້ຳ
ເມື່ອຈະສະແຫວງຫາປະໂຫຍດອັນສູງສຸດ
ໄດ້ອອກຈາກປ່າໃຫຍ່ໄປໃນການນັ້ນ

[໑໑໓] ໃນຄັ້ງນັ້ນ ສິດປະມານ ໘໔,໐໐໐ ຄົນ ອຸປັດຖາກຂ້າພະເຈົ້າ
ພວກເຂົາຂວນຂວາຍໃນວຽກງານຂອງຕົນຢູ່ໃນປ່າໃຫຍ່

[໑໑໔] ຂ້າພະເຈົ້າອອກຈາກອາສົມໄດ້ກໍ່ພຣະເຈດີຊາຍແລ້ວ
ລວບລວມດອກໄມ້ນານາຊະນິດມາບູຊາພຣະເຈດີນັ້ນ

[໑໑໕] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນພຣະເຈດີແລ້ວ ເຂົ້າໄປສູ່ອາສົມ
ສິດທຸກຄົນໄດ້ມາປະຊຸມພ້ອມກັນແລ້ວ ຖາມຄວາມຂໍ້ນີ້ວ່າ

[໑໑໖] ຂ້າແຕ່ທ່ານເທວະລະ ທ່ານນະມັດສະການສະຖູບທີ່ກໍ່ດ້ວຍຊາຍເຮັດຫຍັງ
ແມ່ນຂ້າພະເຈົ້າທັງຫຼາຍກໍຢາກຈະຮູ້
ຂ້າພະເຈົ້າທັງຫຼາຍຖາມທ່ານແລ້ວໂຜດບອກດ້ວຍເທີ້ນ

[໑໑໗] ຂ້າພະເຈົ້າຕອບວ່າ ພຣະພຸດທະເຈົ້າທັງຫຼາຍ
ຜູ້ມີພຣະຈັກຂຸ ມີພຣະຍົດຍິ່ງໃຫຍ່

ທ່ານທັງຫຼາຍໄດ້ພົບແລ້ວໃນບົດນີ້ນຂອງເຮົາບໍ່ແມ່ນບໍ?
ເຮົານະມັດສະການພຣະພຸດທະເຈົ້າຜູ້ປະເສີດທີ່ສຸດເຫຼົ່ານັ້ນ
ຜູ້ມີພຣະຍົດຍິ່ງໃຫຍ່ເຊັ່ນໃດ

[໑໑໘] ພຣະພຸດທະເຈົ້າເຫຼົ່ານັ້ນຜູ້ມີຄວາມພຽນຫຼາຍ
ເປັນສັບພັນຍູ ຜູ້ຊົງເປັນຜູ້ນຳສັດໂລກ
ພຣະພຸດທະເຈົ້າເຫຼົ່ານັ້ນມີຄຸນແນວໃດ
ມີສີນແນວໃດ ມີພຣະຍົດຍິ່ງໃຫຍ່ເຊັ່ນໃດ

[໑໑໙] ພຣະພຸດທະເຈົ້າທັງຫຼາຍມີພຣະລັກສະນະອັນປະເສີດ ໓໔ ປະການ
ມີພຣະທົນຄົບ ໔໐ ເຫຼັ້ມ ມີດວງເນດດັ່ງດວງຕາແຫ່ງງົວ
ແລະສົດໃສເໝືອນລູກໝາກກ່ຳ

[໑໔໐] ອັນໜຶ່ງ ພຣະພຸດທະເຈົ້າເຫຼົ່ານັ້ນ ຜູ້ບໍລິສຸດເມື່ອສະເດັດດຳເນີນໄປ
ກໍທອດພຣະເນດສາຍຕາພຽງຊົ່ວແອກ
ພຣະຊານຸຂອງພຣະອົງບໍ່ລັ່ນ ໃຜ ໆ ບໍ່ໄດ້ຍິນສຽງບ່ອນຕໍ່

[໑໔໑] ອັນໜຶ່ງ ພຣະສຸຄົດເຈົ້າທັງຫຼາຍ
ເມື່ອຈະສະເດັດດຳເນີນບໍ່ຊົງຮີບຮ້ອນສະເດັດດຳເນີນໄປ
ຊົງກ້າວພຣະບາດເບື້ອງຂວາກ່ອນ
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ

[໑໔໔] ແລະພຣະພຸດທະເຈົ້າເຫຼົ່ານັ້ນເປັນຜູ້ບໍ່ສະດຸ້ງ
ເໝືອນພະຍາໄກສອນຣາດຊະສີ
ພຣະພຸດທະເຈົ້າເຫຼົ່ານັ້ນບໍ່ຊົງຍົກພຣະອົງ ບໍ່ຂົ່ມສັດທັງຫຼາຍ

[໑໔໓] ຊົງລຸດພົ້ນຈາກການຖືຕົວແລະດູໝິ່ນ
ທ່ານມີພຣະອົງສະເໝີໃນສັດທັງປວງ
ພຣະພຸດທະເຈົ້າທັງຫຼາຍເປັນຜູ້ບໍ່ຊົງຍົກພຣະອົງ
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ

[໑໔໔] ອັນໜຶ່ງ ພຣະສຳມາສຳພຸດທະເຈົ້າທັງຫຼາຍເມື່ອສະເດັດອຸບັດຂຶ້ນ
ພຣະອົງຊົງສະແດງແສງສະຫວ່າງ
ຊົງປະກາດວິການ ໖໔ ທົ່ວພື້ນແຜ່ນດິນນີ້ທັງໝົດ

[໑໔໔] ທັງພຣະອົງຊົງເຫັນນະຣົກດ້ວຍ
ໃນຄັ້ງນັ້ນ ໄຟນະຣົກດັບ ມະຫາເມກບັນດານຝົນໃຫ້ຕົກ
ນີ້ເປັນທຳມະດາຂອງພຣະພຸດທະເຈົ້າທັງຫຼາຍ

[໑໔໕] ພຣະຕະຖາຄົດເຈົ້າທັງຫຼາຍເຫຼົ່ານັ້ນຊົງພຣະຄຸນປະເສີດຫຼາຍ
ບໍ່ມີໃຜທຽບໄດ້ ມີພຣະຍົດຍິ່ງໃຫຍ່ ມີພຣະຄຸນຫາປະມານບໍ່ໄດ້
ໃຜ ໆ ບໍ່ເກີນພຣະອົງໄປໂດຍກຽດຕິຄຸນ
ພຣະພຸດທະເຈົ້າເຫຼົ່ານັ້ນ ເປັນເຊັ່ນນີ້

[໑໔໖] ສິດທຸກຄົນເປັນຜູ້ມີຄວາມເຄົາລົບຊື່ນຊົມຄຳເວົ້າຂອງຂ້າພະເຈົ້າ
ຕ່າງໄດ້ປະຕິບັດເຊັ່ນນັ້ນ ຕາມຄວາມສາມາດ ຕາມກຳລັງ (ຂອງຕົນ)

[໑໔໗] ພວກເຂົາມີຄວາມເພີດເພີນໃນກຳຂອງຕົນ
ເຊື່ອຟັງຄຳເວົ້າຂອງຂ້າພະເຈົ້າ
ມີສັນທະອັດທະຍາໄສນ້ອມໄປໃນຄວາມເປັນພຣະພຸດທະເຈົ້າ
ພາກັນບູຊາພຣະເຈດີຊາຍ

[໑໔໘] ໃນຄັ້ງນັ້ນ ເທບພະບຸດຜູ້ມີຍົດໃຫຍ່ ຈຸຕິຈາກສະຫວັນຊັ້ນດຸສິດ
ອຸບັດໃນພຣະອຸທອນຂອງພຣະມານດາ ໝື່ນຈັກກະວານໄຫວແລ້ວ

[໑໕໐] ຂ້າພະເຈົ້າຢືນຢູ່ ໃນບ່ອນຈົງກົມບໍ່ໄກຈາກອາສົມ
ສິດທຸກຄົນໄດ້ມາປະຊຸມພ້ອມກັນໃນສຳນັກຂອງຂ້າພະເຈົ້າ ຖາມວ່າ

[໑໕໑] ແຜ່ນດິນບັນລືລັ່ນເໝືອນງົວອຸສະພະຄຶກຄະນອງ
ເໝືອນຣາດຊະສີຄຳຣົນ ເໝືອນແຂ້ຟາດຫາງ ຈັກມີຜົນເປັນແນວໃດ

[໑໕໔] ຂ້າພະເຈົ້າຕອບວ່າ ພຣະສຳມາສຳພຸດທະເຈົ້າພຣະອົງໃດ
ທີ່ຂ້າພະເຈົ້າປະກາດ ທີ່ໃກ້ພຣະສະຖູບກອງຊາຍ
ບັດນີ້ ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຜູ້ມີໂຊກ ຜູ້ຊົງເປັນພຣະສາດສະດາ
ສະເດັດລົງສູ່ພຣະອຸທອນຂອງພຣະມານດາແລ້ວ

[໑໕໕] ຂ້າພະເຈົ້າສະແດງທຳກະຖາແກ່ສິດເຫຼົ່ານັ້ນແລ້ວ
ກ່າວສະດຸດີພຣະມະຫາມຸນີ
ສົ່ງສິດຂອງຕົນໄປແລ້ວ ນັ່ງຂັດສະມາທິ

[໑໖໔] ກໍຂ້າພະເຈົ້າມີກຳລັງສິ້ນໄປແລ້ວ ປ່ອຍໜັກ
ຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດແລ້ວ
ໄດ້ສິ້ນຊີວິດໃນບ່ອນນັ້ນເອງ

[໑໖໕] ໃນຄັ້ງນັ້ນ ສິດທຸກຄົນມາປະຊຸມກັນໄດ້ສ້າງຈິຕະກາທານຂຶ້ນ
ແລ້ວໄດ້ຍົກຮ່າງຂອງຂ້າພະເຈົ້າຂຶ້ນວາງຍັງຈິຕະກາທານ

[໑໖໖] ພວກເຂົາພາກັນຍືນປະນົມມືເໜືອຫົວລ້ອມຮອບຈິຕະກາທານ
ພາກັນເສົ້າໂສກ ຄໍ່າຄວນ

[໑໖໗] ເມື່ອສິດເຫຼົ່ານັ້ນພິໄຣລຳພັນຢູ່
ຂ້າພະເຈົ້າໄດ້ໄປໃກ້ຈິຕະກາທານແລ້ວສັ່ງສອນພວກເຂົາວ່າ
ເຮົາຄືອາຈານຂອງທ່ານທັງຫຼາຍ
ທ່ານຜູ້ມີປັນຍາດີທັງຫຼາຍ ຢ່າໄດ້ເສົ້າໂສກເລີຍ

[໑໖໘] ທ່ານທັງຫຼາຍເພິ່ງເປັນຜູ້ບໍ່ຂີ້ຄ້ານ
ເພິ່ງພະຍາຍາມໃນປະໂຫຍດຂອງຕົນທັງກາງເວັນກາງຄືນ
ຢ່າໄດ້ຜະໝາດ ຈົ່ງໃຊ້ເວລາທີ່ມີໃຫ້ເປັນປະໂຫຍດ

[໑໖໙] ຂ້າພະເຈົ້າພໍ່າສອນສິດຂອງຕົນແລ້ວກັບໄປສູ່ເທວະໂລກ
ໄດ້ຢູ່ໃນເທວະໂລກເຖິງ ໑໘ ກັບ

[໑໘໐] ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ
ແລະໄດ້ຄອງເທວະສົມບັດຫຼາຍຮ້ອຍຊາດ

[໑໘໑] ໃນກັບທີເຫຼືອ ຂ້າພະເຈົ້າແມ່ນຈະວຽນວ່າຍຕາຍເກີດໄປມາ
ແຕ່ກໍບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການກໍ່ພຣະເຈດີຊາຍ

[໑໘໒] ໃນເດືອນທີ່ດອກໂກມຸດບານ
ຕົ້ນໄມ້ຈຳນວນຫຼາຍກໍມີດອກບານ ສັນໃດ
ຂ້າພະເຈົ້າກໍເປັນຜູ້ທີ່ພຣະສາດສະດາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໃຫ້ເບີກບານແລ້ວໃນສະໄໝນັ້ນ ສັນນັ້ນຄືກັນ

[໑໘໓] ຂ້າພະເຈົ້າມີຄວາມພຽນນຳພາທຸຣະໄປ
ອັນເປັນເຫດນຳທຳເປັນແດນກະເສມຈາກໂຍຄະມາໃຫ້
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນເສີນພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສັນເສີນພຣະພຸດທະເຈົ້າ
[໑໘໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໑໘໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປຸລິນຸບປາທະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປຸລິນຸບປາທະກະເຖຣາປະທານທີ ໗ ຈົບ**

## ໘. ຕະຣະນີຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕະຣະນີຍະເຖຣະ

(ພຣະຕະຣະນີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໘] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ເປັນພຣະສະຍຳພູ ຜູ້ຊຶ່ງເປັນຜູ້ນຳສັດໂລກ
ເປັນພຣະຕະຖາຄົດເຈົ້າ ໄດ້ສະເດັດໄປທີ່ຝັ່ງແມ່ນ້ຳວິນດາ

[໑໔໙] ຂ້າພະເຈົ້າເປັນເຕົ່າທ່ຽວໄປມາໃນແມ່ນ້ຳ ຂຶ້ນຈາກນ້ຳແລ້ວ
ປະສົງຈະອັນເຊີນພຣະພຸດທະເຈົ້າສະເດັດຂ້າມຟາກ
ຈຶ່ງເຂົ້າເຝົ້າພຣະອົງຜູ້ຊົງເປັນຜູ້ນຳສັດໂລກ ຂາບທູນວ່າ

[໑໕໐] ຂໍທູນເຊີນພຣະພຸດທະເຈົ້າ
ຜູ້ເປັນມະຫາມຸນີພຣະນາມວ່າ ອັດຖະທັດສີ
ສະເດັດຂຶ້ນຫຼັງຂອງຂ້າພຣະອົງເທີ້ນ
ຂ້າພຣະອົງຈະນຳສະເດັດພຣະອົງຜູ້ເຮັດບ່ອນສຸດທຸກຂ້າມຟາກ

[໑໕໑] ພຣະພຸດທະເຈົ້າຜູ້ມີພຣະຍົດຍິ່ງໃຫຍ່
ຜູ້ຊົງເປັນຜູ້ນຳສັດໂລກພຣະນາມວ່າ ອັດຖະທັດສີ
ຮູ້ຄວາມດຳຣິຂອງຂ້າພະເຈົ້າແລ້ວ
ຈຶ່ງສະເດັດຂຶ້ນປະທັບຢືນເທິງຫຼັງຂອງຂ້າພະເຈົ້າ

[໑໕໒] ໃນເວລາທີ່ຂ້າພະເຈົ້າຈຳຄວາມໄດ້ ແລະຮູ້ດຽງສາ
ຂ້າພະເຈົ້າບໍ່ມີຄວາມສຸກເຊັ່ນກັບຄວາມສຸກ (ທີ່ໄດ້ຮັບ)
ໃນຂະນະທີ່ພື້ນພຣະບາດຖືກຕ້ອງເລີຍ

[໑໕໓] ພຣະສຳມາສຳພຸດທະເຈົ້າພຣະນາມວ່າອັດຖະທັດສີ ຜູ້ມີພຣະຍົດຍິ່ງໃຫຍ່
ສະເດັດຂຶ້ນປະທັບຢືນຢູ່ແຄມຝັ່ງແມ່ນ້ຳແລ້ວ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໕໔] ເຮົາຂ້າມກະແສນ້ຳພຽງຊົ່ວຂະນະຈິດເປັນໄປ
ກໍພະຍາເຕົ່າຕົວນີ້ມີບຸນສົ່ງເຮົາຂ້າມຟາກ

[໑໕໕] ດ້ວຍການສົ່ງພຣະພຸດທະເຈົ້າ ຂ້າມຟາກນີ້
ແລະດ້ວຍຄວາມເປັນຜູ້ມີຈິດເມດຕາ
ເຂົາຈັກຮື່ນຣົມໃນເທວະໂລກຕະຫຼອດ ໑,໘໐໐ ກັບ

[໑໕໖] ເຂົາຈາກເທວະໂລກມາມະນຸດໂລກນີ້
ອັນກຸສົນມູນຕັກເຕືອນແລ້ວ
ນັ່ງ ໃນອາສະນະດຽວຈັກຂ້າມກະແສຄວາມສົງໄສໄດ້

[໑໕໗] ພືດແມ່ນໜ້ອຍທີ່ຊາວນາຫວ່ານລົງໃນຜືນນາທີ່ດີ
ເມື່ອຝົນຕົກລົງຢູ່ໂດຍຊອບ
ຜືນຍ່ອມເຮັດໃຫ້ຊາວນາຍິນດີ ແມ່ນສັນໃດ

[໑໕໗] ພຸດທະເຂດທີ່ພຣະສຳມາສຳພຸດທະເຈົ້າຊົງສະແດງໄວ້ນີ້
ກໍສັນນັ້ນຄືກັນ ເມື່ອບຸນໃຫ້ຜົນສະໝ່ຳສະເໝີ
ຜົນກໍຈັກເຮັດໃຫ້ຂ້າພະເຈົ້າຍິນດີ

[໑໕໙] ຂ້າພະເຈົ້າມີຈິດເດັດດ່ຽວເພື່ອພ່ຳເພັງພຽນ
ສະຫງົບຣະງັບ ບໍ່ມີອຸປະທິ ກໍານົດຮູ້ອາສະວະທັງປວງແລ້ວ
ຢູ່ຢ່າງຜູ້ບໍ່ມີອາສະວະ

[໑໖໐] ໃນກັບທີ ໑,໗໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສົ່ງພຣະພຸດທະເຈົ້າຂ້າມຟາກ

[໑໖໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖໒] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕະຣະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕະຣະນິຍະເຖຣາປະທານທີ ໗ ຈົບ**

## ໙. ທຳມະຣຸຈິເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທຳມະຣຸຈິເຖຣະ

(ພຣະທຳມະຣຸຈິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖໔] ໃນເວລາທີ່ພຣະພຸດທະຊິນນະເຈົ້າພຣະນາມວ່າ ທີປັງກອນ
ຊົງພະຍາກອນສຸເມທະດາບົດວ່າ
ໃນກັບນັບປະມານບໍ່ໄດ້ຈາກກັບນີ້ໄປ
ດາບົດນີ້ຈັກເປັນພຣະພຸດທະເຈົ້າ

[໑໖໕] ພຣະມານດາຜູ້ໃຫ້ກຳເນີດດາບົດນີ້
ຈັກມີພຣະນາມວ່າມາຍາ ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ດາບົດນີ້ຈັກມີນາມວ່າໂຄດົມ

[໑໖໖] ດາບົດນີ້ຈັກຕັ້ງຄວາມພຽນພໍ່າເພັງທຸກກະຣະກິຣິຍາແລ້ວ
ຈັກເປັນພຣະສຳມາສຳພຸດທະເຈົ້າຜູ້ມີພຣະຍົດຍິ່ງໃຫຍ່
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

[໑໖໗] ພຣະອຸປະຕິດສະເຖຣະ ແລະພຣະໂກລິຕະເຖຣະຈັກເປັນພຣະອັກຄະຣະ
ສາວົກ

ພຣະອຸປັດຖາກຊື່ວ່າພຣະອານົນ ຈັກອຸປັດຖາກພຣະຊິນນະເຈົ້ານີ້

[໑໖໘] ເຂມາພິກຂຸນີແລະອຸບົນວັນນາພິກຂຸນີຈັກເປັນພຣະອັກຄະຣະສາວິກາ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປາສົກ

[໑໖໙] ຂຸຊະຊຸດຕະຣາອຸປາສິກາແລະນັນທະມານດາອຸປາສິກາເປັນອັກຄະຣະອຸປາສິ
ກາ

ຕົ້ນໄມ້ເປັນສະຖານທີ່ຕັດສະຣູ້ຂອງນັກປາດຜູ້ນີ້
ຊາວໂລກຮຽກກັນວ່າຕົ້ນອັດສັດຖະພຶກ

[໑໗໐] ມະນຸດແລະເທວະດາໄດ້ສະດັບພຣະດຳຣັດຂອງພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ເຊິ່ງຈະຫາໃຜສະເໝີເໝືອນບໍ່ໄດ້
ຕ່າງເປັນຜູ້ເບີກບານປະນົມມືນະມັດສະການ

[໑໗໑] ຂ້າແຕ່ພຣະມະຫາມຸນີ
ໃນຄັ້ງນັ້ນ ຂ້າພະເຈົ້າເປັນມານົບຊື່ເມຄະ ສຶກສາມາດີແລ້ວ
ໄດ້ສະດັບຄຳພະຍາກອນອັນປະເສີດຂອງສຸເມທະດາບົດ

[໑໗໒] ຂ້າພະເຈົ້າເປັນຜູ້ຄຸ້ນເຄີຍກັບສຸເມທະດາບົດ ຜູ້ມີຄວາມກະລຸນາ
ແລະຟ້າວອອກບວດນຳສຸເມທະດາບົດ ຜູ້ມີຄວາມພຽນ ເຊິ່ງບວດຢູ່

[໑໗໓] ເປັນຜູ້ສັງລວມໃນປາຕິໂມກ ແລະອິນຊີ ໕
ມີອາຊີວະບໍລິສຸດ ມີສະຕິເປັນນັກປາດ
ທຳຕາມຄຳສັ່ງສອນຂອງພຣະຊິນນະເຈົ້າ

[໑໗໔] ຂ້າພະເຈົ້າເປັນຢູ່ແນວນີ້
ຖືກປາປະມິດບາງຄົນຊັກນຳໃນຄວາມປະພຶດຊົ່ວຊາມ
ຖືກຂະຈັດອອກຈາກຫົນທາງທີ່ຊອບແລ້ວ

[໑໗໕] ເປັນຜູ້ຕົກຢູ່ໃນອຳນາດແຫ່ງວິຕົກ
ຈຶ່ງຫຼີກອອກຈາກສາດສະໜາ
ພາຍຫຼັງຖືກປາປະມິດນັ້ນຊັກຊວນໃຫ້ຂ້າມານດາ

[໑໗໖] ຂ້າພະເຈົ້າມີຈິດຊົ່ວຮ້າຍໄດ້ເຮັດອະນັນຕະຣິຍະກຳຂ້າມານດາ
ຈຸຕິຈາກພົບນັ້ນແລ້ວໄປເກີດໃນອະເວຈີມະຫານະຣົກທີ່ແສນຈະທາຣຸນ

[໑໗໗] ຂ້າພະເຈົ້າຕົກນະຣົກປະສົບຄວາມລຳບາກວຽນວ່າຍຕາຍເກີດຢູ່ດົນນານ
ບໍ່ໄດ້ເຫັນສຸເມທະດາບົດ ຜູ້ເປັນນັກປາດ ຜູ້ປະເສີດກວ່ານໍຣະຊົນ

[໑໗໘] ໃນກັບນີ້ ຂ້າພະເຈົ້າເກີດເປັນປາຕິມິງຄະລະຢູ່ໃນມະຫາສະມຸດ
ເຫັນເຮືອໃນສະມຸດສາຄອນ ຈຶ່ງເຂົ້າໄປເພື່ອຈະກິນ

[໑໗໙] ພວກພໍ່ຄ້າເຫັນຂ້າພະເຈົ້າກໍຢ້ານ
ຣະລຶກເຖິງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຂ້າພະເຈົ້າໄດ້ຍິນສຽງກຶກກ້ອງວ່າ
ໂຄຕະມະ ທີ່ພໍ່ຄ້າເຫຼົ່ານັ້ນເວົ້າຂຶ້ນ

[໑໘໐] ຈຶ່ງນຶກເຖິງສັນຍາເກົ່າຂຶ້ນມາໄດ້ ຈາກນັ້ນກໍເສັຍຊີວິດແລ້ວ
ໄປເກີດໃນຕະກູນພາມທີ່ມັ່ງຄັ່ງ ໃນນະຄອນສາວັດຖີ

[໑໘໑] ຂ້າພະເຈົ້າຊື່ວ່າທຳມະຣຸຈິ ເປັນຜູ້ກຽດຊັງບາບກຳທຸກຢ່າງ
ພໍອາຍຸໄດ້ ໗ ປີ ກໍໄດ້ພົບພຣະພຸດທະອົງຜູ້ສ່ອງໂລກໃຫ້ສ່ອງແສງ

[໑໘໔] ຂ້າພະເຈົ້າຈຶ່ງໄດ້ໄປສູ່ພຣະເຊຕະວັນມະຫາວິຫານ
ແລ້ວບວດເປັນບັນພະຊິດ
ເຂົ້າເຝົ້າພຣະພຸດທະເຈົ້າ ໓ ເທື່ອ ຕໍ່ຄືນແລະວັນ

[໑໗໓] ໃນຄັ້ງນັ້ນ ພຣະອົງຜູ້ເປັນມຸນີ
ທອດພຣະເນດເຫັນຂ້າພະເຈົ້າເຂົ້າຈຶ່ງຕັດວ່າ
ທຳມະຣຸຈິ ທ່ານຈົ່ງຣະລຶກເຖິງເຮົາ
ລຳດັບນັ້ນ ຂ້າພະເຈົ້າຂາບທູນບຸບພະກຳຢ່າງແຈ້ງຊັດ
ກັບພຣະພຸດທະເຈົ້າວ່າ

[໑໗໔] ດົນນານມາແລ້ວ ຂ້າພຣະອົງບໍ່ໄດ້ພົບພຣະອົງ
ຜູ້ຊົງບຸນລັກສະນະຕັ້ງ ໑໐໐
ຜູ້ຊົງມີເຫດປັດໄຈບໍລິສຸດໃນຊາດປາງກ່ອນ
ບັດນີ້ ຂ້າພຣະອົງໄດ້ພົບພຣະສະຣີຣະຂອງພຣະອົງ
ນັບວ່າເປັນການເຫັນທີ່ປະເສີດແທ້ ບໍ່ມີສິ່ງປຽບ

[໑໗໕] ຄວາມມືດຄືໂມຫະ ພຣະອົງຂະຈັດໄດ້ໝົດສິ້ນແລ້ວນໍ
ຂ້າພະເຈົ້າຊົມເຊີຍພຣະອົງແລ້ວ
ແມ່ນ້ຳຄືຕັນຫາ ອັນພຣະອົງຜູ້ມີອິນຊີອັນຮັກສາໄວ້ດີແລ້ວ
ໃຫ້ເຫືອດແຫ້ງໄປໂດຍໝົດສິ້ນ ພຣະນິບພານທີ່ບໍ່ມີມົນທິນ
ອັນພຣະອົງຊົງຊຳຣະດີແລ້ວ ສິ້ນການດົນນານ
ຂ້າແຕ່ພຣະມະຫາມຸນີ ພຣະອົງບັນລຸໄນຍະນາ
ທີ່ສຳເລັດດ້ວຍຍານສິ້ນການດົນນານ

[໑໗໖] ຂ້າພຣະອົງພິນາດໄປໃນລະຫວ່າງຕະຫຼອດການດົນນານ
ຂ້າແຕ່ພຣະໂຄດົມ ແຕ່ວັນນີ້ ຂ້າພຣະອົງໄດ້ພົບພຣະອົງ
ການພົບເປັນຕົ້ນທີ່ໄດ້ເຮັດໄວ້ຈັກບໍ່ພິນາດໄປອີກ

[໑໗໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໗໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທຳມະຣຸຈິເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທຳມະຣຸຈິເຖຣາປະທານທີ ໙ ຈົບ**

## ໑໐. ສາລະມັນທະປິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສາລະມັນທະປິຍະເຖຣະ

(ພຣະສາລະມັນທະປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໙໐] ຂ້າພະເຈົ້າເຂົ້າໄປສູ່ປ່າໄມ້ສາລະ ສ້າງອາສົມຢ່າງສວຍງາມ
ມຸງບັງດ້ວຍດອກສາລະ ຢູ່ໃນປ່າໃຫຍ່

[໑໙໑] ສ່ວນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປິຍະທັດສີ ຜູ້ເປັນພຣະສະຍຳພູ
ເປັນບຸກຄົນຜູ້ເລີດ ຕັດສະຮູ້ດ້ວຍພຣະອົງເອງ
ຜູ້ຊົງປະສົງວິເວກ ໄດ້ສະເດັດເຂົ້າໄປສູ່ປ່າໄມ້ສາລະ

[໑໙໒] ຂ້າພະເຈົ້າໄດ້ອອກຈາກອາສົມໄປສູ່ປ່າໃຫຍ່
ທ່ຽວສະແຫວງຫາເຜືອກມັນແລະໝາກໄມ້ໃນປ່າ ໃນເວລານັ້ນ

[໑໙໓] ໄດ້ເຫັນພຣະສຳມາສຳພຸດທະເຈົ້າພຣະນາມວ່າປິຍະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ ປະທັບນັ່ງເຂົ້າສະມາບັດຮຸ່ງເຮືອງຢູ່ ໃນປ່າໃຫຍ່ນັ້ນ

[໑໙໔] ຂ້າພະເຈົ້າປັກໄມ້ເປັນ ໔ ເສົາ ສ້າງຜາມຢ່າງດີ
ມຸງດ້ວຍດອກສາລະເບື້ອງເທິງພຣະພຸດທະເຈົ້າ

[໑໙໕] ຂ້າພະເຈົ້າຄົງຕັ້ງປະລຳເຊິ່ງມຸງດ້ວຍດອກສາລະໄວ້ ໗ ວັນ
ເຮັດຈິດໃຫ້ເຫຼື້ອມໃສໃນກຳນັ້ນ
ໄດ້ໄຫວ້ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໙໖] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນບຸຣຸດຜູ້ສູງສຸດ
ສະເດັດອອກຈາກສະມາທິ ປະທັບນັ່ງທອດພຣະເນດເບິ່ງພຸງຊົ່ວແອກ

[໑໙໗] ສາວິກາຂອງພຣະສາດສະດາພຣະນາມວ່າ ປີຍະທັດສີ
ຊື່ວ່າວະຣຸນະ ພ້ອມດ້ວຍສາວິກາຜູ້ໄດ້ວະສີ ໑໐໐,໐໐໐ ອົງ
ໄດ້ເຂົ້າເຝົ້າພຣະສາດສະດາຜູ້ນຳສັດໂລກ

[໑໙໘] ສ່ວນພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປີຍະທັດສີ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ
ຊົງກະທຳການແຍ້ມໃຫ້ຜາກົດ

[໑໙໙] ພຣະອະນຸຣຸດທະເຖຣະຜູ້ເປັນພຸດທະອຸປັດຖາກຂອງພຣະສາດສະດາ
ພຣະນາມວ່າປີຍະທັດສີ
ຫົ່ມຈີວອນບ່ຽງບ່າແລ້ວ ໄດ້ທູນຖາມພຣະມະຫາມຸນີວ່າ

[໒໐໐] ຂ້າແຕ່ພຣະຜູ້ມີພຣະພາກເຈົ້າ
ອັນໃດນໍ ເປັນເຫດໃຫ້ພຣະສາດສະດາຊົງແຍ້ມ
ຍ້ອນເມື່ອມີເຫດ ພຣະສາດສະດາຈຶ່ງຊົງກະທຳການແຍ້ມໃຫ້ຜາກົດ

[໒໐໑] ພຣະສາດສະດາຕັດວ່າ ມານົບໃດຕັ້ງເຄື່ອງມຸງບັງດອກສາລະ
ເພື່ອເຮົາໄວ້ຕະຫຼອດ ໗ ວັນ
ເຮົາຣະລຶກເຖິງກຳຂອງມານົບນັ້ນ
ຈຶ່ງໄດ້ກະທຳການແຍ້ມໃຫ້ຜາກົດ

[໒໐໒] ເຮົາຍັງບໍ່ເຫັນໂອກາດທີ່ບຸນຈະບໍ່ໃຫ້ຜົນ
ໂອກາດໃນເທວະໂລກຫຼືມະນຸດໂລກຍັງບໍ່ສະງົບ

[໒໐໓] ເມື່ອເຂົາຜູ້ພຽບພ້ອມດ້ວຍບຸນກຳຢູ່ໃນເທວະໂລກ
ບໍລິວານຂອງເຂົາເທົ່າທີ່ມີ ຈັກມີດອກສາລະມຸງບັງ

[໒໐໔] ເຂົາເປັນຜູ້ປະກອບດ້ວຍບຸນກຳ
ຈັກຣື່ນຣົມໃນເທວະໂລກນັ້ນດ້ວຍການຟ້ອນ
ການຂັບຮ້ອງ ແລະການປະໂຄມທີ່ເປັນທິບໃນການທຸກເມື່ອ

[໒໐໕] ບໍລິວານຂອງເຂົາເທົ່າທີ່ມີຈັກມີກາຍມີກິ່ນຫອມຟຸ້ງ
ແລະຝົນດອກສາລະຈັກຕົກລົງທົ່ວໄປໃນຂະນະນັ້ນ

[໔໐໖] ມານົບນີ້ຈຸຕິຈາກເທວະໂລກແລ້ວ
ຈັກມາເກີດເປັນມະນຸດ ແມ່ນໃນມະນຸດໂລກນີ້
ເຄື່ອງມຸງບັງດອກສາລະ ຈັກຊົງຢູ່ຕະຫຼອດການທັງປວງ

[໔໐໗] ໃນມະນຸດໂລກນີ້ ການຟ້ອນລຳແລະການຂັບຮ້ອງ
ທີ່ປະກອບດ້ວຍສຽງກັງສະດານຢ່າງມ່ວນ
ຈັກແວດລ້ອມມານົບນີ້ເປັນນິດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໐໘] ແລະເມື່ອດວງອາທິດອຸໄທ ຝົນດອກສາລະຈະຕົກລົງ
ຝົນດອກສາລະທີ່ປະກອບດ້ວຍບຸນກຳ
ຈັກຕົກລົງມາຕະຫຼອດການທັງປວງ

[໔໐໙] ໃນກັບທີ ໑,໘໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດຈັກອຸບັດຂຶ້ນໃນໂລກ

[໔໑໐] ມານົບນີ້ຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໔໑໑] ເມື່ອເຂົາຕັດສະຣູ້ທຳ ຈັກມີເຄື່ອງມຸງບັງດອກສາລະ
ເມື່ອຖືກເຜົາຢູ່ເທິງກອງຟອນ
ທີ່ກອງຟອນນັ້ນກໍຈັກມີເຄື່ອງມຸງບັງດອກສາລະ

[໔໑໒] ພຣະມະຫາມຸນີພຣະນາມວ່າປິຍະທັດສີ
ຊົງພະຍາກອນວິບາກແລ້ວ ສະແດງທຳແກ່ບໍລິສັດ
ໃຫ້ຊຸ່ມຊື່ນດ້ວຍຝົນຄືທຳ

[໔໑໓] ຂ້າພະເຈົ້າໄດ້ຄອງເທວະສົມບັດໃນເທວະໂລກຕະຫຼອດ ໓໐ ກັບ
ໄດ້ເກີດເປັນພຣະເຈົ້າຈັກກະພັດ ໒໗ ຊາດ

[໔໑໔] ຂ້າພະເຈົ້າຈຸຕິຈາກເທວະໂລກມາໃນມະນຸດໂລກນີ້
ໄດ້ຮັບຄວາມສຸກອັນໄພບູນ

ແມ່ນໃນມະນຸດໂລກນີ້ກໍມີເຄື່ອງມຸງບັງດອກສາລະ
ນີ້ເປັນຜົນແຫ່ງການສ້າງຜາມ

[໔໑໕] ພົບນີ້ເປັນພົບສຸດທ້າຍຂອງຂ້າພະເຈົ້າ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນພົບນີ້ເຄື່ອງມຸງບັງດອກສາລະກໍຈັກມີຕະຫຼອດການທັງປວງ

[໔໑໖] ຂ້າພະເຈົ້າໃຫ້ພຣະມະຫາມຸນີພຣະນາມວ່າໂຄຕະມະສາກະຍະ
ຜູ້ປະເສີດຊົງຍິນດີ ລະຄວາມຊະນະ
ແລະລະຄວາມພ່າຍແພ້ໄດ້ແລ້ວ ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໔໑໗] ໃນກັບທີ ໑,໘໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໑໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໒໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສາລະມັນທະປີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສາລະມັນທະປີຍະເຖຣາປະທານທີ ໑໐ ຈົບ**

**ປັງສຸກູລະວັກທີ ໔໙ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ປັງສຸກູລະສັນຍະກະເຖຣາປະທານ
໒. ພິສະທາຍະກະເຖຣາປະທານ
໓. ຈັນທະນະມາລິຍະເຖຣາປະທານ
໔. ປຸລິນຸບປາທະກະເຖຣາປະທານ
໕. ທຳມະຣຸຈິເຖຣາປະທານ
໖. ພຸດທະສັນຍະກະເຖຣາປະທານ
໗. ຍານັດຖະວິກະເຖຣາປະທານ
໘. ທາຕຸປູຊະກະເຖຣາປະທານ
໙. ຕະຣະນິຍະເຖຣາປະທານ
໑໐. ສາລະມັນທະປິຍະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໔໑໙ ຄາຖາ**

# ໕໐. ກິງກະນິປຸບຜະວັກ

## ໝວດວ່າດ້ວຍດອກກະດິ່ງເປັນຕົ້ນ

### ໑. ຕີນິກິງກະນິປຸບພິຍະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະຕີນິກິງກະນິປຸບພິຍະເຖຣະ

(ພຣະຕີນິກິງກະນິປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ປາສະຈາກທຸລິຄືກິເລດ ຜູ້ຊົງເປັນຜູ້ນຳສັດໂລກ
ຮຸ່ງເຮືອງດັ່ງດອກກັນນິກາ ປະທັບນັ່ງຢູ່ທີ່ຮ່ອມພູ

[໒] ຂ້າພະເຈົ້າເກັບດອກກະດິ່ງຄຳ ໓ ດອກມາບູຊາ
ເມື່ອບູຊາພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ອວ່າຍໜ້າຫຼີກໄປທາງທິດໃຕ້

[໓] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດຍັງສະຫວັນຊັ້ນຕາວະຕຶງສາ

[໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນິກິງກະນິປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕິນິກິງກະນິປຸບພິຍະເຖຣາປະທານທີ ໑ ຈົບ**

## ໔. ປັງສຸກູລະປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປັງສຸກູລະປູຊະກະເຖຣະ

(ພຣະປັງສຸກູລະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ອຸທັບພະລະ ທີ່ພູເຂົານັ້ນ
ຂ້າພະເຈົ້າໄດ້ເຫັນຜ້າບັງສຸກຸນແຂວນຫ້ອຍຢູ່ເທິງປາຍໄມ້

[໙] ໃນຄັ້ງນັ້ນ ຂ້າພະເຈົ້າມີຈິດຮ່າເຣີງ ບັນເທີງໃຈ
ໄດ້ເລືອກເກັບດອກກະດິ່ງຄຳ ໓ ດອກມາບູຊາຜ້າບັງສຸກຸນ

[໑໐] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດຍັງສະຫວັນຊັ້ນຕາວະຕິງສາ

[໑໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຍ້ອນການບູຊາທຸງໄຊແຫ່ງພຣະອະຣະຫັນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ

[໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປັງສຸກູລະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປັງສຸກູລະປູຊະກະເຖຣາປະທານທີ ໔ ຈົບ**

## ໓. ໂກຣັນທະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂກຣັນທະປຸບຜິຍະເຖຣະ

(ພຣະໂກຣັນທະປຸບຜິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໕] ເມື່ອຊາດປາງກ່ອນ ຂ້າພະເຈົ້າກັບບິດາແລະປູ່ເປັນຄົນເຮັດວຽກໃນປ່າ
ລ້ຽງຊີບດ້ວຍການຂ້າສັດ ກຸສົນກຳຂອງເຮົາບໍ່ມີ

[໑໖] ໃກ້ບ່ອນຢູ່ຂອງຂ້າພະເຈົ້າ ພຣະສາດສະດາພຣະນາມວ່າຕິດສະ
ຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ ຜູ້ມີພຣະຈັກຂຸ
ໄດ້ຊົງສະແດງຮອຍພຣະບາດໄວ້ ໓ ຮອຍ
ເພື່ອອະນຸເຄາະ (ຂ້າພະເຈົ້າ)

[໑໗] ຂ້າພະເຈົ້າເຫັນຮອຍພຣະບາດຂອງພຣະສາດສະດາພຣະນາມວ່າ ຕິດສະ
ທີ່ພຣະອົງຊົງປະທັບໄວ້
ຂ້າພະເຈົ້າເປັນຜູ້ມີຈິດຮ່າເຣີງບັນເທີງໃຈ
ໄດ້ເຮັດຈິດໃຫ້ເຫຼື້ອມໃສໃນຮອຍພຣະບາດນັ້ນ

[໑໗] ຂ້າພະເຈົ້າເຫັນຕົ້ນອັງກາບເຊິ່ງງອກເລືອໄປຕາມພື້ນດິນ
ມີດອກບານສະພັ່ງ ຈຶ່ງເດັດມາພ້ອມທັງຍອດ
ໄດ້ບູຊາຮອຍພຣະບາດອັນປະເສີດທີ່ສຸດ

[໑໙] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໐] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
(ໃນກຳເນີດນັ້ນ ໆ) ຂ້າພະເຈົ້າມີຜິວພັນດັ່ງດອກອັງຂາບ
ມີຣັດສະໝີຊ່ານອອກຈາກກາຍ

[໔໑] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາຮອຍພຣະບາດ

[໔໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂກຣັນທະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂກຣັນທະປຸບຜິຍະເຖຣາປະທານທີ ໓ ຈົບ**

## ໔. ກິງສຸກະປຸບພິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກິງສຸກະປຸບພິຍະເຖຣະ

(ພຣະກິງສຸກະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ຂ້າພະເຈົ້າເຫັນຕົ້ນທອງກວາວມີດອກບານສະພັ່ງ
ປະຄອງອັນຊະລີ ຣະລຶກເຖິງພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ແລ້ວບູຊາໃນອາກາດ

[໔໖] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກິງສຸກະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກິງສຸກະປຸບພິຍະເຖຣາປະທານທີ ໔ ຈົບ**

## ໕. ອຸປັດທະທຸດສະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປັດທະທຸດສະທາຍະກະເຖຣະ

(ພຣະອຸປັດທະທຸດສະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໑] ໃນຄັ້ງນັ້ນ ສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊື່ສຸຊາຕະ ກຳລັງສະແຫວງຫາຜ້າບັງສຸກຸນທີ່ກອງຂີ້ເຫຍື້ອຂ້າງຖະໜົນ

[໓໔] ຂ້າພະເຈົ້າເປັນລູກຈ້າງຂອງຄົນອື່ນຢູ່ໃນນະຄອນຫົງສະວະດີ
ໄດ້ຖວາຍຜ້າເຄິ່ງຜືນແລ້ວອະພິວາດດ້ວຍຂະໜ່ອມ

[໓໓] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໓໔] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໓໓ ຊາດ
ໄດ້ເກີດເປັນພຣະເຈົ້າຈັກກະພັດ ໗໗ ຊາດ

[໓໕] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຍ້ອນຖວາຍຜ້າເຄິ່ງຜືນ
ຂ້າພະເຈົ້າຈຶ່ງເປັນຜູ້ບໍ່ມີໄພຈາກທີ່ໃດ ໆ ບັນເທີງຢູ່

[໓໖] ໃນວັນນີ້ ຂ້າພະເຈົ້າເມື່ອປາຖະໜາກໍເພິ່ງໃຊ້ຜ້າເປືອກໄມ້ຄຸມດິນນີ້
ພ້ອມທັງປ່າໃຫຍ່ແລະພູເຂົາໄດ້
ນີ້ເປັນຜົນແຫ່ງການຖວາຍຜ້າເຄິ່ງຜືນ

[໓໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າເຄິ່ງຜືນ

[໓໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອຸປັດທະທຸດສະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸປັດທະທຸດສະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ຄະຕະມັນທະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄະຕະມັນທະທາຍະກະເຖຣະ

(ພຣະຄະຕະມັນທະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໑] ພຣະຜູ້ມີພຣະພາກເຈົ້າຜູ້ຊົງດຳຣິດີແລ້ວ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດເຂົ້າໄປສູ່ປ່າໃຫຍ່ ຊົງພຣະປະຊວນດ້ວຍໂຣກລົມ

[໔໒] ຂ້າພະເຈົ້າໄດ້ເຫັນແລ້ວຈຶ່ງເຮັດຈິດໃຫ້ເຫຼື້ອມໃສ
ໄດ້ນຳຫົວນ້ຳມັນເນີຍເຂົ້າໄປຖວາຍ
ຍ້ອນບຸນກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ແລະສັ່ງສົມໄວ້ແລ້ວ
ແມ່ນ້ຳຄົງຄາຊື່ພາຄີຣະຖີນີ້

[໔໓] ແລະມະຫາສະມຸດທັງ ໔ ໄດ້ບັນດານເນີຍໃສໃຫ້ສຳເລັດແກ່ຂ້າພະເຈົ້າ
ອັນໜຶ່ງ ພື້ນປະຖະພີທີ່ກວ້າງໃຫຍ່ ປະມານບໍ່ໄດ້ ກຳນົດນັບບໍ່ໄດ້ນີ້

[໔໔] ດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງກາຍເປັນນ້ຳເຜີ້ງແລະນ້ຳຕານກ້ອນ
ຕົ້ນໄມ້ທີ່ງອກຂຶ້ນເທິງແຜ່ນດິນໃນທິດທັງ ໔

[໔໕] ດັ່ງຈະຮູ້ຄວາມດຳຣິຂອງຂ້າພະເຈົ້າ
ຈຶ່ງກາຍເປັນຕົ້ນກັນລະປະພຶກໄປ
ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໕໐ ຊາດ

[໔໖] ໄດ້ເປັນພຣະເຈົ້າຈັກກະພັດ ໕໑ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໔໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທົວນ້ຳມັນເນີຍ

[໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຄະຕະມັນທະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄະຕະມັນທະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ອຸທະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸທະກະທາຍະກະເຖຣະ

(ພຣະອຸທະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໃນພິກຂຸສົງຜູ້ປະເສີດຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຈຶ່ງໄດ້ບັນຈຸນ້ຳດື່ມຈົນເຕັມໝໍ້ນ້ຳ

[໕໒] ໃນເວລາທີ່ຂ້າພະເຈົ້າຕ້ອງການນ້ຳດື່ມ
ຈະເປັນເທິງຈອມພູ ປາຍໄມ້ ໃນອາກາດ
ຫຼື ຢູ່ພື້ນດິນ ນ້ຳກໍບັງເກີດແກ່ຂ້າພະເຈົ້າທັນທີ

[໕໓] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນ້ຳ

[໕໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸທະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸທະກະທາຍະກະເຖຣາປະທານທີ ໗ ຈົບ**

# ໗. ປຸລິນະຖູປິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະປຸລິນະຖູປິຍະເຖຣະ

(ພຣະປຸລິນະຖູປິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໗] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ
ມີພູໜ່ວຍໜຶ່ງຊື່ ຍະມະກະ ຂ້າພະເຈົ້າໄດ້ສ້າງອາສົມ
ແລະປັນນະສາລາໄວ້ຢ່າງດີ

[໕໘] ຂ້າພະເຈົ້າເປັນຊະດິນຜູ້ມີຕະບະແກ່ກ້າ ມີຊື່ວ່າ ນາຣະທະ
ສິດປະມານ ໑໔,໐໐໐ ຄົນ ບຳຣຸງຂ້າພະເຈົ້າຢູ່

[໕໙] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຜູ້ຫຼີບຫຼີກຢູ່
ຈຶ່ງຄິດແນວນີ້ວ່າ ມະຫາຊົນບູຊາເຮົາ ແຕ່ເຮົາບໍ່ໄດ້ບູຊາອັນໃດເລີຍ

[໖໐] ຜູ້ທີ່ຈະສັ່ງສອນເຮົາກໍບໍ່ມີ
ໃຜ ໆ ທີ່ຈະຕັກເຕືອນເຮົາກໍບໍ່ມີ
ເຮົາບໍ່ມີອຸປັດຊາອາຈານອາໄສຢູ່ໃນປ່າ

[໖໑] ສັດຜູ້ພັກດີຄວນເຮັດຈິດໃຫ້ໜັກແໜ້ນ ບຳຣຸງອາຈານໃດ
ອາຈານນັ້ນຂອງເຮົາກໍບໍ່ມີ
ການຢູ່ໃນປ່າຈຶ່ງບໍ່ມີປະໂຫຍດ

[໖໒] ສິ່ງທີ່ຄວນບູຊາເຮົາຄວນສະແຫວງຫາ
ສິ່ງທີ່ຄວນເຄົາລົບຍ້ອງຍໍເຮົາກໍຄວນສະແຫວງຫາຄືກັນ
ເຮົາຈັກຊື່ວ່າຢູ່ຢ່າງມີບ່ອນເພິ່ງ ໃຜ ໆ ຈັກຕິຕຽນບໍ່ໄດ້

[໖໓] ແມ່ນ້ຳເຊິ່ງມີຝັ່ງລາດ ມີທ່ານ້ຳຮາບພຽງເປັນຕາອອນຊອນ
ແລະເຕັມໄປໄປດ້ວຍຊາຍທີ່ບໍລິສຸດສະອາດ
ອາສົມຂອງຂ້າພະເຈົ້າກໍຢູ່ບໍ່ໄກ

[໖໔] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ໄປສູ່ແມ່ນ້ຳຊື່ອະມະຣິກາ
ແລ້ວຕ້ອມຊາຍມາກໍ່ເປັນພຣະເຈດີຊາຍ
ຂ້າພະເຈົ້າໄດ້ເຮັດພຣະເຈດີຊາຍນັ້ນໃຫ້ເປັນນິມິດວ່າ

[໖໘] ພຣະສະຖູບຂອງພຣະສໍາມາສໍາພຸດທະເຈົ້າຜູ້ຊົງເປັນມຸນີ
ຜູ້ທໍາລາຍທີ່ສຸດແຫ່ງພົບ ທີ່ໄດ້ມີແລ້ວກໍເປັນເຊັ່ນນີ້

[໖໙] ເມື່ອແລ້ວ ໄດ້ສ້າງພຣະສະຖູບຄໍາໄວ້ທີ່ຫາດຊາຍ
ແລ້ວໃຊ້ດອກກະດິ່ງຄໍາຈໍານວນ ໑,໐໐໐ ດອກບູຊາ

[໖໗] ຂ້າພະເຈົ້າມີຄວາມອີ່ມໃຈ ປະນົມມືນະມັດສະການທຸກເຊົ້າເຢັນ
ໄຫວ້ພຣະເຈດີຊາຍ ເໝືອນໄຫວ້ພຣະສໍາມາສໍາພຸດທະເຈົ້າ
ໃນທີ່ສະເພາະພຣະພັກ

[໖໗] ໃນເວລາທີ່ກິເລດ ຫຼື ການວິຕົກທີ່ອາໄສຄວາມຮັກເກີດຂຶ້ນ
ຂ້າພະເຈົ້າຣະລຶກເຖິງແລະເພ່ງເບິ່ງພຣະສະຖູບທີ່ຂ້າພະເຈົ້າກໍ່ໄວ້

[໖໙] ຂ້າພະເຈົ້າອາໄສພຣະສໍາມາສໍາພຸດທະເຈົ້າ
ຜູ້ນໍາໝູ່ສັດ (ອອກຈາກບ່ອນກັນດານ)
ຜູ້ຊົງເປັນຜູ້ນໍາວິເສດ ຢູ່ດ້ວຍການຕັກເຕືອນຕົນເອງວ່າ
ຄວນຣະວັງກິເລດໄວ້ເດີ້ ທ່ານຜູ້ມີຣະທຸກ
ການໃຫ້ກິເລດເກີດຂຶ້ນນີ້ເປັນຂອງບໍ່ສົມຄວນແກ່ທ່ານ

[໗໐] ເມື່ອຂ້າພະເຈົ້າຣະລຶກເຖິງພຣະສະຖູບ
ຍ່ອມເກີດຄວາມເຄົາລົບຂຶ້ນພ້ອມກັນ ໃນຂະນະນັ້ນ
ຂ້າພະເຈົ້າບັນເທົາອະກຸສົນວິຕົກສາໄດ້
ເໝືອນຊ້າງຖືກປະຕັກແທງ ບັນເທົາໄດ້ແລ້ວ

[໗໑] ຂ້າພະເຈົ້າປະພຶດຢູ່ແນວນີ້ ໄດ້ຖືກມັດຈຸຣາດຍໍ່າຍີ
ສິ້ນຊີວິດບ່ອນນັ້ນແລ້ວ ໄດ້ໄປເກີດເທິງພົມມະໂລກ

[໗໒] ຂ້າພະເຈົ້າຢູ່ເທິງພົມມະໂລກນັ້ນຈົນໝົດອາຍຸໄຂ
ມາເກີດຍັງສະຫວັນຊັ້ນຕາວະຕິງສາ ເປັນຈອມເທບ
ໄດ້ຄອງເທວະສົມບັດຕະຫຼອດ ໗໐ ຊາດ

[໗໓] ໄດ້ເປັນພຣະເຈົ້າຈັກກະພັດ ໑໐໐ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໘໔]	ຂ້າພະເຈົ້າໄດ້ສະເຫວີຍຜົນຂອງດອກກະດິ່ງຄຳເຫຼົ່ານັ້ນ
ດອກກະດິ່ງຄຳຈຳນວນ ໔໔,໐໐໐ ດອກ
ແວດລ້ອມຂ້າພະເຈົ້າໄປທຸກພົບ

[໘໕]	ຍ້ອນຂ້າພະເຈົ້າເປັນຜູ້ບຳຣຸງພຣະສະຖູບ
ຝຸ່ນລະອອງຍ່ອມບໍ່ຕິດກາຍຂ້າພະເຈົ້າ
ທີ່ກາຍຂອງຂ້າພະເຈົ້າເຫື່ອບໍ່ໄຫຼ ຂ້າພະເຈົ້າມີຣັດສະໝີຊ່ານອອກ

[໘໖]	ໂອນໍ ພຣະສະຖູບຂ້າພະເຈົ້າໄດ້ສ້າງໄວ້ດີແລ້ວ
ແມ່ນ້ຳອະມະຣິກາຂ້າພະເຈົ້າໄດ້ເຫັນດີແລ້ວ
ຍ້ອນໄດ້ກໍ່ພຣະສະຖູບຊາຍ
ຂ້າພະເຈົ້າຈຶ່ງໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ

[໘໗]	ສັດຜູ້ປາຖະໜາຈະທຳກຸສົນ ຊື່ວ່າຢຶດຖືສິ່ງທີ່ເປັນສາຣະ
ເຂດຫຼືອະເຂດບໍ່ສຳຄັນການປະຕິບັດເທົ່ານັ້ນເປັນສິ່ງສຳຄັນ

[໘໘]	ບຸຣຸດຜູ້ມີກຳລັງ ມີຄວາມອຸດສາຫະທີ່ຈະຂ້າມທະເລໃຫຍ່
ເພິ່ງຖືທ່ອນໄມ້ນ້ອຍ ແລ້ວແລ່ນລົງທະເລໃຫຍ່ດ້ວຍຄິດວ່າ

[໘໙]	ເຮົາອາໄສທ່ອນໄມ້ນີ້ແລ້ວຈັກຂ້າມທະເລໃຫຍ່ໄປໄດ້
ນໍຣະຊົນເພິ່ງຂ້າມທະເລໃຫຍ່ໄປໄດ້ດ້ວຍອຸດສາຫະວິຣິຍະ ແມ່ນສັນໃດ

[໙໐]	ຂ້າພະເຈົ້າກໍສັນນັ້ນຄືກັນ ອາໄສກຳເລັກນ້ອຍ
ທີ່ໄດ້ທຳໄວ້ແລ້ວຈຶ່ງຂ້າມພົ້ນສົງສານໄປໄດ້

[໙໑]	ເມື່ອເຖິງພົບສຸດທ້າຍ ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ
ເກີດໃນຕະກູນພາມມະນະມະຫາສານທີ່ມັ່ງຄັ່ງໃນນະຄອນສາວັດຖີ

[໙໒]	ມານດາບິດາຂອງຂ້າພະເຈົ້າເປັນຜູ້ມີສັດທາ
ນັບຖືພຣະພຸດທະເຈົ້າ
ທ່ານທັງ ໒ ນັ້ນເຫັນທຳແລ້ວແລະໄດ້ຟັງທຳແລ້ວ
ປະພຶດຕົນຕາມຄຳສອນ

[໙໓]	ທ່ານທັງ ໒ ຖືສະເກັດໄມ້ໂພໃຫ້ສ້າງເປັນພຣະສະຖູບຄຳ
ນະມັດສະການໃນທີ່ສະເພາະພຣະພັກຂອງພຣະສາກະຍະບຸດ ທຸກເຊົ້າເຢັນ

[໗໔] ໃນວັນອຸໂປສົດ ທ່ານທັງ ໔ ນໍາພຣະສະຖູບຄໍາອອກມາແລ້ວ
ກ່າວສັນເສີນພຣະພຸດທະຄຸນ
ໃຫ້ເວລາຜ່ານໄປຕະຫຼອດ ໓ ຍາມ (ດ້ວຍການປະຕິບັດທໍາ)

[໗໕] ຂ້າພະເຈົ້າໄດ້ເຫັນພຣະສະຖູບຄໍາສະເໝີ
ຈຶ່ງຣະລຶກເຖິງເຈດີຊາຍຂຶ້ນໄດ້
ນັ່ງເທິງອາສະນະດຽວໄດ້ບັນລຸອະຣະຫັນຕະຜົນແລ້ວ

**ພານະວານທີ ໔໔ ຈົບ**

[໗໖] ເມື່ອຂ້າພະເຈົ້າສະແຫວງຫາພຣະພຸດທະເຈົ້າຜູ້ເປັນນັກປາດຢູ່ນັ້ນ
ໄດ້ເຫັນພຣະທໍາເສນາບໍດີ (ສາຣີບຸດ)
ຈຶ່ງອອກບວດໃນສໍານັກຂອງທ່ານ

[໗໗] ຂ້າພະເຈົ້າມີອາຍຸໄດ້ ໗ ປີກໍໄດ້ບັນລຸອະຣະຫັນຕະຜົນ
ພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງຮູ້ຄຸນວິເສດ ຈຶ່ງໃຫ້ຂ້າພະເຈົ້າອຸປະສົມບົດ

[໗໘] ກິດທີ່ຄວນທໍາ ຂ້າພະເຈົ້າຜູ້ຍັງເປັນເດັກນ້ອຍຢູ່ ເຮັດໃຫ້ສໍາເລັດແລ້ວ
ວັນນີ້ ກິດທີ່ຄວນເຮັດໃນສາດສະໜາຂອງພຣະສາກະຍະບຸດ
ຂ້າພະເຈົ້າກໍໄດ້ເຮັດສໍາເລັດແລ້ວ

[໗໙] ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ສາວົກຂອງພຣະອົງເປັນຜູ້ລ່ວງພົ້ນເວນໄພທຸກຢ່າງ
ລ່ວງພົ້ນກິເລດເປັນເຄື່ອງຂ້ອງ ທັງປວງ ເປັນລີສີ
ນີ້ເປັນຜົນຂອງການສ້າງພຣະສະຖູບຄໍາ

[໘໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໑] ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະປຸລິນະຖູປິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປຸລິນະຖູປິຍະເຖຣາປະທານທີ ๘ ຈົບ**

## ໙. ນະລະກຸຕິກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນະລະກຸຕິກະທາຍະກະເຖຣະ

(ພຣະນະລະກຸຕິກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງ
ກ່າວວ່າ)

[໙໓] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ຫາຣິກະ
ໃນຄັ້ງນັ້ນ ພຣະສະຍຳພູພຣະນາມວ່ານາຣະທະ ປະທັບຢູ່ທີ່ເຫງົ້າຕົ້ນໄມ້

[໙໔] ຂ້າພະເຈົ້າສ້າງກຸດໄມ້ອໍ້ມຸງດ້ວຍຫຍ້າ
ໄດ້ເຮັດຄວາມສະອາດບ່ອນຈົງກົມຖວາຍພຣະສະຍຳພູ

[໙໕] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙໖] ໃນສະຫວັນຊັ້ນຕາວະຕິງສານັ້ນ ວິມານສູງ ໖໐ ໂຍດ ກວ້າງ ໓໐ ໂຍດ
ເຊິ່ງບຸນກຳເນຣະມິດສ້າງຂຶ້ນຢ່າງສວຍງາມເພື່ອຂ້າພະເຈົ້າຍ້ອນກຸດໄມ້ອໍ້

[໙໗] ຂ້າພະເຈົ້າຮື່ນຣົມຢູ່ໃນເທວະໂລກຕະຫຼອດ ໑໔ ກັບ
ໄດ້ຄອງເທວະສົມບັດຕະຫຼອດ ໗໑ ຊາດ

[໙໘] ຂ້າພະເຈົ້າໄດ້ເກີດເປັນພຣະເຈົ້າຈັກກະພັດ ໓໔ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໙໙]    ຂ້າພະເຈົ້າຂຶ້ນສູ່ຫາສາດສຶທຳ
ອັນຄວນເປັນສຸນຍາຄານທີ່ປະເສີດຢູ່ໃນສາດສະໜາ
ຂອງພຣະສາກະຍະບຸດຕາມຄວາມປາຖະໜາ

[໑໐໐]    ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍກຸດໄມ້ອໍ້

[໑໐໑]    ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໒]    ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໓]    ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນະລະກຸຕິກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນະລະກຸຕິກະທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ປີຍາລະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປີຍາລະຜະລະທາຍະກະເຖຣະ

(ພຣະປີຍາລະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໐໔]    ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ
ໃນຄັ້ງນັ້ນ ຂ້າພະເຈົ້າທ່ຽວຢູ່ໃນປ່າໃຫຍ່

ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຕິກິເລດ
ຊຶ່ງເຖິງຄວາມສຳເລັດແຫ່ງທຳທັງປວງ

[໑໐໕] ຂ້າພະເຈົ້າເຫຼື້ອມໃສໄດ້ນຳໝາກທາດ
ໄປຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ເປັນເນື້ອນາບຸນ ຜູ້ແກ່ກ້າ ດ້ວຍມືທັງ ໒ ຂອງຕົນ

[໑໐໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໑໐໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະປິຍາລະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປິຍາລະຜະລະທາຍະກະເຖຣາປະທານທີ ໑໐ ຈົບ**

**ກິງກະນິປຸບຜະວັກທີ ໔໐ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ຕິນິກິງກະນິປຸບພິຍະເຖຣາປະທານ
໒. ໂກຣັນທະປຸບພິຍະເຖຣາປະທານ
໓. ອຸປັດທະທຸດສະທາຍະກະເຖຣາປະທານ
໔. ອຸທະກະທາຍະກະເຖຣາປະທານ
໕. ນະລະກຸຕິກະທາຍະກະເຖຣາປະທານ
໖. ປັງສຸກູລະປູຊະກະເຖຣາປະທານ
໗. ກິງສຸກະປຸບພິຍະເຖຣາປະທານ
໘. ຄະຕະມັນທະທາຍະກະເຖຣາປະທານ
໙. ປຸລິນະຖູປິຍະເຖຣາປະທານ
໑໐. ປິຍາລະຜະລະທາຍະກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໑໐໗ ຄາຖາ**

## ລວມວັກທັງ ໑໐ ຄື

໑. ເມດເຕີຍຍະວັກ
໒. ສະກິງສຳມັດຊະກະວັກ
໓. ວິເພທະກິວັກ
໔. ສາລະກຸສຸມິຍະວັກ
໕. ປັງສຸກູລະວັກ
໖. ພັດທາລິວັກ
໗. ເອກະວິຫາຣິວັກ
໘. ຊະກະຕິທາຍະກະວັກ
໙. ນະມາລິວັກ
໑໐. ກິງກະນິປຸບຜະວັກ

ບັນດິດນັບຄາຖາໄດ້ ໑,໔໙໘ ຄາຖາ ໑໐ ວັກມີເມດເຕີຍຍະວັກເປັນຕົ້ນ

**໕໐໐ ອຸປາທານ ຈົບ**

# ໕໑. ກະນິການະວັກ

## ໝວດວ່າດ້ວຍກັນນິກາວິມານເປັນຕົ້ນ

## ໑. ຕິນິກະນິການະປຸບຜິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕີນິກະນິການະປຸບຜີຍະເຖຣະ

(ພຣະຕີນິກະນິການະປຸບຜີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ສຸເມທະ
ມີພຣະລັກສະນະອັນປະເສີດ ໓໒ ປະການ ຕັດສະຣູ້ເອງ
ຊົງປະສົງວິເວກ ຈຶ່ງສະເດັດເຂົ້າໄປສູ່ປ່າຫິມະພານ

[໒] ເມື່ອສະເດັດເຂົ້າໄປສູ່ປ່າຫິມະພານແລ້ວ
ພຣະອົງຜູ້ເປັນມຸນີ ຜູ້ເລີດ ຊົງປະກອບດ້ວຍພຣະກະລຸນາ
ເປັນບຸຣຸດຜູ້ສູງສຸດ ກໍປະທັບນັ່ງຂັດສະມາທິ

[໓] ໃນຄັ້ງນັ້ນ ຂ້າພະເຈົ້າເປັນວິທະຍາທອນສັນຈອນໄປໃນອາກາດ
ຂ້າພະເຈົ້າຖືຫອກອັນຄົມ ເຊິ່ງເຮັດໄວ້ດີແລ້ວ ເຫາະໄປໃນທ້ອງຟ້າ

[໔] ພຣະພຸດທະເຈົ້າຊົງເຮັດປ່າໃຫຍ່ໃຫ້ສະຫວ່າງສະໄຫວ
ເໝືອນໄຟເທິງຈອມພູເຂົາ ເໝືອນດວງຈັນໃນວັນເພັງ
ແລະເໝືອນຕົ້ນພະຍາໄມ້ສາລະເຊິ່ງມີດອກບານສະພັ່ງ

[໕] ຂ້າພະເຈົ້າເຫັນພຸດທະຣັງສີ ມີສີຄ້າຍແປວໄຟ
ທີ່ໄໝ້ໄມ້ອໍ້ ພວຍພຸ່ງອອກຈາກປ່າ ຈຶ່ງເຮັດຈິດໃຫ້ເຫຼື້ອມໃສ

[໖] ຂ້າພະເຈົ້າເລືອກເກັບດອກໄມ້ຢູ່
ໄດ້ເຫັນດອກກັນນິກາທີ່ມີກິ່ນຫອມຄ້າຍກິ່ນທິບ
ຈຶ່ງເກັບມາ ໓ ດອກ ໄດ້ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗] ໃນຄັ້ງນັ້ນ ດ້ວຍອານຸພາບແຫ່ງພຣະພຸດທະເຈົ້າ
ດອກໄມ້ຂອງຂ້າພະເຈົ້າທັງ ໓ ດອກ
ກັບຂົ້ວຂຶ້ນທັນກີບດອກລົງ ເຮັດເປັນຮົ່ມເງົາເພື່ອພຣະສາດສະດາ

[໗] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙] ໃນສະຫວັນຊັ້ນຕາວະຕິງສານັ້ນ ມີວິມານສູງ ໘໐ ໂຍດ ກວ້າງ ໖໐ ໂຍດ
ເຊິ່ງບຸນກຳສ້າງຂຶ້ນຢ່າງສວຍງາມເພື່ອຂ້າພະເຈົ້າ
ຮູ້ຈັກກັນວ່າກັນນິກາວິມານ

[໑໐] ຜາສາດ ກ ຊັ້ນ ສູງ ໑,໐໐໐ ຊົ່ວລູກທະນູ
ສະພັ່ງໄປດ້ວຍທຸງ ພາວໄປດ້ວຍແກ້ວມະນີສີຂຽວ
ແລະປ້ອມ ໑໐໐,໐໐໐ ປ້ອມ ຜາກົດໃນວິມານຂອງຂ້າພະເຈົ້າ

[໑໑] ບັນລັງຄຳ ບັນລັງແກ້ວມະນີ
ບັນລັງແກ້ວທັບທິມ ແລະບັນລັງແກ້ວຜຶກ
ເກີດຂຶ້ນຕາມປາຖະໜາຕາມປະສົງ

[໑໒] ບ່ອນນອນມີຣາຄາຫຼາຍ ຍັດດ້ວຍນຸ່ນ ມີລວດລາຍຕ່າງ ໆ
ມີຂົນຕັ້ງຂຶ້ນດ້ານດຽວແລະໝອນພ້ອມ

[໑໓] ຂ້າພະເຈົ້າມີໝູ່ເທວະດາຫ້ອມລ້ອມ
ອອກຈາກວິມານທ່ຽວຈາຣິກໄປໃນເທວະໂລກ
ໃນເວລາທີ່ປາຖະໜາຈະໄປ

[໑໔] ຢືນຢູ່ພາຍໃຕ້ດອກໄມ້
ຂ້າພະເຈົ້າມີດອກໄມ້ເປັນເຄື່ອງມຸງບັງຢູ່ເບື້ອງເທິງ
ສະຖານທີ່ປະມານ ໑໐໐ ໂຍດມຸງບັງໄປດ້ວຍດອກກັນນິກາ

[໑໕] ເຄື່ອງດົນຕີ ໘໐,໐໐໐ ຢ່າງ ບັນເລງກ່ອມຂ້າພະເຈົ້າ
ທັງເຊົ້າແລະຄ່ຳ ບໍ່ຢຸດຢ່ອນ ແວດລ້ອມຂ້າພະເຈົ້າເປັນນິດ
ຕະຫຼອດຄືນຕະຫຼອດວັນ

[໑໖] ໃນວິມານນັ້ນຂ້າພະເຈົ້າຣື່ນຣົມດ້ວຍການຟ້ອນ
ການຂັບຮ້ອງ ການເຄາະກັງສະດານ ແລະການປະໂຄມ
ເປັນຜູ້ມົກມຸ່ນໃນກາມ ບັນເທີງຢູ່ດ້ວຍຄວາມຍິນດີໃນການຫຼິ້ນ

[໑໗] ໃນຄັ້ງນັ້ນ ຂ້າພະເຈົ້າບໍລິໂພກແລະດື່ມຢູ່ໃນວິມານນັ້ນ
ບັນເທີງຢູ່ໃນສະຫວັນຊັ້ນຕາວະຕິງສາ
ຂ້າພະເຈົ້າພ້ອມດ້ວຍໝູ່ນາງອັບປະສອນບັນເທີງຢູ່ໃນວິມານອັນອຸດົມ

[໑໘] ຂ້າພະເຈົ້າຄອງເທວະສົມບັດຕະຫຼອດ ໕໐໐ ຊາດ
ເປັນພຣະເຈົ້າຈັກກະພັດ ໓໐໐ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໙] ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຍ່ອມໄດ້ໂພຄະຫຼາຍ
ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໐] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນ ໒ ພົບ
ຄື (໑) ພົບເທວະດາ (໒) ພົບມະນຸດ
ຄະຕິອື່ນຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໑] ຂ້າພະເຈົ້າເກີດສະເພາະໃນ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ
ຕະກູນຕ່ຳຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໒] ຍານຄືຊ້າງ ຍານຄືມ້າ ວໍ ແລະຄານຫາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໓] ໝູ່ທາດຍິງ ທາດຊາຍ ແລະເຫຼົ່ານາຣີ
ທີ່ປະດັບຕົກແຕ່ງຢ່າງສວຍງາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໔] ຜ້າໄໝ ຜ້າກຳພົນ ຜ້າເປືອກໄມ້ ແລະຜ້າຝ້າຍ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໕] ຜ້າໃໝ່ ໝາກໄມ້ໃໝ່ ໂພຊະນະທີ່ມີຣົດເລີດໃໝ່ ໆ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] (ຄຳເຊື້ອເຊີນເຊັ່ນນີ້ວ່າ) ເຊີນຫຍ້ຳກິນສິ່ງນີ້ ເຊີນບໍຣິໂພກສິ່ງນີ້
ເຊີນນອນເທິງບ່ອນນອນນີ້ ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໗] ຂ້າພະເຈົ້າເປັນຜູ້ທີ່ເຂົາບູຊາໃນທີ່ທຸກສະຖານ
ມີຍົດສູງສົ່ງ ມີພວກຫຼາຍ ມີບໍລິວານບໍ່ແຕກແຍກກັນທຸກເມື່ອ
ບັນດາຍາດຕິພີ່ນ້ອງທັງຫຼາຍ ຂ້າພະເຈົ້າເປັນຜູ້ປະເສີດທີ່ສຸດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໘] ຂ້າພະເຈົ້າບໍ່ຮູ້ຈັກຄວາມໜາວ ຄວາມຮ້ອນ
ທັງບໍ່ມີຄວາມຮ້ອນຮົນ
ອັນໜຶ່ງ ທຸກທາງໃຈກໍບໍ່ມີໃນຫົວໃຈຂອງຂ້າພະເຈົ້າ

[໔໙] ຂ້າພະເຈົ້າເປັນຜູ້ມີຜິວພັນເໝືອນຄຳ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຄວາມເປັນຜູ້ມີຜິວພັນຊາມຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໐] ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ ຈຸຕິຈາກເທວະໂລກ
ມາເກີດໃນຕະກູນພາມມະນະມະຫາສານທີ່ມັ່ງຄັ່ງໃນນະຄອນສາວັດຖີ

[໕໑] ຂ້າພະເຈົ້າໄດ້ລະກາມມະຄຸນ ໕ ອອກບວດເປັນບັນພະຊິດ
ມີອາຍຸໄດ້ ໗ ປີ ກໍໄດ້ບັນລຸອະຣະຫັນຕະຜົນ

[໕໔] ພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງຮູ້ຄຸນວິເສດຂອງຂ້າພະເຈົ້າ ຈຶ່ງໃຫ້ຂ້າພະເຈົ້າອຸປະສົມບົດ
ຂ້າພະເຈົ້າຍັງມີອາຍຸໜ້ອຍກໍໄດ້ເປັນປູຊະນີຍະບຸກຄົນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໕໕] ທິບພະຈັກຂຸຂອງຂ້າພະເຈົ້າບໍລິສຸດ
ຂ້າພະເຈົ້າສະຫຼາດໃນສະມາທິ

ເຖິງຄວາມສຳເລັດໃນອະພິນຍາ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໔] ຂ້າພະເຈົ້າບັນລຸປະຕິສຳພິທາ ສະຫຼາດໃນອິດທິບາດ
ເຖິງຄວາມສຳເລັດໃນພຣະສັດທຳ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໕] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໓໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຕິນິກະນິກາຣະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ຕິນິກະນິກາຣະປຸບຜິຍະເຖຣາປະທານທີ ໑ ຈົບ**

## ໔. ເອກະປັດຕະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະປັດຕະທາຍະກະເຖຣະ

(ພຣະເອກະປັດຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໙] ຂ້າພະເຈົ້າເປັນຊ່າງໝໍ້ຢູ່ໃນນະຄອນຫົງສະວະດີ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ

[໔໐] ຂ້າພະເຈົ້າໄດ້ຖວາຍບາດດິນທີ່ເຮັດແລ້ວຢ່າງດີ
ແດ່ພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເມື່ອຖວາຍບາດແດ່ພຣະຜູ້ມີພຣະພາກເຈົ້າຜູ້ຕົງ ຜູ້ຄົງທີ່ແລ້ວ

[໔໑] ເມື່ອບັງເກີດໃນພົບ ຂ້າພະເຈົ້າຍ່ອມໄດ້ພາຊະນະຄຳ
ແລະຈານທີ່ເຮັດດ້ວຍເງິນ ເຮັດດ້ວຍຄຳ ແລະເຮັດດ້ວຍແກ້ວມະນີ

[໔໒] ຂ້າພະເຈົ້າບໍຣິໂພກອາຫານດ້ວຍຖາດຄຳ
ນີ້ເປັນຜົນແຫ່ງບຸນກຳ
ແລະເປັນຜູ້ເລີດກວ່າຊົນທັງຫຼາຍໂດຍຍົດ

[໔໓] ພືດແມ່ນໜ້ອຍແຕ່ຫວ່ານລົງໃນນາດີ
ເມື່ອຝົນຕົກຢູ່ໂດຍສະໝ່ຳສະເໝີ
ຜົນຍ່ອມເຮັດຊາວນາໃຫ້ຍິນດີໄດ້ ສັນໃດ

[໔໔] ການຖວາຍບາດກໍສັນນັ້ນ ຂ້າພະເຈົ້າໄດ້ຫວ່ານລົງໃນພຸດທະເຂດ
ເມື່ອສາຍທານຄືປີຕິຕົກລົງຢູ່ ຜົນກໍເຮັດຂ້າພະເຈົ້າໃຫ້ຍິນດີ

[໔໕] ເຂດຄືສົງກໍດີ ຄະນະກໍດີ ເທົ່າທີ່ມີຢູ່
ທີ່ຈະໃຫ້ຄວາມສຸກແກ່ສັບພະສັດ ສະເໝີດ້ວຍພຸດທະເຂດບໍ່ມີເລີຍ

[໔໖] ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບຸຣຸດສູງສຸດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຍ້ອນໄດ້ຖວາຍບາດໜ່ວຍໜຶ່ງ
ຂ້າພຣະອົງຈຶ່ງໄດ້ບັນລຸບົດອັນບໍ່ຫວັ່ນໄຫວ

[໔໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍບາດໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບາດ

[໔໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເອກະປັດຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກະປັດຕະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ກາສຸມາຣິກະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກາສຸມາຣິກະຜະລະທາຍະກະເຖຣະ

(ພຣະກາສຸມາຣິກະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໑] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ອົງອາດກວ່ານໍຣະຊົນ
ສ່ອງແສງດັ່ງຕົ້ນກັນນິກາ ປະທັບນັ່ງຢູ່ລະຫວ່າງພູເຂົາ

[໕໔] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ປະນົມມືເໜືອຫົວ
ໄດ້ຖືໝາກກະບົກມາຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໕໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໕໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກາສຸມາຣິກະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການດັ່ງນີ້

**ກາສຸມາຣິກະຜະລະທາຍະກະເຖຣາປະທານທີ ໓ ຈົບ**

## ໔. ອະວະຕະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະວະຕະຜະລິຍະເຖຣະ

(ພຣະອະວະຕະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສະຫັດສະຣັງສີ
ຊົງເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ຊົງອອກຈາກວິເວກແລ້ວສະເດັດໄປບິນທະບາດ

[໕໘] ຂ້າພະເຈົ້າຖືໝາກໄມ້ຢູ່ ໄດ້ເຫັນແລ້ວ
ຈຶ່ງເຂົ້າໄປເຝົ້າພຣະອົງຜູ້ອົງອາດກວ່ານໍຣະຊົນ
ເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ຈຶ່ງໄດ້ຖວາຍໝາກກ້ວຍ

[໔໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໕໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະວະຕະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອະວະຕະຜະລິຍະເຖຣາປະທານທີ ໔ ຈົບ**

## ໕. ຈາຣະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈາຣະຜະລິຍະເຖຣະ

(ພຣະຈາຣະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໓] ຂ້າພະເຈົ້າໄດ້ຖວາຍໝາກອະໂມຣະແດ່ພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ສົມຄວນຮັບເຄື່ອງບູຊາ
ເຊິ່ງກຳລັງສະເດັດດຳເນີນໄປຕາມຖະໜົນ

[໕໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຈາຣະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຈາຣະຜະລິຍະເຖຣາປະທານທີ ໕ ຈົບ**

## ໖. ມາຕຸລຸງຄະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມາຕຸລຸງຄະຜະລະທາຍະກະເຖຣະ

(ພຣະມາຕຸລຸງຄະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງ
ຕົນຈຶ່ງກ່າວວ່າ)

[໖໘] ຂ້າພະເຈົ້າໄດ້ເຫັນພຣະຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ສ່ອງແສງດັ່ງດອກກັນນິກາ
ຜູ້ (ຮຸ່ງເຮືອງ) ດັ່ງດວງຈັນໃນວັນເພັງ ຊົງຮຸ່ງເຮື່ອງດັ່ງຕົ້ນກັນລະປະພຶກ

[໖໙] ຂ້າພະເຈົ້າເຫຼື້ອມໃສແລ້ວ ໄດ້ຖືໝາກນາວດ້ວຍມືທັງ ໒ ຂອງຕົນ
ໄປຖວາຍພຣະສາດສະດາຜູ້ຊົງເປັນທັກຂິໄນຍະບຸກຄົນ ຜູ້ຊົງແກ່ກ້າ

[໗໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະມາຕຸລຸງຄະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມາຕຸລຸງຄະຜະລະທາຍະກະເຖຣາປະທານທີ ໖ ຈົບ**

## ໗. ອັດເຊນະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອັດເຊນະຜະລະທາຍະກະເຖຣະ

(ພຣະອັດເຊນະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໔] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ອະຊິນະ (ສິດທັດຖະ)
ຜູ້ພຽບພ້ອມດ້ວຍຈະຣະນະ ສະຫຼາດໃນສະມາທິ ເປັນມຸນີ
ປະທັບຢູ່ທີ່ພູເຂົາຫິມະພານ

[໗໕] ຂ້າພະເຈົ້າຖືໝາກຮົກຟ້າມີຂະໜາດເທົ່າໝໍ້
ຖືຄັນຮົ່ມໃບໄມ້ແລ້ວໄດ້ຖວາຍພຣະສາດສະດາ

[໗໖] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໗] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອັດເຊນະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອັດເຊນະຜະລະທາຍະກະເຖຣາປະທານທີ ໗ ຈົບ**

## ໘. ອະໂມນະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະໂມນະຜະລິຍະເຖຣະ

(ພຣະອະໂມນະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໐] ຂ້າພະເຈົ້າໄດ້ຖວາຍໝາກໄມ້ແດ່ພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ສົມຄວນຮັບເຄື່ອງບູຊາ
ເຊິ່ງກຳລັງສະເດັດດຳເນີນໄປຕາມຖະໜົນ

[໘໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະໂມນະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອະໂມນະຜະລິຍະເຖຣາປະທານທີ ໘ ຈົບ**

## ໙. ຕາລະຜະລິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕາລະຜະລິຍະເຖຣະ

(ພຣະຕາລະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໕] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສະຕະຣັງສີ
ຊົງເປັນພຣະສະຍຳພູ ຜູ້ບໍ່ຊົງພ່າຍແພ້
ຊົງອອກຈາກວິເວກແລ້ວສະເດັດໄປບິນທະບາດ

[໗໖] ຂ້າພະເຈົ້າຖືໝາກໄມ້ຢູ່ ໄດ້ເຫັນແລ້ວ
ຈຶ່ງເຂົ້າໄປເຝົ້າພຣະອົງຜູ້ອົງອາດກວ່ານໍຣະຊົນ
ເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ຈຶ່ງໄດ້ຖວາຍໝາກຕານ

[໗໗] ໃນກັບທີ ໙໔ ນັບຈາກກັບນີ້ໄປ

ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໘໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ๓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ๖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕາລະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕາລະຜະລິຍະເຖຣາປະທານທີ ໙ ຈົບ**

## ໑໐. ນາລິເກຣະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນາລິເກຣະຜະລະທາຍະກະເຖຣະ

(ພຣະນາລິເກຣະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໑] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຊາວສວນຢູ່ໃນນະຄອນພັນທຸມະດີ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ເຊິ່ງກຳລັງສະເດັດໄປໃນອາກາດ

[໙໔] ຂ້າພະເຈົ້າໄດ້ຖືໝາກພ້າວໄປຖວາຍພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ປະທັບຢືນຢູ່ໃນອາກາດ ຊົງຮັບແລ້ວ

[໙໓]	ເຮັດໃຫ້ຂ້າພະເຈົ້າເກີດຄວາມພໍໃຈ
ແລະຊົງນໍາຄວາມສຸກມາໃຫ້ໃນປັດຈຸບັນ
ຂ້າພະເຈົ້າມີຈິດຜ່ອງໃສ ຍ້ອນໄດ້ຖວາຍໝາກພ້າວແດ່ພຣະພຸດທະເຈົ້າ

[໙໔]	ໄດ້ປະສົບປີຕິອັນໄພບູນ ແລະສຸກອັນສູງສຸດ
ຣັດຕະນະຍ່ອມບັງເກີດແກ່ຂ້າພະເຈົ້າຜູ້ບັງເກີດຢູ່ໃນພົບນັ້ນ ໆ

[໙໕]	ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໙໖]	ທິບພະຈັກຂຸຂອງຂ້າພະເຈົ້າບໍລິສຸດ
ຂ້າພະເຈົ້າສະຫຼາດໃນສະມາທິ ເຖິງຄວາມສໍາເລັດອະພິນຍາ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໙໗]	ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໘]	ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໙໙]	ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະນາລິເກຣະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນາລິເກຣະຜະລະທາຍະກະເຖຣາປະທານທີ ໑໐ ຈົບ**

**ກະນິກາຣະວັກທີ ໕໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ຄື

໑. ຕິນິກະນິກາຣະປຸບຜິຍະເຖຣາປະທານ
໒. ກາສຸມາຣິກະຜະລະທາຍະກະເຖຣາປະທານ
໓. ຈາຣະຜະລິຍະເຖຣາປະທານ
໔. ອັດເຊນະຜະລະທາຍະກະເຖຣາປະທານ
໕. ຕາລະຜະລິຍະເຖຣາປະທານ
໖. ເອກະປັດຕະທາຍະກະເຖຣາປະທານ
໗. ອະວະຕະຜະລິຍະເຖຣາປະທານ
໘. ມາຕຸລຸງຄະຜະລະທາຍະກະເຖຣາປະທານ
໙. ອະໂມນະຜະລິຍະເຖຣາປະທານ
໑໐. ນາລິເກຣະຜະລະທາຍະກະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໖໖ ຄາຖາ**

# ໕໘. ຜະລະທາຍະກະວັກ

## ໝວດວ່າດ້ວຍການຖວາຍໝາກໄມ້ເປັນຕົ້ນ

## ໑. ກຸຣັນຊິຍະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸຣັນຊິຍະຜະລະທາຍະກະເຖຣະ

(ພຣະກຸຣັນຊິຍະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ ທ່ຽວຢູ່ໃນປ່າ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຊຶ່ງເຖິງຄວາມສຳເລັດແຫ່ງທຳທັງປວງ

[໒] ຂ້າພະເຈົ້າເຫຼື້ອມໃສແລ້ວ ໄດ້ຖືໝາກອັນຊັນຂາວ ດ້ວຍມືທັງ ໒ ຂອງຕົນ
ໄປຖວາຍພຣະພຸດທະເຈົ້າ ຜູ້ປະເສີດທີ່ສຸດ
ເປັນເນື້ອນາບຸນ ເປັນນັກປາດ

[໓] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກຸຣັນຊິຍະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸຣັນຊິຍະຜະລະທາຍະກະເຖຣາປະທານທີ ໑ ຈົບ**

## ໘. ກະປິຕະກະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກະປິຕະກະຜະລະທາຍະກະເຖຣະ

(ພຣະກະປິຕະກະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗] ຂ້າພະເຈົ້າໄດ້ຖວາຍໝາກຂວິດແດ່ພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ສົມຄວນຮັບເຄື່ອງບູຊາ
ເຊິ່ງກຳລັງສະເດັດດຳເນີນໄປຕາມຖະໜົນ

[໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະກະປິຕະກະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກະປິຕະກະຜະລະທາຍະກະເຖຣາປະທານທີ ໘ ຈົບ**

# ໓. ໂກສຸມພະຜະລິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະໂກສຸມພະຜະລິຍະເຖຣະ

(ພຣະໂກສຸມພະຜະລິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຖວາຍໝາກຄໍ້ແດ່ພຣະຜູ້ອົງອາດກວ່ານໍຣະຊົນ
ຜູ້ເປັນເທບຍິ່ງກວ່າເທບ ຊົງງົດງາມດັ່ງຕົ້ນຮັກຟ້າຂາວ
ເຊິ່ງກຳລັງສະເດັດດຳເນີນໄປຕາມຖະໜົນ

[໑໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂກສຸມພະຜະລິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂກສຸມພະຜະລິຍະເຖຣາປະທານທີ ໓ ຈົບ**

# ໔. ເຖຕະກະປຸບພິຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະເຖຕະກະປຸບພິຍະເຖຣະ

(ພຣະເຖຕະກະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗] ພຣະພຸດທະເຈົ້າຜູ້ເປັນບຸຣຸດສູງສຸດປະທັບຢູ່ທີ່ຝັ່ງແມ່ນ້ຳວິນຕາ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ຜູ້ເປັນເອກອັກຄະຣະບຸກຄົນ ມີພຣະຫະໄທຕັ້ງໝັ້ນ

[໑໘] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ດ້ວຍດອກກາຣະເກດ
ເຊິ່ງມີກິ່ນຫອມເໝືອນນ້ຳເຜີ້ງ

[໑໙] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເຖຕະກະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເຖຕະກະປຸບພິຍະເຖຣາປະທານທີ ໔ ຈົບ**

# ໕. ນາຄະປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະນາຄະປຸບພີຍະເຖຣະ

(ພຣະນາຄະປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໓] ຂ້າພະເຈົ້າໄດ້ນຳດອກກາກະທິງມາບູຊາພຣະສຳມາສຳພຸດທະເຈົ້າ
ຜູ້ມີພຣະສະຫວີວັນດັ່ງຄຳ ຜູ້ສົມຄວນຮັບເຄື່ອງບູຊາ
ເຊິ່ງກຳລັງສະເດັດດຳເນີນໄປຕາມຖະໜົນ

[໔໔] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນາຄະປຸບພີຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນາຄະປຸບພີຍະເຖຣາປະທານທີ ໕ ຈົບ**

# ໖. ອັດຊຸນະປຸບພີຍະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອັດຊຸນະປຸບພີຍະເຖຣະ

(ພຣະອັດຊຸນະປຸບພີຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເປັນກິນນະຣະຢູ່ທີ່ຝັ່ງແມ່ນ້ຳຈັນທະພາຄາ
ໄດ້ເຫັນພຣະສະຍຳພູພຸດທະເຈົ້າ ຜູ້ປາສະຈາກທຸລີຄືກິເລດ
ຜູ້ບໍ່ຊີງພ່າຍແພ້

[໔໙] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ເກີດຄວາມປາໂມດ ປະນົມມືແລ້ວ
ຖືດອກອ໊ກຟ້າມາບູຊາພຣະສະຍຳພູ

[໕໐] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະຮ່າງກິນນະຣະແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໕໑] ຂ້າພະເຈົ້າໄດ້ເປັນຈອມເທບຄອງເທວະສົມບັດຕະຫຼອດ ໕໖ ຊາດ
ໄດ້ເກີດເປັນພຣະເຈົ້າຈັກກະພັດຄອງມະຫາສົມບັດ ໑໐ ຊາດ

[໕໒] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ພືດນັ້ນເປັນອັນຂ້າພະເຈົ້າໄດ້ຫວ່ານໄວ້ແລ້ວ
ໃນເນື້ອນາທີ່ດີຄືພຣະສະຍຳພູ

[໕໓] ກຸສົນຂອງຂ້າພະເຈົ້າມີຢູ່ ຂ້າພະເຈົ້າບວດເປັນບັນພະຊິດ
ວັນນີ້ຂ້າພະເຈົ້າເປັນຜູ້ຄວນແກ່ການບູຊາ
ໃນສາດສະໜາຂອງພຣະສາກະຍະບຸດ

[໕໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອັດຊຸນະປຸບພິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອັດຊຸນະປຸບພິຍະເຖຣາປະທານທີ ໖ ຈົບ**

## ໗. ກຸຕະຊະປຸບພິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸຕະຊະປຸບພິຍະເຖຣະ

(ພຣະກຸຕະຊະປຸບພິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໗] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ ອັດຈະລະ
ພຣະພຸດທະເຈົ້າພຣະນາມວ່າ ສຸທັດສະນະ ປະທັບຢູ່ທີ່ລະຫວ່າງພູເຂົາ

[໓໘] ຂ້າພະເຈົ້າຖືດອກໄມ້ເຊິ່ງເກີດທີ່ພູເຂົາຫິມະພານເຫາະໄປ ໃນບ່ອນນັ້ນ
ໄດ້ເຫັນພຣະສຳມາສຳພຸດທະເຈົ້າຜູ້ຂ້າມໂອຄະໄດ້ແລ້ວ ຜູ້ບໍ່ມີອາສະວະ

[໓໙] ໃນຄັ້ງນັ້ນ ຂ້າພະເຈົ້າຖືດອກໂມກໃຫຍ່
ບູຊາພຣະສະຍຳພູພຸດທະເຈົ້າ ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່

[໔໐] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໒] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກຸຕະຊະປຸບຜິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸຕະຊະປຸບຜິຍະເຖຣາປະທານທີ ໗ ຈົບ**

## ໗. ໂຄສະສັນຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂຄສະສັນຍະກະເຖຣະ

(ພຣະໂຄສະສັນຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔] ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອທ່ຽວຢູ່ໃນປ່າໃຫຍ່
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລີຄືກິເລດ
ເຊິ່ງໝູ່ເທວະດາຫ້ອມລ້ອມແລ້ວ

[໔໕] ຊົງປະກາດສັດຈະ ໔ ຊົງສະແດງອະມະຕະບົດຢູ່
ຂ້າພະເຈົ້າໄດ້ຟັງທຳອັນມ່ວນຂອງພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນຂອງໂລກພຣະນາມວ່າ ສິຂີ

[໔໖] ຈຶ່ງເຮັດຈິດໃຫ້ເຫຼື້ອມໃສໃນພຣະສຸຣະສຽງແລະໃນພຣະອົງ
ຜູ້ຫາໃຜສະເໝີເໝືອນແລະປຽບທຽບບໍ່ໄດ້
ເມື່ອເຮັດຈິດໃຫ້ເຫຼື້ອມໃສແລ້ວ ຈຶ່ງໄດ້ຂ້າມພົບທີ່ຂ້າມໄດ້ຍາກ

[໔໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ສັນຍາໃນພຣະສຸຣະສຽງໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງສັນຍາໃນພຣະສຸຣະສຽງ

[໔໘] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂຄສະສັນຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂຄສະສັນຍະກະເຖຣາປະທານທີ ໗ ຈົບ**

## ໘. ສັບພະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສັບພະຜະລະທາຍະກະເຖຣະ

(ພຣະສັບພະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໑] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເປັນພາມມີນາມວ່າ ວະຣຸນະ
ຮຽນຈົບມົນແລ້ວລະຖິ້ມບຸດ ໑໐ ຄົນ ເຂົ້າປ່າ

[໕໒] ສ້າງອາສົມຢ່າງດີ ສ້າງປັນນະສາລາ
ຈັດໄວ້ເປັນສັດສ່ວນເປັນຕາອອນຊອນ ຢູ່ໃນປ່າໃຫຍ່

[໕໓] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ
ພຣະອົງຊົງປະສົງຈະຊ່ວຍເຫຼືອຂ້າພະເຈົ້າ
ຈຶ່ງສະເດັດມາຍັງອາສົມຂອງຂ້າພະເຈົ້າ

[໕໔] ພຣະຣັດສະໝີໄດ້ແຜ່ໄປທົ່ວເຂດປ່າ
ໃນຄັ້ງນັ້ນ ປ່າໃຫຍ່ສະຫວ່າງສະໄຫວດ້ວຍພຸດທານຸພາບ

[໕໕] ຂ້າພະເຈົ້າເຫັນປາຕິຫານຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຜູ້ຄົງທີ່ ຈຶ່ງໄດ້ເກັບໃບໄມ້ມາຫຍິບເປັນກະທົງແລ້ວໃສ່ໝາກໄມ້ຈົນເຕັມ

[໕໖] ເຂົ້າໄປເຝົ້າພຣະສຳມາສຳພຸດທະເຈົ້າແລ້ວໄດ້ຖວາຍທັງຫາບ
ຍ້ອນຈະຊົງອະນຸເຄາະຂ້າພະເຈົ້າ
ພຣະພຸດທະເຈົ້າຈຶ່ງໄດ້ຕັດພຣະດຳຣັດນີ້ວ່າ

[໕໗] ທ່ານຈຶ່ງທາບຕາມຫຼັງເຮົາມາ
ເມື່ອພຣະສົງສັນແລ້ວ ບຸນຈັກມີແກ່ທ່ານ

[໕໘] ຂ້າພະເຈົ້າໄດ້ຫອບຫໍ່ໝາກໄມ້ຖວາຍພິກຂຸສົງ
ເຮັດຈິດໃຫ້ເຫຼື້ອມໃສໃນພິກຂຸສົງນັ້ນແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໕໙] ຂ້າພະເຈົ້າຜູ້ປະກອບດ້ວຍບຸນກຳ
ສະເຫວີຍຍົດ ພ້ອມດ້ວຍການຟ້ອນລຳ ຂັບຮ້ອງ
ແລະປະໂຄມດົນຕີອັນເປັນທິບ
ຢູ່ໃນສະຫວັນຊັ້ນດຸສິດນັ້ນ

[໖໐] ຂ້າພະເຈົ້າເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາ ຫຼື ມະນຸດກໍຕາມ
(ໃນກຳເນີດນັ້ນ ໆ) ຂ້າພະເຈົ້າບໍ່ມີຄວາມຂາດດ້ວຍໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໑] ຍ້ອນໄດ້ຖວາຍໝາກໄມ້ແດ່ ພຣະພຸດທະເຈົ້າ
ຂ້າພະເຈົ້າຈຶ່ງຄອງຄວາມເປັນໃຫຍ່
ຕະຫຼອດທະວີບທັງ ໔ ພ້ອມທັງທະເລແລະພູເຂົາ

[໖໒] ແມ່ນຝູງນົກເທົ່າທີ່ໂຜບິນຢູ່ໃນອາກາດ
ກໍຢູ່ໃນອຳນາດຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໓] ຍັກ ພູດ ຣາກສົດ ກຸມພັນ ແລະຄຸດ
ເທົ່າທີ່ມີຢູ່ໃນເຂດປ່າ ຕ່າງກໍມາບຳຣຸງຂ້າພະເຈົ້າ

[໖໔] ແມ່ນແຂ້ ໝາໃນ ເສືອ ເຫຼືອດ ແລະຍຸງທັງ ໔
ກໍຢູ່ໃນອຳນາດຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໕] ແມ້ນຄຸດແລະເຫຼົ່າປັກສີທີ່ມີກຳລັງຫຼາຍ
ກໍມານັບຖືຂ້າພະເຈົ້າເປັນບ່ອນເພິ່ງ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໖] ແມ່ນພວກນາກທີ່ມີອາຍຸຍືນ ມີລິດ
ມີຍົດຫຼາຍ ກໍຢູ່ໃນອຳນາດຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໗] ຣາດຊະສີ ເສືອໂຄ່ງ ເສືອເຫຼືອງ ໝີ
ໝາປ່າ ໝາໃນ ກໍຢູ່ໃນອຳນາດຂອງຂ້າພະເຈົ້າ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໘] ຣຸກຂະເທວະດາທີ່ມີຣັດສະໝີດັ່ງດາວປະກາຍພຶກ
ແລະເຫຼົ່າອາກາສັດຖະເທວະດາ
ທັງໝົດລ້ວນນັບຖືຂ້າພະເຈົ້າເປັນບ່ອນເພິ່ງ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໖໙] ທຳທີ່ເຫັນໄດ້ໂດຍຍາກ ລະອຽດ ເລິກເຊິ່ງ
ເຊິ່ງພຣະສາດສະດາຊົງປະກາດໄວ້ດີແລ້ວ
ຂ້າພະເຈົ້າກໍໄດ້ບັນລຸແລ້ວ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໐] ຂ້າພະເຈົ້າບັນລຸວິໂມກ ໘ ເປັນຜູ້ມີຄວາມພຽນ
ແລະມີປັນຍາເຄື່ອງຮັກສາຕົນຢູ່ຢ່າງຜູ້ບໍ່ມີອາສະວະ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໑] ບັນດາພຸດທະບຸດຜູ້ບັນລຸອະຣະຫັນຕະຜົນ
ສິ້ນໂທສະ ມີຍົດຍິ່ງໃຫຍ່ ຂ້າພະເຈົ້າກໍເປັນຜູ້ໜຶ່ງ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໒] ຂ້າພະເຈົ້າໄດ້ສຳເລັດອະພິນຍາ
ຖືກກຸສົນມູນຕັກເຕືອນແລ້ວ
ກຳນົດຮູ້ອາສະວະທັງປວງແລ້ວ ຢູ່ຢ່າງຜູ້ບໍ່ມີອາສະວະ

[໗໓] ບັນດາພຸດທະບຸດຜູ້ໄດ້ວິດຊາ ໓ ມີລິດ
ມີຍົດຍິ່ງໃຫຍ່ ມີທູທິບ ຂ້າພະເຈົ້າກໍເປັນຜູ້ໜຶ່ງ

[໗໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ

ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[໗໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສັບພະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສັບພະຜະລະທາຍະກະເຖຣາປະທານທີ ໙ ຈົບ**

## ១໐. ປະທຸມະທາຣິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະປະທຸມະທາຣິຍະເຖຣະ

(ພຣະປະທຸມະທາຣິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໗໘] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ໂຣມະສະ
ໃນຄັ້ງນັ້ນ ພຣະພຸດທະເຈົ້າພຣະນາມວ່າອະພິສຳພະວະ ປະທັບຢູ່ກາງແຈ້ງ

[໗໙] ຂ້າພະເຈົ້າອອກຈາກບ່ອນຢູ່ ກັ່ງດອກປະທຸມ (ແທນຮົ່ມ)
ເມື່ອກັ້ງຢູ່ຕະຫຼອດໜຶ່ງວັນແລ້ວຈຶ່ງກັບໄປສູ່ບ່ອນຢູ່

[໘໐] ໃນກັບທີ ៣១ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໑] ກິເລດທັງຫຼາຍ ຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໒] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະປະທຸມະທາຣິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປະທຸມະທາຣິຍະເຖຣາປະທານທີ ໑໐ ຈົບ**

**ຜະລະທາຍະກະວັກທີ ໕໒ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ກຸຣັນຊິຍະຜະລະທາຍະກະເຖຣາປະທານ
໒. ກະປິຕະກະຜະລະທາຍະກະເຖຣາປະທານ
໓. ໂກສຸມພະຜະລິຍະເຖຣາປະທານ
໔. ເກຕະກະປຸບຜິຍະເຖຣາປະທານ
໕. ນາຄະປຸບຜິຍະເຖຣາປະທານ
໖. ອັດຊຸນະປຸບຜິຍະເຖຣາປະທານ
໗. ກຸຕະຊະປຸບຜິຍະເຖຣາປະທານ
໘. ໂຄສະສັນຍະກະເຖຣາປະທານ
໙. ສັບພະຜະລະທາຍະກະເຖຣາປະທານ
໑໐. ປະທຸມະທາຣິຍະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໗໓ ຄາຖາ**

# ໔໖. ຕິນະທາຍະກະວັກ

## ໝວດວ່າດ້ວຍການຖວາຍຫຍ້າເປັນຕົ້ນ

## ໑. ຕິນະມຸດຖິທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຕິນະມຸດຖິທາຍະກະເຖຣະ

(ພຣະຕິນະມຸດຖິທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ ລຳພະກະ
ທີ່ພູເຂົານັ້ນແລ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຕິດສະ
ສະເດັດຈົງກົມຢູ່ກາງແຈ້ງ

[໒] ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອຢູ່ໃນປ່າດົງໃຫຍ່
ເຫັນພຣະພຸດທະເຈົ້າຜູ້ເປັນເທບເໜືອເທບ
ຈຶ່ງໄດ້ຖວາຍຫຍ້າກຳໜຶ່ງ

[໓] ເພື່ອປະທັບນັ່ງສຳລັບພຣະພຸດທະເຈົ້າ
ເມື່ອຖວາຍແລ້ວເຮັດຈິດໃຫ້ເຫຼື້ອມໃສ
ໄດ້ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ອວ່າຍໜ້າຫຼີກໄປທາງທິດເໜືອ

[໔] ຂ້າພະເຈົ້າພໍຍ່າງໄປໄດ້ບໍ່ດົນກໍຖືກຣາດຊະສີທຳຮ້າຍ
ຖືກຣາດຊະສີຂ້າຕາຍໃນບ່ອນນັ້ນນັ້ນເອງ

[໕] ໃນເວລາໃກ້ຕາຍ ກຳທີ່ຂ້າພະເຈົ້າໄດ້ທຳໄວ້ໃນພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ບໍ່ມີອາສະວະ ຂ້າພະເຈົ້າຈຶ່ງໄດ້ໄປເກີດໃນເທວະໂລກ
ເໝືອນຄວາມໄວຂອງລູກສອນທີ່ພົ້ນຈາກແລ່ງໄປແລ້ວ

[໖] ໃນເທວະໂລກນັ້ນ ຜາສາດ ໆ ຊັ້ນ ສູງ ໑,໐໐໐ ຊົ່ວລູກທະນູ
ຮຸ່ງເຮືອງໄປດ້ວຍທຸງ ເຫຼື້ອມໄປດ້ວຍແກ້ວມະນີສີຂຽວ
ອັນສວຍງາມ ເຊິ່ງບຸນກຳເນຣະມິດໃຫ້

[໗] ແສງສະຫວ່າງຂອງຜາສາດນັ້ນສ່ອງແສງດັ່ງດວງອາທິດອຸໄທ
ຂ້າພະເຈົ້າມີນາງເທບກັນຍາຢູ່ນຳຫຼາຍ
ເພີດເພີນມົກມຸ່ນຢູ່ໃນກາມມະຄຸນ

[໘] ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວ
ຈຸຕິຈາກເທວະໂລກກັບມາເກີດເປັນມະນຸດ
ໄດ້ບັນລຸທຳເປັນທີ່ສິ້ນອາສະວະແລ້ວ

[໙] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຫຍ້າສຳລັບປະທັບນັ່ງໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຫຍ້າກຳໜຶ່ງ

[໑໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຕິນະມຸດຖິທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຕິນະມຸດຖິທາຍະກະເຖຣາປະທານທີ ໑ ຈົບ**

## ໔. ເວດຈະກະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະເວດຈະກະທາຍະກະເຖຣະ

(ພຣະເວດຈະກະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓] ຂ້າພະເຈົ້າເຫຼື້ອມໃສ ໄດ້ຖວາຍເວດຈະກຸດຕີຫຼັງໜຶ່ງດ້ວຍມືຂອງຕົນ
ແດ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ວິປັດສີ ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໑໔] ຂ້າພະເຈົ້າໄດ້ຍານຄືຊ້າງ ຍານຄືມ້າ
ແລະຍານທິບ ຢ່າງຄົບຖ້ວນ
ໄດ້ບັນລຸທຳເປັນທີ່ສິ້ນອາສະວະຍ້ອນການຖວາຍເວດຈະກຸດີນັ້ນ

[໑໕] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເວດຈະກຸດຕີໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເວດຈະກຸດີ

[໑໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະເວດຈະກະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເວດຈະກະທາຍະກະເຖຣາປະທານທີ ໔ ຈົບ**

## ៩. ສະຣະນະຄະມະນິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສະຣະນະຄະມະນິຍະເຖຣະ

(ພຣະສະຣະນະຄະມະນິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໙] ໃນຄັ້ງນັ້ນ ຂ້າພະເຈົ້າຜູ້ເປັນອາຊີວະກະແລະພິກຂຸ
ລົງເຮືອໄປນຳກັນ ເມື່ອເຮືອກຳລັງຈະອັບປາງ
ພິກຂຸໄດ້ໃຫ້ສະຣະນະແກ່ຂ້າພະເຈົ້າ

[໔໐] ໃນກັບທີ ៩໑ ນັບຈາກກັບນີ້ໄປ
ພິກຂຸນັ້ນໄດ້ໃຫ້ສະຣະນະໃດແກ່ຂ້າພະເຈົ້າ
ດ້ວຍສະຣະນະນັ້ນ ຂ້າພະເຈົ້າຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງສະຣະນະຄົມ

[໔໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໒] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ៣ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔៣] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະສະຣະນະຄະມະນິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ສະຣະນະຄະມະນິຍະເຖຣາປະທານທີ ៩ ຈົບ**

## ໔. ອຳພັນຊະນະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຳພັນຊະນະທາຍະກະເຖຣະ

(ພຣະອຳພັນຊະນະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ຂ້າພະເຈົ້າຢູ່ໃກ້ພຣະຣາດຊະອຸທະຍານໃນນະຄອນພັນທຸມະດີ
ໃນຄັ້ງນັ້ນ ຂ້າພະເຈົ້ານຸ່ງຜ້າໜັງສັດ ພາຍຄົນໂທນ້ຳ

[໘໕] ຂ້າພະເຈົ້າໄດ້ເຫັນພຣະສະຍຳພູພຸດທະເຈົ້າ ຜູ້ປາສະຈາກທຸລິຕິກິເລດ
ຜູ້ບໍ່ຊົງພ່າຍແພ້ ມີຄວາມພຽນ ມີພຣະທະໄທແນ່ວແນ່
ມີປົກກະຕິເຂົ້າຊານ ຍິນດີໃນຊານ ຊົງສະແຫວງຄຸນອັນຍິ່ງໃຫຍ່

[໘໖] ສຳເລັດຄວາມປະສົງທັງປວງ ຂ້າມໂອຄະໄດ້ແລ້ວ ບໍ່ມີອາສະວະ
ເມື່ອເຫັນແລ້ວກໍເປັນຜູ້ເຫຼື້ອມໃສ ມີໃຈຍິນດີ ໄດ້ຖວາຍຢາຢອດຕາ

[໘໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຢາຢອດຕາ

[໘໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຳພັນຊະນະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຳພັນຊະນະທາຍະກະເຖຣາປະທານທີ ໔ ຈົບ**

## ໕. ສຸປະຕະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸປະຕະທາຍະກະເຖຣະ

(ພຣະສຸປະຕະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໑] ພຣະພຸດທະເຈົ້າພຣະນາມວ່າ ວິປັດສີ ຊຶ່ງເປັນຜູ້ນຳສັດໂລກ
ສະເດັດອອກຈາກບ່ອນປະທັບພັກຜ່ອນກາງເວັນແລ້ວ
ຂ້າພະເຈົ້າໄດ້ຖວາຍຜ້າທໍຢ່າງດີ ເນື້ອເບົາ
ບັນເທີງຢູ່ໃນສະຫວັນຕະຫຼອດກັບໜຶ່ງ

[໓໒] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍຜ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍຜ້າຢ່າງດີ

[໓໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸປະຕະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການ ດັ່ງນີ້

**ສຸປະຕະທາຍະກະເຖຣາປະທານທີ ໕ ຈົບ**

## ໖. ທັບພະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທັບພະທາຍະກະເຖຣະ

(ພຣະທັບພະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຂົ້າໄປສູ່ປ່າໃຫຍ່
ຕັດໄມ້ໄຜ່ມາ ເຮັດເປັນໄມ້ແຂວນ (ຜ້າ) ຖວາຍພຣະສົງ

[໓໗] ຂ້າພະເຈົ້າໄຫວ້ທ່ານຜູ້ມີຂໍ້ວັດງາມ ດ້ວຍຈິດທີ່ເຫຼື້ອມໃສນັ້ນ
ເມື່ອຖວາຍໄມ້ແຂວນແລ້ວມຸ້ງໜ້າຫຼີກໄປທາງທິດເໜືອ

[໓໘] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໄມ້

[໓໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະທັບພະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທັບພະທາຍະກະເຖຣາປະທານທີ ໖ ຈົບ**

**ພານະວານທີ ໔໓ ຈົບ**

## ໗. ຄິຣິເນຣະປູຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄິຣິເນຣະປູຊະກະເຖຣະ

(ພຣະຄິຣິເນຣະປູຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ເມື່ອຊາດກ່ອນ ຂ້າພະເຈົ້າເປັນນາຍພານເນື້ອ ທ່ຽວຢູ່ໃນປ່າ
ໄດ້ເຫັນພຣະພຸດທະເຈົ້າຜູ້ປາສະຈາກທຸລິຄືກິເລດ
ຊຶ່ງເຖິງຄວາມສຳເລັດແຫ່ງທຳທັງປວງ

[໔໙] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໃນພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ປະກອບດ້ວຍພຣະມະຫາກະລຸນາ
ຊຶ່ງຍິນດີໃນປະໂຫຍດເກື້ອກູນຕໍ່ສັບພະສັດ
ຈຶ່ງບູຊາດ້ວຍດອກໄມ້ທີ່ບໍລິສຸດ

[໔໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄິຣິເນຣະປູຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄິຣິເນຣະປູຊະກະເຖຣາປະທານທີ ໗ ຈົບ**

## ໗. ໂພທິສຳມັດຊະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂພທິສຳມັດຊະກະເຖຣະ

(ພຣະໂພທິສຳມັດຊະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗] ເມື່ອຊາດປາງກ່ອນ ຂ້າພະເຈົ້າເກັບໃບໂພທີ່ຖືກຖິ້ມໄວ້
ທີ່ລານພຣະເຈດີໄປຖິ້ມ ຈຶ່ງໄດ້ຄຸນ ໒໐ ປະການ

[໔໘] ດ້ວຍເດດແຫ່ງກຳນັ້ນ
ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ກໍວຽນວ່າຍຕາຍເກີດຢູ່ໃນ ໒ ພົບ
ຄື (໑) ໃນພົບເທວະດາ (໒) ພົບມະນຸດ

[໕໐] ຈຸຕິຈາກເທວະໂລກແລ້ວມາສູ່ພົບມະນຸດ
ກໍເກີດສະເພາະໃນ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ

[໕໑] ຂ້າພະເຈົ້າມີອະໄວຍະວະໜ້ອຍໃຫຍ່ຄົບຖ້ວນ ມີຮ່າງກາຍສູງໃຫຍ່
ຮູບງາມ ສະອາດສະອ້ານ ສົມບູນ ບໍ່ບົກຜ່ອງ

[໕໒] ຂ້າພະເຈົ້າເກີດໃນພົບໃດພົບໜຶ່ງ
ຄືໃນເທວະໂລກຫຼືໃນໝູ່ມະນຸດ
ມີຜິວພັນດັ່ງຄຳ
ເໝືອນຄຳທີ່ນາຍຊ່າງຫຼອມດີແລ້ວ

[໕໓] ຜິວຂອງຂ້າພະເຈົ້າ ອ່ອນນຸ້ມ ສະນິດ
ລະອຽດອ່ອນຢູ່ຕະຫຼອດເວລາ
ຍ້ອນວ່າໃບໂພທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໔] ໃນຄະຕິໃດ ໆ ກໍຕາມ ຝຸ່ນລະອອງ
ບໍ່ຕິດຮ່າງກາຍທີ່ປະຊຸມກັນຂຶ້ນ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໕] ຍ້ອນຄວາມຮ້ອນຈາກລົມ ແດດ
ຫຼື ຍ້ອນຄວາມຮ້ອນຈາກໄຟກໍຕາມ

ທີ່ກາຍຂອງຂ້າພະເຈົ້າເຫື່ອບໍ່ໄຫຼ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໖] ທີ່ກາຍຂອງຂ້າພະເຈົ້າບໍ່ມີໂຣກຂີ້ທູດ ຝີ
ໂຣກກາກ ຕິກກະ ພຸພອງ ແລະຫິດເປື່ອຍ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໗] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືໂຣກບໍ່ມີໃນກາຍ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໘] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືຄວາມບີບຄັ້ນທາງໃຈບໍ່ມີ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໕໙] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືຂ້າພະເຈົ້າບໍ່ມີສັດຕູ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໖໐] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືໂພຄະສົມບັດບໍ່ມີຄວາມບົກຜ່ອງເລີຍ
ນີ້ເປັນວິບາກຍ້ອນໃບໄມ້ທີ່ຂ້າພະເຈົ້າໄດ້ຂົນໄປຖິ້ມ

[໖໑] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືບໍ່ມີອັກຄີໄພ ຣາຊະໄພ ໂຈຣະໄພ ແລະອຸທະກະໄພ

[໖໒] ອີກຂໍ້ໜຶ່ງ ຄຸນຂອງກຳນັ້ນ
ຍ່ອມບັງເກີດໃນພົບນ້ອຍພົບໃຫຍ່
ຄືທາດຍິງຊາຍເປັນຜູ້ຕິດຕາມໄປຕາມຄວາມຄິດຂອງຂ້າພະເຈົ້າ

[໖໓] ບຸກຄົນເກີດໃນມະນຸດໂລກທີ່ມີອາຍຸໄຂເທົ່າໃດ
ອາຍຸຂອງຂ້າພະເຈົ້າບໍ່ຢ່ອນໄປກວ່ານັ້ນ
ດໍາຣົງຢູ່ໄດ້ຈົນຊົ່ວອາຍຸໄຂ

[໖໔] ຄົນພາຍໃນ ຄົນພາຍນອກ ຊາວນິຄົມ
ຕະຫຼອດຈົນຊາວແວ່ນແຄວ້ນ
ລ້ວນແຕ່ເປັນຜູ້ຄອຍຖ້າຊ່ວຍເຫຼືອ
ມຸ້ງຄວາມຈະເລີນ ປາຖະໜາຄວາມສຸກແກ່ຂ້າພະເຈົ້າໄປທຸກຄົນ

[໖໕] ທຸກ ໆ ພົບ ຂ້າພະເຈົ້າເປັນຜູ້ມີໂພຄະ ມີຍົດ
ມີສິຣິ ມີຍາດຕິພີ່ນ້ອງ ມີພວກພ້ອງ ບໍ່ມີເວນ
ປາສະຈາກຄວາມສະດຸ້ງຢ້ານໄພ ໃນການທັງປວງ

[໖໖] ເມື່ອຂ້າພະເຈົ້າຍັງວຽນວ່າຍຕາຍເກີດຢູ່ໃນພົບ ເທວະດາ
ມະນຸດ ອະສູນ ຄົນທັນ ຍັກ ແລະຣາກສົດ
ລ້ວນຄອຍຖ້າອາຣັກຂາປ້ອງກັນຢູ່ທຸກເມື່ອ

[໖໗] ຂ້າພະເຈົ້າສະເຫວີຍຍົດທັງ ໔ ທັງໃນເທວະໂລກແລະມະນຸດໂລກ
ແລະໃນອະວະສານກໍໄດ້ບັນລຸນິບພານອັນກະເສມຢ່າງປະເສີດ

[໖໘] ຄົນເຊັ່ນໃດເພິ່ງໄດ້ບຸນຍ້ອນເຈາະຈົງພຣະສໍາມາສໍາພຸດທະເຈົ້າ
ຫຼືຕົ້ນໄມ້ເປັນສະຖານທີ່ຕັດສະຣູ້ຂອງພຣະສາດສະດາພຣະອົງນັ້ນ
ສໍາລັບຄົນເຊັ່ນນັ້ນ ອັນໃດນໍ? ທີ່ເພິ່ງໄດ້ໂດຍຍາກ

[໖໙] ເຂົາເປັນຜູ້ຍິ່ງໃຫຍ່ກວ່າຄົນອື່ນ ໆ ໃນມັກ ຜົນ ແລະປະຣິຍັດທໍາ
ແລະໃນຄຸນຄືຊານ ແລະອະພິນຍາ ເປັນຜູ້ບໍ່ມີອາສະວະແລ້ວປະຣິນິບພານ

[໗໐] ເມື່ອຊາດກ່ອນ ຂ້າພະເຈົ້າມີໃຈຮ່າເຣິງເກັບໃບໂພໄປຖິ້ມ
ຈຶ່ງເປັນຜູ້ພຽບພ້ອມດ້ວຍອົງຄຸນ ໘໐ ປະການນີ້ ໃນການທັງປວງ

[໗໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະໂພທິສຳມັດຊະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂພທິສຳມັດຊະກະເຖຣາປະທານທີ ๘ ຈົບ**

## ໙. ອາມັນທະຜະລະທາຍະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອາມັນທະຜະລະທາຍະກະເຖຣະ

(ພຣະອາມັນທະຜະລະທາຍະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[໗໔] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຜູ້ຊົງເປັນຜູ້ນຳສັດໂລກ ອອກຈາກສະມາທິແລ້ວຈົງກົມຢູ່

[໗໕] ໃນຄັ້ງນັ້ນ ຂ້າພະເຈົ້າເກັບໝາກໄມ້ທາບມາ
ໄດ້ເຫັນພຣະມະຫາມຸນີພຸດທະເຈົ້າ
ຜູ້ປາສະຈາກທຸລິຄືກິເລດ ສະເດັດຈົງກົມຢູ່

[໗໖] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ປະນົມມືເໜືອຫົວ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວຈຶ່ງໄດ້ຖວາຍໝາກແຟງ

[໗໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກແຟງ

[໘໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ທ່ານພຣະອາມັນທະຜະລະທາຍະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ໄວ້ດ້ວຍປະການດັ່ງນີ້

**ອາມັນທະຜະລະທາຍະກະເຖຣາປະທານທີ ໙ ຈົບ**

## ໑໐. ສຸຄັນທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸຄັນທະເຖຣະ

(ພຣະສຸຄັນທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໑] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າ ກັດສະປະ ຕາມພຣະໂຄດ
ຊົງປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໘໔] ພຣະອົງຊົງສົມບູນດ້ວຍອະນຸພະຍັນຊະນະ
ມີພຣະລັກສະນະອັນປະເສີດ ໓໔ ປະການ
ເຊິ່ງມີພຣະຣັດສະໝີປະມານ ໑ ວາແວດລ້ອມແລ້ວ
ປົກຄຸມໄປດ້ວຍຂ່າຍພຣະຣັດສະໝີ

[໘໓] ຊົງເຮັດໝູ່ສັດໃຫ້ຍິນດີໄດ້ເໝືອນດວງຈັນ
ເປ່ງພຣະຣັດສະໝີໄດ້ເໝືອນດວງອາທິດ

ທຳໝູ່ສັດໃຫ້ເຢືອກເຢັນໄດ້ເໝືອນເມກຝົນ
ເປັນບໍ່ເກີດແຫ່ງຄຸນເໝືອນສາຄອນ

[໙໔] ພຣະອົງປຽບດັ່ງແຜ່ນດິນໂດຍສີນ
ປຽບດັ່ງພູເຂົາຫິມະພານໂດຍສະມາທິ
ປຽບດັ່ງອາກາດໂດຍປັນຍາ
ເປັນຜູ້ບໍ່ຂ້ອງກ່ຽວ (ອັນໃດ ໆ) ເໝືອນສາຍລົມ

[໙໕] ມີທຳເປັນເຄື່ອງຢູ່ຕາມອັດທະຍາໄສ
ບໍ່ບົກຜ່ອງ ຊົງແກ່ກ້າໃນທ່າມກາງບໍລິສັດ
ເມື່ອຈະດຶງມະຫາຊົນຂຶ້ນ (ຈາກຫຼົ່ມຄືການ) ຈຶ່ງຊົງປະກາດສັດຈະ

[໙໖] ໃນຄັ້ງນັ້ນ ຂ້າພະເຈົ້າເປັນບຸດເສດຖີ
ມີຍົດຍິ່ງໃຫຍ່ໃນນະຄອນພາຣານະສີ
ຂ້າພະເຈົ້າມີຊັບ ແລະທັນຍະຊາດຢ່າງເຫຼືອເຟືອ
ຈຶ່ງມີຄວາມອົງອາດ

[໙໗] ຂ້າພະເຈົ້າຍ່າງພັກຜ່ອນໄປຈົນເຖິງປ່າມະຮິຄະທາຍະວັນ
ໄດ້ເຫັນພຣະສາດສະດາຜູ້ເປັນບ່ອນເພິ່ງແຫ່ງສັດໂລກ
ກຳລັງສະແດງອະມະຕະບົດຢູ່

[໙໘] ມີພຣະດຳຣັດມ່ວນ ໜ້າຟັງ
ມີພຣະສຸຣະສຽງເໝືອນສຽງນົກກາຣະເວກ
ມີພຣະສຸຣະສຽງກ້ອງກັງວານຄ້າຍສຽງຫົງ ແລະສຽງຟ້າຄຳຣົນ
ກະທຳມະຫາຊົນໃຫ້ຮູ້ແຈ່ມແຈ້ງ ຜູ້ເປັນເທບຍິ່ງກວ່າເທບ

[໙໙] ເມື່ອເຫັນພຣະອົງແລ້ວ ແລະໄດ້ສະດັບພຣະສຸຣະສຽງທີ່ມ່ວນ
ຂ້າພະເຈົ້າຈຶ່ງໄດ້ສະລະໂພຄະບໍ່ແມ່ນໜ້ອຍ ອອກບວດເປັນບັນພະຊິດ
[໑໐໐] ຂ້າພະເຈົ້າບວດແລ້ວເຊັ່ນນີ້ ບໍ່ດົນຫຼາຍກໍເປັນພະຫູສູດ
ເປັນພຣະທຳມະກະຖຶກ ມີປະຕິພານອັນວິຈິດ
[໑໐໑] ຂ້າພະເຈົ້າເປັນຜູ້ອົງອາດໃນການພັນນາ
ໄດ້ສັນເສີນພຣະຄຸນຂອງພຣະສາດສະດາ
ຜູ້ມີພຣະສະຫວິວັນດັ່ງຄຳຢູ່ເລື້ອຍ ໆ
ໃນທ່າມກາງບໍລິສັດໃຫຍ່ວ່າ

[໙໔] ພຣະສາດສະດາພຣະອົງນີ້ ເປັນພຣະຊິນາສົບ
ເປັນພຣະພຸດທະເຈົ້າ ບໍ່ມີທຸກ ຊົງຕັດຄວາມສົງໄສໄດ້ແລ້ວ
ເຖິງຄວາມສິ້ນກຳທຸກຢ່າງ ຊົງພົ້ນຈາກກິເລດແລ້ວ
ຍ້ອນທຳເປັນທີ່ສິ້ນໄປແຫ່ງອຸປະທິ

[໙໓] ພຣະພຸດທະເຈົ້າພຣະອົງນີ້ນັ້ນ ເປັນພຣະຜູ້ມີພຣະພາກເຈົ້າ
ພຣະອົງຊົງເປັນຜູ້ປະເສີດຢ່າງຍິ່ງ
ຊົງປະກາດທຳມະຈັກອັນປະເສີດແກ່ຊາວໂລກພ້ອມທັງເທວະໂລກ

[໙໔] ເປັນພຣະລີສີຊົງຝຶກພຣະອົງເອງ ແລະ ຝຶກມະຫາຊົນ
ຊົງສະງົບຣະງັບເອງ ແລະ ເຮັດໃຫ້ມະຫາຊົນສະງົບຣະງັບ
ຊົງດັບກິເລດເອງແລະຊົງຍັງມະຫາຊົນໃຫ້ດັບກິເລດ
ຊົງເບົາພຣະທະໄທເອງ ແລະ ຊົງໃຫ້ມະຫາຊົນເບົາໃຈ

[໙໕] ຊົງມີຄວາມແກ່ກ້າ ອົງອາດ ກ້າຫານ ມີພຣະປັນຍາ
ຊົງປະກອບດ້ວຍພຣະກະລຸນາ ຊົງໄດ້ວະສີ ຊົງມີໄຊຊະນະ
ຊົງຊະນະແລ້ວ ບໍ່ຊົງຄະນອງ ຊົງໝົດຄວາມຫ່ວງໃຍ

[໙໖] ເປັນຜູ້ບໍ່ຫວັ່ນໄຫວ ບໍ່ສັ່ນຄອນ ເປັນນັກປາດ
ບໍ່ຫຼົງໃຫຼ ບໍ່ມີໃຜສະເໝີເໝືອນ ເປັນມຸນີ ຊົງຝັກໃຝ່ໃນທຸຣະ
ຊົງກ້າຫານແມ່ນໃນໝູ່ເຈົ້າລັດທິ ດັ່ງພະຍາງົວອຸສະພະ
ພະຍາຄົດຊະສານ ແລະພະຍາຣາດຊະສີ

[໙໗] ເປັນຜູ້ປາສະຈາກຣາຄະ ປາສະຈາກມົນທິນ
ເປັນດັ່ງພົມ ສະຫຼາດກວ່ານັກປາດ
ກຳຈັດຂ້າເສິກຄືກິເລດອອກໄດ້ ໝົດສົງນໜາມ
ປາສະຈາກຄວາມເສົ້າໂສກ ບໍ່ມີໃຜສະເໝີເໝືອນ
ເປັນຜູ້ປະເສີດ ເປັນຜູ້ມົດຈົດ

[໙໗] ເປັນພາມ ເປັນສະມະນະ ເປັນບ່ອນເພິ່ງ ເປັນໜໍ
ເປັນຜູ້ກຳຈັດລູກສອນ (ຄືຄວາມໂສກ) ເປັນນັກຣົບ
ເປັນຜູ້ເບີກບານ ເປັນຜູ້ຄົງແກ່ຮຽນແລະຮຽນຮູ້ກວ້າງຂວາງ
ບໍ່ຫວັ່ນໄຫວ ມີໃຈເບີກບານ ຍິ້ມແຍ້ມ

[໙໙] ຊົງຝຶກອິນຊີ ເປັນຜູ້ນຳຕົນໄປ ເປັນຜູ້ເຮັດ ເປັນຜູ້ນຳ
ເປັນຜູ້ປະກາດ ເປັນຜູ້ຍັງສັດໃຫ້ຣ່າເຣິງ
ເປັນຜູ້ສະ ເປັນຜູ້ຕັດ ເປັນຜູ້ຟັງ ເປັນຜູ້ສັນເສີນ

[໑໐໐] ເປັນຜູ້ບໍ່ມີຫຼົ້ມໄລ ປາສະຈາກລູກສອນ ບໍ່ມີທຸກ
ບໍ່ມີຄວາມສົງໄສ ເປັນຜູ້ໝົດຕັນຫາ
ປາສະຈາກທຸລີ ເປັນຜູ້ຊຸດ ເປັນຜູ້ທຳລາຍ
ເປັນຜູ້ກ່າວ ເປັນຜູ້ເຮັດໃຫ້ຜາກົດ

[໑໐໑] ເປັນຜູ້ຊ່ອຍສັດໃຫ້ຂ້າມ ໃຫ້ເຮັດປະໂຫຍດ ໃຫ້ສ້າງປະໂຫຍດ
ເປັນຜູ້ຊ່ອຍໃຫ້ເຖິງສຳປະທາ ເປັນຜູ້ຊ່ອຍສັດໃຫ້ບັນລຸ
ເປັນຜູ້ມີປະໂຫຍດເກື້ອກູນ ເປັນຜູ້ຂ້າ
ຊົງເຮັດກິເລດໃຫ້ຮ້ອນຮົນ ເຮັດຕັນຫາໃຫ້ເຫືອດແຫ້ງ

[໑໐໒] ດຳຣົງຢູ່ໃນສັດຈະ ຫາຜູ້ສະເໝີເໝືອນບໍ່ໄດ້
ບໍ່ມີສະຫາຍ ຊົງມີຄວາມກະລຸນາ ມີຄວາມມະຫັດສະຈັນ
ບໍ່ຊົງຫຼອກລວງ ເປັນຜູ້ກະທຳ
ເປັນລືສີ ເປັນຜູ້ປະເສີດ (ພຣະພຸດທະເຈົ້າ)

[໑໐໓] ຊົງຂ້າມພົ້ນຄວາມສົງໄສໄດ້ແລ້ວ
ບໍ່ຊົງຖືພຣະອົງ ຊົງມີພຣະຄຸນຫາປະມານບໍ່ໄດ້
ບໍ່ມີໃຜປຽບທຽບ ບໍ່ຢຶດຖືຄຳເວົ້າທຸກຊະນິດ
ບັນລຸທຳທີ່ຄວນແນະນຳທຸກປະການ ຊົງຊະນະໝູ່ມານ

[໑໐໔] ຄວາມເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ປະເສີດ
ພຣະນາມວ່າ ສະຕະຣັງສີພຣະອົງນັ້ນ
ເປັນເຫດນຳອະມະຕະມະຫານິບພານມາໃຫ້
ຍ້ອນແນວນັ້ນ ຄວາມສັດທາໃນພຣະພຸດທະເຈົ້າ
ພຣະທຳ ແລະພຣະສົງ ຈຶ່ງມີປະໂຫຍດຫຼາຍ

[໑໐໕] ຂ້າພະເຈົ້າສັນເສີນພຣະພຸດທະເຈົ້າ
ຜູ້ເປັນສະຣະນະຢ່າງສູງສຸດຂອງໂລກທັງ ໓
ດ້ວຍຄຸນມີແນວນີ້ເປັນຕົ້ນ
ຈຶ່ງສະແດງທຳກະຖາໃນທ່າມກາງບໍລິສັດ

[໑໐໖] ຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ສະເຫວີຍຄວາມສຸກຫຼາຍໃນສະຫວັນຊັ້ນດຸສິດ
ຈຸຕິຈາກສະຫວັນຊັ້ນດຸສິດແລ້ວເກີດໃນມະນຸດ ເປັນຜູ້ມີກິ່ນຫອມ

[໑໐໗] ລົມກາຍໃຈ ກິ່ນປາກ ແລະກິ່ນກາຍຂອງຂ້າພະເຈົ້າ
ກໍເຊັ່ນນັ້ນຄືກັນ (ຄືມີກິ່ນຫອມ)
ແລະກິ່ນທັງໝົດນັ້ນ
ຂອງຂ້າພະເຈົ້າກໍຫອມຢູ່ເປັນນິດ

[໑໐໘] ກິ່ນປາກຂອງຂ້າພະເຈົ້າ ຫອມຟຸ້ງໄປຕະຫຼອດການ
ເໝືອນກິ່ນດອກປະທຸມ ດອກອຸບົນ ແລະດອກຈຳປາ
ແລະກາຍຂອງຂ້າພະເຈົ້າກໍຫອມຟຸ້ງໄປທຸກເມື່ອເຊັ່ນນັ້ນຄືກັນ

[໑໐໙] ທັງໝົດນັ້ນເປັນຜົນແຫ່ງການກ່າວສັນເສີນຄຸນຂອງພຣະພຸດທະເຈົ້າ
ຜົນນັ້ນໜ້າອັດສະຈັນຢ່າງຍິ່ງ
ຂໍທ່ານທຸກຄົນຈົ່ງຕັ້ງໃຈຟັງພາສິດຂອງເຮົາ

[໑໑໐] ເມື່ອຂ້າພະເຈົ້າກ່າວສັນເສີນຄຸນຂອງພຣະພຸດທະເຈົ້າ
ເຊິ່ງນຳປະໂຫຍດແລະຄວາມສຸກມາໃຫ້ແລ້ວ
ເປັນຜູ້ມີຈິດຜ່ອງແຜ້ວໃນທຳທັງປວງ
ພຣະສົງເປັນຜູ້ຂວນຂວາຍໃນຄວາມພຽນຢ່າງຍິ່ງ

[໑໑໑] ມີຍົດ ເຖິງຄວາມສຸກ ງົດງາມ ຮຸ່ງເຮືອງ ໜ້າຮັກ ໜ້າຊົມ
ເປັນຜູ້ກ່າວ ບໍ່ດູໝິ່ນດູແຄນ ບໍ່ມີໂທດ ແລະເປັນຜູ້ມີປັນຍາ

[໑໑໒] ຂວນຂວາຍໃນທຳເປັນທີ່ສິ້ນກິເລດ
ພຣະນິບພານອັນເຫຼົ່າຊົນຜູ້ພັກດີຕໍ່ພຣະພຸດທະເຈົ້າເພິ່ງໄດ້ໂດຍງ່າຍ
ຂ້າພະເຈົ້າຈັກກ່າວເຖິງເຫດຂອງພວກເຂົາ
ເຊີນທ່ານທັງຫຼາຍຟັງເຫດນັ້ນຕາມເປັນຈິງ

[໑໑໓] ຂ້າພະເຈົ້າຖວາຍອະພິວາດກໍຍ້ອນຄົ້ນພົບພຣະຍົດ
ທີ່ມີຢູ່ຂອງພຣະຜູ້ມີພຣະພາກເຈົ້າ
ຍ້ອນເຫດນັ້ນ ແມ່ນຂ້າພະເຈົ້າຈະເກີດໃນພົບໃດ ໆ
ກໍເປັນຜູ້ມີຍົດໃນພົບນັ້ນ ໆ

[໑໑໔] ຂ້າພະເຈົ້າສັນເສີນພຣະພຸດທະເຈົ້າຜູ້ເຮັດບ່ອນສຸດທຸກໄດ້
ແລະພຣະທຳທີ່ສະງົບເຊິ່ງປັດໄຈປຸງແຕ່ງບໍ່ໄດ້
ເປັນຜູ້ໃຫ້ຄວາມສຸກແກ່ສັບພະສັດ
ຍ້ອນກຳນັ້ນ ຂ້າພະເຈົ້າຈຶ່ງໄດ້ຮັບແຕ່ຄວາມສຸກ

[໑໑໕] ຂ້າພະເຈົ້າຜູ້ປະກອບດ້ວຍປີຕິໃນພຣະພຸດທະເຈົ້າ
ສັນເສີນຄຸນຂອງພຣະພຸດທະເຈົ້າ
ເປັນທີ່ພໍໃຈຂອງຕົນເອງ ແລະເປັນທີ່ພໍໃຈຂອງຄົນອື່ນ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ມີຄວາມພໍໃຈ

[໑໑໖] ພຣະຊິນນະເຈົ້າພຣະອົງໃດ ຊົງຢ່ຳຍີພວກເດຍຣະຖີ
ລ່ວງພົ້ນເດຍຣະຖີໄດ້
ຂ້າພະເຈົ້າເມື່ອສັນເສີນຄຸນຂອງພຣະຊິນນະເຈົ້າພຣະອົງນັ້ນ
ຈຶ່ງຊົມເຊີຍພຣະອົງຜູ້ຊົງເປັນຜູ້ນຳ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ມີແຕ່ຄວາມຮຸ່ງເຮືອງ

[໑໑໗] ຂ້າພະເຈົ້າເມື່ອກ່າວສັນເສີນຄຸນຂອງພຣະສຳມາສຳພຸດທະເຈົ້າ
ໄດ້ກະທຳຕົນໃຫ້ເປັນທີ່ຮັກແພງຂອງປະຊາຊົນ
ເປັນເໝືອນດວງຈັນອັນມີໃນສາຣະທະການ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ໜ້າຮັກ ໜ້າຊົມ

[໑໑໘] ຂ້າພະເຈົ້າຊົມເຊີຍພຣະສຸຄົດເຈົ້າດ້ວຍວາຈາທຸກຢ່າງຕາມຄວາມສາມາດ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງມີປະຕິພານວິຈິດເໝືອນທ່ານພຣະວັງຄີສະ

[໑໑໙] ຄົນພານເຫຼົ່າໃດເປັນຜູ້ມີຄວາມສົງໄສ ຈຶ່ງດູໝິ່ນພຣະມະຫາມຸນີ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງຂົ່ມຄົນພານເຫຼົ່ານັ້ນໂດຍການຂົ່ມຂີ່ທີ່ຊອບທຳ

[໑໔໐] ຂ້າພະເຈົ້າຊ່ອຍກຳຈັດກິເລດທັງຫຼາຍຂອງເຫຼົ່າສັດ
ດ້ວຍການສັນເສີນພຣະພຸດທະເຈົ້າ
ຍ້ອນອານຸພາບຂອງກຳນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ມີຈິດປາສະຈາກກິເລດ

[໑໔໑] ຂ້າພະເຈົ້າສະແດງພຸດທານຸດສະຕິ
ໄດ້ເຮັດປັນຍາເຄື່ອງຕັດສະຮູ້ໃຫ້ເກີດແກ່ຜູ້ຟັງ
ຍ້ອນແນວນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ມີປັນຍາເຫັນແຈ້ງອັດຖະທີ່ລະອຽດ

[໑໘໔] ຂ້າພະເຈົ້າເປັນຜູ້ສິ້ນອາສະວະທຸກຢ່າງ
ຈັກຂ້າມພົ້ນຫ້ວງນໍ້າຄືສັງສາຣະວັດໄປໄດ້
ແລະເປັນຜູ້ໄດ້ວະສີ ບໍ່ຖືໝັ້ນ ເຖິງຄວາມດັບສະນິດ

[໑໘໓] ໃນກັບນີ້ເອງ ຂ້າພະເຈົ້າໄດ້ສະດຸດີພຣະຊິນນະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສຸຄັນທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສຸຄັນທະເຖຣາປະທານທີ ໑໐ ຈົບ**

**ຕິນະທາຍະກະວັກທີ ໕໓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຕິນະມຸດຖິທາຍະກະເຖຣາປະທານ
໓. ສະຣະນະຄະມະນິຍະເຖຣາປະທານ
໕. ສຸປະຕະທາຍະກະເຖຣາປະທານ
໗. ຄິຣິເນຣະປູຊະກະເຖຣາປະທານ
໙. ອາມັນທະຜະລະທາຍະກະເຖຣາປະທານ
໒. ເວດຈະກະທາຍະກະເຖຣາປະທານ
໔. ອຳພັນຊະນະທາຍະກະເຖຣາປະທານ
໖. ທັນທະທາຍະກະເຖຣາປະທານ
໘. ໂພທິສຳມັດຊະກະເຖຣາປະທານ
໑໐. ສຸຄັນທະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໑໘໓ ຄາຖາ**

# ໕໔. ກັດຈາຍະນະວັກ

## ໝວດວ່າດ້ວຍພຣະກັດຈາຍະນະເປັນຕົ້ນ

### ໑. ມະຫາກັດຈາຍະນະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະມະຫາກັດຈາຍະນະເຖຣະ

(ພຣະມະຫາກັດຈາຍະນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ໝົດຕັນຫາ ຊົງຊະນະສິ່ງທີ່ໃຜ ໆ ເອົາຊະນະບໍ່ໄດ້
ຊົງເປັນຜູ້ນຳ ສະເດັດອຸບັດຂຶ້ນແລ້ວ
ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໒] ພຣະອົງເປັນຜູ້ແກ່ກ້າ
ມີພຣະເນດເໝືອນກີບບົວ
ມີພຣະພັກປາສະຈາກມົນທິນເໝືອນດວງຈັນ
ມີພຣະສະຫວີວັນເໝືອນຄຳ
ມີພຣະຣັດສະໝີສະເໝີດ້ວຍແສງອາທິດ

[໓] ດຶງດູດດວງຕາແລະດວງໃຈຂອງສັດໄວ້ໄດ້
ປະດັບດ້ວຍພຣະລັກສະນະອັນປະເສີດ
ບໍ່ຢຶດຖືຄຳເວົ້າທຸກຊະນິດ
ຜູ້ອັນໝູ່ມະນຸດແລະເທວະດາສັກກາຣະ

[໔] ຕັດສະຣູ້ດ້ວຍພຣະອົງເອງ ຊົງຊ່ອຍເຫຼືອເຫຼົ່າສັດໃຫ້ຕັດສະຣູ້ຕາມ
ຊົງນຳໄປໄດ້ຢ່າງວ່ອງໄວ ຊົງມີພຣະສຸຣະສຽງມ່ວນ
ມີພຣະອຸປະນິໄສເນື່ອງດ້ວຍພຣະກະລຸນາ
ຊົງແກ່ກ້າໃນທ່າມກາງບໍລິສັດ

[໕] ຊົງສະແດງທຳຢ່າງມ່ວນ ເຊິ່ງປະກອບດ້ວຍສັດຈະ ໔
ຊົງຊ່ວຍເຫຼືອໝູ່ສັດ ທີ່ຈົມຢູ່ໃນເປືອກຕົມຄືໂມຫະໄດ້

[໖]    ໃນຄັ້ງນັ້ນ ຂ້າພະເຈົ້າເປັນດາບົດ ທ່ຽວໄປແຕ່ຜູ້ດຽວ
ອາໄສຢູ່ທີ່ພູເຂົາຫິມະພານ
ກຳລັງໄປສູ່ມະນຸດໂລກທາງອາກາດກໍໄດ້ເຫັນພຣະຊິນນະເຈົ້າ

[໗]    ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະອົງແລ້ວ
ຟັງພຣະທຳມະເທດສະໜາຂອງພຣະທີຣະເຈົ້າ
ຜູ້ຊົງພັນນາຄຸນອັນຍິ່ງໃຫຍ່ຂອງສາວົກຢູ່ວ່າ

[໘-໙]    ເຮົາບໍ່ເຫັນສາວົກອື່ນບາງອົງ
ໃນທຳວິໄນນີ້ເໝືອນພຣະກັດຈາຍນະນີ້
ຜູ້ປະກາດທຳທີ່ເຮົາສະແດງໄວ້ໂດຍຫຍໍ້ໃຫ້ພິດສະດານໄດ້
ເຮັດຊຸມຊົນແລະເຮົາໃຫ້ຍິນດີ
ຍ້ອນແນວນັ້ນ ພຣະກັດຈາຍນະນີ້ເປັນຜູ້ເລີດໃນຕຳແໜ່ງທີ່ເລີດນັ້ນ
ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈຳໄວ້ແນວນີ້ເທີ້ນ

[໑໐]    ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຟັງພຣະດຳຣັດທີ່ຮື່ນຣົມໃຈແລ້ວ
ເກີດຄວາມອັດສະຈັນໃຈ ຈຶ່ງໄປສູ່ປ່າຫິມະພານນຳກຸ່ມດອກໄມ້ມາ

[໑໑]    ບູຊາພຣະຜູ້ເປັນສະຣະນະຂອງສັດໂລກ
ແລ້ວປາຖະໜາຕຳແໜ່ງນັ້ນ
ໃນຄັ້ງນັ້ນ ພຣະຜູ້ເປັນບ່ອນຢູ່ແຫ່ງສະຣະນະ
ຊົງຮູ້ອັດທະຍາໄສຂອງຂ້າພະເຈົ້າແລ້ວ
ໄດ້ຊົງພະຍາກອນວ່າ

[໑໒]    ທ່ານທັງຫຼາຍຈົ່ງເບິ່ງລືສີຜູ້ປະເສີດນີ້
ເຊິ່ງເປັນຜູ້ມີຜິວພັນເໝືອນຄຳທີ່ໄລ່ມົນທິນອອກແລ້ວ
ມີໂລມະຊາດຊູຊັນແລະມີໃຈເບີກບານ ຢືນປະນົມມືນິ່ງຢູ່

[໑໓]    ຣ່າເຣີງ ມີໃນຕາເຕັມດີ
ມີອັດທະຍາໄສນ້ອມໄປໃນຄຸນຂອງພຣະພຸດທະເຈົ້າ
ມີໃຈເບີກບານ ເຊິ່ງເກີດແຕ່ທຳ
ມີຣັດສະໝີເຮືອງຮອງເໝືອນຖືກຫົດດ້ວຍນໍ້າອຳມະຣິດ

[໑໔]    ຂ້າແຕ່ ພຣະມະຫາມຸນີ ຂ້າພຣະອົງໄດ້ຟັງຄຸນຂອງພຣະກັດຈາຍະນະແລ້ວ

ຈຶ່ງໄດ້ຢືນປາຖະໜາຕຳແໜ່ງນັ້ນ
ໃນອະນາຄົດຕະການຂອງພຣະໂຄດົມພຸດທະເຈົ້າ

[໑໕] ລີສີຜູ້ນີ້ມີນາມວ່າ ກັດຈາຍະນະ ຕາມໂຄດ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວົກຂອງພຣະສາດສະດາ

[໑໖] ເຂົາຈັກເປັນພະຫູສູດ ມີຍານຍິ່ງໃຫຍ່
ຮູ້ອະທິບາຍໃຫ້ຊັດແຈ້ງ ເປັນມຸນີ
ຈັກເຖິງຕຳແໜ່ງນັ້ນ ດັ່ງທີ່ເຮົາພະຍາກອນໄວ້

[໑໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໘] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນ ໒ ພົບ
ຄື (໑) ພົບເທວະດາ (໒) ພົບມະນຸດ
ຄະຕິອື່ນຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໑໙] ຂ້າພະເຈົ້າຮູ້ສະເພາະ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ
ຈະບໍ່ເກີດໃນຕະກູນທີ່ຕ່ຳ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໒໐] ໃນພົບສຸດທ້າຍ ຂ້າພະເຈົ້າເກີດເປັນພາມປຸໂຣຫິດ
ຂອງພຣະເຈົ້າຈັນທະປັດໂຊດ ໃນນະຄອນອຸດເຊນີທີ່ຣື່ນຣົມ

[໒໑] ເປັນບຸດຂອງພາມຊື່ວ່າຕິປິຕິວັດສະ
ເປັນຜູ້ສະຫຼາດ ຮຽນຈົບພຣະເວດ
ສ່ວນມານດາຂອງຂ້າພະເຈົ້າຊື່ວ່າຈັນທະນະປະທຸມາ
ຂ້າພະເຈົ້າຊື່ວ່າກັດຈາຍະນະ ເປັນຜູ້ມີຜິວພັນສວຍງາມ

[໒໒] ຂ້າພະເຈົ້າຖືກພຣະເຈົ້າແຜ່ນດິນ
ຊົງສົ່ງໄປເພື່ອພິຈາລະນາ (ສືບຂ່າວ) ພຣະພຸດທະເຈົ້າ

ໄດ້ເຫັນພຣະຜູ້ນຳເຊິ່ງເປັນປະຕູຂອງໂມກຂະບຸຣີ
ເປັນທີ່ສັ່ງສົມພຣະຄຸນ

[໘໓] ແລະໄດ້ຟັງພຸດທະພາສິດທີ່ປາສະຈາກມົນທິນ
ເປັນເຄື່ອງຊຳຣະລ້າງເປືອກຕົມຄືຄະຕິ
ໄດ້ບັນລຸອະມະຕະທຳທີ່ສະງົບຣະງັບ
ພ້ອມກັບບຸຣຸດທີ່ເຫຼືອອີກ ໆ ຄົນ

[໘໔] ຂ້າພະເຈົ້າເປັນຜູ້ຮູ້ອະທິບາຍໃນອະມະຕະບົດທີ່ຍິ່ງໃຫຍ່ຂອງພຣະສຸຄົດເຈົ້າ
ແລະມີມະໂນລົດອັນສຳເລັດດ້ວຍດີ ໄດ້ຮັບແຕ່ງຕັ້ງໃນຕຳແໜ່ງເອຕະທັກຄະ

[໘໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໘໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາກັດຈາຍະນະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມະຫາກັດຈາຍະນະເຖຣາປະທານທີ ໑ ຈົບ**

## ໘. ວັກກະລິເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວັກກະລິເຖຣະ

(ພຣະວັກກະລິເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໘] ພຣະຜູ້ຊົງເປັນຜູ້ນຳມີພຣະນາມບໍ່ຕ່ຳຕ້ອຍ
ມີພຣະຄຸນນັບບໍ່ຖ້ວນ

ພຣະນາມວ່າ ປະທຸມຸດຕະຣະ ຕາມພຣະໂຄດ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໙] ມີພຣະພັກເໝືອນດອກປະທຸມ
ມີພຣະສະຫວີວັນງົດງາມ ບໍ່ມີມົນທິນເໝືອນດອກປະທຸມ
ບໍ່ເປື້ອນດ້ວຍໂລກະທຳເໝືອນດອກປະທຸມບໍ່ເປື້ອນດ້ວຍນ້ຳ

[໕໐] ຊົງເປັນນັກປາດ ມີພຣະເນດເໝືອນກີບບົວ
ແລະໜ້າຮັກເໝືອນດອກປະທຸມ
ກິ່ນພຣະໂອດຫອມຄ້າຍຄືກິ່ນດອກປະທຸມ
ຍ້ອນແນວນັ້ນ ພຣະອົງຈຶ່ງຊົງພຣະນາມວ່າປະທຸມຸດຕະຣະ

[໕໑] ພຣະອົງຊົງເປັນຜູ້ຈະເລີນທີ່ສຸດໃນໂລກ
ບໍ່ຊົງຖືພຣະອົງປຽບເປັນດວງຕາໃຫ້ຄົນບອດ
ມີພຣະອິລິຍາບົດສະງົບ ເປັນທີ່ສັ່ງສົມຄຸນ
ເປັນເໝືອນສາຄອນທີ່ຮອງຮັບພຣະກະລຸນາຄຸນແລະພຣະປັນຍາຄຸນ

[໕໒] ບໍ່ວ່າໃນການໃດ ໆ ພຣະມະຫາວີຣະພຣະອົງນັ້ນ
ກໍເປັນຜູ້ທີ່ພົມ ອະສູນ ແລະເທວະດາບູຊາ ເປັນຜູ້ສູງສຸດໃນໝູ່ຊົນ
ໃນທ່າມກາງໝູ່ຊົນທີ່ຄັບຄັ່ງໄປດ້ວຍເທວະດາແລະມະນຸດ

[໕໓] ເມື່ອຈະໃຫ້ບໍລິສັດທັງປວງຍິນດີດ້ວຍພຣະພັກມີກິ່ນຫອມ (ເບີກບານ)
ແລະດ້ວຍພຣະສຸຣະສຽງທີ່ມ່ວນຫູ
ຈຶ່ງໄດ້ຊົມສາວົກຂອງພຣະອົງວ່າ

[໕໔] ພິກຂຸອື່ນຜູ້ມຸ້ງໝັ້ນດ້ວຍສັດທາ ມີປັນຍາດີ
ມີຄວາມອາໄລໃນການເບິ່ງເຮົາເຊັ່ນກັບວັກກະລິພິກຂຸນີ້ບໍ່ມີເລີຍ

[໕໕] ໃນຄັ້ງນັ້ນ ຂ້າພະເຈົ້າເປັນບຸດຂອງພາມໃນນະຄອນຫົງສະວະດີ
ໄດ້ຟັງພຣະດຳຣັດນັ້ນ ຈຶ່ງປາຖະໜາຕຳແໜ່ງນັ້ນ

[໕໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ທູນນິມົນພຣະຕະຖາຄົດເຈົ້າ
ຜູ້ບໍ່ມີມົນທິນພຣະອົງນັ້ນ ພ້ອມດ້ວຍພຣະສາວົກ
ໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນແລ້ວໃຫ້ຄອງຜ້າຊຸດໃໝ່

[໓໗] ຂ້າພະເຈົ້າໝອບລົງແລ້ວຈົມລົງ (ດື່ມດ່ຳ) ໃນສາຄອນ
ຄືພຣະອະນັນຕະຄຸນຂອງພຣະຕະຖາຄົດເຈົ້າພຣະອົງນັ້ນ
ເຕັມປ່ຽມໄປດ້ວຍປີຕິ ໄດ້ຂາບທູນຄຳນີ້ວ່າ

[໓໘] ຂ້າແຕ່ພຣະມະຫາມຸນີ ຜູ້ເປັນພຣະລືສີ
ຂໍຂ້າພຣະອົງຈົ່ງເປັນເຊັ່ນກັບພິກຂຸຜູ້ເປັນສັດທາທິມຸດ (ມຸ້ງໝັ້ນດ້ວຍສັດທາ)
ທີ່ພຣະອົງຊົງຕັດຊົມເຊີຍວ່າ ເລີດກວ່າພິກຂຸທັງຫຼາຍຜູ້ມີສັດທາ

[໓໙] ເມື່ອຂ້າພະເຈົ້າຂາບທູນດັ່ງນີ້ແລ້ວ
ພຣະມະຫາມຸນີຜູ້ມີຄວາມພຽນຫຼາຍ
ມີທັດສະນະທີ່ຫາເຄື່ອງກັ້ນບໍ່ໄດ້
ໄດ້ຕັດພຣະດຳຣັດນີ້ໃນຊຸມນຸມຊົນວ່າ

[໔໐] ຈົ່ງເບິ່ງມານົບນີ້ ຜູ້ນຸ່ງຜ້າເນື້ອກ້ຽງສີເຫຼືອງ
ມີສັງວານຄຳຄ້ອງກາຍ
ດຶງດູດດວງຕາແລະດວງໃຈຂອງໝູ່ຊົນໄວ້ໄດ້

[໔໑] ໃນອະນາຄົດຕະການ
ມານົບນີ້ ເປັນຜູ້ເລີດກວ່າພິກຂຸທັງຫຼາຍຜູ້ສັດທາທິມຸດ
ຈັກໄດ້ເປັນສາວົກຂອງພຣະໂຄດົມ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໒] ເຂົາເປັນເທວະດາຫຼືມະນຸດກໍຕາມ
ຈັກເປັນຜູ້ເວັ້ນຈາກຄວາມເດືອດຮ້ອນທັງປວງ
ເປັນທີ່ລວມແຫ່ງໂພຄະທຸກຢ່າງ ມີຄວາມສຸກວຽນວ່າຍຕາຍເກີດໄປ

[໔໓] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໔] ມານົບຜູ້ນີ້ຈັກມີນາມວ່າວັກກະລິ ຕາມໂຄດ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນພຣະສາວົກຂອງພຣະສາດສະດາ

[໔໕] ດ້ວຍຜົນກຳທີ່ວິເສດນັ້ນ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໖] ຂ້າພະເຈົ້າມີຄວາມສຸກໃນທີ່ທຸກສະຖານ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ເກີດໃນຕະກູນໜຶ່ງໃນນະຄອນສາວັດຖີ

[໔໗] ຂ້າພະເຈົ້າຜູ້ລະອຽດອ່ອນເໝືອນເນີຍຊຸ້ນ
ນຸ້ມອ່ອນເໝືອນໃບໄມ້ອ່ອນເຊິ່ງຍັງນອນຫງາຍຢູ່

[໔໘] ມານດາຖືກໄພຄືຜີສາດຄຸກຄາມ
ມີໃຈຢ້ານກົວຈຶ່ງໃຫ້ນອນລົງ
ແທບພຣະຍຸຄົນບາດຂອງພຣະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂາບທູນວ່າ ຂ້າແຕ່ພຣະໂລກກະນາດ ຜູ້ຊົງເປັນຜູ້ນຳ
ຂ້ານ້ອຍຂໍຖວາຍເດັກນ້ອຍນີ້ແດ່ພຣະອົງ
ຂໍພຣະອົງຈົ່ງຊົງເປັນບ່ອນເພິ່ງຂອງເຂົາດ້ວຍເທີ້ນ

[໔໙] ໃນຄັ້ງນັ້ນ ພຣະມຸນີພຣະອົງນັ້ນຜູ້ຊົງເປັນບ່ອນເພິ່ງ
ຂອງໝູ່ສັດຜູ້ຢ້ານກົວ ໄດ້ຊົງຮັບຂ້າພະເຈົ້າ
ດ້ວຍຝາພຣະຫັດທີ່ບໍລິສຸດອ່ອນນຸ້ມມີຕາຂ່າຍກຳນົດດ້ວຍກົງຈັກ

[໕໐] ຈຳເດີມແຕ່ນັ້ນມາ ຂ້າພະເຈົ້າໄດ້ຮັບການຄຸ້ມຄອງໂດຍບໍ່ຕ້ອງເຝົ້າຮັກສາ
ຈຶ່ງພົ້ນຈາກຄວາມເຈັບໄຂ້ທຸກຢ່າງ ຢູ່ຢ່າງສຸກສຳຣານ

[໕໑] ຂ້າພະເຈົ້າຫ່າງຈາກພຣະສຸຄົດເຈົ້າພຽງບຶດດຽວ ກໍກະວົນກະວາຍ
ພໍອາຍຸໄດ້ ໗ ປີ ກໍບວດເປັນບັນພະຊິດ

[໕໒] ຂ້າພະເຈົ້າເປັນຜູ້ບໍ່ອີ່ມຢູ່ ຍ້ອນເຫັນພຣະຮູບກາຍທີ່ປະເສີດ
ເຊິ່ງເກີດຈາກພຣະປາຣະມີທຸກຢ່າງ
ມີດວງຕາສີດຳສະນິດ ມີຜິວພັນສັນຖານງົດງາມ

[໕໓] ໃນຄັ້ງນັ້ນ ພຣະຊິນນະເຈົ້າຊົງຮູ້ວ່າ
ຂ້າພະເຈົ້າຍິນດີໃນພຣະຮູບ
ຈຶ່ງໄດ້ຕັດສອນຂ້າພະເຈົ້າວ່າ ຢ່າເລີຍ ວັກກະລິ
ເປັນຫຍັງ ທ່ານຈຶ່ງຍິນດີໃນຮູບທີ່ຊົນພານພາກັນມັກນໍ

[໕໔] ຜູ້ໃດເຫັນພຣະສັດທຳ ຜູ້ນັ້ນຊື່ວ່າເປັນບັນດິດເຫັນເຮົາ
(ສ່ວນ) ຜູ້ບໍ່ເຫັນພຣະສັດທຳ ເຖິງຈະເຫັນເຮົາກໍຊື່ວ່າບໍ່ເຫັນ

[໕໕] ຮ່າງກາຍມີໂທດບໍ່ສິ້ນສຸດເໝືອນຕົ້ນໄມ້ມີພິດ
ເປັນບ່ອນອາໄສຂອງໂຣກທຸກຊະນິດ ລ້ວນເປັນທີ່ປະຊຸມຂອງທຸກ

[໕໖] ຍ້ອນແນວນັ້ນ ທ່ານຈຶ່ງເບື່ອໜ່າຍໃນຮູບນີ້
ພິຈາລະນາເຫັນຄວາມເກີດຂຶ້ນ
ແລະຄວາມເສື່ອມໄປແຫ່ງຂັນທັງຫຼາຍ
ຈະເຖິງບ່ອນສຸດແຫ່ງສັບພະກິເລດໄດ້ໂດຍງ່າຍຢູ່ເທີ້ນ

[໕໗] ຂ້າພະເຈົ້າຖືກພຣະຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ສະແຫວງຫາປະໂຫຍດພຣະອົງນັ້ນ ຊົງພໍ່າສອນແນວນີ້
ໄດ້ຂຶ້ນໄປສູ່ພູເຂົາຄິດຊະກູດ ເພ່ງເບິ່ງຢູ່ຮ່ອມພູ

[໕໘] ພຣະຊິນນະເຈົ້າຜູ້ມະຫາມຸນີປະທັບຢືນຢູ່ທີ່ຕີນພູ
ເມື່ອຈະຊົງປອບໂຍນຂ້າພະເຈົ້າ ໄດ້ຕັດຮຽກວ່າ ວັກກະລີ
ຂ້າພະເຈົ້າໄດ້ຟັງພຣະດຳຣັດນັ້ນຈຶ່ງເບີກບານໃຈ

[໕໙] ໃນຄັ້ງນັ້ນ ຂ້າພະເຈົ້າແລ່ນລົງໄປທີ່ເງື້ອມເຂົາເລີກຫຼາຍຮ້ອຍຊົ່ວບຸຣຸດ
ແຕ່ກໍເຖິງແຜ່ນດິນໄດ້ໂດຍສະດວກຢ່າງແນ່ນອນດ້ວຍພຸດທານຸພາບ

[໖໐] ພຣະຜູ້ມີພຣະພາກເຈົ້າຊົງສະແດງພຣະທຳມະເທດສະໜາ
ຄືຄວາມເກີດຂຶ້ນແລະຄວາມເສື່ອມໄປແຫ່ງຂັນທັງຫຼາຍອີກ
ຂ້າພະເຈົ້າຮູ້ທົ່ວເຖິງທຳນັ້ນແລ້ວ ຈຶ່ງໄດ້ບັນລຸອະຣະຫັນຕະຜົນ

[໖໑] ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງພຣະປັນຍາຫຼາຍ
ຊົງບັນລຸຈະຣະນະທຳ ຊົງປະກາດຂ້າພະເຈົ້າວ່າ
ເປັນເລີດກວ່າພິກຂຸທັງຫຼາຍຝ່າຍສັດທາທິມຸດ
ໃນທ່າມກາງບຸຣຸດຜູ້ຄວນບູຊາຢ່າງຍິ່ງ

[໖໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໖໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະວັກກະລິເຖຣະໄດ້ພາສິດຄາຖາເຫຼົ່ານີ້ ໄວ້ດ້ວຍປະການດັ່ງນີ້

**ວັກກະລິເຖຣາປະທານທີ ໔ ຈົບ**

## ໓. ມະຫາກັບປິນະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາກັບປິນະເຖຣະ

(ພຣະມະຫາກັບປິນະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໖] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ
ຊົງຜາກົດແລ້ວໃນອາກາດທັງໝົດ
ເໝືອນດວງອາທິດຜາກົດໃນທ້ອງຟ້າໃນສາຣະທະການ

[໖໗] ຊົງເຮັດດອກບົວຄືເວໄນຍະສັດໃຫ້ເບ່ງບານດ້ວຍພຣະຣັດສະໝີຄືພຣະດຳຣັດ
ພຣະຜູ້ຊົງເປັນຜູ້ນຳສັດໂລກພຣະອົງນັ້ນ
ຊົງເຮັດເປືອກຕົມຄືກິເລດໃຫ້ແຫ້ງໄປດ້ວຍພຣະຣັດສະໝີຄືປັນຍາ

[໖໘] ພຣະຜູ້ຊົງວະຊິຣະຍານຂະຈັດຍົດຂອງພວກເດຍຣະຖີ
ເໝືອນດວງອາທິດ

ພຣະທິວາກອນພຸດທະເຈົ້າຊົງສ່ອງສະຫວ່າງ
ທັງກາງເວັນແລະກາງຄືນ ໃນທີ່ທຸກແຫ່ງ

[໖໙] ພຣະພຸດທະອົງເປັນບໍ່ເກີດແຫ່ງຄຸນ
ເໝືອນທະເລເປັນບໍ່ເກີດແຫ່ງຣັດຕະນະ
ຊົງເຮັດເມກຝົນຄືທຳໃຫ້ຕົກລົງເພື່ອໝູ່ສັດ
ເໝືອນເມກເຮັດຝົນໃຫ້ຕົກ

[໗໐] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຜູ້ພິພາກສາຢູ່ໃນນະຄອນຫົງສະວະດີ
ໄດ້ເຂົ້າໄປຟັງທຳຂອງພຣະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ

[໗໑] ເຊິ່ງກຳລັງປະກາດຄຸນຂອງສາວິກາຜູ້ມີສະຕິ
ຜູ້ກ່າວສອນພິກຂຸທັງຫຼາຍຢູ່ ຊົງເຮັດໃຈຂອງຂ້າພະເຈົ້າໃຫ້ຍິນດີ

[໗໒] ຂ້າພະເຈົ້າໄດ້ຟັງແລ້ວເກີດປີຕິໂສມະນັດ
ທູນນິມົນພຣະຕະຖາຄົດເຈົ້າພ້ອມດ້ວຍສາວົກໃຫ້ສະເຫວີຍແລະສັນແລ້ວ
ປາຖະໜາຕຳແໜ່ງນັ້ນ

[໗໓] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າ ຜູ້ມີສ່ວນປຽບດ້ວຍຫົງ
ມີພຣະສຸຣະສຽງເໝືອນສຽງຫົງແລະສຽງມະໂຫຣະທຶກ
ໄດ້ຕັດວ່າ ຈົ່ງດູມະຫາອຳມາດຜູ້ນີ້ ຜູ້ອົງອາດໃນການຕັດສິນ

[໗໔] ເຊິ່ງໝອບຢູ່ແທບຕີນຂອງເຮົາ
ມີໂລມະຊາດຊູຊັນແລະມີໃຈຟູຂຶ້ນ
ມີວັນນະເໝືອນແກ້ວມຸກດາທີ່ງົດງາມ
ມີໃນຕາແລະໃບໜ້າທີ່ຜ່ອງໃສ

[໗໕] ມີບໍລິວານເປັນຈຳນວນຫຼາຍ ເຮັດຣາດຊະການ ມີຍົດໃຫຍ່
ມະຫາອຳມາດນີ້ປາຖະໜາຕຳແໜ່ງພິກຂຸຜູ້ກ່າວສອນ
ຍ້ອນຮ່ວມຍິນດີດ້ວຍ

[໗໖] ດ້ວຍບິນທະບາດ ດ້ວຍການບໍລິຈາກ
ແລະດ້ວຍການຕັ້ງຄວາມປາຖະໜາໄວ້ນີ້
ເຂົາຈະບໍ່ເກີດຍັງທຸກຄະຕິເລີຍຕະຫຼອດ ໑໐໐,໐໐໐ ກັບ

[໗໗] ຈັກສະເຫວີຍຄວາມເປັນຜູ້ມີສ່ວນແຫ່ງຄວາມເປັນເທວະດາໃນໝູ່ເທບ
ແລະຄວາມເປັນໃຫຍ່ໃນໝູ່ມະນຸດ
ຈັກບັນລຸພຣະນິບພານດ້ວຍຜົນກຳທີ່ເຫຼືອ

[໗໘] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໗໙] ມະຫາອຳມາດນີ້ຈັກມີນາມວ່າກັບປີນະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາ

[໘໐] ຈາກນັ້ນ ຂ້າພະເຈົ້າໄດ້ເຮັດສັກກາຣະທີ່ທຳໄວ້ດີແລ້ວ
ໃນສາດສະໜາຂອງພຣະຊິນນະເຈົ້າ ລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນດຸສິດ

[໘໑] ຂ້າພະເຈົ້າຄອງຣາດຊະສົມບັດໃນເທວະໂລກ
ແລະມະນຸດໂລກໂດຍທຳ ແລ້ວເກີດໃນຕະກູນຊ່າງຫູກ
ໃນໝູ່ບ້ານໃກ້ນະຄອນພາຣານະສີ

[໘໔] ຂ້າພະເຈົ້າກັບພັນລະຍາມີບໍລິວານ ໑໐໐,໐໐໐ ຄົນ
ໄດ້ອຸປັດຖາກພຣະປັດເຈກພຸດທະເຈົ້າ ໕໐໐ ອົງ

[໘໗] ນິມົນໃຫ້ສັນຕະຫຼອດໄຕຣມາດ ແລ້ວໃຫ້ຄອງໄຕຣຈີວອນ
ຂ້າພະເຈົ້າທັງໝົດຈຸຕິຈາກອັດຕະພາບນັ້ນແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໘໔] ຂ້າພະເຈົ້າທັງຫຼາຍຈຸຕິຈາກສະຫວັນນັ້ນແລ້ວ
ກັບມາເກີດເປັນມະນຸດອີກ ໃນກຸກກຸຕະບຸຣີ ຂ້າງພູເຂົາຫິມະພານ

[໘໕] ຂ້າພະເຈົ້າໄດ້ເປັນໂອຣົດຜູ້ມີຍົດໃຫຍ່ນາມວ່າກັບປີນະ
ພວກທີ່ເຫຼືອເກີດໃນຕະກູນອຳມາດແວດລ້ອມຂ້າພະເຈົ້າ

[໘໖] ຂ້າພະເຈົ້າມີຄວາມສຸກໃນຣາດຊະສົມບັດເປັນຈຳນວນຫຼາຍ
ສຳເລັດສິ່ງທີ່ຕ້ອງປະສົງທຸກປະການ
ໄດ້ຟັງຂ່າວການອຸບັດຂອງພຣະພຸດທະເຈົ້າທີ່ພວກພໍ່ຄ້າບອກດັ່ງນີ້ວ່າ

[໗໗] ພຣະພຸດທະເຈົ້າຜູ້ເປັນເອກອັກຄະຣະບຸກຄົນ ບໍ່ມີໃຜເໝືອນ
ສະເດັດອຸບັດຂຶ້ນແລ້ວໃນໂລກ ພຣະອົງຊົງປະກາດພຣະສັດທຳ
ເຊິ່ງເປັນອຳມະຕະເປັນສຸກຢ່າງປະເສີດ

[໗໘] ແລະສາວົກຂອງພຣະອົງຂວນຂວາຍດີແລ້ວ
ລຸດພົ້ນດີແລ້ວ ບໍ່ມີອາສະວະ
ເມື່ອຂ້າພະເຈົ້າໄດ້ຟັງຄຳຂອງພໍ່ຄ້າເຫຼົ່ານັ້ນແລ້ວ
ໄດ້ເຮັດສັກກາຣະພວກພໍ່ຄ້າ

[໗໙] ສະລະຣາດຊະສົມບັດ ພ້ອມດ້ວຍອຳມາດ ໄດ້ເປັນພຸດທະມາມະກະ
ພາກັນອອກເດີນທາງ ໄດ້ເຫັນແມ່ນ້ຳມະຫາຈັນທາມີນ້ຳເຕັມພຽງຝັ່ງ

[໘໐] ທັງບໍ່ມີທ່ານ້ຳ ບໍ່ມີແພ ຂ້າມໄດ້ຍາກ
ແລະຍັງມີກະແສນ້ຳໄຫຼແຮງ
ຂ້າພະເຈົ້າຂ້າມແມ່ນ້ຳໄປໄດ້ໂດຍຄວາມສະຫວັດດີ
ຍ້ອນຣະລຶກເຖິງພຣະພຸດທະຄຸນວ່າ

[໘໑] ຖ້າພຣະພຸດທະເຈົ້າຊົງຂ້າມກະແສນ້ຳຄືພົບ
ຊົງເຖິງບ່ອນສຸດແຫ່ງໂລກ ຊົງຮູ້ແຈ້ງແລ້ວ
ດ້ວຍສັດຈະວາຈານີ້ ຂໍການໄປຂອງຂ້າພະເຈົ້າຈົ່ງສຳເລັດ

[໘໒] ຖ້າມັກເປັນເຄື່ອງໃຫ້ສັດເຖິງຄວາມສະງົບໄດ້
ເປັນເຄື່ອງໃຫ້ໂມກຂະທຳອັນເປັນສັນຕິສຸກໄດ້
ດ້ວຍສັດຈະວາຈານີ້ ຂໍການໄປຂອງຂ້າພະເຈົ້າຈົ່ງສຳເລັດ

[໘໓] ຖ້າພຣະສົງເປັນຜູ້ຂ້າມພົ້ນຄວາມກັນດານໄປໄດ້
ເປັນເນື້ອນາບຸນຢ່າງປະເສີດ
ດ້ວຍສັດຈະວາຈານີ້ ຂໍການໄປຂອງຂ້າພະເຈົ້າຈົ່ງສຳເລັດ

[໘໔] ພ້ອມກັບທີ່ຂ້າພະເຈົ້າເຮັດສັດຈະຢ່າງປະເສີດນີ້
ນ້ຳໄດ້ໄຫຼຫຼີກອອກໄປຈາກຫົນທາງ
ລຳດັບນັ້ນ ຂ້າພະເຈົ້າໄດ້ຂ້າມຂຶ້ນຝັ່ງແມ່ນ້ຳທີ່ເປັນຕາອອນຊອນໄດ້ໂດຍສະດວກ

[໘໕] ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າປະທັບນັ່ງຢູ່
ເປ່ງຣັດສະໝີເໝືອນດວງອາທິດອຸໄທ ຮຸ່ງເຮືອງເໝືອນພູເຂົາຄຳ
ສ່ອງແສງເໝືອນຕົ້ນພຶກສາປະທີບ

[໙໖] ຜູ້ອັນສາວົກຫ້ອມລ້ອມ ປຽບດັ່ງດວງຈັນ
ທີ່ລ້ອມຮອບດ້ວຍດາວນັກສັດ
ເຮັດເທວະດາແລະມະນຸດໃຫ້ເພີດເພີນ
ພໍປານວ່າຫ້າວອາສະວະ ເຮັດຝົນຄືຣັດຕະນະໃຫ້ຕົກ

[໙໗] ຂ້າພະເຈົ້າພ້ອມດ້ວຍອຳນາດຖວາຍບັງຄົມ
ເຂົ້າເຝົ້າໃນບ່ອນສົມຄວນ
ລຳດັບນັ້ນ ພຣະພຸດທະເຈົ້າຊົງຮູ້ອັດທະຍາໄສແລ້ວ
ຈຶ່ງໄດ້ຊົງສະແດງທຳ

[໙໘] ຂ້າພະເຈົ້າທັງຫຼາຍໄດ້ຟັງທຳທີ່ປາສະຈາກມົນທິນແລ້ວ
ໄດ້ທູນຂໍພຣະຊິນນະເຈົ້າວ່າ ຂ້າແຕ່ພຣະອົງຜູ້ມີຄວາມພຽນຫຼາຍ
ຂໍໄດ້ໂຜດໃຫ້ຂ້າພຣະອົງທັງຫຼາຍໄດ້ບັນພະຊາເທີ້ນ
ຂ້າພຣະອົງທັງຫຼາຍຂ້າມພົບໄດ້ແລ້ວ

[໙໙] ພຣະມຸນີຜູ້ປະເສີດສຸດຕັດວ່າ
ພິກຂຸທັງຫຼາຍ ທຳອັນເຮົາກ່າວດີແລ້ວ
ທ່ານທັງຫຼາຍຈົ່ງປະພຶດພົມມະຈັນເພື່ອເຮັດບ່ອນສຸດທຸກເທີ້ນ

[໑໐໐] ພ້ອມກັບພຸດທະດຳຣັດນີ້ ຂ້າພະເຈົ້າທຸກຄົນລ້ວນຊົງເພດເປັນພິກຂຸ
ໄດ້ອຸປະສົມບົດ ເປັນພຣະໂສດາບັນໃນສາດສະໜາ

[໑໐໑] ຈາກນັ້ນ ພຣະຜູ້ຊົງເປັນຜູ້ນຳວິເສດ
ໄດ້ສະເດັດໄປສູ່ພຣະເຊຕະວັນ ແລ້ວຊົງພ່ຳສອນ
ຂ້າພະເຈົ້າຜູ້ອັນພຣະຊິນນະເຈົ້າຊົງພ່ຳສອນແລ້ວກໍໄດ້ບັນລຸພຣະອະຣະຫັນ

[໑໐໒] ລຳດັບນັ້ນ ຂ້າພະເຈົ້າໄດ້ສັ່ງສອນພິກຂຸ ໑,໐໐໐ ອົງ
ແມ່ນພິກຂຸເຫຼົ່ານັ້ນກໍປະຕິບັດຕາມຄຳສອນຂອງຂ້າພະເຈົ້າ
ເປັນຜູ້ບໍ່ມີອາສະວະ

[໑໐໓] ພຣະຊິນນະເຈົ້າຊົງພໍພຣະທະໄທໃນຄຸນຂໍ້ນັ້ນ
ຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງເອຕະທັກຄະ
ໃນທ່າມກາງມະຫາຊົນວ່າ
ພິກຂຸຊື່ກັບປີນະເລີດກວ່າພິກຂຸທັງຫຼາຍຜູ້ໃຫ້ໂອວາດແກ່ພິກຂຸ

[໑໐໔]  ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ (ຈາກກິເລດ)
ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກແລ່ງ
ຂ້າພະເຈົ້າເຜົາກິເລດທັງຫຼາຍໄດ້ແລ້ວ

[໑໐໕]  ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໖]  ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໐໗]  ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະມະຫາກັບປິນະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມະຫາກັບປິນະເຖຣາປະທານທີ ໓ ຈົບ**

## ໔. ທັບພະມັນລະປຸດຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະທັບພະມັນລະປຸດຕະເຖຣະ

(ພຣະທັບພະມັນລະບຸດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໐໘]  ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກທັງປວງ ເປັນພຣະມຸນີ ຊົງມີພຣະຈັກຂຸ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໐໙]  ພຣະອົງເປັນຜູ້ຕັດສອນ ຊົງສະແດງທຳໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ

ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໑໑໐] ພຣະອົງເປັນຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນສີນ ໕

[໑໑໑] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜູ້ໄດ້ວະສີ ຜູ້ຄົງທີ່

[໑໑໒] ພຣະມະຫາມຸນີພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໕໘ ສອກ
ມີພຣະສະຫວີວັນຄ້າຍຄຳທີ່ລ້ຳຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໑໑໓] ໃນຄັ້ງນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍດຳຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໑໑໔] ໃນຄັ້ງນັ້ນ ຂ້າພະເຈົ້າເປັນບຸດເສດຖີຜູ້ມີຍົດໃຫຍ່ໃນນະຄອນຫົງສະວະດີ
ໄດ້ເຂົ້າເຝົ້າພຣະອົງຜູ້ສ່ອງໂລກໃຫ້ສະຫວ່າງສະໄຫວ
ແລ້ວໄດ້ຟັງພຣະທຳມະເທດສະໜາ

[໑໑໕] ຂ້າພະເຈົ້າໄດ້ຟັງພຣະດຳຣັດຂອງພຣະອົງເຊິ່ງຕັດຍ້ອງຍໍພິກຂຸ
ພ້ອມດ້ວຍສາວົກຜູ້ຈັດແຈງເສນາສະນະໃຫ້ພິກຂຸທັງຫຼາຍກໍພອຍຍິນດີ
[໑໑໖] ຈຶ່ງເຮັດສັກກາຣະຢ່າງຍິ່ງໃຫຍ່ແດ່ພຣະອົງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພ້ອມທັງພຣະສົງ
ໝອບລົງແທບພຣະບາດດ້ວຍຂະໜ່ອມ
ແລ້ວປາຖະໜາຕຳແໜ່ງນັ້ນ
[໑໑໗] ຄວາມຈິງ ໃນຄັ້ງນັ້ນ ພຣະມະຫາວີຣະພຣະອົງນັ້ນ
ໄດ້ຊົງພະຍາກອນກຳຂອງຂ້າພະເຈົ້າໄວ້ວ່າ
ບຸດເສດຖີນີ້ໄດ້ນິມົນພຣະຜູ້ເປັນຜູ້ນຳສັດໂລກ
ພ້ອມດ້ວຍພຣະສົງໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນ

[໑໑໗] ເຂົາຈັກມີດວງຕາເໝືອນກີບບົວ ມີຊ່ວງໄຫຼ່ເໝືອນຣາດຊະສີ
ມີຜິວພັນເໝືອນຄຳ ໝອບຢູ່ແທບຕີນຂອງເຮົາ
ປາຖະໜາຕຳແໜ່ງອັນສູງສຸດ

[໑໑໙] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໘໐] ບຸດເສດຖີນີ້ຈັກໄດ້ເປັນສາວົກຂອງພຣະພຸດທະເຈົ້າພຣະອົງນັ້ນ
ຜາກົດໂດຍຊື່ວ່າ ທັບພະ
ເປັນພິກຂຸຜູ້ເລີດຝ່າຍພິກຂຸຜູ້ຈັດແຈງເສນາສະນະຕາມປາຖະໜາ

[໑໘໑] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໒] ຄອງເທວະສົມບັດຕະຫຼອດ ໓໐໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ

[໑໘໓] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງມີຄວາມສຸກໃນທຸກພົບ

[໑໘໔] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ຊຶ່ງເປັນຜູ້ນຳ
ຜູ້ມີພຣະເນດງາມ ຊຶ່ງເຫັນແຈ້ງທຳທັງປວງສະເດັດອຸບັດຂຶ້ນແລ້ວ

[໑໘໕] ຂ້າພະເຈົ້າມີຈິດຂັດເຄືອງ ໄດ້ກ່າວຕູ່ສາວົກຂອງພຣະພຸດທະເຈົ້າ
ຜູ້ຄົງທີ່ພຣະອົງນັ້ນ ຜູ້ສິ້ນອາສະວະທັງປວງແລ້ວ
ທັງທີ່ຮູ້ຢູ່ວ່າ ທ່ານເປັນຜູ້ບໍລິສຸດ

[໑໘໖] ອັນໜຶ່ງ ຂ້າພະເຈົ້າຈັບສະລາກແລ້ວຖວາຍເຂົ້າສຸກທີ່ຫຸງດ້ວຍນ້ຳນົມ
ແດ່ພຣະສາວົກທັງຫຼາຍຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂອງພຣະພຸດທະເຈົ້າຜູ້ແກ່ກ້າກວ່ານໍຣະຊົນພຣະອົງນັ້ນ

[໑໔໗] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ຜູ້ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ຊົງປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໑໔໘] ພຣະອົງພ້ອມດ້ວຍສາວົກປະກາດສາດສະໜາໃຫ້ຮຸ່ງເຮືອງ
ຂົ່ມເດຍຣະຖີຜູ້ຫຼອກລວງໄດ້ແລ້ວ
ຊົງແນະນຳເຫຼົ່າເວໄນຍະສັດ ປະຣິນິບພານແລ້ວ

[໑໔໙] ເມື່ອພຣະໂລກກະນາດພ້ອມດ້ວຍສາວົກປະຣິນິບພານແລ້ວ
ເມື່ອສາດສະໜາກຳລັງຈະສິ້ນໄປ ເທບແລະມະນຸດພາກັນສະລົດໃຈ
ສະຫຍາຍຜົມ ມີນ້ຳຕານອງໜ້າ ຄ່ຳຄວນວ່າ

[໑໕໐] ດວງຕາຄືພຣະທຳຈັກດັບ
ເຮົາທັງຫຼາຍຈັກບໍ່ໄດ້ເຫັນທ່ານຜູ້ມີຂໍ້ວັດອັນດີງາມ
ຈັກບໍ່ໄດ້ຟັງພຣະສັດທຳ ໜ້າສັງເວດໃຈ ເຮົາທັງຫຼາຍຊ່າງມີບຸນໜ້ອຍ

[໑໕໑] ໃນຄັ້ງນັ້ນ ພື້ນປະຖະພີທັງໝົດນີ້ ທັງໃຫຍ່ທັງໜາ
ໄດ້ໄຫວ ສາຄອນດັ່ງຈະມີຄວາມເສົ້າໂສກ
ສົ່ງສຽງດັ່ງກຶກກ້ອງຢ່າງໜ້າສົງສານ

[໑໕໒] ເຫຼົ່າອະມະນຸດຕົກອອງຢູ່ທົ່ວທັງ ໔ ທິດ
ສັນນິບາດທີ່ເປັນຕາຢ້ານກຳຟາດລົງຢູ່ໂດຍຮອບ

[໑໕໓] ອຸກກາບາດຕົກຈາກທ້ອງຟ້າ ຜາກົດເປັນລຳເພີງ
ມີຄວັນແລະແປວເພີງພວຍພຸ່ງ
ໝູ່ສັດຮ້ອງຄວນຄາງຢ່າງໜ້າສົງສານ

[໑໕໔] ໃນຄັ້ງນັ້ນ ຂ້າພະເຈົ້າທັງຫຼາຍເປັນພິກຂຸລວມ ໗ ອົງນຳກັນ
ໄດ້ເຫັນໄພທີ່ຮ້າຍແຮງ
ສະແດງເຫດເຖິງຄວາມຕັ້ງຢູ່ບໍ່ໄດ້ແຫ່ງສາດສະໜາ
ຈຶ່ງເກີດຄວາມສັງເວດໃຈ ຄິດກັນວ່າ

[໑໕໕] ເຮົາທັງຫຼາຍຖ້າບໍ່ມີສາດສະໜາບໍ່ຄວນຈະມີຊີວິດຢູ່
ຈຶ່ງເຂົ້າໄປສູ່ປ່າໃຫຍ່ແລ້ວ
ພ່ຳເພັງພຽນຕາມຄຳສອນຂອງພຣະຊິນນະສີເທີ້ນ

[໑໓໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ພົບພູເຂົາຫີນສູງໃນປ່າ
ຈຶ່ງໄຕ່ບັນໄດຂຶ້ນໄປສູ່ພູເຂົາລູກນັ້ນແລ້ວຍູ້ບັນໄດໃຫ້ຕົກລົງ

[໑໓໗] ໃນຄັ້ງນັ້ນ ພຣະເຖຣະໄດ້ຕັກເຕືອນພວກຂ້າພະເຈົ້າວ່າ
ການອຸບັດຂຶ້ນແຫ່ງພຣະພຸດທະເຈົ້າຫາໄດ້ແສນຍາກ
ອີກປະການໜຶ່ງ ສັດທາທີ່ໄດ້ໄວ້ກໍຫາຍາກ
ແລະສາດສະໜາຍັງເຫຼືອອີກເລັກໜ້ອຍ

[໑໓໘] ຜູ້ທີ່ປ່ອຍເວລາໃຫ້ຜ່ານໄປ ຈະຕ້ອງຕົກລົງໄປໃນສາຄອນ
ຄືຄວາມທຸກເຊິ່ງບໍ່ມີບ່ອນສິ້ນສຸດ
ຍ້ອນແນວນັ້ນ ທ່ານທັງຫຼາຍຄວນກະທຳຄວາມພຽນ
ຕະຫຼອດເວລາທີ່ສາດສະໜາຍັງດຳຣົງຢູ່ເທີ້ນ

[໑໓໙] ໃນຄັ້ງນັ້ນ ພຣະເຖຣະນັ້ນເປັນພຣະອະຣະຫັນ
ອົງຮອງໄດ້ເປັນພຣະອະນາຄາມີ
ພວກຂ້າພະເຈົ້າທີ່ເຫຼືອຈາກນັ້ນ ເປັນຜູ້ມີສີນບໍລິສຸດ
ປະກອບຄວາມພຽນ ຈຶ່ງໄດ້ໄປເກີດຍັງເທວະໂລກ

[໑໔໐] ພຣະເຖຣະອົງທີ່ຂ້າມສົງສານໄປ
ໄດ້ປະຣິນິບພານເທິງພົມມະໂລກຊັ້ນສຸດທາວາດພຽງອົງດຽວ
ຂ້າພະເຈົ້າທັງຫຼາຍ ຄື (໑) ຕົວຂ້າພະເຈົ້າ (໒) ພຣະປຸກກຸສາຕິ
(໓) ພຣະສະພິຍະ (໔) ພຣະພາຫິຍະ

[໑໔໑] (໕) ພຣະກຸມານກັດສະປະ ເກີດໃນບ່ອນນັ້ນ ໆ
ອັນພຣະໂຄດົມຊົງອະນຸເຄາະ
ຈຶ່ງລຸດພົ້ນຈາກເຄື່ອງຈອງຈຳຄືສົງສານໄດ້

[໑໔໒] ຂ້າພະເຈົ້າເກີດໃນຕະກູນມັນລະກະສັດ
ໃນນະຄອນກຸສິນາຣາ ເມື່ອຍັງຢູ່ໃນທ້ອງນັ້ນເອງ
ມານດາໄດ້ສິ້ນພະຊົນ ເຂົາຊ່ອຍກັນຍົກຂຶ້ນສູ່ຈິຕະກາທານ
ຂ້າພະເຈົ້າໄດ້ຕົກລົງມາຈາກຈິຕະກາທານນັ້ນ

[໑໔໓] ຕົກລົງໄປໃນກອງໄມ້ ຈາກນັ້ນ ຈຶ່ງຜາກົດນາມວ່າ ທັບພະ
ດ້ວຍຜົນແຫ່ງການປະພຶດພົມມະຈັນ
ຂ້າພະເຈົ້າມີອາຍຸໄດ້ ໗ ປີກໍລຸດພົ້ນຈາກກິເລດ

[໑໔໔] ດ້ວຍຜົນທີ່ຂ້າພະເຈົ້າຖວາຍເຂົ້າສຸກທີ່ຫຸງດ້ວຍນ້ຳນົມ
ຂ້າພະເຈົ້າຈຶ່ງປະກອບດ້ວຍອົງ ໕
ຍ້ອນບາບທີ່ຂ້າພະເຈົ້າກ່າວຕູ່ພຣະຊິນາສົບ
ຈຶ່ງຖືກຄົນຊົ່ວຈຳນວນຫຼາຍໂຈດ (ກ່າວຫາ)

[໑໔໕] ບັດນີ້ ຂ້າພະເຈົ້າລ່ວງບຸນແລະບາບທັງ ໔ ແລ້ວ
ໄດ້ບັນລຸສັນຕິສຸກຢ່າງຍິ່ງ ຢູ່ຢ່າງຜູ້ບໍ່ມີອາສະວະ

[໑໔໖] ຂ້າພະເຈົ້າຈັດແຈງເສນາສະນະໃຫ້ທ່ານຜູ້ມີຂໍ້ວັດດີງາມທັງຫຼາຍຍິນດີ
ພຣະຊິນນະເຈົ້າຊົງພໍພຣະທະໄທໃນຄຸນຂໍ້ນັ້ນ
ຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງເອຕະທັກຄະ

[໑໔໗] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໘] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະທັບພະມັນລະບຸດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທັບພະມັນລະປຸດຕະເຖຣາປະທານທີ ໔ ຈົບ**

## ໕. ກຸມາຣະກັດສະປະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກຸມາຣະກັດສະປະເຖຣະ

(ພຣະກຸມາຣະກັດສະປະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໕໐] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ ຊຶ່ງເປັນຜູ້ນໍາສັດໂລກ
ຊຶ່ງພໍ່າເພັງປະໂຫຍດເກື້ອກູນແກ່ສັບພະສັດ ເປັນນັກປາດ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໕໑] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມມີຊື່ສຽງເລື່ອງລື
ຮຽນຈົບໄຕຣເພດ ທ່ຽວພັກສໍາຣານໃນເວລາກາງເວັນ
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ຜູ້ຊຶ່ງເປັນຜູ້ນໍາສັດໂລກ

[໑໕໔] ກໍາລັງຊຶ່ງປະກາດສັດຈະ ໔
ຊ່ອຍມະນຸດພ້ອມດ້ວຍເທວະດາໃຫ້ຕັດສະຣູ້
ກໍາລັງສັນເສີນສາວົກຂອງພຣະອົງ
ຜູ້ກ່າວທໍາມິກະຖາຢ່າງວິຈິດຢູ່ໃນໝູ່ມະຫາຊົນ

[໑໕໓] ໃນຄັ້ງນັ້ນ ຂ້າພະເຈົ້າເບີກບານໃຈຈຶ່ງທູນນິມົນພຣະຕະຖາຄົດເຈົ້າ
ແລ້ວປະດັບມົນດົບດ້ວຍຜ້າທີ່ຍ້ອມດ້ວຍສີຕ່າງ ໆ

[໑໕໔] ໃຫ້ສ່ອງແສງດ້ວຍຣັດຕະນະຕ່າງ ໆ ທູນນິມົນພຣະຕະຖາຄົດເຈົ້າ
ພ້ອມທັງພຣະສົງໃຫ້ສະເຫວີຍແລະສັນໂພຊະນະ
ມີຣົດເລີດຕ່າງ ໆ ຕະຫຼອດ ໗ ວັນ ໃນມົນດົບນັ້ນ

[໑໕໕] ໄດ້ບູຊາພຣະຕະຖາຄົດເຈົ້າພ້ອມທັງສາວົກ
ດ້ວຍດອກໄມ້ອັນສວຍງາມນານາຊະນິດ
ແລ້ວໝອບລົງແທບພຣະບາດ ປາຖະໜາຕໍາແໜ່ງນັ້ນ

[໑໕໖] ໃນຄັ້ງນັ້ນ ພຣະມຸນີຜູ້ປະເສີດ ຊຶ່ງມີພຣະກະລຸນາ
ໄດ້ຕັດວ່າ ຈົ່ງເບິ່ງພາມຜູ້ປະເສີດນີ້
ຜູ້ມີປາກແລະດວງຕາເໝືອນດອກປະທຸມ

[໑໕໗] ຜູ້ຫຼາຍດ້ວຍຄວາມປີດາປາໂມດ
ມີໂລມະຊາດຊູຊັນແລະມີໃຈຟູຂຶ້ນ ມີດວງຕາກົມໃຫຍ່
ນໍາຄວາມຣ່າເຣີງມາ ມີຄວາມອາໄລໃນສາດສະໜາຂອງເຮົາ

[໑໕໘] ຜູ້ມີໃຈດີ ມີຜ້າຜືນດຽວໝອບຢູ່ແທບຕີນຂອງເຮົາ
ເຂົາປາຖະໜາຕໍາແໜ່ງຄືການກ່າວທໍາໄດ້ຢ່າງວິຈິດນັ້ນ

[໑໕໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໖໐] ຜູ້ນີ້ຈັກມີນາມວ່າກຸມາຣະກັດສະປະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໑໖໑] ຍ້ອນອານຸພາບແຫ່ງດອກໄມ້ແລະຜ້າ
ອັນວິຈິດແລະຣັດຕະນະທັງຫຼາຍ
ເຂົາຈັກເຖິງຄວາມເປັນເລີດກວ່າພິກຂຸທັງຫຼາຍ
ຜູ້ກ່າວທຳໄດ້ຢ່າງວິຈິດ

[໑໖໒] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໖໓] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ເໝືອນຕົວລະຄອນເຕັ້ນລຳໝຸນວຽນຢູ່ກາງເວທີ
ຂ້າພະເຈົ້າເປັນລູກຂອງເນື້ອຊື່ ສາຂະ
ໄດ້ຖືປະຕິສົນທິໃນທ້ອງຂອງນາງເນື້ອ

[໑໖໔] ໃນຄັ້ງນັ້ນ ເມື່ອຂ້າພະເຈົ້າຍັງຢູ່ໃນທ້ອງ
ເຖິງວາຣະທີ່ຈະຕ້ອງຖືກຂ້າ
ມານດາຂອງຂ້າພະເຈົ້າຖືກເນື້ອຊື່ສາຂະລະຖິ້ມ
ຈຶ່ງຍຶດເນື້ອຊື່ນິໂຄທະເປັນບ່ອນເພິ່ງ

[໑໖໕] ມານດາຂອງຂ້າພະເຈົ້າໄດ້ພະຍາເນື້ອຊື່ນິໂຄທະນັ້ນ
ສະລະຊີວິດຂອງຕົນຊ່ອຍໃຫ້ພົ້ນຈາກຄວາມຕາຍແລ້ວ
ຕັກເຕືອນຂ້າພະເຈົ້າຜູ້ເປັນລູກຂອງຕົນໃນຄັ້ງນັ້ນແນວນີ້ວ່າ

[໑໖໖] ຄວນຄົບແຕ່ເນື້ອຊື່ນິໂຄທະເທົ່ານັ້ນ
ບໍ່ຄວນເຂົ້າໄປຄົບຫາເນື້ອຊື່ ສາຂະ

ການຕາຍໃນສຳນັກຂອງເນື້ອຊື່ນິໂຄທະຍັງປະເສີດກວ່າ
ການມີຊີວິດຢູ່ໃນສຳນັກຂອງເນື້ອຊື່ສາຂະ ຈະປະເສີດອັນໃດ

[໑໕໗] ຂ້າພະເຈົ້າ ມານດາຂອງຂ້າພະເຈົ້າແລະພວກເນື້ອນອກນີ້
ໄດ້ເນື້ອຊື່ນິໂຄທະຜູ້ເປັນນາຍຝູງນັ້ນພ່ຳສອນ
ອາໄສໂອວາດຂອງເນື້ອຊື່ນິໂຄທະນັ້ນ
ຈຶ່ງໄດ້ໄປສູ່ບ່ອນຢູ່ອາໄສຄືສະຫວັນຊັ້ນດຸສິດທີ່ຣື່ນຣົມ
ພໍປານວ່າໄດ້ໄປສູ່ເຮືອນຂອງຕົນທີ່ຖິ້ມຈາກໄປ

[໑໕໘] ເມື່ອສາດສະໜາຂອງພຣະກັດສະປະທີຣະເຈົ້າ
ກຳລັງເຖິງຄວາມສິ້ນໄປ ຂ້າພະເຈົ້າໄດ້ຂຶ້ນໄປສູ່ພູເຂົາ
ພ່ຳເພັງພຽນຕາມຄຳສອນຂອງພຣະຊິນນະເຈົ້າ

[໑໕໙] ກໍບັດນີ້ ເກີດໃນຕະກູນເສດຖີໃນນະຄອນຣາດຊະຄຶ
ມານດາຂອງຂ້າພະເຈົ້າຖືພາ ອອກບວດເປັນບັນພະຊິດ

[໑໖໐] ພິກຂຸນີທັງຫຼາຍຮູ້ວ່າມານດາຂອງຂ້າພະເຈົ້າຖືພາ
ຈຶ່ງນຳໄປຫາພຣະເທວະທັດ ພຣະເທວະທັດນັ້ນກ່າວວ່າ
ຈົ່ງນາສະນະພິກຂຸນີຊົ່ວນາງນີ້ສາ

[໑໖໑] ແມ່ນໃນບັດນີ້ ມານດາຜູ້ໃຫ້ກຳເນີດຂອງຂ້າພະເຈົ້າ
ອັນພຣະຊິນນະເຈົ້າຜູ້ເປັນຈອມມຸນີ ຊົງອະນຸເຄາະໄວ້
ຈຶ່ງໄດ້ມີຄວາມສຸກຢູ່ໃນສຳນັກຂອງພິກຂຸນີ
[໑໖໒] ພຣະເຈົ້າແຜ່ນດິນພຣະນາມວ່າໂກສົນ
ໄດ້ຊົງຮູ້ເລື້ອງນັ້ນແລ້ວຈຶ່ງຊົງຊຸບລ້ຽງຂ້າພະເຈົ້າໄວ້
ດ້ວຍເຄື່ອງບໍລິຫານພຣະກຸມານ
ແລະຕົວຂ້າພະເຈົ້າກໍມີຊື່ວ່າກັດສະປະ
[໑໖໓] ຍ້ອນອາໄສທ່ານພຣະມະຫາກັດສະປະເຖຣະ
ຂ້າພະເຈົ້າຈຶ່ງມີຊື່ວ່າກຸມາຣະກັດສະປະ
ຍ້ອນໄດ້ຟັງພຣະທຳມະເທດສະໜາທີ່ພຣະພຸດທະເຈົ້າຊົງສະແດງວ່າ
ກາຍເປັນເໝືອນກັບໂພນປວກ

[໑໖໔] ຈາກນັ້ນຈິດຂອງຂ້າພະເຈົ້າກໍລຸດພົ້ນ
ບໍ່ຖືໝັ້ນໂດຍປະການທັງປວງ

ຂ້າພະເຈົ້າໄດ້ຮັບຕຳແໜ່ງເອຕະທັກຄະ
ກໍຍ້ອນທໍລະມານພຣະເຈົ້າປາຍາສິ

[໑໗໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະກຸມາຣະກັດສະປະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸມາຣະກັດສະປະເຖຣາປະທານທີ ໕ ຈົບ**

**ພານະວານທີ ໔໘ ຈົບ**

## ໖. ພາຫິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະພາຫິຍະເຖຣະ

(ພຣະພາຫິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໘] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊຶ່ງເປັນຜູ້ນຳ (ສັດໂລກ) ມີພຣະອັດສະໝີຫຼາຍ
ເປັນຜູ້ເລີດໃນໂລກທັງ ໓ ສະເດັດອຸບັດຂຶ້ນແລ້ວ

[໑໗໙] ຂ້າແຕ່ພຣະມຸນີ ເມື່ອພຣະຜູ້ມີພຣະພາກເຈົ້າ
ຕັດສັນເສີນຄຸນຂອງພິກຂຸຜູ້ຕັດສະຮູ້ໄດ້ທັນທີ

ຂ້າພຣະອົງໄດ້ຟັງແລ້ວມີຈິດເບີກບານ
ຈຶ່ງໄດ້ນ້ອມສັກກາຣະພຣະຜູ້ມີພຣະພາກເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໗໐] ຂ້າແຕ່ພຣະມຸນີ ຂ້າພຣະອົງຖວາຍທານຕະຫຼອດ ໗ ວັນ
ແດ່ພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະສາວົກ
ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ປາຖະໜາຕຳແໜ່ງນັ້ນໃນການນັ້ນ

[໑໗໑] ລຳດັບນັ້ນ ພຣະພຸດທະເຈົ້າຊົງພະຍາກອນຂ້າພະເຈົ້າວ່າ
ຈົ່ງເບິ່ງພາມທີ່ໝອບຢູ່ແທບຕີນຂອງເຮົານີ້
ຜູ້ມີໂສມະນັດເອີບອີ່ມສົມບູນ ເຫັນປະຈັກ

[໑໗໔] ມີຮ່າງກາຍທີ່ບຸນກຳສ້າງສັນໃຫ້ຄ້າຍຄຳ
ຜຸດຜ່ອງ ຜິວບາງ ຮີມຝີປາກແດງເໝືອນໝາກຕຳນິນສຸກ
ມີແຂ້ວຂາວຄົມພຽງສະເໝີ

[໑໗໓] ມີກຳລັງຄືຄຸນຫຼາຍ ມີໂລມະຊາດຊູຊັນແລະມີໃຈຟູຂຶ້ນ
ເປັນບໍ່ເກີດແຫ່ງກະແສນ້ຳຄືຄຸນ
ມີໜ້າຍິ້ມແຍ້ມແຈ່ມໃສດ້ວຍປີຕິ

[໑໗໔] ເຂົາປາຖະໜາຕຳແໜ່ງຂອງພິກຂຸຜູ້ຕັດສະຣູ້ທັນທີ
ໃນອະນາຄົດ ຈັກມີພຣະມະຫາວີຣະພຣະນາມວ່າ ໂຄດົມ

[໑໗໕] ເຂົາຈັກມີນາມວ່າ ພາຫິຍະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໑໗໖] ໃນຄັ້ງນັ້ນ ຂ້າພະເຈົ້າຍິນດີແລ້ວ
ໝັ່ນກະທຳສັກກາຣະແດ່ພຣະມະຫາມຸນີດົນນານຕະຫຼອດຊີວິດ
ຈຸຕິແລ້ວໄດ້ໄປເກີດໃນສະຫວັນ ເໝືອນໄປສູ່ບ່ອນຢູ່ຂອງຕົນ

[໑໗໗] ຂ້າພະເຈົ້າຈະເປັນເທວະດາ ຫຼື ມະນຸດກໍຕາມ
ຍ່ອມເປັນຜູ້ມີຄວາມສຸກ ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າວຽນວ່າຍຕາຍເກີດຈຶ່ງໄດ້ສະເຫວີຍສົມບັດ

[໑໗໗] ເມື່ອສິ້ນສາດສະໜາຂອງພຣະກັດສະປະທີຣະເຈົ້າ
ຂ້າພະເຈົ້າໄດ້ຂຶ້ນໄປສູ່ພູເຂົາສິລາລ້ອນ
ພ່ຳເພັງພຽນຕາມຄຳສອນຂອງພຣະຊິນນະສີ

[໑໗໘] ເປັນຜູ້ມີສີນບໍລິສຸດ ມີປັນຍາ
ກະທຳຕາມຄຳສອນຂອງພຣະຊິນນະສີ
ຂ້າພະເຈົ້າ ໕ ຄົນນຳກັນ
ຈຸຕິຈາກອັດຕະພາບນັ້ນແລ້ວໄດ້ໄປເກີດຍັງເທວະໂລກ

[໑໘໐] ຂ້າພະເຈົ້າຊື່ພາຫິຍະ ເກີດໃນພາຣຸກັດສະນະຄອນ
ເຊິ່ງເປັນເມືອງທີ່ອຸດົມສົມບູນ
ພາຍຫຼັງໄດ້ແລ່ນເຮືອໄປໃນສາຄອນ
ເຊິ່ງໃຫ້ສຳເລັດປະໂຫຍດພຽງເລັກໜ້ອຍ

[໑໘໑] ແຕ່ນັ້ນ ເຮືອແລ່ນໄປໄດ້ ໔-໕ ວັນ ກໍອັບປາງລົງ
ໃນຄັ້ງນັ້ນ ຂ້າພະເຈົ້າຕົກລົງໄປໃນສາຄອນ
ເຊິ່ງເປັນບ່ອນຢູ່ແຫ່ງມັງກອນທີ່ດຸຮ້າຍ ເປັນຕາຢ້ານ

[໑໘໔] ໃນຄັ້ງນັ້ນ ຂ້າພະເຈົ້າພະຍາຍາມລອຍຂ້າມທະເລໃຫຍ່
ໄປເຖິງທ່າປະເສີດຊື່ສຸບປາຣະກະ
ຂ້າພະເຈົ້າມີຄົນຮູ້ຈັກໜ້ອຍ

[໑໘໓] ນຸ່ງຜ້າເປືອກໄມ້ເຂົ້າໄປສູ່ບ້ານເພື່ອກ້ອນເຂົ້າ
ໃນຄັ້ງນັ້ນ ໝູ່ຊົນພາກັນຍິນດີກ່າວວ່າ
ຜູ້ນີ້ເປັນພຣະອະຣະຫັນມາທີ່ນີ້ແລ້ວ

[໑໘໔] ພວກເຮົາສັກກາຣະພຣະອະຣະຫັນນີ້ດ້ວຍເຂົ້າ ນ້ຳ
ຜ້າ ບ່ອນນອນ ແລະເພສັດແລ້ວ ຈັກເຖິງຄວາມສຸກ

[໑໘໕] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ປັດໃຈ ເປັນຜູ້ທີ່ພວກເຂົາສັກກາຣະບູຊາແລ້ວ
ຈຶ່ງເກີດຄວາມດຳຣິໂດຍບໍ່ແຍບຄາຍຂຶ້ນວ່າ ເຮົາເປັນພຣະອະຣະຫັນ

[໑໘໖] ລຳດັບນັ້ນ ບຸບພະເທວະດາຮູ້ວາຣະຈິດຂອງຂ້າພະເຈົ້າ
ຈຶ່ງຕັກເຕືອນວ່າ ທ່ານບໍ່ຮູ້ທາງທີ່ເປັນອຸບາຍ
ຈະເປັນພຣະອະຣະຫັນໄດ້ແນວໃດນໍ

[໑໙໗] ໃນຄັ້ງນັ້ນ ຂ້າພະເຈົ້າຖືກເທວະດາຕັກເຕືອນແລ້ວ
ກໍເກີດຄວາມສະລົດໃຈ ຈຶ່ງສອບຖາມເທວະດານັ້ນວ່າ
ພຣະອະຣະຫັນຜູ້ປະເສີດກວ່ານໍຣະຊົນ
ໃນໂລກເຫຼົ່ານີ້ຄືໃຜ ຢູ່ບ່ອນໃດ

[໑໙໘] ເທວະດານັ້ນຕອບວ່າ ພຣະຊິນນະເຈົ້າຜູ້ມີພຣະປັນຍາຫຼາຍ
ຜູ້ປະເສີດ ມີປັນຍາສະເໝີດ້ວຍແຜ່ນດິນ
ພຣະອົງເປັນໂອຣົດຂອງເຈົ້າສາກະຍະ ເປັນພຣະອະຣະຫັນ
ບໍ່ມີອາສະວະ ຊົງສະແດງທຳເພື່ອບັນລຸອະຣະຫັນ
ຢູ່ໃນພຣະຣາດມົນທຽນຂອງພຣະເຈົ້າໂກສົນໃນນະຄອນສາວັດຖີ

[໑໙໙] ຂ້າພະເຈົ້າໄດ້ຟັງຄຳຂອງເທວະດານັ້ນແລ້ວ
ເອີບອີ່ມໃຈເໝືອນຄົນກຳພ້າໄດ້ຂຸມຊັບ
ຍິ້ມແຍ້ມ ເບີກບານໃຈທີ່ຈະໄດ້ພົບພຣະອະຣະຫັນຜູ້ປະເສີດ
ໜ້າເບິ່ງ ໜ້າພໍໃຈ ຜູ້ມີພຣະຍານເປັນໂຄຈອນບໍ່ມີບ່ອນສິ້ນສຸດ

[໔໐໐] ໃນຄັ້ງນັ້ນ ຂ້າພະເຈົ້າອອກຈາກບ່ອນນັ້ນໄປດ້ວຍຕັ້ງໃຈວ່າ
ເຮົາເມື່ອຊະນະກິເລດໄດ້ກໍຈະໄດ້ເຫັນພຣະພັກ
ທີ່ປາສະຈາກມົນທິນຂອງພຣະສາດສະດາໃນການທຸກເມື່ອ
ໄປເຖິງແຄວັນທີ່ຣື່ນຣົມນັ້ນແລ້ວໄດ້ຖາມພວກພາມວ່າ
ພຣະສາດສະດາຜູ້ເຮັດຊາວໂລກໃຫ້ເພີດເພີນປະທັບຢູ່ບ່ອນໃດ

[໔໐໑] ໃນຄັ້ງນັ້ນ ພາມທັງຫຼາຍຕອບວ່າ
ພຣະສາດສະດາຜູ້ທີ່ມະນຸດແລະເທວະດາຂາບໄຫວ້
ສະເດັດເຂົ້າໄປບິນທະບາດໃນເມືອງ
ທ່ານຜູ້ຂວນຂວາຍຈະເຂົ້າເຝົ້າພຣະມຸນີ
ຈົ່ງຟ້າວກັບໄປເຝົ້າຂາບໄຫວ້ພຣະອົງຜູ້ເປັນບຸກຄົນຜູ້ເລີດ

[໔໐໒] ລຳດັບນັ້ນ ຂ້າພະເຈົ້າໄດ້ໄປສູ່ນະຄອນສາວັດຖີ
ທີ່ອຸດົມສົມບູນໂດຍຮີບຟ້າວ ໄດ້ເຫັນພຣະອົງຜູ້ບໍ່ມັກຫຼາຍ
ແລະບໍ່ຕິດໃນຣົດອາຫານ ກຳລັງສະເດັດບິນທະບາດ

[໔໐໓] ຊົງບາດ ມີພຣະເນດສັງລວມ
ຊົງຍັງອະມະຕະທຳໃຫ້ສ່ອງແສງຢູ່ໃນນະຄອນນີ້

ປຽບດັ່ງເປັນບ່ອນຢູ່ຂອງພຣະສິຣິ
ມີພຣະພັກສ່ອງແສງດັ່ງຣັດສະໝີດວງອາທິດ

[໔໐໔] ເມື່ອພົບພຣະອົງ ຂ້າພະເຈົ້າຈຶ່ງໄດ້ໝອບລົງແລ້ວ
ຂາບທູນດັ່ງນີ້ວ່າ ຂ້າແຕ່ພຣະໂຄດົມ
ຂໍພຣະອົງໂຜດເປັນບ່ອນເພິ່ງຂອງຂ້າພຣະອົງ
ຜູ້ວິບັດໃນທາງທີ່ໜ້າຣັງກຽດດ້ວຍເທີ້ນ

[໔໐໕] ພຣະມຸນີຜູ້ປະເສີດໄດ້ຕັດວ່າ ເຮົາກຳລັງທ່ຽວບິນທະບາດ
ເພື່ອປະໂຫຍດແກ່ການຊ່ອຍສັດໃຫ້ຂ້າມພົ້ນ
ເວລານີ້ບໍ່ແມ່ນເວລາສະແດງທຳແກ່ທ່ານ

[໔໐໖] ໃນຄັ້ງນັ້ນ ຂ້າພະເຈົ້າມີຄວາມປາຖະໜາແຮງກ້າໃນທຳ
ຈຶ່ງໄດ້ທູນອ້ອນວອນພຣະພຸດທະເຈົ້າເລື້ອຍ ໆ
ພຣະອົງສະແດງທຳອັນເປັນສູນຍະຕະບົດທີ່ເລິກເຊິ່ງແກ່ຂ້າພະເຈົ້າ

[໔໐໗] ຂ້າພະເຈົ້າໄດ້ຟັງທຳຂອງພຣະອົງແລ້ວ
ກໍບັນລຸທຳເປັນທີ່ສິ້ນອາສະວະ
ໂອຫໍ! ຂ້າພະເຈົ້າເປັນຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ
ເປັນຜູ້ມີອາຍຸສິ້ນແລ້ວ

[໔໐໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

[໔໑໑] ພຣະພາຫິຍະທາຣຸຈີຣິຍະເຖຣະ
ຖືກແມ່ງົວໂຕທີ່ຖືກຜີສິງບໍ່ເຫັນໂຕຕຳໃຫ້ລົ້ມລົງໃສ່ກອງຂີ້ເຫຍື້ອ
ໄດ້ກ່າວພະຍາກອນດ້ວຍປະການດັ່ງນີ້

[໔໑໒] ພຣະເຖຣະຜູ້ມີປັນຍາຫຼາຍ ເປັນນັກປາດ
ເມື່ອກ່າວບຸບຈະຣິດຂອງຕົນແລ້ວ
ປະຣິນິບພານໃນນະຄອນສາວັດຖີ ທີ່ອຸດົມສົມບູນ

[໔໑໓] ພຣະລືສີຜູ້ປະເສີດ ສະເດັດອອກຈາກນະຄອນ
ທອດພຣະເນດເຫັນພຣະພາຫິຍະທາຣຸຈີຣິຍະຜູ້ນຸ່ງຜ້າເປືອກໄມ້
ເປັນນັກປາດ ເຊິ່ງມີຄວາມຮ້ອນຮົນອັນລອຍໄດ້ແລ້ວ

[໔໑໔] ລົ້ມລົງທີ່ພູມິພາກ ເໝືອນຄັນເສົາທຸງໃຫຍ່ອັນລົມພັດໃຫ້ລົ້ມລົງ
ໝົດອາຍຸ ກິເລດເຫືອດແຫ້ງ ເຮັດກິດໃນສາດສະໜາຂອງພຣະຊິນນະເຈົ້າ

[໔໑໕] ລຳດັບນັ້ນ ພຣະສາດສະດາຕັດຮຽກສາວົກທັງຫຼາຍ
ຜູ້ຍິນດີໃນສາດສະໜາມາສັ່ງວ່າ ທ່ານທັງຫຼາຍຈົ່ງຊ່ອຍກັນຍົກຮ່າງ
ຂອງເພື່ອນພົມມະຈາຣີແລ້ວນຳໄປເຜົາສາເທີ້ນ

[໔໑໖] ຈົ່ງສ້າງສະຖູບບູຊາ ເຂົາເປັນຄົນມີປັຊາຫຼາຍນິບພານແລ້ວ
ສາວົກຜູ້ເຮັດຕາມຄຳຂອງເຮົາ
ເປັນຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍທີ່ຕັດສະຣູ້ໄດ້ໄວ

[໔໑໗] ຄາຖາທີ່ມີປະໂຫຍດຄາຖາດຽວທີ່ຄົນຟັງແລ້ວສະງົບຣະງັບໄດ້
ຍ່ອມດີກວ່າຄາຖາທີ່ໄຮ້ປະໂຫຍດຕັ້ງ ໑,໐໐໐ ຄາຖາ

[໔໑໘] ດິນ ນ້ຳ ລົມ ໄຟ ບໍ່ຕັ້ງຢູ່ໃນນິບພານໄດ້
ໃນພຣະນິບພານນັ້ນ ດາວເລີກທີ່ສຸກສະກາວກໍສ່ອງແສງໄປບໍ່ຮອດ
ດວງອາທິດກໍສ່ອງແສງໄປບໍ່ເຖິງ

[໔໑໙] ດວງຈັນກໍສ່ອງແສງໄປບໍ່ເຖິງ ຄວາມມືດກໍບໍ່ມີ
ອັນໜຶ່ງ ເມື່ອໃດ ພາມຜູ້ໄດ້ຊື່ວ່າເປັນມຸນີ
ຍ້ອນເປັນຜູ້ສະງົບ ຮູ້ຈິງດ້ວຍຕົນເອງແລ້ວ

[໔໒໐] ເມື່ອນັ້ນ ເຂົາຍ່ອມພົ້ນຈາກຮູບພົບ ອະຮູບພົບ ສຸກ ແລະທຸກ
ພຣະໂລກກະນາດຜູ້ເປັນມຸນີ ເປັນບ່ອນເພິ່ງຂອງໂລກທັງ ໓

ໄດ້ຕັດໄວ້ແນວນີ້ ດ້ວຍປະການດັ່ງນີ້
ໄດ້ຮູ້ວ່າ ທ່ານພຣະພາຫິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ພາຫິຍະເຖຣາປະທານທີ ໖ ຈົບ**

## ໗. ມະຫາໂກດຖິກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາໂກດຖິກະເຖຣະ

(ພຣະມະຫາໂກດຖິກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໔໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກທັງປວງ ເປັນພຣະມຸນີ ມີພຣະຈັກຂຸ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໔໔] ພຣະອົງເປັນຜູ້ຕັດສອນ ຊົງສະແດງທຳໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ
ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໔໓] ພຣະອົງເປັນຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນສີນ ໕

[໔໔໔] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜູ້ໄດ້ວະສີ ຜູ້ຄົງທີ່

[໔໔໕] ພຣະມະຫາມຸນີພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໕໘ ສອກ
ມີພຣະສະຫວີວັນຄ້າຍຄຳທີ່ລ້ຳຄ່າ
ມີພຣະລັກສະນະອັນປະເສີດ ໓໔ ປະການ

[໔໔໖] ຂະນະນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍດຳຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໘໗] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມຊາວນະຄອນຫົງສະວະດີ ຮຽນຈົບໄຕຣເພດ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າ ຜູ້ເລີດກວ່າສັດໂລກທັງປວງ
ແລ້ວໄດ້ຟັງພຣະທຳມະເທດສະໜາ

[໔໘໘] ໃນຄັ້ງນັ້ນ ພຣະທີຣະເຈົ້າພຣະອົງນັ້ນ
ຊົງຕັ້ງສາວົກຜູ້ແຕກສານໃນປະຕິສຳພິທາ
ສະຫຼາດໃນອັດຖະທຳນິຣຸດຕິ
ແລະປະຕິພານໄວ້ໃນຕຳແໜ່ງເອຕະທັກຄະ

[໔໘໙] ຂ້າພະເຈົ້າໄດ້ຟັງພຣະດຳຣັດນັ້ນແລ້ວກໍພອຍຍິນດີ
ຈຶ່ງໄດ້ທູນນິມົນພຣະຊິນນະເຈົ້າຜູ້ປະເສີດ
ພ້ອມທັງສາວົກໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນ

[໔໙໐] ຂ້າພະເຈົ້າທູນນິມົນພຣະພຸດທະເຈົ້າຜູ້ດັ່ງສາຄອນ
ພ້ອມທັງສາວົກໃຫ້ຄອງຜ້າຊຸດໃໝ່
ແລ້ວໝອບລົງແທບພຣະບາດ ປາຖະໜາຕຳແໜ່ງນັ້ນ

[໔໙໑] ລຳດັບນັ້ນ ພຣະພຸດທະເຈົ້າຊົງເປັນບຸກຄົນຜູ້ເລີດໃນໂລກ
ໄດ້ຕັດວ່າ ຈົ່ງເບິ່ງພາມຜູ້ປະເສີດ
ເຊິ່ງໝອບຢູ່ແທບຕີນເຮົານີ້ ມີຣັດສະໝີເໝືອນກີບບົວ

[໔໙໒] ພາມນີ້ປາຖະໜາຕຳແໜ່ງປະເສີດສຸດຂອງພິກຂຸ
ຍ້ອນການບໍລິຈາກທານດ້ວຍສັດທານັ້ນ
ແລະຍ້ອນການຟັງພຣະສັດທຳຂອງພຣະພຸດທະເຈົ້າ

[໔໙໓] ພາມນີ້ຈັກເປັນຜູ້ມີຄວາມສຸກໃນທຸກພົບ
ວຽນວ່າຍຕາຍເກີດໃນພົບນ້ອຍພົບໃຫຍ່
ຈັກໄດ້ຕຳແໜ່ງນັ້ນຕາມໃຈປາຖະໜາໃນອະນາຄົດຕະການ

[໔໙໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໙໕] ພາມນີ້ຈັກມີນາມວ່າໂກດຖິກະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໔໓໖] ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ເບີກບານ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າຈົນຕະຫຼອດຊີວິດໃນຄັ້ງນັ້ນ
ຍ້ອນຂ້າພະເຈົ້າເປັນຜູ້ປະກອບດ້ວຍປັນຍາ

[໔໓໗] ດ້ວຍວິບາກກຳນັ້ນ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໓໘] ຂ້າພະເຈົ້າໄດ້ຄອງເທວະສົມບັດຕະຫຼອດ ໓໐໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ

[໔໓໙] ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ
ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ມີຄວາມສຸກໃນທຸກພົບ

[໔໔໐] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນ ໒ ພົບ
ຄື (໑) ເທວະດາ (໒) ມະນຸດ
ຄະຕິອື່ນຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງກຳທີ່ສັ່ງສົມໄວ້ດີແລ້ວ

[໔໔໑] ຂ້າພະເຈົ້າເກີດສະເພາະໃນ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ
ຈະບໍ່ເກີດໃນຕະກູນທີ່ຕ່ຳ
ນີ້ເປັນຜົນແຫ່ງກຳທີ່ສັ່ງສົມໄວ້ດີແລ້ວ

[໔໔໒] ເມື່ອເຖິງພົບສຸດທ້າຍ
ຂ້າພະເຈົ້າໄດ້ເປັນເຜົ່າພັນຂອງພາມ
ເກີດໃນຕະກູນພາມມະນະມະຫາສານ
ທີ່ມີຊັບຫຼາຍໃນນະຄອນສາວັດຖີ

[໔໔໓] ມານດາຂອງຂ້າພະເຈົ້າຊື່ຈັນທະວະດີ
ບິດາຂອງຂ້າພະເຈົ້າຊື່ອັດສະລາຍະນະ
ໃນເວລາທີ່ພຣະພຸດທະເຈົ້າຊົງແນະນຳບິດາຂອງຂ້າພະເຈົ້າ
ເພື່ອຄວາມບໍລິສຸດທຸກຢ່າງ

[໒໔໔] ຂ້າພະເຈົ້າເຫຼື້ອມໃສໃນພຣະສຸຄົດເຈົ້າ
ໄດ້ບວດເປັນບັນພະຊິດ
ພຣະໂມກຄັນລານະເປັນພຣະອາຈານ
ພຣະສາຣີບຸດເປັນພຣະອຸປັດຊາ

[໒໔໕] ໃນຂະນະກຳລັງແຖຜົມ ຂ້າພະເຈົ້າກໍຕັດທິດຖິພ້ອມທັງຮາກໄດ້
ແລະຂະນະນຸ່ງຜ້າກາສາວະ ກໍໄດ້ບັນລຸອະຣະຫັນຕະຜົນ

[໒໔໖] ຂ້າພະເຈົ້າມີປັນຍາແຕກສານໃນອັດຖະທຳ ນິຣຸດຕິ ແລະປະຕິພານ
ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ເລີດໃນໂລກ
ຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງເອຕະທັກຄະ

[໒໔໗] ຂ້າພະເຈົ້າຖືກທ່ານພຣະອຸປະຕິດສະ
ໄຕ່ຖາມໃນປະຕິສຳພິທາກໍແກ້ໄດ້ບໍ່ຂັດຂ້ອງ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງເປັນຜູ້ເລີດໃນສາດສະໜາ
ຂອງພຣະສຳມາສຳພຸດທະເຈົ້າ

[໒໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໒໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໒໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະມະຫາໂກດຖິກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມະຫາໂກດຖິກະເຖຣາປະທານທີ ໗ ຈົບ**

## ໗. ອຸຣຸເວລະກັດສະປະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸຣຸເວລະກັດສະປະເຖຣະ

(ພຣະອຸຣຸເວລະກັດສະປະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໕໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກທັງປວງ ເປັນພຣະມຸນີ ມີພຣະຈັກຂຸ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໕໒] ພຣະອົງເປັນຜູ້ຕັດສອນ ຊົງສະແດງທຳໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ
ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໕໓] ພຣະອົງເປັນຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນສິນ ໕

[໔໕໔] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜູ້ໄດ້ວະສີ ຜູ້ຄົງທີ່

[໔໕໕] ພຣະມະຫາມຸນີພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໕໗ ສອກ
ມີພຣະສະຫວີວັນຄ້າຍຄຳທີ່ລ້ຳຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໔໕໖] ຂະນະນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍດຳຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໕໗] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມຊາວນະຄອນຫົງສະວະດີ
ປະຊາຊົນສົມມຸດວ່າເປັນຜູ້ປະເສີດ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ສ່ອງໂລກໃຫ້ສະຫວ່າງສະໄຫວ
ແລ້ວໄດ້ຟັງພຣະທຳມະເທດສະໜາ

[໔໕໗] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຟັງພຣະຜູ້ມີພຣະພາກເຈົ້າ
ຊົງແຕ່ງຕັ້ງສາວິກາຂອງພຣະອົງໃນຕຳແໜ່ງເອຕະທັກຄະ
ໃນທີ່ປະຊຸມໃຫຍ່ ຈຶ່ງຍິນດີນຳ

[໔໕໙] ໄດ້ທູນນິມົນພຣະມະຫາຊິນນະເຈົ້າພ້ອມກັບສາວົກຈຳນວນຫຼາຍ
ແລ້ວໄດ້ຖວາຍທານພ້ອມດ້ວຍພານອີກ ໑,໐໐໐ ຄົນ

[໔໖໐] ເມື່ອຖວາຍມະຫາທານແລ້ວ
ຂ້າພະເຈົ້າໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຜູ້ຊົງເປັນຜູ້ນຳສັດໂລກ
ແລ້ວຢືນຢູ່ໃນທີ່ສົມຄວນ ເປັນຜູ້ເບີກບານ ໄດ້ຂາບທູນດັ່ງນີ້ວ່າ

[໔໖໑] ຂ້າແຕ່ພຣະອົງຜູ້ແກ່ກ້າ
ດ້ວຍຄວາມເຊື່ອໃນພຣະອົງແລະດ້ວຍອະທິການຄຸນ
ຂໍໃຫ້ຂ້າພຣະອົງຜູ້ເກີດໃນພົບນັ້ນ ໆ ຈົ່ງມີບໍລິວານຫຼາຍເທີ້ນ

[໔໖໔] ໃນຄັ້ງນັ້ນ ພຣະສາດສະດາຜູ້ມີພຣະສຸຣະສຽງກ້ອງ
ເໜືອນສຽງຄົດຊະສານຄຳຣາມ
ມີພຣະສຳນຽງມ່ວນເໜືອນສຽງນົກກາຣະເວກ
ໄດ້ຕັດກັບບໍລິສັດວ່າ ຈົ່ງເບິ່ງພານນີ້

[໔໖໓] ຜູ້ມີຜິວພັນເໜືອນຄຳ ແຂນໃຫຍ່
ປາກແລະດວງຕາເໜືອນດອກປະທຸມ
ມີໂລມະຊາດຊູຊັນແລະມີໃຈຟູຂຶ້ນຮ່າເຣີງມີສັດທາໃນຄຸນຂອງເຮົາ

[໔໖໔] ເຂົາປາຖະໜາຕຳແໜ່ງພິກຂຸຜູ້ມີສຽງເໜືອນຣາດຊະສີ
ໃນອະນາຄົດຕະການ ເຂົາຈັກໄດ້ຕຳແໜ່ງນີ້ສົມຄວາມປາຖະໜາ

[໔໖໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໖໖] ພານນີ້ຈັກມີນາມວ່າກັດສະປະຕາມໂຄດ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໘໕໗] ໃນກັບທີ ໗໘ ນັບຈາກກັບນີ້ໄປ
ໄດ້ມີພຣະຜູ້ເປັນຜູ້ນໍາຊັ້ນເລີດຂອງໂລກພຣະນາມວ່າຜຸດສະ
ຊຶ່ງເປັນສາດສະດາຜູ້ປະເສີດ ຫາຜູ້ປຽບບໍ່ໄດ້
ບໍ່ມີໃຜສະເໝີເໝືອນ

[໘໕໘] ພຣະສາດສະດາພຣະນາມວ່າຜຸດສະພຣະອົງນັ້ນແລ
ຊົງກໍາຈັດຄວາມມືດ ທັງປວງ ຖາງຮົກທຶບໃຫຍ່
ຊົງບັນດານຝົນຄືອະມະຕະທໍາໃຫ້ຕົກລົງ
ໃຫ້ມະນຸດແລະທວຍເທບອີ່ມໜໍາ

[໘໕໙] ໃນຄັ້ງນັ້ນ ຂ້າພະເຈົ້າ ໓ ຄົນອ້າຍນ້ອງ
ໄດ້ເປັນຣາດຊະອໍາມາດໃນນະຄອນພາຣານະສີ
ລ້ວນແຕ່ເປັນທີ່ໄວ້ວາງພຣະຫະໄທຂອງພຣະຣາຊາ

[໘໖໐] ຮູບຮ່າງອົງອາດແກ່ກ້າ ສົມບູນດ້ວຍພະລະກໍາລັງ
ບໍ່ພ່າຍແພ້ໃນສົງຄາມ
ໃນຄັ້ງນັ້ນ ພຣະເຈົ້າແຜ່ນດິນຜູ້ຖືກເຈົ້າເມືອງຊາຍແດນກໍ່ການກໍາເຣີບ
ຈຶ່ງມີຣັບສັ່ງກັບພວກຂ້າພະເຈົ້າວ່າ

[໘໖໑] ທ່ານທັງຫຼາຍຈົ່ງໄປຊົນນະບົດຊາຍແດນ
ປາບປາມກະບົດຂອງແຜ່ນດິນໃຫ້ຣາບຄາບແລ້ວກັບມາ
ແລະຊົງພໍ່າສອນວ່າ ພວກທ່ານບໍາຣຸງແວ່ນແຄວ້ນຂອງເຮົາ
ໃຫ້ກະເສມແລ້ວຈົ່ງມອບຄືນ

[໘໖໒] ລໍາດັບນັ້ນ ຂ້າພະເຈົ້າໄດ້ຂາບທູນວ່າ
ຖ້າພຣະອົງຈະເພິ່ງປະທານພຣະຜູ້ຊົງເປັນຜູ້ນໍາ
ເພື່ອໃຫ້ຂ້າພຣະອົງທັງຫຼາຍອຸປັດຖາກແດ່
ຂ້າພຣະອົງທັງຫຼາຍກໍຈັກເຮັດກິດຂອງພຣະອົງໃຫ້ສໍາເລັດ

[໘໖໓] ລໍາດັບນັ້ນ ຂ້າພະເຈົ້າໄດ້ຮັບພຣະຣາດຊະທານພົນແລ້ວ
ຖືກພຣະພູມິບານສົ່ງໄປປາບປາມຊາຍແດນທີ່ກໍາເຣີບໃຫ້ວາງອາວຸດແລ້ວ
ຈຶ່ງກັບມາຍັງນະຄອນນັ້ນອີກ

[໘໖໔] ຂ້າພະເຈົ້າທູນຂໍການຮັບອຸປັດຖາກພຣະສາດສະດາຈາກພຣະຣາຊາ

ໄດ້ພຣະສາດສະດາຊົງເປັນຜູ້ນຳສັດໂລກ
ເປັນພຣະມຸນີຜູ້ປະເສີດແລ້ວ ໄດ້ບູຊາພຣະອົງຈົນຕະຫຼອດຊີວິດ

[໔໓໕] ຜ້າມີຄ່າຫຼາຍ ອາຫານມີຣົດເລີດ
ເສນາສະນະເປັນທີ່ຣື່ນຣົມແລະເພສັດທີ່ມີປະໂຫຍດ

[໔໓໖] ພວກຂ້າພະເຈົ້າມີສິນ ມີກະລຸນາ ມີໃຈປະກອບດ້ວຍພາວະນາ
ຈຶ່ງຖວາຍປັດໄຈທີ່ພວກຂ້າພະເຈົ້າໃຫ້ເກີດຂຶ້ນໂດຍທຳ
ແດ່ພຣະມຸນີພ້ອມທັງພຣະສົງ

[໔໓໗] ອຸປັດຖາກພຣະຜູ້ຊົງເປັນຜູ້ນຳດ້ວຍຈິດເມດຕາຕະຫຼອດເວລາ
ເມື່ອພຣະຜູ້ຊົງເປັນຜູ້ນຳ ຜູ້ເລີດໃນໂລກນັ້ນປະຣິນິບພານແລ້ວ
ກໍທຳການບູຊາຕາມກຳລັງ

[໔໓໘] ທຸກຄົນຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ສະເຫວີຍສຸກຢ່າງຫຼາຍໃນສະຫວັນຊັ້ນຕາວະຕິງສານັ້ນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໓໙] ຂ້າພະເຈົ້າເມື່ອເກີດຢູ່ໃນພົບ
ເປັນເໝືອນນາຍຊ່າງດອກໄມ້
ໄດ້ດອກໄມ້ຕາມແຕ່ຈະຫາມາໄດ້ແລ້ວ
ຈັດສະແດງໃຫ້ເປັນແບບຕ່າງ ໆ ຫຼາກຫຼາຍ
ໄດ້ເປັນພຣະເຈົ້າວິເທຫະຣາດ

[໔໘໐] ຂ້າພະເຈົ້າມີອັດທະຍາໄສເປັນມິດສາທິດຖິ
ຍ້ອນຄຳເວົ້າຂອງອະເຈລະກະຄຸນ
ຕົກນະຮົກຍ້ອນບໍ່ເຊື່ອຄຳຕັກເຕືອນຂອງທິດາຂອງຂ້າພະເຈົ້ານາມວ່າ ຣຸຈາ

[໔໘໑] ຖືກນາຣະທະພົມພ່ຳສອນໄວ້ຫຼາຍ
ຈຶ່ງລະທິດຖິອັນຊົ່ວຊ້ານັ້ນໄດ້

[໔໘໔] ແລ້ວພ່ຳເພັງກຸສົນກຳມະບົດ ໑໐ ໃຫ້ບໍລິບູນໂດຍພິເສດ
ລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນ ເໝືອນໄປສູ່ບ່ອນຢູ່ຂອງຕົນ

[໘໗໓] ເມື່ອເຖິງພົບສຸດທ້າຍ
ຂ້າພະເຈົ້າໄດ້ເປັນເຜົ່າພັນຂອງພາມ
ເກີດໃນຕະກູນພາມມະນະມະຫາສານ ໃນນະຄອນພາຣານະສີທີ່ມັ່ງຄັ່ງ

[໘໗໔] ຂ້າພະເຈົ້າຢ້ານຕໍ່ຄວາມແກ່ ຄວາມເຈັບ ແລະຄວາມຕາຍ
ຈຶ່ງເຂົ້າປ່າໃຫຍ່ ສະແຫວງຫາບົດຄືພຣະນິບພານ
ໄດ້ບວດໃນສຳນັກຂອງຊະດິນ

[໘໗໕] ໃນຄັ້ງນັ້ນ ນ້ອງຊາຍທັງ ໘ ຂອງຂ້າພະເຈົ້າ
ກໍໄດ້ບວດພ້ອມກັບຂ້າພະເຈົ້າ
ຂ້າພະເຈົ້າໄດ້ສ້າງອາສົມອາໄສຢູ່ທີ່ເຂດອຸຣຸເວລາ

[໘໗໖] ຂ້າພະເຈົ້າມີຊື່ວ່າກັດສະປະ ຕາມໂຄດ
ແຕ່ຍ້ອນອາໄສຢູ່ທີ່ເຂດອຸຣຸເວລາ
ຈຶ່ງໄດ້ນາມບັນຍັດວ່າອຸເວລະກັດສະປະ

[໘໗໗] ຍ້ອນນ້ອງຊາຍຂອງຂ້າພະເຈົ້າອາໄສຢູ່ໃກ້ແມ່ນໍ້າ
ເຂົາຈຶ່ງໄດ້ນາມວ່ານທີກັດສະປະ
ຍ້ອນນ້ອງຊາຍອີກຄົນໜຶ່ງຂອງຂ້າພະເຈົ້າ
ອາໄສຢູ່ທີ່ຕາແສງຄະຍາ ເຂົາຈຶ່ງປະກາດນາມວ່າ ຄະຍາກັດສະປະ

[໘໗໘] ນ້ອງຊາຍຜູ້ນ້ອຍມີສິດ ໘໐໐ ຄົນ
ນ້ອງຊາຍຄົນກາງມີສິດ ໓໐໐ ຄົນ
ສ່ວນຂ້າພະເຈົ້າມີບໍ່ໜ້ອຍກວ່າ ໕໐໐ ຄົນ
ສິດທຸກຄົນລ້ວນປະພຶດຕາມຂ້າພະເຈົ້າ

[໘໗໙] ໃນຄັ້ງນັ້ນ ພຣະພຸດທະເຈົ້າຊົງເປັນຜູ້ເລີດໃນໂລກ
ເປັນສາຣະຖີຝຶກນໍຣະຊົນ ໄດ້ສະເດັດມາຫາຂ້າພະເຈົ້າ
ຊົງເຮັດປາຕິຫານຕ່າງ ໆ ແກ່ຂ້າພະເຈົ້າ ແລະຊົງແນະນຳ

[໘໘໐] ຂ້າພະເຈົ້າກັບບໍລິວານ ໑,໐໐໐ ໄດ້ອຸປະສົມບົດ
ດ້ວຍເອຫິພິກຂຸອຸປະສຳປະທາ
ໄດ້ບັນລຸອະຣະຫັນພ້ອມກັບພິກຂຸເຫຼົ່ານັ້ນທຸກອົງ

[໘໘໑] ພິກຂຸເຫຼົ່ານັ້ນແລະພິກຂຸເຫຼົ່າອື່ນຈຳນວນຫຼາຍ
ແວດລ້ອມຂ້າພະເຈົ້າເປັນບໍລິວານຍົດ

ແລະຂ້າພະເຈົ້າກໍສາມາດສັ່ງສອນໄດ້
ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ເປັນລືສີ
ຜູ້ປະເສີດກໍສັ່ງສອນຂ້າພະເຈົ້າ

[໔໗໔] ພຣະອົງຊົງຕັ້ງຂ້າພະເຈົ້າໄວ້ໃນຕໍາແໜ່ງເອຕະທັກຄະ
ຄືຄວາມເປັນຜູ້ມີບໍລິສັດຫຼາຍ
ໂອ ສັກກາຣະທີ່ໄດ້ເຮັດໄວ້ໃນພຣະພຸດທະເຈົ້າ
ໄດ້ກໍ່ໃຫ້ເກີດຜົນແກ່ຂ້າພະເຈົ້າແລ້ວ

[໔໗໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗໔] ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໔໗໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອຸຣຸເວລະກັດສະປະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸຣຸເວລະກັດສະປະເຖຣາປະທານທີ ๘ ຈົບ**

## ໗. ຣາທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຣາທະເຖຣະ

(ພຣະຣາທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗໖] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກທັງປວງ ເປັນພຣະມຸນີ ມີພຣະຈັກຂຸ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໙໗] ພຣະອົງເປັນຜູ້ຕັດສອນ ຊົງສະແດງທຳໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ
ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໙໘] ພຣະອົງເປັນຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນສິນ ໕

[໔໙໙] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜູ້ໄດ້ວະສີ ຜູ້ຄົງທີ່

[໕໐໐] ພຣະມະຫາມຸນີພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໕໘ ສອກ
ມີພຣະສະຫວີວັນຄ້າຍຄຳທີ່ລ້ຳຄ່າ
ມີພຣະລັກສະນະອັນປະເສີດ ໓໔ ປະການ

[໕໐໑] ຂະນະນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍດຳຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໕໐໔] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມຊາວນະຄອນທົງສະອະດີ ຮຽນຈົບມົນ
ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຜູ້ປະເສີດກວ່ານໍຣະຊົນ

[໕໐໓] ຊົງມີຄວາມພຽນຫຼາຍ ຊົງແກ່ກ້າໃນບໍລິສັດ
ຊົງເປັນຜູ້ນຳວິເສດ ຊົງກຳລັງຕັ້ງພິກຂຸຜູ້ມີປະຕິພານໄວ້
ໃນຕຳແໜ່ງເອຕະທັກຄະແລ້ວໄດ້ຟັງພຣະທຳມະເທດສະໜາ

[໕໐໔] ໃນຄັ້ງນັ້ນ ຂ້າພະເຈົ້າເຮັດສັກກາຣະໃນພຣະອົງຜູ້ເປັນຜູ້ນຳສັດໂລກ
ພ້ອມທັງພິກຂຸສົງ ແລ້ວໝອບລົງແທບພຣະບາດດ້ວຍຂະໜ່ອມ
ປາຖະໜາຕຳແໜ່ງນັ້ນ

[໕໐໕] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ
ຜູ້ມີພຣະຣັດສະໝີຊ່ານອອກຈາກພຣະວໍຣະກາຍເໝືອນແທ່ງຄຳ

ໄດ້ຕັດກັບຂ້າພະເຈົ້າດ້ວຍພຣະສຸຣະສຽງອັນໜ້າຍິນດີ
ມີປີກກະຕີນຳມົນທິນຄືກິເລດອອກໄປວ່າ

[໓໐໖] ຈົ່ງເປັນຜູ້ມີຄວາມສຸກ
ມີອາຍຸຍືນເທີ້ນ ປະນິທານ (ຄວາມປາຖະໜາ) ຂອງທ່ານກໍຈົ່ງສຳເລັດເທີ້ນ
ສັກກາຣະທີ່ທ່ານເຮັດໃນເຮົາພ້ອມທັງພຣະສົງກໍຈົ່ງມີຜົນໄພບູນຢ່າງຍິ່ງເທີ້ນ

[໓໐໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໓໐໘] ພານນີ້ຈັກມີນາມວ່າ ຣາທະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໓໐໙] ພຣະຜູ້ຊົງເປັນຜູ້ນຳພຣະອົງນັ້ນ
ເປັນພຣະຣາດຊະໂອຣົດຂອງເຈົ້າສາກະຍະ ຊົງອົງອາດກວ່ານໍຣະຊົນ
ຊົງຍິນດີໃນຄຸນທີ່ເປັນເຫດຂອງທ່ານແລ້ວ ຈັກຊົງແຕ່ງຕັ້ງທ່ານວ່າ
ເປັນຜູ້ເລີດກວ່າພິກຂຸທັງຫຼາຍຜູ້ມີປະຕິພານ

[໓໑໐] ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ເບີກບານ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າຈົນຕະຫຼອດຊີວິດ ໃນຄັ້ງນັ້ນ
ຍ້ອນຂ້າພະເຈົ້າເປັນຜູ້ປະກອບດ້ວຍປັນຍາ

[໓໑໑] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
[໓໑໒] ຂ້າພະເຈົ້າໄດ້ຄອງເທວະສົມບັດຕະຫຼອດ ໓໐໐ ຊາດ
ໄດ້ເປັນພຣະເຈົ້າຈັກກະພັດ ໕໐໐ ຊາດ
[໓໑໓] ແລະໄດ້ເປັນພຣະເຈົ້າປະເທດຣາດຢ່າງໄພບູນນັບຊາດບໍ່ຖ້ວນ
ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ມີຄວາມສຸກໃນທຸກພົບ

[໓໑໔] ເມື່ອເຖິງພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນທີ່ຍາກຈົນ
ຂາດເຄື່ອງນຸ່ງຫົ່ມແລະອາຫານ
ໃນນະຄອນຣາດຊະຄຶທີ່ອຸດົມສົມບູນ

[໓໑໕] ໄດ້ຖວາຍພິກສາບ່ວງໜຶ່ງແກ່ພຣະສາຣີບຸດຜູ້ຄົງທີ່
ໃນເວລາທີ່ຂ້າພະເຈົ້າແກ່ເຖົ້າ ໄດ້ອາໄສອາຮາມນັ້ນຢູ່

[໓໑໖] ໃນຄັ້ງນັ້ນ ບໍ່ມີພິກຂຸອົງໃດບວດໃຫ້ຂ້າພະເຈົ້າຜູ້ແກ່ເຖົ້າ
ຜູ້ມີກຳລັງແລະເຫື່ອແຮງຖົດຖອຍ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງເປັນຄົນຕົກຍາກ
ມີຜິວພັນບໍ່ຜ່ອງໃສແລະເສົ້າໂສກ

[໓໑໗] ພຣະມະຫາມຸນີຜູ້ປະກອບດ້ວຍພຣະມະຫາກະລຸນາ
ທອດພຣະເນດເຫັນຈຶ່ງຕັດຖາມຂ້າພະເຈົ້າວ່າ
ລູກເອີຍ ເຫດໃດເຈົ້າຈຶ່ງເສົ້າໂສກຢູ່ແນວນີ້ບໍ?
ຈົ່ງບອກເຖິງຄວາມສຽບແທງທີ່ເກີດໃນໃຈຂອງເຈົ້າ

[໓໑໘] ຂ້າພະເຈົ້າໄດ້ຂາບທູນວ່າ ຂ້າແຕ່ພຣະອົງຜູ້ມີຄວາມພຽນ
ຂ້າພຣະອົງບໍ່ໄດ້ບວດໃນສາດສະໜາຂອງພຣະອົງ
ເຊິ່ງພຣະອົງຕັດດີແລ້ວ
ຍ້ອນຄວາມເສົ້າໂສກນັ້ນ ຂ້າພຣະອົງຈຶ່ງເປັນຄົນຕົກຍາກ
ຂ້າແຕ່ພຣະຜູ້ຊົງເປັນຜູ້ນຳ
ຂໍພຣະອົງຈົ່ງເປັນບ່ອນເພິ່ງຂອງຂ້າພຣະອົງດ້ວຍເທີ້ນ

[໓໑໙] ໃນຄັ້ງນັ້ນ ພຣະມຸນີຜູ້ປະເສີດ
ໄດ້ຮັບສັ່ງໃຫ້ຮຽກພິກຂຸມາປະຊຸມພ້ອມແລ້ວຕັດຖາມວ່າ
ຜູ້ທີ່ນຶກເຖິງສັກກາຣະແມ່ນໜ້ອຍໜຶ່ງຂອງພາມນີ້ໄດ້ ມີຢູ່ບໍຈົ່ງບອກມາ

[໓໒໐] ໃນຄັ້ງນັ້ນ ພຣະສາຣີບຸດໄດ້ຂາບທູນວ່າ
ຂ້າພຣະອົງຣະລຶກເຖິງສັກກາຣະຂອງເຂົາໄດ້ຢູ່
ພາມນີ້ໄດ້ຖວາຍເຂົ້າບ່ວງໜຶ່ງ
ແກ່ຂ້າພຣະອົງຜູ້ກຳລັງທ່ຽວບິນທະບາດ ໂດຍຂ້ານ້ອຍ

(ພຣະຜູ້ມີພຣະພາກຕັດວ່າ)

[໓໔໑] ສາທຸ ສາທຸ ສາຣີບຸດ ທ່ານເປັນຄົນກະຕັນຍູ
ທ່ານຈຶ່ງໃຫ້ພາມເຖົ້າຜູ້ນີ້ບວດເທີ້ນ
ເຂົາຈັກເປັນປູຊະນີຍະບຸກຄົນ

[໓໔໒] ລຳດັບນັ້ນ ຂ້າພະເຈົ້າໄດ້ຮັບການບັນພະຊາອຸປະສົມບົດ
ດ້ວຍກຳມະວາຈາ ແລະບໍ່ດົນຫຼາຍກໍໄດ້ບັນລຸທຳເປັນທີ່ສິ້ນອາສະວະ

[໓໔໓] ຍ້ອນຂ້າພະເຈົ້າເປັນຜູ້ເພີດເພີນ
ຟັງພຸດທະດຳຣັດໂດຍຄວາມເຄົາລົບ
ດັ່ງນັ້ນ ພຣະຊິນນະເຈົ້າຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ວ່າ
ເປັນຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍປະຕິພານ

[໓໔໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໔໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໔໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຣາທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຣາທະເຖຣາປະທານທີ ໙ ຈົບ**

## ໑໐. ໂມຄະຣາດເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂມຄະຣາດເຖຣະ

(ພຣະໂມຄະຣາດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔໗] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ແຈ້ງໂລກ ຊົງພໍ່າເພັງປະໂຫຍດເກື້ອກູນແກ່ສັບພະສັດ
ເປັນພຣະມຸນີ ມີພຣະຈັກຂຸ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໔໘] ພຣະອົງເປັນຜູ້ຕັດສອນຊົງສະແດງທໍາໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ
ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈໍານວນຫຼາຍ

[໑໔໙] ພຣະອົງເປັນຜູ້ອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດໍາຣົງຢູ່ໃນສິນ ໕

[໑໕໐] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜູ້ໄດ້ວະສີ ຜູ້ຄົງທີ່

[໑໕໑] ພຣະມະຫາມຸນີພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໕໘ ສອກ
ມີພຣະສະຫວີວັນຄ້າຍຄໍາທີ່ລໍ້າຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໑໕໒] ຂະນະນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍດໍາຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈໍານວນຫຼາຍ

[໑໕໓] ໃນຄັ້ງນັ້ນ ຂ້າພະເຈົ້າຮັບຈ້າງເຮັດວຽກຂອງບຸກຄົນອື່ນໃນຕະກູນໜຶ່ງ
ໃນນະຄອນຫົງສະວະດີ ຂ້າພະເຈົ້າບໍ່ມີຊັບສິນອັນໃດທີ່ເປັນຂອງຕົນເລີຍ

[໑໕໔] ຂ້າພະເຈົ້າອາໄສຢູ່ທີ່ສາລາພັກຜ່ອນທີ່ເຂົາປັບພື້ນໄວ້ແລ້ວ
ໄດ້ດັງໄຟຂຶ້ນທີ່ສາລາ ພື້ນສີລາຈຶ່ງດໍາຍ້ອນຖືກໄຟໄໝ້

[໑໕໕] ໃນຄັ້ງນັ້ນ ພຣະໂລກະນາດຜູ້ປະກາດສັດຈະ ໔
ໄດ້ຕັດສັນເສີນສາວິກາຜູ້ຊົງຈີວອນເສົ້າໝອງໃນທີ່ປະຊຸມຊົນ

[໓໓໖] ຂ້າພະເຈົ້າພໍໃຈໃນຄຸນນັ້ນຂອງພຣະອົງ ຈຶ່ງໄດ້ປີ້ນນິບັດພຣະຕະຖາຄົດ
ປາຖະໜາຕຳແໜ່ງທີ່ສູງສຸດຄືຄວາມເປັນຜູ້ເລີດ
ກວ່າພິກຂຸຜູ້ຊົງຈີວອນເສົ້າໝອງ

[໓໓໗] ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ໄດ້ຕັດກັບສາວົກທັງຫຼາຍວ່າ
ຈົ່ງເບິ່ງບຸຣຸດນີ້ຜູ້ມີຜ້າຫົ່ມເສົ້າໝອງ ຮ່າງກາຍຜອມບາງ

[໓໓໘] ແຕ່ສີໜ້າຜ່ອງໃສເພາະປີຕິ
ປະກອບດ້ວຍຊັບຄື ສັດທາ ມີໂລມະຊາດຊູຊັນ
ມີໃຈຮ່າເຣີງ ບໍ່ຫວັ່ນໄຫວ ເໝືອນໝູ່ໄມ້ສາລະທີ່ຫນາແຫນັ້ນ

[໓໓໙] ບຸຣຸດນີ້ຜູ້ມີຄວາມພໍໃຈໃນຄຸນຂອງພິກຂຸຊື່ສັດຈະເສນະ
ຜູ້ຊົງຈີວອນເສົ້າໝອງນັ້ນ ຈຶ່ງປາຖະໜາຕຳແໜ່ງນັ້ນ

[໓໔໐] ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວເປັນຜູ້ເບີກບານ
ຊົບຫົວລົງຖວາຍພຣະຊິນນະເຈົ້າກະທຳແຕ່ກຳທີ່ດີງາມ
ໃນສາດສະໜາພຣະຊິນນະເຈົ້າຈົນຕະຫຼອດຊີວິດ

[໓໔໑] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໓໔໒] ດ້ວຍກຳຄືການໃຊ້ໄຟລົນຢູ່ພື້ນສາລາພັກຜ່ອນ
ຂ້າພະເຈົ້າຈຶ່ງຖືກທຸກຂະເວທະນາບຽດບຽນ
ມີກໄໝ້ໃນນະຣົກນັບພັນປີ

[໓໔໓] ດ້ວຍວິບາກກຳທີ່ຍັງເຫຼືອຢູ່ນັ້ນ
ຂ້າພະເຈົ້າເກີດເປັນມະນຸດ
ຈຶ່ງມີຮອຍຕຳໜິຕິດຕົວມາຕາມລຳດັບຕະຫຼອດ ໕໐໐ ຊາດ

[໓໔໔] ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງເຕັມໄປດ້ວຍໂຣກຂີ້ທູດ
ສະເຫວີຍມະຫັນຕະທຸກຕະຫຼອດ ໕໐໐ ຊາດຄືກັນ

[໓໔໕] ໃນພັດທະກັບນີ້ ຂ້າພະເຈົ້າມີຈິດເຫຼື້ອມໃສ
ຈຶ່ງໄດ້ນິມົນພຣະອຸປະຣິດຖະຜູ້ມີຍົດ
ໃຫ້ສັນບິນທະບາດຈົນອິ່ມໜຳ

[໓໔໖] ດ້ວຍຜົນກຳອັນວິເສດນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໓໔໗] ເມື່ອເຖິງພົບສຸດທ້າຍ ຂ້າພະເຈົ້າໄດ້ເກີດໃນຕະກູນກະສັດ
ພຸງບພ້ອມໄປດ້ວຍມະຫາສົມບັດ ເມື່ອພຣະຊະນົກສະຫວັນນະຄົດໄປ

[໓໔໘] ຂ້າພະເຈົ້າຖືກໂຣກຊີ້ທູດລົບກວນ
ໃນເວລາກາງຄືນ ກໍບໍ່ໄດ້ຮັບຄວາມສຸກໃນການນອນ
ຍ້ອນຄວາມສຸກໃນຣັດສົມບັດກາຍເປັນໂມຄະໄປ
ດັ່ງນັ້ນ ຂ້າພະເຈົ້າຈຶ່ງໄດ້ຊື່ວ່າໂມຄະຣາດ

[໓໔໙] ຂ້າພະເຈົ້າເຫັນໂທດຂອງຮ່າງກາຍ
ຈຶ່ງບວດເປັນບັນພະຊິດ ມອບຕົວເປັນສິດ
ຂອງພາມຜູ້ເລີດຊື່ພາວະຣີ

[໓໕໐] ຂ້າພະເຈົ້າເຂົ້າໄປເຝົ້າພຣະຜູ້ຊົງເປັນຜູ້ນຳແຫ່ງນໍຣະຊົນ
ພ້ອມດ້ວຍບໍລິວານຈຳນວນຫຼາຍ
ໄດ້ທູນຖາມບັນຫາທີ່ລະອຽດເລິກເຊິ່ງ
ກັບພຣະອົງຜູ້ມີວາທະປະເສີດ ຜູ້ມີວາທະເປັນປະໂຫຍດວ່າ

[໓໕໑] ໂລກນີ້ ໂລກໜ້າ ພົມມະໂລກ ແລະເທວະໂລກ
ຂ້າພຣະອົງບໍ່ຮູ້ເຖິງຄວາມເຫັນຂອງພຣະອົງ
ພຣະນາມວ່າໂຄດົມ ຜູ້ມີພຣະຍົດ

[໓໕໔] ເມື່ອເປັນເຊັ່ນນີ້ ຈຶ່ງມີບັນຫາມາເຖິງພຣະອົງ
ຜູ້ຊົງເຫັນລ່ວງສາມັນຊົນວ່າ
ຂ້າພຣະອົງພິຈາລະນາເຫັນໂລກແນວໃດ
ມັດຈຸຣາດຈຶ່ງຈະເບິ່ງບໍ່ເຫັນ

[໓໕໓]　ໂມຄະຣາດ ທ່ານຈົ່ງເປັນຜູ້ມີສະຕິທຸກເມື່ອ
ພິຈາລະນາເຫັນໂລກໂດຍຄວາມເປັນຂອງວ່າງເປົ່າ
ຖອນຄວາມເຫັນວ່າເປັນອັດຕາສາ
ເມື່ອເປັນເຊັ່ນນີ້ ຈະເພິ່ງຂ້າມພົ້ນມັດຈຸຣາດໄດ້

[໓໕໔]　ທ່ານເມື່ອພິຈາລະນາເຫັນໂລກດ້ວຍອຸບາຍແນວນີ້
ມັດຈຸຣາດຈຶ່ງຈະເບິ່ງບໍ່ເຫັນ
ພຣະພຸດທະເຈົ້າ ຜູ້ຊົງບຳລຸງໂຣກໄດ້ທຸກຊະນິດ
ໄດ້ຕັດກັບຂ້າພະເຈົ້າດັ່ງວ່າມານີ້

[໓໕໕]　ພ້ອມກັບເວລາຈົບຄາຖາ ຂ້າພະເຈົ້າປາສະຈາກຜົມແລະໜວດ
ນຸ່ງຫົ່ມຜ້າກາສາວະໄດ້ເປັນພິກຂຸແລະເປັນພຣະອະຣະຫັນ

[໓໕໖]　ຂ້າພະເຈົ້າຖືກໂຣກບຽດບຽນ ຖືກເຂົາເວົ້າບີບຄັ້ນວ່າ
ວິຫານຢ່າໄດ້ເສຍຫາຍເລີຍ ຈຶ່ງບໍ່ຢູ່ໃນວິຫານຂອງສົງ

[໓໕໗]　ຂ້າພະເຈົ້າເກັບຜ້າມາຈາກກອງຂີ້ເຫຍື້ອ ປ່າຊ້າ ແລະທາງລົດທາງກວຽນ
ແລ້ວເຮັດຜ້າສັງຄາຕິຈາກຜ້ານັ້ນ ໃຊ້ສອຍຈີວອນທີ່ເສົ້າໝອງ

[໓໕໘]　ພຣະຜູ້ຊົງເປັນຜູ້ນຳວິເສດ ເປັນນາຍແພດໃຫຍ່
ຊົງພໍພຣະທະໄທໃນຄຸນຂໍ້ນັ້ນຂອງຂ້າພະເຈົ້າ
ຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງແຫ່ງພິກຂຸ
ຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍທີ່ໃຊ້ສອຍຈີວອນເສົ້າໝອງ

[໓໕໙]　ຂ້າພະເຈົ້າສິ້ນບຸນແລະບາບ ຫາຍຈາກໂຣກທຸກຊະນິດ
ບໍ່ມີອາສະວະ ດັບສະນິດ
ເໝືອນແປວໄຟທີ່ໝົດເຊື້ອດັບໄປ

[໓໖໐]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໖໑]　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໖໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂມຄະຣາດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂມຄະຣາດເຖຣາປະທານທີ ໑໐ ຈົບ**

**ກັດຈາຍະນະວັກທີ ໕໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ມະຫາກັດຈາຍະນະເຖຣາປະທານ
໒. ມະຫາກັບປິນະເຖຣາປະທານ
໓. ກຸມາຣະກັດສະປະເຖຣາປະທານ
໗. ມະຫາໂກດຖິກະເຖຣາປະທານ
໙. ຣາທະເຖຣາປະທານ
໔. ວັກກະລິເຖຣາປະທານ
໔. ທັບພະມັນລະປຸດຕະເຖຣາປະທານ
໖. ພາຫິຍະເຖຣາປະທານ
໘. ອຸຣຸເວລະກັດສະປະເຖຣາປະທານ
໑໐. ໂມຄະຣາດເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໓໖໔ ຄາຖາ**

# ໕໕. ພັດທິຍະວັກ

## ໝວດວ່າດ້ວຍພຣະພັດທິຍະເປັນຕົ້ນ

### ໑. ລະກຸນຕະກະພັດທິຍະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະລະກຸນຕະກະພັດທິຍະເຖຣະ

(ພຣະລະກຸນຕະກະພັດທິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນໂລກໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໒] ໃນຄັ້ງນັ້ນ ຂ້າພະເຈົ້າເປັນບຸດເສດຖີຜູ້ມີຊັບຫຼາຍໃນນະຄອນຫົງສະວະດີ
ທ່ຽວຢ່າງຫຼິ້ນພັກຜ່ອນຢູ່ ໄດ້ໄປເຖິງສັງຄາຣາມ

[໓] ໃນຄັ້ງນັ້ນ ພຣະຜູ້ຊົງເປັນຜູ້ນຳ ຜູ້ສ່ອງໂລກໃຫ້ສະຫວ່າງສະໄຫວພຣະອົງນັ້ນ
ຊົງສະແດງທຳ ໄດ້ຕັດສັນເສີນສາວົກ
ຜູ້ປະເສີດກວ່າພິກຂຸທັງຫຼາຍທີ່ມີສຽງມ່ວນ

[໔] ຂ້າພະເຈົ້າໄດ້ຟັງການສັນເສີນນັ້ນແລ້ວກໍພອຍຍິນດີ
ຈຶ່ງໄດ້ເຮັດສັກກາຣະແດ່ພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຂາບພຣະຍຸຄົນບາດຂອງພຣະສາດສະດາແລ້ວ
ປາຖະໜາຕຳແໜ່ງນັ້ນ

[໕] ໃນຄັ້ງນັ້ນ ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳວິເສດ
ໄດ້ຕັດພະຍາກອນໃນທ່າມກາງສົງວ່າ
ໃນອະນາຄົດຕະການ ທ່ານຜູ້ນີ້ຈັກໄດ້ຕຳແໜ່ງນີ້ສົມຄວາມປາຖະໜາ

[໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໗] ບຸດເສດຖີນີ້ຈັກມີນາມວ່າ ພັດທິຍະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໘] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙] ໃນກັບທີ ໙໔ ນັບຈາກກັບນີ້ໄປ
ພຣະຊິນນະເຈົ້າພຣະນາມວ່າ ຜຸດສະ ຊົງເປັນຜູ້ນຳ
ຫາຜູ້ກະທົບກະທັ່ງໄດ້ຍາກ ຍາກທີ່ຈະຂົ່ມໄດ້
ປະເສີດກວ່າສັດໂລກທັງປວງ ສະເດັດອຸບັດຂຶ້ນແລ້ວ

[໑໐] ແລະພຣະອົງຊົງພຽບພ້ອມດ້ວຍຈະຣະນະ
ຊົງເປັນຜູ້ປະເສີດ ທ່ຽງຕົງ ຊົງມີຄວາມພຽນເຜົາກິເລດ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງປົດເປື້ອງສັດຈຳນວນຫຼາຍຈາກກິເລດເຄື່ອງຈອງຈຳ

[໑໑] ຂ້າພະເຈົ້າເກີດເປັນນົກກາເວົາຂາວ
ອາໄສຢູ່ທີ່ຕົ້ນໝາກມ່ວງໃກ້ພຣະຄັນທະກຸຕິ
ອັນປະເສີດໜ້າເພີດເພີນຍິນດີ
ຂອງພຣະສຳມາສຳພຸດທະເຈົ້າພຣະນາມວ່າຜຸດສະພຣະອົງນັ້ນ

[໑໔] ໃນຄັ້ງນັ້ນ ຂ້າພະເຈົ້າເຫັນພຣະຊິນນະເຈົ້າຜູ້ປະເສີດສຸດ
ຊົງເປັນທັກຂິໄນຍະບຸກຄົນ ກຳລັງສະເດັດບິນທະບາດ
ຈຶ່ງເຮັດຈິດໃຫ້ເຫຼື້ອມໃສ ແລ້ວສົ່ງສຽງຮ້ອງຢ່າງມ່ວນ

[໑໓] ໃນຄັ້ງນັ້ນ ຂ້າພະເຈົ້າບິນໄປທີ່ສວນຫຼວງ
ຄາບໝາກມ່ວງໜ່ວຍທີ່ສຸກດີມີເປືອກເໝືອນຄຳ
ນ້ອມເຂົ້າໄປຖວາຍພຣະສຳມາສຳພຸດທະເຈົ້າ

[໑໔] ຂະນະນັ້ນ ພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳ
ປະກອບດ້ວຍພຣະມະຫາກະລຸນາ ຊົງຮູ້ວາຣະຈິດຂອງຂ້າພະເຈົ້າ
ຈຶ່ງຊົງຮັບບາດມາຈາກມືຂອງພິກຂຸຜູ້ອຸປັດຖາກ

[໑໕] ຂ້າພະເຈົ້າມີຈິດຮ່າເຣີງໄດ້ຖວາຍໝາກມ່ວງແດ່ພຣະມະຫາມຸນີ
ເມື່ອໃສ່ບາດແລ້ວກໍປະນົມປີກ

[໑໖] ສິ່ງສຽງຮ້ອງດ້ວຍສຽງມ່ວນໜ້າຍິນດີ ໜ້າຟັງ
ເພື່ອບູຊາພຣະພຸດທະເຈົ້າ ແລ້ວກັບໄປຫຼັບນອນ

[໑໗] ໃນຄັ້ງນັ້ນ ແຫຼວຜູ້ມີໃຈຫຍາບຊ້າ
ໄດ້ເວີ່ນລົງມາຫຍຸມເອົາຂ້າພະເຈົ້າຜູ້ມີຈິດເບີກບານ
ມີອັດທະຍາໄສນ້ອມໄປສູ່ຄວາມຮັກຕໍ່ພຣະພຸດທະເຈົ້າໄປຂ້າ

[໑໘] ຂ້າພະເຈົ້າຈຸຕິຈາກອັດຕະພາບນັ້ນແລ້ວ
ໄປສະເຫວີຍສຸກຫຼວງຫຼາຍຢູ່ໃນສະຫວັນຊັ້ນດຸສິດ
ແລ້ວມາສູ່ກຳເນີດມະນຸດຍ້ອນອານຸພາບແຫ່ງກຳນັ້ນ

[໑໙] ໃນພັດທະກັບນີ້ ພຣະພຸດທະເຈົ້າພຣະນາມວ່າກັດສະປະ ຕາມພຣະໂຄດ
ຜູ້ເປັນເຜົ່າພັນຂອງພາມ ມີພຣະຍົດຍິ່ງໃຫຍ່
ປະເສີດກວ່ານັກປາດທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໒໐] ພຣະອົງນັ້ນພ້ອມສາວົກຊົງປະກາດສາດສະໜາໃຫ້ຮຸ່ງເຮືອງ
ຂົ່ມເດຍຣະຖີຜູ້ຫຼອກລວງແລ້ວ ຊົງແນະນຳເວໄນຍະສັດ
ປະຣິນິບພານແລ້ວ

[໒໑] ເມື່ອພຣະອົງຊົງເປັນຜູ້ເລີດໃນໂລກ ສະເດັດດັບຂັນທະປະຣິນິບພານແລ້ວ
ປະຊຸມຊົນຈຳນວນຫຼາຍທີ່ເຫຼື້ອມໃສ
ສ້າງພຣະສະຖູບເພື່ອຈະບູຊາພຣະພຸດທະເຈົ້າຜູ້ສາດສະດາ

[໒໒] ພວກເຂົາປຶກສາກັນແນວນີ້ວ່າ
ເຮົາທັງຫຼາຍຈັກຊ່ອຍກັນສ້າງພຣະສະຖູບຂອງພຣະສາດສະດາ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ໃຫ້ສູງເຖິງ ໗ ໂຍດ
ປະດັບດ້ວຍຣັດຕະນະ ໗ ປະການ

[໒໓] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຈອມທັບຂອງພຣະເຈົ້າແຜ່ນດິນ
ແຄວັ້ນກາສີພຣະນາມວ່າ ກີກີ
ໄດ້ເວົ້າເຖິງຂະໜາດເຈດີຂອງພຣະພຸດທະເຈົ້າ
ຜູ້ຊົງພຣະຄຸນຫາປະມານບໍ່ໄດ້

[໔໔] ໃນຄັ້ງນັ້ນ ຊົນເຫຼົ່ານັ້ນໄດ້ຊ່ອຍກັນສ້າງເຈດີຂອງພຣະສາດສະດາ
ຜູ້ຊົງເປັນນັກປາດກວ່ານໍຣະຊົນ ສູງພຽງໂຍດດຽວ
ປະດັບດ້ວຍຣັດຕະນະນານາຊະນິດຕາມຄຳແນະນຳຂອງຂ້າພະເຈົ້າ

[໔໕] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໖] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນເສດຖີ
ທີ່ມັ່ງຄັ່ງ ສົມບູນ ມີຊັບຫຼາຍໃນນະຄອນສາວັດຖີ

[໔໗] ຂ້າພະເຈົ້າໄດ້ເຫັນພຣະສຸຄົດເຈົ້າໃນເວລາສະເດັດເຂົ້ານະຄອນ
ເປັນຜູ້ມີຄວາມອັດສະຈັນໃຈ ບວດແລ້ວບໍ່ດົນກໍໄດ້ບັນລຸອະຣະຫັນຕະຜົນ

[໔໘] ດ້ວຍກຳຄືການລຸດລົດຂະໜາດຂອງພຣະເຈດີທີ່ຂ້າພະເຈົ້າໄດ້ເຮັດໄວ້ແລ້ວ
ຂ້າພະເຈົ້າຈຶ່ງມີຮ່າງກາຍຕ່ຳເຕ້ຍ ໜ້າຫຍໍ້ຫຍັນ

[໔໙] ຂ້າພະເຈົ້າບູຊາພຣະພຸດທະເຈົ້າຜູ້ເປັນລືສີຜູ້ປະເສີດ ດ້ວຍສຽງທີ່ມ່ວນ
ຈຶ່ງໄດ້ເຖິງຄວາມເປັນຜູ້ເລີດກວ່າພິກຂຸທັງຫຼາຍທີ່ມີສຽງມ່ວນ

[໕໐] ດ້ວຍການຖວາຍໝາກໄມ້ແດ່ພຣະພຸດທະເຈົ້າ
ແລະດ້ວຍການຣະລຶກເຖິງພຣະພຸດທະຄຸນ
ຂ້າພະເຈົ້າຈຶ່ງສົມບູນດ້ວຍສາມັນຍະຜົນຢູ່ຢ່າງຜູ້ບໍ່ມີອາສະວະ

[໕໑] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະລະກຸນຕະກະພັດທິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ລະກຸນຕະກະພັດທິຍະເຖຣາປະທານທີ ໑ ຈົບ**

## ໘. ກັງຂາເຣວະຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກັງຂາເຣວະຕະເຖຣະ

(ພຣະກັງຂາເຣວະຕະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໕] ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ມີພຣະຫະນຸ(ຄາງ)ເໝືອນຄາງຣາດຊະສີ
ພຣະດຳຣັດເໝືອນສຽງພົມ
ພຣະດຳຣັດທີ່ເປັ່ງອອກເໝືອນສຽງຫົງແລະສຽງມະໂຫຣະທຶກ
ສະເດັດດຳເນີນເໝືອນການກ້າວຂອງພະຍາກຸນຊອນ
ມີພຣະຣັດສະໝີຄືດັ່ງຣັດສະໝີຂອງດວງຈັນແລະດວງອາທິດເປັນຕົ້ນ

[໑໖] ຊົງພຣະປັນຍາຫຼາຍ ມີຄວາມພຽນຫຼາຍ
ມີຄວາມເພັ່ງພິນິດຫຼາຍ ຊົງຮູ້ຄະຕິຂອງເຫຼົ່າສັດຈຳນວນຫຼາຍ
ປະກອບດ້ວຍພຣະມະຫາກະລຸນາ
ເປັນບ່ອນເພິ່ງຂອງສັບພະສັດ ຊົງຂະຈັດຄວາມມືດໃຫຍ່

[໑໗] ບາງເວລາ ພຣະສຳມາສຳພຸດທະເຈົ້າຜູ້ເລີດໃນໂລກທັງ ໓ ເປັນມຸນີ
ຊົງຮູ້ອາຣະຈິດຂອງສັດທັງຫຼາຍພຣະອົງນັ້ນ
ເມື່ອຈະຊົງແນະນຳເວໄນຍະສັດໝູ່ໃຫຍ່ຈຶ່ງຊົງສະແດງທຳ

[໑໘] ພຣະຊິນນະເຈົ້າຕັດສັນເສີນພິກຂຸຜູ້ມີປົກກະຕິເຂົ້າຊານ
ຍິນດີໃນຊານ ມີຄວາມພຽນ ສະຫງົບຣະງັບ
ມີຈິດບໍ່ຂຸ່ນມົວ ຊົງເຮັດໝູ່ຊົນຜູ້ເປັນບໍລິສັດໃຫ້ຍິນດີ

[໓໙] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມຊາວນະຄອນຫົງສາວະດີ ຈົບໄຕຣເພດ
ໄດ້ຟັງພຣະທຳແລ້ວກໍພອຍຍິນດີ
ຈຶ່ງປາຖະໜາຕຳແໜ່ງນັ້ນ

[໔໐] ໃນຄັ້ງນັ້ນ ພຣະຊິນນະເຈົ້າຊົງເປັນຜູ້ນຳວິເສດ
ໄດ້ຕັດພະຍາກອນໃນທ່າມກາງສົງວ່າ
ຈົ່ງຍິນດີເທີ້ນ ພາມ ທ່ານຈັກໄດ້ຕຳແໜ່ງນັ້ນສົມຄວາມປາຖະໜາ

[໔໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໒] ເຂົາຈັກມີນາມວ່າເຣວະຕະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໔໓] ດ້ວຍກຳທີ່ຂ້າພະເຈົ້າເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໔໔] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນກະສັດ
ທີ່ມັ່ງຄັ່ງສົມບູນ ມີຊັບຫຼາຍ ໃນນະຄອນໂກລິຍະ

[໔໕] ໃນເວລາທີ່ພຣະພຸດທະເຈົ້າຊົງສະແດງທຳໃນນະຄອນກະບິນລະພັດ
ຂ້າພະເຈົ້າເຫຼື້ອມໃສໃນພຣະສຸຄົດເຈົ້າ ຈຶ່ງອອກບວດເປັນບັນພະຊິດ

[໔໖] ຄວາມສົງໄສຂອງຂ້າພະເຈົ້າໃນສິ່ງທີ່ຄວນແລະບໍ່ຄວນນັ້ນ ໆ ມີຫຼາຍ
ພຣະພຸດທະເຈົ້າໄດ້ຊົງສະແດງທຳທີ່ປະເສີດ
ກຳຈັດຂໍ້ສົງໄສທັງປວງນັ້ນ

[໔໗] ຈາກນັ້ນ ຂ້າພະເຈົ້າກໍຂ້າມພົ້ນສົງສານໄດ້
ເປັນຜູ້ມີຄວາມຍິນດີຢູ່ໃນສຸກທີ່ເກີດແຕ່ຊານທຸກເມື່ອ
ໃນຄັ້ງນັ້ນ ພຣະພຸດທະເຈົ້າທອດພຣະເນດເຫັນຂ້າພະເຈົ້າ
ຈຶ່ງຕັດພຣະດຳຣັດນີ້ວ່າ

[໔໗]　ຄວາມສົງໄສບາງຢ່າງໃນຄວາມຮູ້ຂອງຕົນ
ຫຼືໃນຄວາມຮູ້ຂອງຜູ້ອື່ນທັງໃນໂລກນີ້ແລະໂລກໜ້າ
ຄວາມສົງໄສທັງປວງນັ້ນ ບຸກຄົນຜູ້ມີປົກກະຕິເຂົ້າຊານ
ມີຄວາມພຽນປະພຶດພົມມະຈັນຍ່ອມລະໄດ້

[໔໘]　ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ (ຈາກກິເລດ)
ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກແລ່ງ
ຂ້າພະເຈົ້າເຜົາກິເລດທັງຫຼາຍໄດ້ແລ້ວ

[໕໐]　ລຳດັບນັ້ນ ພຣະມຸນີຜູ້ມີພຣະປັນຊາຫຼາຍ
ຊົງເຖິງບ່ອນສຸດໂລກ ຊົງເຫັນຂ້າພະເຈົ້າວ່າຍິນດີໃນຊານເນືອງນິດ
ຈຶ່ງຊົງຕັ້ງຂ້າພະເຈົ້າວ່າເປັນຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍທີ່ຍິນດີໃນຊານ

[໕໑]　ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໒]　ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໓]　ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກັງຂາເຣວະຕະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກັງຂາເຣວະຕະເຖຣາປະທານທີ ໘ ຈົບ**

# ໓. ສີວະລີເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະສີວະລີເຖຣະ

(ພຣະສີວະລີເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໔] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໕໕] ສຳລັບພຣະອົງ ສິນໃຜ ໆ ກໍນັບບໍ່ໄດ້
ສະມາທິປຽບໄດ້ດັ່ງເພັດ
ຍານທີ່ປະເສີດໃຜ ໆ ກໍນັບບໍ່ໄດ້
ແລະວິມຸດຕິກໍຫາອັນໃດປຽບບໍ່ໄດ້

[໕໖] ພຣະຜູ້ຊົງເປັນຜູ້ນຳ ຊົງສະແດງທຳ
ໃນສະມາຄົມມະນຸດ ເທວະດາ ນາກ ແລະພົມ
ເຊິ່ງເນືອງແໜ້ນໄປດ້ວຍສະມະນະແລະພາມ

[໕໗] ພຣະພຸດທະອົງຜູ້ແກ່ກ້າໃນທ່າມກາງບໍລິສັດ
ຊົງຕັ້ງສາວົກຂອງພຣະອົງ ຜູ້ມີລາບຫຼາຍ ມີບຸນ
ມີຄວາມຮຸ່ງເຮືອງໄວ້ໃນຕຳແໜ່ງເອຕະທັກຄະ

[໕໘] ໃນຄັ້ງນັ້ນ ຂ້າພະເຈົ້າເປັນກະສັດໃນນະຄອນຫົງສະວະດີ
ໄດ້ຟັງພຣະຊິນນະເຈົ້າຕັດເຖິງຄຸນຫຼວງຫຼາຍຂອງສາວົກນັ້ນ

[໕໙] ຂ້າພະເຈົ້າຈຶ່ງທູນນິມົນພຣະຊິນນະສີຫ້ອມລ້ອມດ້ວຍສາວົກ
ໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນ
ເມື່ອຖວາຍມະຫາທານແລ້ວ ກໍໄດ້ປາຖະໜາຕຳແໜ່ງນັ້ນ

[໖໐] ໃນຄັ້ງນັ້ນ ພຣະທີຣະເຈົ້າຜູ້ອົງອາດກວ່າບຸຣຸດ
ທອດພຣະເນດເຫັນຂ້າພະເຈົ້າຜູ້ໝອບຢູ່ແທບຍຸຄົນບາດ
ຈຶ່ງໄດ້ຕັດພຣະດຳຣັດນີ້ດ້ວຍພຣະສຸຣະສຽງຢ່າງກຶກກ້ອງ

[໖໑] ລຳດັບນັ້ນ ຜູ້ປະສົງຈະສະດັບພຣະດຳຣັດຂອງພຣະຊິນນະເຈົ້າ
ຄື ມະຫາຊົນ ທວຍເທບ ຄົນທັບ ພົມຜູ້ມີລິດຫຼາຍ

[໙໔] ອັນໜຶ່ງ ສະມະນະແລະພາມຕ່າງປະນົມມືນະມັດສະການ (ຂາບທູນວ່າ)
ຂ້າແຕ່ພຣະອົງຜູ້ເປັນບຸຣຸດອາຊາໄນ
ຂ້າພຣະອົງທັງຫຼາຍຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບຸຣຸດສູງສຸດ
ຂ້າພຣະອົງທັງຫຼາຍຂໍນອບນ້ອມພຣະອົງ

[໙໓] ພຣະມະຫາກະສັດໄດ້ຖວາຍທານເກີນ ໗ ວັນ
ຂ້າແຕ່ພຣະມະຫາມຸນີ ຂ້າພຣະອົງທັງຫຼາຍ
ປະສົງຈະຟັງຜົນຂອງມະຫາທານນັ້ນ
ຂໍພຣະອົງໂຜດພະຍາກອນດ້ວຍເທີ້ນ

[໙໔] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ
ທ່ານທັງຫຼາຍຈົ່ງຟັງພາສິດຂອງເຮົາ
ທັກຂິນາທີ່ຕັ້ງໄວ້ແລ້ວໃນພຣະພຸດທະເຈົ້າ
ຜູ້ຊົງຄຸນຫາປະມານບໍ່ໄດ້ພ້ອມທັງພຣະສົງ

[໙໕] ໃຜຈະເປັນຜູ້ກ່າວເຖິງທັກຂິນາທານໄດ້
ຍ້ອນທັກຂິນານັ້ນມີຜົນຫາປະມານບໍ່ໄດ້
ອັນໜຶ່ງ ກະສັດຜູ້ມີໂພຄະຫຼາຍນີ້ປາຖະໜາຕຳແໜ່ງອັນສູງສຸດວ່າ

[໙໙] ໃນບັນດາຄົນທີ່ມີລາບໄພບູນ
ເຮົາກໍເພິ່ງເປັນຜູ້ມີລາບເໝືອນພິກຂຸຊື່ສຸທັດສະນະ
ກະສັດອົງນີ້ຈັກຊົງໄດ້ຕຳແໜ່ງນັ້ນໃນອະນາຄົດຕະການ

[໙໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙໘] ກະສັດອົງນີ້ຈັກມີນາມວ່າສີວະລີ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໙໙] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ

ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໐] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ພຣະຜູ້ຊົງເປັນຜູ້ນຳສັດໂລກພຣະນາມວ່າວິປັດສີ ຜູ້ມີພຣະເນດງົດງາມ
ຊົງເຫັນແຈ້ງທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໗໑] ໃນຄັ້ງນັ້ນ ຂ້າພະເຈົ້າເປັນຄົນໂຜດປານ
ເປັນຄົນທີ່ຂະຫຍັນແລະຂວນຂວາຍໃນວຽກງານ
ແຫ່ງຕະກູນໜຶ່ງຢູ່ໃນນະຄອນພັນທຸມະດີ

[໗໒] ໃນຄັ້ງນັ້ນ ຊຸມຊົນໝູ່ໜຶ່ງສັ່ງໃຫ້ນາຍຊ່າງສ້າງບໍລິເວນ
ເຊິ່ງຜາກົດຊື່ວ່າມະຫັນ ຖວາຍພຣະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ພຣະນາມວ່າ ວິປັດສີ

[໗໓] ເມື່ອການສ້າງບໍລິເວນສຳເລັດແລ້ວ
ພວກເຂົາໄດ້ຖວາຍມະຫາທານເຊິ່ງປະກອບດ້ວຍຂອງຫຍ້ຳ
ມົວແຕ່ສະແຫວງຫານົມສົ້ມໃໝ່
ແລະນ້ຳເຜິ້ງໃໝ່ຢູ່ຈຶ່ງບໍ່ໄດ້ຖວາຍ

[໗໔] ໃນຂະນະນັ້ນ ຂ້າພະເຈົ້າກຳລັງຖືນົມສົ້ມ
ແລະນ້ຳເຜິ້ງໃໝ່ຍ່າງໄປສູ່ເຮືອນຂອງນາຍຈ້າງ
ຊົນທັງຫຼາຍທີ່ສະແຫວງຫານົມສົ້ມແລະນ້ຳເຜິ້ງໃໝ່ມາພົບຂ້າພະເຈົ້າ

[໗໕] ໃຫ້ຣາຄາເຖິງ ໑,໐໐໐ ກະຫາປະນະ ກໍຍັງບໍ່ໄດ້ຂອງ ໒ ຢ່າງນັ້ນ
ລຳດັບນັ້ນ ຂ້າພະເຈົ້າຄິດວ່າ
ຂອງຢ່າງນີ້ຈັກບໍ່ແມ່ນເປັນຂອງເລັກນ້ອຍເລີຍ

[໗໖] ຊົນເຫຼົ່ານີ້ທັງໝົດສັກກາຣະພຣະຕະຖາຄົດເຈົ້າ ສັນໃດ
ແມ່ນເຮົາກໍຈັກເຮັດສັກກາຣະພຣະຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມທັງພຣະສົງ ສັນນັ້ນ

[໗໗] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ນຳນົມສົ້ມແລະນ້ຳເຜິ້ງໄປ ປະສົມເຂົ້ານຳກັນ
ແລ້ວຖວາຍພຣະໂລກກະນາດພ້ອມທັງພຣະສົງ

[໗໙] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໘] ຂ້າພະເຈົ້າໄດ້ເປັນພຣະເຈົ້າແຜ່ນດິນ
ຜູ້ມີຍົດຍິ່ງໃຫຍ່ໃນນະຄອນພາຣານະສີອີກ
ໃນຄັ້ງນັ້ນ ຂ້າພະເຈົ້າແຄ້ນໃຈສັດຕູຈຶ່ງສັ່ງທະຫານ
ໃຫ້ປິດປະຕູເມືອງ

[໙໐] ໃນຄັ້ງນັ້ນ ເຫຼົ່າພຣະຣາຊາຜູ້ມີເດດ
ທີ່ຖືກລ້ອມຮັກສາໄວ້ໄດ້ພຽງວັນດຽວ
ຍ້ອນວິບາກແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງຕ້ອງຕົກນະຮົກທີ່ດຸຮ້າຍ

[໙໑] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນນະຄອນໂກລິຍະ
ພຣະຊົນນີຂອງຂ້າພະເຈົ້າພຣະນາມວ່າສຸບປະວາສາ
ພຣະຊະນົກຂອງຂ້າພະເຈົ້າພຣະນາມວ່າ ມະຫາລິລິດສະຫວີ

[໙໒] ຂ້າພະເຈົ້າເກີດໃນຂັດຕິຍະຕະກູນກໍຍ້ອນບຸນກຳ
ແຕ່ຍ້ອນອານຸພາບແຫ່ງການປິດປະຕູເມືອງ
ຂ້າພະເຈົ້າຈຶ່ງຕ້ອງປະສົບທຸກ
ຢູ່ໃນພຣະອຸທອນຂອງພຣະມານດາເຖິງ ໗ ປີ

[໙໓] ຂ້າພະເຈົ້າຫຼົງຢູ່ອົງກຳເນີດອີກ ໗ ວັນ ປະສົບທຸກໜັກ
ພຣະມານດາຂອງຂ້າພະເຈົ້າຕ້ອງປະສົບທຸກແສນສາຫັດເຊັ່ນນີ້
ກໍຍ້ອນມີຄວາມພໍໃຈໃຫ້ປິດປະຕູເມືອງ

[໙໔] ຂ້າພະເຈົ້າຜູ້ທີ່ພຣະພຸດທະເຈົ້າຊົງອະນຸເຄາະແລ້ວ
ຈຶ່ງເກີດອອກຈາກພຣະອຸທອນຂອງພຣະມານດາໂດຍຄວາມສະຫວັດດີ
ຂ້າພະເຈົ້າໄດ້ອອກບວດເປັນບັນພະຊິດໃນວັນທີເກີດນັ້ນເອງ

[໙໕] ພຣະສາຣີບຸດເຖຣະຜູ້ມີປັນຍາຫຼາຍ
ເປັນພຣະອຸປັດຊາຂອງຂ້າພະເຈົ້າ

ພຣະມະຫາໂມກຄັນລານະເຖຣະຜູ້ມີລິດຫຼາຍ
ເມື່ອແຖຜົມໃຫ້ໄດ້ພ່ຳສອນຂ້າພະເຈົ້າ

[໗໖] ໃນຂະນະກຳລັງແຖຜົມ ຂ້າພະເຈົ້າກໍໄດ້ບັນລຸອະຣະຫັນຕະຜົນ
ທວຍເທບ ໝູ່ນາກ ແລະມະນຸດທັງຫຼາຍ
ຕ່າງກໍນ້ອມນຳປັດໄຈເຂົ້າມາຖວາຍຂ້າພະເຈົ້າ

[໗໗] ຂ້າພະເຈົ້າເປັນຜູ້ມີໃຈຍິນດີປີດາ
ບູຊາພຣະໂລກກະນາດພຣະນາມວ່າ ປະທຸມຸດຕະຣະ
ແລະພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຊົງເປັນຜູ້ນຳວິເສດດ້ວຍປັດໄຈທັງຫຼາຍໂດຍພິເສດ

[໗໘] ດ້ວຍຜົນອັນວິເສດແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງໄດ້ລາບທີ່ອຸດົມໄພບູນໃນທີ່ທຸກແຫ່ງ
ຄືໃນປ່າ ໃນບ້ານ ໃນນ້ຳ ແລະເທິງບົກ

[໗໙] ໃນເວລາໃດ ພຣະພຸດທະເຈົ້າຊົງເປັນຜູ້ນຳຊັ້ນເລີດໃນໂລກ
ເປັນຜູ້ນຳວິເສດພ້ອມດ້ວຍພິກຂຸ ໖໐,໐໐໐ ອົງ
ສະເດັດໄປຢ້ຽມຢາມພຣະເຣວະຕະ

[໙໐] ໃນເວລານັ້ນ ຂ້າພະເຈົ້າບຳຣຸງພຣະພຸດທະເຈົ້າ
ຜູ້ຊົງມີປີຊາຫຼາຍ ຊົງມີຄວາມພຽນຫຼາຍ
ຊົງເປັນຜູ້ນຳສັດໂລກ ພ້ອມດ້ວຍພຣະສົງດ້ວຍປັດໄຈ ໔
ທີ່ເຫຼົ່າເທວະດານ້ອມນຳມາຖວາຍຂ້າພະເຈົ້າ

[໙໑] ພຣະອົງໄດ້ສະເດັດຢ້ຽມຢາມພຣະເຣວະຕະແລ້ວ
ພາຍຫຼັງສະເດັດກັບໄປສູ່ພຣະເຊຕະວັນມະຫາວິຫານ
ຈຶ່ງຊົງແຕ່ງຕັ້ງຂ້າພະເຈົ້າໄວ້ໃນເອຕະທັກຄະ

[໙໔] ພຣະສາດສະດາຜູ້ຊົງພ່ຳເພັງປະໂຫຍດເກື້ອກູນແກ່ສັບພະສັດ
ໄດ້ຕັດສັນເສີນຂ້າພະເຈົ້າໃນທ່າມກາງບໍລິສັດວ່າ
ພິກຂຸທັງຫຼາຍ ບັນດາສາວົກຂອງເຮົາ
ພິກຂຸຊື່ວ່າສີວະລີນີ້ເລີດກວ່າພິກຂຸທັງຫຼາຍຜູ້ທີ່ມີລາບຫຼາຍ

[໙໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ

ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໔] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສີວະລີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສີວະລີເຖຣາປະທານທີ ໓ ຈົບ**

## ໔. ວັງຄີສະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວັງຄີສະເຖຣະ

(ພຣະວັງຄີສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໖] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
[໙໗] ສາດສະໜາຂອງພຣະອົງງົດງາມໄປດ້ວຍພຣະອະຣະຫັນທັງຫຼາຍ
ເໝືອນຄື້ນໃນສາຄອນ ແລະເໝືອນດວງດາວໃນທ້ອງຟ້າ

[໙໘] ພຣະຊິນນະເຈົ້າຜູ້ສູງສຸດ ອັນມະນຸດພ້ອມທັງທວຍເທບ ອະສູນ
ແລະນາກຫ້ອມລ້ອມໃນທ່າມກາງໝູ່ຊົນ
ເຊິ່ງເນືອງແໜ້ນໄປດ້ວຍສະມະນະແລະພາມ

[໙໙] ພຣະຊິນນະເຈົ້າພຣະອົງນັ້ນຊົງເຖິງບ່ອນສຸດໂລກ
ຊົງເຮັດສັດໂລກທັງຫຼາຍໃຫ້ຍິນດີດ້ວຍພຣະຣັດສະໝີ
ຊົງເຮັດດອກບົວຄືເວໄນຍະສັດໃຫ້ເບັ່ງບານດ້ວຍພຣະດຳຣັດ

[໑໐໐] ຊົງສົມບູນດ້ວຍເວສາຣັດຊະທຳ ໔ ປະການ
ເປັນບຸຣຸດຜູ້ສູງສຸດ ລະຄວາມຢ້ານແລະຄວາມກຳໜັດໄດ້ແລ້ວ
ຊົງບັນລຸທຳທີ່ກະເສມ ມີຄວາມແກ່ກ້າ

[໑໐໑] ພຣະຜູ້ຊົງເປັນຜູ້ເລີດໃນໂລກ
ຊົງປະຕິຍານຖານະທີ່ປະເສີດ ລ້ຳເລີດ
ແລະພຸດທະພູມທັງໝົດ ບໍ່ມີໃຜຈະທັກທ້ວງໄດ້ໃນຖານະໃດ ໆ

[໑໐໒] ເມື່ອພຣະພຸດທະເຈົ້າຜູ້ຄົງທີ່ພຣະອົງນັ້ນ
ບັນລືສີຫະນາດທີ່ເປັນຕາຢ້ານຢູ່
ຍ່ອມບໍ່ມີເທວະດາ ມະນຸດ ຫຼື ພົມບັນລືຕອບໄດ້

[໑໐໓] ພຣະພຸດທະເຈົ້າຜູ້ແກ່ກ້າ
ຊົງສະແດງທຳທີ່ປະເສີດ ຊົງຊ່ອຍມະນຸດແລະເທວະດາ
ໃຫ້ຂ້າມ (ສັງສາຣະວັດ) ຊົງປະກາດທຳມະຈັກໃນທ່າມກາງບໍລິສັດ

[໑໐໔] ຕັດສັນເສີນຄຸນຫຼວງຫຼາຍ
ແລ້ວຕັ້ງພຣະສາວິກາຜູ້ເລີດກວ່າພິກຂຸຜູ້ມີປະຕິພານ
ທີ່ຊາວໂລກຍ້ອງຍໍວ່າເປັນຄົນດີນັ້ນໄວ້ໃນຕຳແໜ່ງເອຕະທັກຄະ

[໑໐໕] ໃນຄັ້ງນັ້ນ ຂ້າພະເຈົ້າເປັນພາມຊາວນະຄອນຫົງສະວະດີ
ປະຊາຊົນສົມມຸດວ່າເປັນຜູ້ປະເສີດ
ຮູ້ແຈ້ງພຣະເວດທຸກຄຳພີ ມີນາມວ່າ ວັງຄີສະ
ມີວາທະທີ່ເປັນປະໂຫຍດ

[໑໐໖] ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະມະຫາວີຣະພຣະອົງນັ້ນ
ສະດັບພຣະທຳມະເທດສະໜານັ້ນແລ້ວ
ໄດ້ປິຕິຢ່າງປະເສີດ ເປັນຜູ້ຍິນດີໃນຄຸນຂອງສາວິກາ

[໑໐໗] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ທູນນິມົນພຣະສຸຄົດເຈົ້າຜູ້ເຮັດສັດໂລກໃຫ້ເພີດເພີນ
ພ້ອມທັງພຣະສົງໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນແລ້ວ
ໃຫ້ຄອງຜ້າຊຸດໃໝ່

[໑໐໘] ຂ້າພະເຈົ້າໄດ້ໝອບລົງແທບພຣະບາດດ້ວຍຂະໜ່ອມ
ໄດ້ໂອກາດຈຶ່ງຢືນປະນົມມືຢູ່ ໃນທີ່ສົມຄວນ
ເປັນຜູ້ຮ່າເຣີງ ກ່າວສະດຸດີພຣະຊິນນະເຈົ້າຜູ້ສູງສຸດວ່າ

[໑໐໙] ຂ້າແຕ່ ພຣະອົງຜູ້ມີວາທະທີ່ເປັນປະໂຫຍດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ເປັນພຣະລືສີຜູ້ປະເສີດ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ຊົງເປັນຜູ້ເລີດໃນໂລກທັງປວງ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ຂະຈັດໄພ ຂ້າພຣະອົງຂໍນອບນ້ອມພຣະອົງ

[໑໑໐] ຂ້າແຕ່ ພຣະອົງຜູ້ຊົງຍໍ່າຍີມານ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ຊົງສະແດງທິດຖິ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ຊົງປະທານສັນຕິສຸກ
ຂ້າພຣະອົງຂໍນອບນ້ອມພຣະອົງ
ຂ້າແຕ່ ພຣະອົງຜູ້ຊົງເຮັດບ່ອນເພິ່ງ ຂ້າພຣະອົງຂໍນອບນ້ອມພຣະອົງ

[໑໑໑] ພຣະອົງຊົງເປັນບ່ອນເພິ່ງຂອງຊົນທັງຫຼາຍຜູ້ບໍ່ມີບ່ອນເພິ່ງ
ຊົງປະທານຄວາມບໍ່ມີໄພແກ່ຄົນທັງຫຼາຍທີ່ຕື່ນຢ້ານ
ຊົງເປັນທີ່ໄວ້ວາງໃຈຂອງຄົນທັງຫຼາຍທີ່ມີພູມທໍາສະງົບຣະງັບ
ຊົງເປັນບ່ອນເພິ່ງຂອງຄົນທັງຫຼາຍຜູ້ສະແຫວງຫາບ່ອນເພິ່ງບ່ອນຣະລຶກ

[໑໑໒] ເຮົາໄດ້ສະດຸດີພຣະສໍາມາສໍາພຸດທະເຈົ້າ
ດ້ວຍຄໍາກ່າວສະດຸດີມີອາທິແນວນີ້ແລ້ວ
ໄດ້ກ່າວສັນເສີນພຣະຄຸນອັນຍິ່ງໃຫຍ່
ຈຶ່ງໄດ້ບັນລຸຄະຕິຂອງພິກຂຸຜູ້ເປັນນັກເວົ້າຜູ້ກ້າ

[໑໑໓] ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ຊົງມີປະຕິພານບໍ່ມີບ່ອນສິ້ນສຸດ
ໄດ້ຕັດວ່າ ຜູ້ນັ້ນໃດເປັນຜູ້ເຫຼື້ອມໃສທູນນິມົນພຣະພຸດທະເຈົ້າ
ພ້ອມທັງສາວົກໃຫ້ສະເຫວີຍ ແລະສັນຕະຫຼອດ ໗ ວັນ
[໑໑໔] ດ້ວຍມືທັງ ໔ ຂອງຕົນ ແລະໄດ້ກ່າວສະດຸດີຄຸນຂອງເຮົາ
ຜູ້ນັ້ນປາຖະໜາຕໍາແໜ່ງຂອງພິກຂຸຜູ້ເປັນນັກເວົ້າຜູ້ແກ່ກ້າ

[໑໑໕] ໃນອະນາຄົດຕະການ ເຂົາຈັກໄດ້ຕໍາແໜ່ງນີ້ສົມຄວາມປາຖະໜາ
ສະເຫວີຍທິບພະສົມບັດ ແລະມະນຸດສົມບັດມີປະມານບໍ່ໜ້ອຍ

[໑໑໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໑໗] ພານນີ້ຈັກມີນາມວ່າ ວັງຄີສະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໑໑໘] ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ເບີກບານ ມີຈິດປະກອບດ້ວຍເມດຕາ
ອຸປັດຖາກພຣະຊິນນະເຈົ້າຜູ້ຕະຖາຄົດດ້ວຍປັດໄຈທັງຫຼາຍ
ຈົນຕະຫຼອດຊີວິດໃນຄັ້ງນັ້ນ

[໑໑໙] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໔໐] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນປະຣິພາຊົກ
ເມື່ອຂ້າພະເຈົ້າເກີດເປັນເທື່ອສຸດທ້າຍ ມີອາຍຸໄດ້ ໗ ປີ

[໑໔໑] ເປັນຜູ້ຮູ້ແຈ້ງພຣະເວດທຸກຄຳພີ
ແກ່ກ້າໃນວາທະສາດ ມີສຽງມ່ວນ
ມີຄຳເວົ້າວິຈິດ ສາມາດຂົ່ມວາທະຂອງຜູ້ອື່ນໄດ້

[໑໔໔] ຍ້ອນຂ້າພະເຈົ້າເກີດທີ່ວັງຄະຊົນນະບົດ
ແລະເປັນໃຫຍ່ໃນຄຳເວົ້າ ຂ້າພະເຈົ້າຈຶ່ງໄດ້ຊື່ວ່າ ວັງຄີສະ
ຍ້ອນແນວນັ້ນ ເຖິງແມ່ນຊື່ຂອງຂ້າພະເຈົ້າຈະເປັນເລີດ
ກໍເປັນຊື່ສົມມຸດຕາມໂລກ

[໑໔໓] ໃນການທີ່ຂ້າພະເຈົ້າຮູ້ດຽງສາ ຢູ່ໃນໄວເລີ່ມເປັນໜຸ່ມ
ໄດ້ເຫັນທ່ານພຣະສາຣີບຸດໃນນະຄອນຣາດຊະຄືທີ່ຣື່ນຣົມ

**ພານະວານທີ ໔໕ ຈົບ**

[໑໘໔] ທ່ານອຸ້ມບາດສັງລວມ ສາຍຕາບໍ່ລັອກແລັກ
ເວົ້າພໍປະມານ ແລະແນມເບິ່ງພຽງຊົ່ວແອກ ທ່ຽວບິນທະບາດຢູ່

[໑໘໕] ເມື່ອເຫັນທ່ານແລ້ວກໍຍິ້ມແຍ້ມ
ໄດ້ກ່າວບົດຄາຖາທີ່ສົມຄວນອັນວິຈິດ
ເໝືອນດອກກັນນິກາທີ່ເປັນກຸ່ມ

[໑໘໖] ທ່ານບອກຂ້າພະເຈົ້າເຖິງພຣະສາດສະດາສຳມາສຳພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ
ໃນຄັ້ງນັ້ນ ພຣະສາຣີບຸດຜູ້ສະຫຼາດ ເປັນນັກປາດນັ້ນ
ໄດ້ເວົ້າກັບຂ້າພະເຈົ້າໃຫ້ຍິ່ງຂຶ້ນໄປ

[໑໘໗] ຂ້າພະເຈົ້າອັນພຣະເຖຣະຜູ້ຄົງທີ່ກ່າວຄຳເວົ້າ
ອັນປະກອບດ້ວຍວິຣາຄະທຳ ປະເສີດທີ່ເຫັນໄດ້ຍາກ
ໃຫ້ຍິນດີແລ້ວ ດ້ວຍປະຕິພານອັນວິຈິດ

[໑໘໘] ຈຶ່ງໝອບລົງແທບຕີນຂອງທ່ານດ້ວຍຂະໜ່ອມ
ແລ້ວກໍກ່າວວ່າ ຂໍໄດ້ໂຜດໃຫ້ຂ້ານ້ອຍບັນພະຊາເທີ້ນ
ລຳດັບນັ້ນ ທ່ານພຣະສາຣີບຸດ ຜູ້ມີປັນຍາຫຼາຍ
ໄດ້ນຳຂ້າພະເຈົ້າເຂົ້າເຝົ້າພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໘໙] ຂ້າພະເຈົ້າໝອບລົງແທບພຣະຍຸຄົນບາດດ້ວຍຂະໜ່ອມແລ້ວ
ນັ່ງໃນທີ່ໃກ້ພຣະສາດສະດາ
ພຣະພຸດທະເຈົ້າຜູ້ປະເສີດກວ່າບັນດິດທັງຫຼາຍ
ໄດ້ຕັດຖາມຂ້າພະເຈົ້າວ່າ
ວັງຄີສະ ສິລະປະອັນໃດ ໆ ຂອງທ່ານມີຢູ່ຈິງບໍ

[໑໙໐] (ຂ້າພະເຈົ້າຂາບທູນວ່າ ຈິງ ຂ້ານ້ອຍ)
ພຣະພຸດທະເຈົ້າຕັດວ່າ ທ່ານຮູ້ຫົວຂອງຄົນທີ່ຕາຍໄປແລ້ວວ່າ
ໄປສູ່ສຸກຄະຕິ ຫຼື ທຸກຄະຕິຈິງບໍ
ຖ້າທ່ານສາມາດຮູ້ໄດ້ດ້ວຍວິຊາພິເສດຂອງທ່ານ ຈົ່ງບອກມາ
[໑໙໑] ເມື່ອຂ້າພະເຈົ້າທູນຮັບຮອງແລ້ວ
ພຣະພຸດທະອົງກໍຊົງສະແດງກະໂຫຼກຫົວ ໙ ກະໂຫຼກ
ຂ້າພະເຈົ້າໄດ້ຂາບທູນວ່າ ເປັນຫົວຂອງຄົນທີ່ເກີດໃນນະຮົກ ແລະເທວະດາ

[໑໓໔] ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ນໍາ
ໄດ້ສະແດງກະໂຫຼກຫົວຂອງພຣະຂີນາສົບ
ຍ້ອນຫົວນັ້ນ ຂ້າພະເຈົ້າໝົດມານະ
ຈຶ່ງທູນຂໍບັນພະຊາ ຢ່າງອ່ອນນ້ອມ

[໑໓໕] ເມື່ອບັນພະຊາແລ້ວ ໄດ້ກ່າວສັນເສີນພຣະສຸຄົດເຈົ້າທຸກ ໆ ແຫ່ງ
ເມື່ອນັ້ນແລ ພິກຂຸທັງຫຼາຍພາກັນເພ່ງໂທດຂ້າພະເຈົ້າວ່າເປັນຈິນຕະກະວີ

[໑໓໖] ລໍາດັບນັ້ນ ພຣະພຸດທະເຈົ້າ ຊົງເປັນຜູ້ນໍາວິເສດ
ໄດ້ຕັດຖາມຂ້າພະເຈົ້າເພື່ອທົດລອງວ່າ
ຄາຖາເຫຼົ່ານີ້ ຍ່ອມແຈ້ງຊັດໂດຍສົມຄວນແກ່ເຫດແກ່ຄົນທັງຫຼາຍ
ຜູ້ນຶກຕອງແລ້ວບໍ່ແມ່ນບໍ?

[໑໓໕] ຂ້າແຕ່ພຣະອົງຜູ້ມີຄວາມພຽນ
ຂ້າພຣະອົງບໍ່ແມ່ນນັກກາບກອນ ແຕ່ວ່າຄາຖາທັງຫຼາຍ
ແຈ້ງຊັດໂດຍສົມຄວນແກ່ເຫດແກ່ຂ້າພຣະອົງ
ວັງຄີສະ ຖ້າເຊັ່ນນັ້ນ ທ່ານຈຶ່ງກ່າວສະດຸດີເຮົາໂດຍສົມຄວນແກ່ເຫດໃນບັດນີ້

[໑໓໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ກ່າວຄາຖາສະດຸດີພຣະທີຣະຜູ້ເປັນລືສີຜູ້ປະເສີດ
ໃນການນັ້ນ ພຣະຊິນນະເຈົ້າພຣະອົງນັ້ນຊົງພໍພຣະທະໄທດ້ວຍສົມຄວນແກ່ເຫດ
ຈຶ່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕໍາແໜ່ງອັນເລີດ

[໑໓໗] ຂ້າພະເຈົ້າມີປະຕິພານອັນວິຈິດຈຶ່ງດູໝິ່ນພິກຂຸອົງອື່ນ
ແຕ່ມີສິນເປັນທີ່ຮັກ
ເກີດຄວາມສະລົດໃຈຍ້ອນການດູໝິ່ນນັ້ນຈຶ່ງໄດ້ບັນລຸອະຣະຫັນແລ້ວ

[໑໓໘] (ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ)
ບໍ່ມີໃຜອື່ນທີ່ເລີດກວ່າພິກຂຸທັງຫຼາຍ
ທີ່ມີປະຕິພານເໝືອນກັບວັງຄີສະພິກຂຸນີ້
ພິກຂຸທັງຫຼາຍ ທ່ານທັງຫຼາຍຈຶ່ງຈໍາໄວ້ແນວນີ້

[໑໓໙] ກໍາທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ (ຈາກກິເລດ)

ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກແລ່ງ
ຂ້າພະເຈົ້າເຜົາກິເລດທັງຫຼາຍໄດ້ແລ້ວ

[໑໔໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໑] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວັງຄີສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ວັງຄີສະເຖຣາປະທານທີ ໔ ຈົບ**

## ໕. ນັນທະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນັນທະກະເຖຣະ

(ພຣະນັນທະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໔໓] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໔໔] ພຣະອົງເປັນຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ
ເປັນບຸຣຸດອາຊາໄນ ຊົງປະຕິບັດເພື່ອປະໂຫຍດ ເພື່ອເກື້ອກູນ
ແລະເພື່ອຄວາມສຸກແກ່ສັບພະສັດ ໃນໂລກພ້ອມທັງເທວະໂລກ

[໑໔໕] ພຣະຊິນນະເຈົ້າ ຜູ້ເຖິງຄວາມເປັນຜູ້ເລີດດ້ວຍຍົດ
ມີພຣະສີຣິ ປະດັບດ້ວຍພຣະກຽດຕິຄຸນ
ຄົນທົ່ວໂລກບູຊາ ຜາກົດໄປທຸກທິດ

[໑໔໖] ພຣະອົງຊົງຂ້າມພົ້ນວິຈິກິດສາ ລ່ວງພົ້ນຄວາມສົງໄສ
ມີໃຈດຳຣິບໍລິບູນ ຊົງບັນລຸສຳໂພທິຍານທີ່ປະເສີດ

[໑໔໗] ຊົງເຮັດມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
ເປັນຜູ້ປະເສີດກວ່ານໍຣະຊົນ
ຕັດບອກສິ່ງທີ່ບຸກຄົນອື່ນຍັງບໍ່ເຄີຍບອກ
ແລະຊົງເຮັດສິ່ງທີ່ຍັງບໍ່ເກີດໃຫ້ເກີດມີພ້ອມ

[໑໔໘] ຊົງຮູ້ຈັກທາງ ຊົງເຂົ້າໃຈທາງຢ່າງແຈ້ງຊັດ
ຕັດບອກທາງໃຫ້ ຊົງອົງອາດກວ່ານໍຣະຊົນ
ຊົງສະຫຼາດໃນທາງ ຊົງເປັນພຣະສາດສະດາ
ເປັນຜູ້ປະເສີດກວ່ານໍຣະຊົນຜູ້ເປັນນາຍສາຣະຖີທັງຫຼາຍ

[໑໔໙] ໃນຄັ້ງນັ້ນ ພຣະຜູ້ຊົງເປັນຜູ້ນຳ
ຊົງປະກອບດ້ວຍພຣະມະຫາກະລຸນາໄດ້ສະແດງທຳ
ຊົງຊ່ອຍດຶງໝູ່ສັດຜູ້ຈົມລົງແລ້ວໃນເປືອກຕົມຄືໂມຫະຂຶ້ນ

[໑໕໐] ພຣະມະຫາມຸນີຊົງສັນເສີນສາວົກ
ຜູ້ທີ່ຊາວໂລກຍ້ອງຍໍວ່າປະເສີດໃນການກ່າວສອນພິກຂຸນີທັງຫຼາຍ
ໄດ້ຊົງຕັ້ງໄວ້ໃນຕຳແໜ່ງເອຕະທັກຄະ

[໑໕໑] ຂ້າພະເຈົ້າໄດ້ຟັງການສັນເສີນນັ້ນແລ້ວກໍພອຍຍິນດີ
ຈຶ່ງທູນນິມົນພຣະຕະຖາຄົດເຈົ້າພ້ອມທັງພຣະສົງ
ໃຫ້ສະເຫວີຍແລະສັນພັດຕາທານແລ້ວ ປາຖະໜາຕຳແໜ່ງທີ່ສູງສຸດນັ້ນ

[໑໕໒] ໃນຄັ້ງນັ້ນ ພຣະຜູ້ຊົງເປັນບ່ອນເພິ່ງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຊົງເບີກບານພຣະຫະໄທ
ໄດ້ຕັດກັບຂ້າພະເຈົ້າວ່າ ທ່ານຈົ່ງເປັນຜູ້ມີຄວາມສຸກ ມີອາຍຸຍືນເທີ້ນ
ທ່ານຈັກໄດ້ຕຳແໜ່ງນັ້ນສົມຄວາມປາຖະໜາ

[໑໕໓] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂື້ນໃນໂລກ

[໑໕໔] ທ່ານຈັກມີນາມວ່າ ນັນທະກະ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໑໕໕] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈື່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໕໖] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນເສດຖີ
ທີ່ມັ່ງຄັ່ງ ສົມບູນ ມີຊັບຫຼາຍໃນນະຄອນສາວັດຖີ

[໑໕໗] ຂ້າພະເຈົ້າໄດ້ເຫັນພຣະສຸຄົດເຈົ້າໃນເວລາສະເດັດເຂົ້ານະຄອນ
ເປັນຜູ້ມີຄວາມອັດສະຈັນໃຈ ໄດ້ອອກບວດເປັນບັນພະຊິດ
ໃນວັນທີພຣະອົງຊົງຮັບພຣະອາຣາມຊື່ວ່າເຊຕະວັນ

[໑໕໘] ຈາກນັ້ນບໍ່ດົນຂ້າພະເຈົ້າໄດ້ຮັບການສັ່ງສອນ
ຈາກພຣະສາດສະດາຜູ້ຮູ້ແຈ້ງທຳ
ຈື່ງຂ້າມພົ້ນສັງສາຣະວັດໄປໄດ້ ບັນລຸອະຣະຫັນຕະຜົນ

[໑໕໙] ຂ້າພະເຈົ້າກະທຳການສອບຖາມທຳກະຖາແກ່ພິກຂຸນີທັງຫຼາຍ
ພິກຂຸນີທີ່ຂ້າພະເຈົ້າສອນນັ້ນ ລ້ວນໄດ້ເປັນຜູ້ບໍ່ມີອາສະວະ

[໑໖໐] ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ຊົງພ່ຳເພັງປະໂຫຍດເກື້ອກູນ
ອັນໃຫຍ່ຫຼວງ ຊົງພໍພຣະຫະໄທ
ຈື່ງຊົງຕັ້ງຂ້າພະເຈົ້າໄວ້ໃນຕຳແໜ່ງພິກຂຸຜູ້ເລີດ
ກວ່າພິກຂຸທັງຫຼາຍຝ່າຍຜູ້ກ່າວສອນພິກຂຸນີຈຳນວນ ໙໕ ອົງ

[໑໖໑] ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ (ຈາກກິເລດ)

ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກແລ່ງ
ຂ້າພະເຈົ້າເຜົາກິເລດທັງຫຼາຍໄດ້ແລ້ວ

[໑໖໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໖໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະນັນທະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນັນທະກະເຖຣາປະທານທີ ໔ ຈົບ**

## ໖. ກາລຸທາຍີເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກາລຸທາຍີເຖຣະ

(ພຣະກາລຸທາຍີເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖໕] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໖໖] ພຣະຊິນນະເຈົ້າຊົງເປັນສາດສະດາ
ຜູ້ປະເສີດກວ່າຜູ້ນຳ (ເຈົ້າລັດທິ) ທັງຫຼາຍ
ຊົງຮູ້ແຈ້ງສິ່ງທີ່ເປັນຄຸນແລະສິ່ງທີ່ເປັນໂທດ
ເປັນຜູ້ກະຕັນຍູກະຕະເວທີ ຊົງປະກອບເຫຼົ່າສັດໄວ້ໃນທ່າ

[໑໕໗] ຊົງເປັນສັບພັນຍູ ຊົງມີຫັດທະຍາໄສອີດູ
ເປັນທີ່ສັ່ງສົມແຫ່ງອະນັນຕະຄຸນ
ຊົງພິຈາລະນາດ້ວຍພຣະຍານນັ້ນແລ້ວ
ຈຶ່ງຊົງສະແດງທຳທີ່ປະເສີດ

[໑໕໘] ບາງເທື່ອພຣະຊິນນະເຈົ້ານັ້ນ ຜູ້ມີຄວາມພຽນຫຼາຍ
ມີພຣະປັນຍາບໍລິສຸດ
ສະແດງທຳທີ່ປະກອບດ້ວຍສັດຈະທັງ ໔ ອັນມ່ວນ
ແກ່ໝູ່ຊົນເປັນອະນັນ

[໑໕໙] ສັບພະສັດປະມານ ໑໐໐,໐໐໐ ໄດ້ບັນລຸທຳ
ຍ້ອນໄດ້ສະດັບທຳທີ່ປະເສີດ ມີຄວາມງາມໃນເບື້ອງຕົ້ນ
ທ່າມກາງ ແລະທີ່ສຸດນັ້ນ

[໑໖໐] ໃນຄັ້ງນັ້ນ ແຜ່ນດິນກໍສັ່ນສະເທືອນ
ແລະເມກາກໍຄຳຣົນ ເຫຼົ່າເທວະດາ ພົມ
ມະນຸດ ແລະອະສູນ ຕ່າງກໍແຊ່ຊ້ອງສາທຸການ

[໑໖໑] ໂອ ພຣະສາດສະດາຊົງປະກອບດ້ວຍພຣະກະລຸນາ
ໂອ ພຣະສັດທຳມະເທດສະໜາ
ໂອ ພຣະຊິນນະເຈົ້າຜູ້ຊົງຊ່ອຍໝູ່ສັດ
ທີ່ຈົມລົງໃນມະຫາສະມຸດຄືພົບຂຶ້ນມາໄດ້

[໑໖໒] ເມື່ອໝູ່ສັດພ້ອມທັງມະນຸດ
ເທວະດາ ແລະພົມ ເກີດຄວາມສັງເວດເຊັ່ນນີ້ແລ້ວ
ພຣະຊິນນະເຈົ້າໄດ້ຊົງສັນເສີນສາວົກ
ຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍເຮັດຕະກູນໃຫ້ເຫຼື້ອມໃສ

[໑໖໓] ໃນຄັ້ງນັ້ນ ຂ້າພະເຈົ້າເກີດໃນຕະກູນອຳມາດໃນນະຄອນຫົງສະວະດີ
ເປັນຜູ້ນຳມາເຊິ່ງຄວາມເຫຼື້ອມໃສ ໜ້າຊົມ ມີຊັບ
ແລະມີທັນຍາຫານເຫຼືອລົ້ນ
[໑໖໔] ຂ້າພະເຈົ້າເຂົ້າໄປສູ່ວິຫານຫັງສາຣາມ
ໄຫວ້ພຣະຕະຖາຄົດເຈົ້າພຣະອົງນັ້ນ
ໄດ້ຟັງທຳທີ່ມ່ວນ ແລະເຮັດສັກກາຣະແດ່ພຣະອົງຜູ້ຄົງທີ່

[໑໗໕] ຂ້າພະເຈົ້າໝອບລົງແທບພຣະຍຸຄົນບາດແລ້ວ ໄດ້ຂາບທູນຄຳນີ້ວ່າ
ຂ້າແຕ່ພຣະມຸນີ ພິກຂຸອົງໃດໃນສາດສະໜາຂອງພຣະອົງ
ເປັນຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍເຮັດຕະກູນໃຫ້ເຫຼື້ອມໃສ

[໑໗໖] ຂ້າແຕ່ພຣະມະຫາວີຣະ ຂ້າພຣະອົງເພິ່ງເປັນເໝືອນພິກຂຸອົງນັ້ນ
ໃນສາດສະໜາຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດດ້ວຍເທີ້ນ
ໃນຄັ້ງນັ້ນ ພຣະສາດສະດາຜູ້ປະກອບດ້ວຍພຣະມະຫາກະລຸນາ
ເມື່ອຈະໃຊ້ນ້ຳອຳມະຣິດຫົດຂ້າພະເຈົ້າ

[໑໗໗] ໄດ້ຕັດກັບຂ້າພະເຈົ້າວ່າ ລຸກຂຶ້ນເທີ້ນລູກ
ທ່ານຈັກໄດ້ຕຳແໜ່ງນີ້ສົມຄວາມປາຖະໜາ
ບຸກຄົນເຮັດສັກກາຣະໃນພຣະຊິນນະເຈົ້າແລ້ວ
ຈະເພິ່ງເປັນຜູ້ປາສະຈາກຜົນໄດ້ແນວໃດນໍ

[໑໗໘] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໗໙] ເຂົາຈັກມີນາມວ່າ ກາລຸທາຍີ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໑໘໐] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ເບີກບານ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳວິເສດ
ດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ

[໑໘໑] ດ້ວຍວິບາກກຳນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໒] ບັດນີ້ ພົບນີ້ເປັນພົບສຸດທ້າຍ
ຂ້າພະເຈົ້າເກີດໃນຕະກູນມະຫາອຳມາດ

ໃນນະຄອນກະບິນລະພັດທີ່ໜ້າອອນຊອນ
ພຣະເຈົ້າສຸດໂທທະນະເປັນພຣະເຈົ້າແຜ່ນດິນ

[໑໗໓] ໃນຄັ້ງນັ້ນ ເຈົ້າຊາຍສິດທັດຖະຜູ້ຊຶ່ງເປັນຜູ້ອັງອາດກວ່ານໍຣະຊົນ
ໄດ້ປະສູດແລ້ວທີ່ສວນລຸມພິນີ ທີ່ໜ້າອອນຊອນ
ເພື່ອເກື້ອກູນແລະເພື່ອຄວາມສຸກແກ່ສັດໂລກທັງມວນ

[໑໗໔] ຂ້າພະເຈົ້າກໍເກີດໃນວັນນັ້ນ
ເຕີບໂຕພ້ອມກັບພຣະສິດທັດຖະຣາດຊະກຸມານນັ້ນແລ້ວ
ເປັນສະຫາຍທີ່ຮັກແພງ ຄຸ້ນເຄີຍ ແລະສະຫຼາດໃນທາງນິຕິທຳ

[໑໗໕] ພຣະສິດທັດຖະຣາດຊະກຸມານນັ້ນມີພຣະຊົນມາຍຸ ໒໙ ພັນສາ
ໄດ້ສະເດັດອອກບວດ ພໍ່າເພັງພຽນຕະຫຼອດ ໖ ປີ
ຈຶ່ງໄດ້ເປັນພຣະພຸດທະເຈົ້າ ຜູ້ຊຶ່ງເປັນຜູ້ນຳວິເສດ

[໑໗໖] ພຣະອົງຊົງຊະນະມານພ້ອມທັງເສນາມານ
ຊົງຂ້າມຫ້ວງນ້ຳຄືພົບໄດ້ແລ້ວ
ໄດ້ເປັນພຣະພຸດທະເຈົ້າໃນໂລກນີ້ພ້ອມທັງເທວະໂລກ

[໑໗໗] ສະເດັດໄປສູ່ປ່າອິສິປະຕະນະ ຊົງແນະນຳປັນຈະວັກຄີ
ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າກໍສະເດັດໄປໃນບ່ອນນັ້ນ ໆ
ຊົງແນະນຳເວໄນຍະສັດ

[໑໗໘] ພຣະຊິນນະເຈົ້າພຣະອົງນັ້ນ ເມື່ອຈະຊົງແນະນຳເວໄນຍະສັດ
ເມື່ອຈະຊົງສົງເຄາະໝູ່ມະນຸດພ້ອມທັງທວຍເທບ
ໄດ້ສະເດັດໄປເຖິງພູເຂົາໃນແຄວ້ນມະຄົດແລ້ວ ປະທັບຢູ່ໃນການນັ້ນ

[໑໗໙] ໃນຄັ້ງນັ້ນ ຂ້າພະເຈົ້າຖືກພຣະເຈົ້າແຜ່ນດິນ
ພຣະນາມວ່າສຸດໂທທະນະ ຊົງສົ່ງໄປແລ້ວ
ໄດ້ເຝົ້າພຣະທົດສະພົນ ບວດແລ້ວ ໄດ້ເປັນພຣະອະຣະຫັນ

[໑໘໐] ໃນຄັ້ງນັ້ນ ຂ້າພະເຈົ້າທູນອ້ອນວອນພຣະສາດສະດາ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ໃຫ້ສະເດັດໄປນະຄອນກະບິນລະພັດ
ລຳດັບນັ້ນ ຂ້າພະເຈົ້າໄດ້ລ່ວງໜ້າໄປກ່ອນ
ເຮັດຕະກູນໃຫຍ່ ໆ ໃຫ້ເຫຼື້ອມໃສແລ້ວ

[໑໙໑] ພຣະຊິນນະເຈົ້າຜູ້ອົງອາດກວ່າບຸຣຸດ
ຊົງພໍພຣະທະໄທໃນຄຸນຂໍ້ນັ້ນແລ້ວກ່າວຊົມເຊີຍຂ້າພະເຈົ້າ
ພຣະອົງຜູ້ຊົງເປັນຜູ້ນຳວິເສດໄດ້ຊົງຕັ້ງຂ້າພະເຈົ້າວ່າ
ເປັນຜູ້ເລີດກວ່າພິກຂຸທັງຫຼາຍຝ່າຍທີ່ເຮັດຕະກູນໃຫ້ເຫຼື້ອມໃສ

[໑໙໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໙໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໙໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກາລຸທາຍີເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກາລຸທາຍີເຖຣາປະທານທີ ໖ ຈົບ**

## ໗. ອະພະຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອະໄພເຖຣະ

(ພຣະອະໄພເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໙໕] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເຖິງຄວາມສຳເລັດໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໙໖] ພຣະຕະຖາຄົດເຈົ້າຊົງເຮັດບຸກຄົນບາງພວກໃຫ້ຕັ້ງຢູ່ໃນສະຣະນະຄົມ
ບາງພວກໃຫ້ຕັ້ງຢູ່ໃນສີນຄືກຸສົນກຳມະບົດ ໑໐ ທີ່ອຸດົມ

[໑໙໗] ພຣະອົງຜູ້ຊົງເປັນນັກປາດ
ຊົງປະທານສາມັນຍະຜົນ ທີ່ອຸດົມແກ່ບຸກຄົນບາງຄົນ
ຊົງມອບສະມາບັດ ໘ ແລະວິດຊາ ໓ ແກ່ບຸກຄົນບາງຄົນ

[໑໙໘] ພຣະອົງຜູ້ປະເສີດກວ່ານໍຣະຊົນ
ຊົງປະກອບຄົນບາງຄົນໄວ້ໃນອະພິນຍາ ໖
ພຣະອົງຜູ້ເປັນນາຖະຊົງປະທານ
ປະຕິສຳພິທາ ໔ ແກ່ບຸກຄົນບາງຄົນ

[໑໙໙] ພຣະອົງຜູ້ເປັນສາຣະຖີຝຶກນໍຣະຊົນ
ຊົງເຫັນໝູ່ສັດທີ່ຄວນແນະນຳໃຫ້ຕັດສະຣູໄດ້
ແມ່ນໃນສະຖານທີ່ນັບໂຍດບໍ່ຖ້ວນ ກໍຟ້າວສະເດັດໄປແນະນຳ

[໔໐໐] ໃນຄັ້ງນັ້ນ ຂ້າພະເຈົ້າເປັນບຸດຂອງພາມໃນນະຄອນທົງສະວະດີ
ຮຽນຈົບພຣະເວດທັງໝົດ ເຂົ້າໃຈໄວຍາກອນ

[໔໐໑] ສະຫຼາດໃນນິຣຸດຕິ ແກ່ກ້າໃນຄຳພີນິຄັນຖຸສາດ
ເຂົ້າໃຈຕົວບົດ ຮູ້ແຈ້ງຊັດໃນຄຳພີເກຕຸພະ
ສະຫຼາດໃນສັນແລະກາບກອນ

[໔໐໒] ເມື່ອທ່ຽວຍ່າງພັກຜ່ອນ ໄດ້ໄປເຖິງພຣະວິຫານທັງສາຣາມ
ຂ້າພະເຈົ້າໄດ້ເຫັນພຣະພຸດທະເຈົ້າຜູ້ລ້ຳເລີດປະເສີດທີ່ສຸດ
ມີມະຫາຊົນຫ້ອມລ້ອມ

[໔໐໓] ຂ້າພະເຈົ້າມີຄວາມຄິດເປັນຂ້າເສິກ
ເຂົ້າໄປໃກ້ພຣະອົງຜູ້ປາສະຈາກທຸລີຄືກິເລດ
ເຊິ່ງກຳລັງຊົງສະແດງທຳ
ໄດ້ຟັງພຣະດຳຣັດເຊິ່ງປາສະຈາກມົນທິນຂອງພຣະອົງ
[໔໐໔] ຂ້າພະເຈົ້າບໍ່ເຫັນພຣະດຳຣັດທີ່ກະທົບ
ທີ່ກ່າວຊ້ຳ ໆ ກັນ ທີ່ຜິດໄວຍາກອນ
ຫຼືທີ່ໄຮ້ປະໂຫຍດຂອງພຣະມຸນີພຣະອົງນັ້ນເລີຍ
ຍ້ອນເຫດນັ້ນ ຂ້າພະເຈົ້າຈຶ່ງບວດ
[໔໐໕] ໂດຍເວລາບໍ່ດົນຫຼາຍ ຂ້າພະເຈົ້າກໍເປັນຜູ້ແກ່ກ້າໃນທຳທຸກຢ່າງ
ໄດ້ຮັບຍ້ອງຍໍໃຫ້ເປັນຄະນະບໍດີ ໃນພຣະພຸດທະພົດທີ່ລະອຽດອ່ອນ

[໒໐໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ປະພັນຄາຖາ ໔ ຄາຖາ
ເຊິ່ງມີພະຍັນຊະນະສະຫຼະສະຫຼວຍຊົມເຊີຍພຣະພຸດທະເຈົ້າ
ຜູ້ຊົງເປັນຜູ້ເລີດໃນໂລກທັງ ໓ ແລ້ວສະແດງທຸກ ໆ ວັນວ່າ

[໒໐໗] ພຣະພຸດທະເຈົ້າເປັນຜູ້ປາສະຈາກຄວາມຍິນດີ
ມີຄວາມພຽນຫຼາຍ ຊົງຢູ່ໃນສັງສາຣະວັດທີ່ມີໄພ
ບໍ່ສະເດັດດັບຂັນທະປະຣິນິບພານ
ກໍຍ້ອນຊົງປະກອບດ້ວຍພຣະກະລຸນາ (ໃນໝູ່ສັດ)
ດັ່ງນັ້ນ ພຣະມຸນີຈຶ່ງຊື່ວ່າຊົງປະກອບດ້ວຍພຣະກະລຸນາ

[໒໐໘] ບຸກຄົນຜູ້ໃດ ເຖິງເປັນປຸຖຸຊົນກໍບໍ່ຕົກຢູ່ໃນອຳນາດຂອງກິເລດ
ປະກອບດ້ວຍສະຕິ ມີສຳປະຊັນຍະ
ຍ້ອນແນວນັ້ນ ບຸກຄົນຜູ້ນັ້ນຈຶ່ງເປັນອະຈິນໄຕ

[໒໐໙] ກິເລດທີ່ມີກຳລັງອ່ອນ ເຊິ່ງນອນເນື່ອງຢູ່ໃນສັນດານຂອງເຮົາ
ຖືກເຜົາດ້ວຍໄຟຄືຍານແລ້ວບໍ່ສິ້ນໄປ ຂໍ້ນັ້ນບໍ່ເຄີຍມີເລີຍ

[໒໑໐] ຜູ້ໃດເປັນທີ່ເຄົາລົບຂອງສັດໂລກທັງປວງ
ເຊິ່ງເປັນຄູໃນໂລກ ແລະເປັນອາຈານຂອງຊາວໂລກ
ໂລກຍ່ອມອະນຸວັດຕາມຜູ້ນັ້ນ

[໒໑໑] ຂ້າພະເຈົ້າຂໍສະດຸດີພຣະສຳມາສຳພຸດທະເຈົ້າ
ດ້ວຍຄາຖາມີອາທິດັ່ງນີ້ສະແດງທຳຕະຫຼອດຊີວິດ
ຈຸຕິຈາກອັດຕະພາບນັ້ນແລ້ວ ໄດ້ໄປເກີດໃນສະຫວັນ

[໒໑໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າກ່າວສະດຸດີພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການກ່າວສະດຸດີ

[໒໑໓] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຄອງຣາດຊະສົມບັດທີ່ຍິ່ງໃຫຍ່
ອັນເປັນທິບໃນເທວະໂລກ
ໄດ້ເປັນພຣະເຈົ້າຈັກກະພັດສະເຫວີຍຣາດຊະສົມບັດ
ທີ່ຍິ່ງໃຫຍ່ຫຼວງຫຼາຍ

[໔໑໔] ຂ້າພະເຈົ້າເກີດສະເພາະໃນ ໒ ພົບ
ຄື (໑) ພົບເທວະດາ (໒) ພົບມະນຸດ
ຄະຕິອື່ນຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການກ່າວສະດຸດີ

[໔໑໕] ຂ້າພະເຈົ້າເກີດສະເພາະໃນ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ
ຂ້າພະເຈົ້າບໍ່ຮູ້ຈັກຕະກູນຕ່ຳເລີຍ
ນີ້ເປັນຜົນແຫ່ງການກ່າວສະດຸດີ

[໔໑໖] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າມີນາມວ່າອະໄພ
ເປັນໂອຣົດຂອງພຣະເຈົ້າພິມພິສານ
ໃນນະຄອນຣາດຊະຄືທີ່ອຸດົມສົມບູນ

[໔໑໗] ຂ້າພະເຈົ້າຕົກຢູ່ໃນອຳນາດຂອງປາປະມິດ
ຖືກນິຄົນນາຕະບຸດໃຫ້ລຸ້ມຫຼົງ
ສົ່ງໄປເຝົ້າພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໑໘] ຂ້າພະເຈົ້າທູນຖາມບັນຫາທີ່ລະອຽດສຸຂຸມ
ໄດ້ຟັງພະຍາກອນທີ່ປະເສີດ
ຈຶ່ງບວດ ບໍ່ດົນກໍໄດ້ບັນລຸອະຣະຫັນຕະຜົນ

[໔໑໙] ຂ້າພະເຈົ້າໄດ້ຮັບຍ້ອງຍໍທຸກເມື່ອ
ຍ້ອນການສະດຸດີພຣະຊິນນະເຈົ້າຜູ້ປະເສີດ
ເປັນຜູ້ມີຮ່າງກາຍແລະປາກມີກິ່ນຫອມ
ແຕ່ເປັນຜູ້ພຽບພ້ອມດ້ວຍຄວາມສຸກ

[໔໒໐] ຍ້ອນອານຸພາບແຫ່ງກຳນັ້ນ
ຂ້າພະເຈົ້າຈຶ່ງເປັນຜູ້ມີປັນຍາແຫຼມຄົມ
ມີປັນຍາແຈ່ມໃສ ມີປັນຍາວ່ອງໄວ
ມີປັນຍາຫຼາຍ ແລະມີປະຕິພານທີ່ວິຈິດ

[໔໒໑] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ
ກ່າວສະດຸດີພຣະສະຍຳພູພຣະນາມວ່າປະທຸມຸດຕະຣະ

ຜູ້ບໍ່ມີໃຜສະເໝີເໝືອນ
ດ້ວຍຜົນແຫ່ງກຳນັ້ນ ຂ້າພະເຈົ້າຈຶ່ງບໍ່ໄດ້ໄປບັງເກີດ
ໃນອະບາຍຍະພູມຕັ້ງຫຼາຍແສນກັບ

[໔໔໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະໄພເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອະພະຍະເຖຣາປະທານທີ ໗ ຈົບ**

## ໘. ໂລມະສະຕິຍະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະໂລມະສະຕິຍະເຖຣະ

(ພຣະໂລມະສະຕິຍະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໕] ໃນພັດທະກັບນີ້ ພຣະຊິນນະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໔໔໖] ໃນຄັ້ງນັ້ນ ຂ້າພະເຈົ້າແລະສະຫາຍຊື່ຈັນທະນະ
ບັນພະຊາໃນສາດສະໜາແລ້ວ
ໄດ້ພຳເພັງກິດໃນສາດສະໜາຈົນຕະຫຼອດຊີວິດ

[໔໔໗] ຂ້າພະເຈົ້າທັງ ໔ ຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນດຸສິດ
ຂົ່ມເທບພະບຸດທີ່ເຫຼືອໃນສະຫວັນຊັ້ນດຸສິດນັ້ນ
ດ້ວຍການຟ້ອນ ການຂັບຮ້ອງ ການປະໂຄມ

[໔໔໘] ແລະດ້ວຍອົງ ໑໐ ມີຮູບເປັນຕົ້ນອັນເປັນທິບ
ສະເຫວີຍຄວາມສຸກຫຼວງຫຼາຍຢູ່ຈົນຕະຫຼອດອາຍຸ

[໔໔໙] ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວ
ຈັນທະເທບພະບຸດໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ສ່ວນຂ້າພະເຈົ້າໄດ້ເກີດເປັນໂອຣົດຂອງເຈົ້າສາກະຍະໃນນະຄອນກະບິນລະພັດ

[໔໕໐] ໃນເວລາທີ່ພຣະສາດສະດາຊົງເປັນຜູ້ນຳສັດໂລກ
ເຊິ່ງພຣະອຸທາຍີເຖຣະທູນເຊີນສະເດັດເຖິງນະຄອນກະບິນລະພັດ
ເພື່ອຊົງອະນຸເຄາະເຈົ້າສາກະຍະ

[໔໕໑] ໃນຄັ້ງນັ້ນ ພວກເຈົ້າສາກະຍະມີມານະຈັດ
ບໍ່ຮູ້ຄຸນຂອງພຣະພຸດທະເຈົ້າ ເປັນຄົນແຂງກະດ້າງຍ້ອນຊາດຕະກູນ
ບໍ່ເອື້ອເຟື້ອ ບໍ່ນອບນ້ອມພຣະສຳມາສຳພຸດທະເຈົ້າ

[໔໕໒] ພຣະຊິນນະເຈົ້າຊົງຮູ້ຄວາມດຳຣິ
ຂອງເຈົ້າສາກະຍະເຫຼົ່ານັ້ນ
ຈຶ່ງໄດ້ສະເດັດຈົງກົມໃນອາກາດ ເໝືອນເມກຝົນຕົກລົງ
ແລະເໝືອນແປວໄຟທີ່ລຸກສະຫວ່າງແຈ້ງຢູ່

[໔໕໓] ຊົງສະແດງພຣະຮູບທີ່ບໍ່ມີບ່ອນປຽບແລ້ວອັນຕະຣະທານຫາຍໄປ
ແມ່ນພຣະອົງດຽວກໍເນຣະມິດເປັນຫຼາຍອົງໄດ້
ແລ້ວກັບເປັນອົງດຽວເໝືອນເດີມ

[໔໕໔] ພຣະມຸນີຊົງສະແດງຄວາມມືດແລະແສງສະຫວ່າງ
ຊົງກະທຳປາຕິຫານຫຼາກຫຼາຍ
ຊົງປາບພວກພຣະຍາດຕິພີ່ນ້ອງຈົນໝົດມານະ

[໔໕໕] ຂະນະນັ້ນເອງ ມະຫາເມກທີ່ຕັ້ງຂຶ້ນໃນທະວີບທັງ ໔ ທຳຝົນໃຫ້ຕົກແລ້ວ
ກໍໃນຄັ້ງນັ້ນ ພຣະພຸດທະເຈົ້າໄດ້ສະແດງເວດສັນດອນຊາດົກ

[໔໖໖] ໃນຄັ້ງນັ້ນ ກະສັດເຫຼົ່ານັ້ນທູກພຣະອົງ
ກຳຈັດຄວາມມົວເມົາທີ່ເກີດຈາກຊາດຕະກູນໄດ້ແລ້ວ
ເຖິງພຣະພຸດທະເຈົ້າວ່າເປັນສະຣະນະ
ໃນຄັ້ງນັ້ນ ພຣະເຈົ້າສຸດໂທທະນະໄດ້ຕັດວ່າ

[໔໖໗] ຂ້າແຕ່ພຣະອົງຜູ້ມີປັນຍາສະເໝີດ້ວຍແຜ່ນດິນ
ຊົງມີສະມັນຕະຈັກຂຸ ເທື່ອນີ້ເປັນເທື່ອທີ ໖
ທີ່ຂ້ານ້ອຍຖວາຍບັງຄົມພຣະບາດຂອງພຣະອົງ
(ເທື່ອທີ ໑) ໃນເວລາທີ່ພຣະອົງປະສູດແຜ່ນດິນໄຫວ
(ເທື່ອທີ ໔) ໃນເວລາທີ່ເງົາຕົ້ນຫວ້າບໍ່ລະພຣະອົງ

[໔໖໘] ໃນຄັ້ງນັ້ນ ຂ້າພະເຈົ້າເຫັນພຸດທານຸພາບນັ້ນແລ້ວ
ເກີດອັດສະຈັນໃຈ ຈຶ່ງໄດ້ບັນພະຊາ ເປັນຜູ້ບູຊາມານດາ
ໄດ້ອາໄສຢູ່ໃນນະຄອນກະບິນລະພັດນັ້ນເອງ

[໔໖໙] ໃນຄັ້ງນັ້ນ ຈັນທະເທບພະບຸດໄດ້ເຂົ້າມາຫາຂ້າພະເຈົ້າແລ້ວ
ຖາມເຖິງໄນຍະທັງໂດຍຫຍໍ້ ແລະພິດສະດານແຫ່ງພັດເທກະຣັດຕະສູດ

[໔໔໐] ໃນຄັ້ງນັ້ນ ຂ້າພະເຈົ້າຖືກຈັນທະເທບພະບຸດຕັກເຕືອນແລ້ວ
ຈຶ່ງເຂົ້າເຝົ້າພຣະພຸດທະເຈົ້າເຊິ່ງເປັນຜູ້ນຳຂອງນໍຣະຊົນ
ໄດ້ຟັງພັດເທກະຣັດຕະສູດ ເປັນຜູ້ສະລົດໃຈຕ້ອງການຢູ່ປ່າ

[໔໔໑] ໄດ້ບອກລາມານດາວ່າ ຈັກຢູ່ປ່າແຕ່ພຽງຜູ້ດຽວ
ເມື່ອຖືກມານດາຫ້າມປາມວ່າ
ລູກເປັນຄົນລະອຽດອ່ອນ ຂ້າພະເຈົ້າກໍໄດ້ຕອບວ່າ

[໔໔໔] ຂ້າພະເຈົ້າຈັກໃຊ້ເອິກບົດບີບຫຍ້າຄາ ຫຍ້າເລົາ ຫຍ້າແຝກ
ຫຍ້າປ້ອງ ແລະຫຍ້າມຸງກະຕ່າຍ
ໃຫ້ແຫຼກລະອຽດທັງໝົດ ພອກພູນວິເວກ

[໔໔໖] ໃນຄັ້ງນັ້ນ ຂ້າພະເຈົ້າເຂົ້າປ່າຈຶ່ງໄດ້ບັນລຸອະຣະຫັນຕະຜົນ
ນຶກເຖິງຄຳສອນຂອງພຣະຊິນນະເຈົ້າ
ຍ້ອນຣະລຶກເຖິງຄຳສອນຂອງພຣະຊິນນະເຈົ້າ ຄື
ພັດເທກະຣັດໂຕວາທະວ່າ

[໔໔໔] ບຸກຄົນບໍ່ຄວນນຶກເຖິງສິ່ງທີ່ລ່ວງໄປແລ້ວ
ບໍ່ຄວນຫວັງສິ່ງທີ່ຍັງບໍ່ມາເຖິງ
ສິ່ງໃດທີ່ລ່ວງໄປແລ້ວ ສິ່ງນັ້ນກໍເປັນອັນລະໄປແລ້ວ
ສິ່ງໃດທີ່ຍັງບໍ່ມາເຖິງ ສິ່ງນັ້ນກໍຍັງບໍ່ເກີດຂຶ້ນ

[໔໔໕] ສ່ວນບຸກຄົນໃດເຫັນແຈ້ງທຳທີ່ເປັນປັດຈຸບັນ
ບໍ່ງ່ອນແງ່ນ ບໍ່ຄອນແຄນໃນທຳນັ້ນ ໆ
ບຸກຄົນນັ້ນຄວນຈະເລີນທຳນັ້ນໃຫ້ແຈ້ງຊັດ

[໔໔໖] ບຸກຄົນຄວນທຳຄວາມພຽນຕັ້ງແຕ່ວັນນີ້ເລີຍ
ຜູ້ໃດນໍ ຈະຮູ້ວ່າ ຄວາມຕາຍຈັກມີມາໃນມື້ອື່ນ
ຍ້ອນວ່າຄວາມຜັດພັ້ງນກັບມັດຈຸຣາດມີເສນາຫຼາຍນັ້ນ
ຍ່ອມບໍ່ມີແກ່ເຮົາທັງຫຼາຍ

[໔໔໗] ພຣະມຸນີຜູ້ສະງົບຮຽກບຸກຄົນຜູ້ມີຄວາມພຽນ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ເຊິ່ງມີປົກກະຕິຢູ່ແນວນີ້ນັ້ນແລວ່າ
ຜູ້ມີຣາຕີດຽວຈະເລີນ ດັ່ງນີ້

[໔໔໘] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔໙] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະໂລມະສະຕິຍະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂລມະສະຕິຍະເຖຣາປະທານທີ ໘ ຈົບ**

# ៧. ອະນະວັດສະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະນະວັດສະເຖຣະ

(ພຣະອະນະວັດສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕໑] ໃນພັດທະກັບນີ້ ພຣະຊິນນະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໔໕໔] ໃນຄັ້ງນັ້ນ ຂ້າພະເຈົ້າບວດໃນສາດສະໜາຂອງພຣະພຸດທະເຈົ້າພຣະອົງນັ້ນ
ປະພຶດພົມມະຈັນຈົນຕະຫຼອດຊີວິດ
ຈຸຕິຈາກອັດຕະພາບນັ້ນແລ້ວ

[໔໕໓] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໔໕໔] ຈຸຕິຈາກສະຫວັນຊັ້ນຕາວະຕຶງສານັ້ນແລ້ວ ໄດ້ເກີດເປັນນົກກາງແກຢູ່ໃນປ່າ
ໃນປ່ານັ້ນມີພິກຂຸຜູ້ສົມບູນດ້ວຍຄຸນ
ຍິນດີໃນຊານທຸກເມື່ອ ອາໄສຢູ່

[໔໕໕] ທ່ານເປັນຜູ້ມີຈິດເມດຕາ ປະກອບດ້ວຍກະລຸນາ
ມີໜ້າອີ່ມເອີບທຸກເມື່ອ ມີຈິດວ່າງໃສ
ມີຄວາມພຽນຫຼາຍ ສະຫຼາດໃນອັບປະມັນຍາ

[໔໕໖] ມີຄວາມດຳຣິປາສະຈາກນິວອນ
ມີອັດທະຍາໄສມຸ້ງປະໂຫຍດແກ່ສັບພະສັດ ໂດຍບໍ່ດົນ
ຂ້າພະເຈົ້າກໍມີຄວາມຄຸ້ນເຄີຍໃນສາວົກຂອງພຣະສຸຄົດເຈົ້າອົງນັ້ນ

[໔໕໗] ເມື່ອຂ້າພະເຈົ້າໝອບເກາະຢູ່ແທບຕີນຂອງທ່ານ
ຜູ້ນັ່ງຢູ່ໃນອາສົມ ໃນຄັ້ງນັ້ນ ບາງເທື່ອທ່ານກໍໃຫ້ອາຫານ
ບາງເທື່ອທ່ານກໍສະແດງທຳ

[໔໕໘] ໃນຄັ້ງນັ້ນ ຂ້າພະເຈົ້າເຂົ້າໄປຫາທ່ານຜູ້ເປັນໂອຣົດຂອງພຣະຊິນນະເຈົ້າ
ດ້ວຍຄວາມຮັກອັນໄພບູນ ຈຸຕິຈາກອັດຕະພາບນັ້ນແລ້ວ

ໄດ້ໄປເກີດໃນສະຫວັນຄືດັ່ງວ່າຈາກບ່ອນຢູ່
ແລ້ວກັບໄປສູ່ບ່ອນຢູ່ຂອງຕົນແນວນັ້ນ

[໔໕໗] ຂ້າພະເຈົ້າຈຸຕິຈາກສະຫວັນແລ້ວ
ບັງເກີດໃນໝູ່ມະນຸດດ້ວຍບຸນກຳ
ໄດ້ສະລະເຮືອນອອກບວດເປັນສ່ວນຫຼາຍ

[໔໖໐] ຂ້າພະເຈົ້າເປັນສະມະນະ ດາບົດ ພາມ
ປະຣິພາຊົກຢູ່ໃນປ່າມາດົນນານຫຼາຍຮ້ອຍຊາດ

[໔໖໑] ບັດນີ້ ເປັນພົບສຸດທ້າຍ ທີ່ຂ້າພະເຈົ້າຈະລົງສູ່ທ້ອງ
ແຫ່ງພັນລະຍາຂອງພາມວັດສະໂຄດ
ໃນນະຄອນກະບິນລະພັດທີ່ໜ້າອອນຊອນ

[໔໖໔] ເມື່ອຂ້າພະເຈົ້າລົງຢູ່ໃນທ້ອງ ມານດາຂອງຂ້າພະເຈົ້າແພ້ທ້ອງ
ໃນເວລາທີ່ຂ້າພະເຈົ້າໃກ້ເກີດ ທ່ານຕັດສິນໃຈທີ່ຈະຢູ່ປ່າ

[໔໖໓] ຈາກນັ້ນ ມານດາຂອງຂ້າພະເຈົ້າໄດ້ໃຫ້ກຳເກີດຂ້າພະເຈົ້າ
ທີ່ຊາຍປ່າທີ່ໜ້າອອນຊອນ
ເມື່ອຂ້າພະເຈົ້າເກີດຈາກທ້ອງມານດາ
ຊົນທັງຫຼາຍໃຊ້ຜ້າກາສາຍະຮອງຮັບໄວ້

[໔໖໔] ຂະນະນັ້ນ ພຣະສິດທັດຖະຣາດຊະກຸມານ
ຜູ້ເປັນດັ່ງທຸງໄຊຂອງສາກະຍະວົງກໍຊົງປະສູດ
ຂ້າພະເຈົ້າເປັນສະຫາຍຮັກສະນິດຊິດຊອບກັນຂອງພຣະອົງ

[໔໖໕] ເມື່ອພຣະອົງຊົງລະຍົດທີ່ໄພບູນ
ສະເດັດອອກມະຫາພິເນດສະກົມ
ໂດຍມຸ້ງສາຣະປະໂຫຍດແກ່ໝູ່ສັດ
ແມ່ນຂ້າພະເຈົ້າກໍອອກບວດແລ້ວເຂົ້າໄປສູ່ປ່າຫິມະພານ

[໔໖໖] ຂ້າພະເຈົ້າພົບພຣະກັດສະປະຜູ້ຢູ່ປ່າ
ຜູ້ຄວນສັນເສີນ ຜູ້ບອກກ່າວເລື້ອງທຸດົງ
ກໍໄດ້ຟັງຂ່າວວ່າ ພຣະຊິນນະເຈົ້າສະເດັດອຸບັດຂຶ້ນແລ້ວ
ຈຶ່ງໄດ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຊົງເປັນສາຣະຖີຝຶກນໍຣະຊົນ

[໔໘໗]	ພຣະອົງໄດ້ຊົງສະແດງທຳ
ປະກາດປະໂຫຍດທຸກປະການແກ່ຂ້າພະເຈົ້າ
ຈາກນັ້ນ ຂ້າພະເຈົ້າບວດແລ້ວເຂົ້າໄປສູ່ປ່າຄືເກົ່າ

[໔໘໘]	ເມື່ອຂ້າພະເຈົ້າຢູ່ໃນປ່ານັ້ນ
ເປັນຜູ້ບໍ່ຜະໝາດກໍໄດ້ສຳເລັດອະພິນຍາ ໖
ໂອ ເຮົາຜູ້ທີ່ພຣະສາດສະດາຜູ້ຊົງເປັນກັນລະຍານະມິດຊົງອະນຸເຄາະແລ້ວ
ເປັນຜູ້ມີລາບໄດ້ດີແລ້ວນໍ

[໔໘໙]	ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗໐]	ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໗໑]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວະນະວັດສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ວະນະວັດສະເຖຣາປະທານທີ ໙ ຈົບ**

## ໑໐. ຈູລະສຸຄັນທະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຈູລະສຸຄັນທະເຖຣະ

(ພຣະຈູລະສຸຄັນທະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗໔]	ໃນພັດທະກັບນີ້ ພຣະຊິນນະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າ ກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໔໗໓] ພຣະອົງສົມບູນດ້ວຍອະນຸພະຍັນຊະນະ
ມີພຣະລັກສະນະອັນປະເສີດ ໓໔ ປະການ
ມີພຣະຣັດສະໝີລ້ອມຮອບຂ້າງລະວາ
ຊົງປະກອບດ້ວຍຂ່າຍຣັດສະໝີ

[໔໗໔] ຊົງເຮັດໝູ່ສັດໃຫ້ຍິນດີໄດ້ເໝືອນດວງຈັນ
ເປ່ງພຣະຣັດສະໝີເໝືອນດວງອາທິດ
ທຳໝູ່ສັດໃຫ້ເຢືອກເຢັນໄດ້ເໝືອນເມກຝົນ
ເປັນບໍ່ເກີດແຫ່ງຄຸນເໝືອນທະເລ (ເປັນບໍ່ເກີດແຫ່ງຣັດຕະນະ)

[໔໗໕] ພຣະອົງປຽບດັ່ງແຜ່ນດິນໂດຍສິນ
ປຽບດັ່ງພູເຂົາຫິມະພານໂດຍສະມາທິ
ປຽບດັ່ງອາກາດໂດຍປັນຍາ
ເປັນຜູ້ບໍ່ຂ້ອງກ່ຽວ (ກັບອັນໃດ ໆ) ເໝືອນສາຍລົມ

[໔໗໖] ໃນຄັ້ງນັ້ນ ຂ້າພະເຈົ້າເກີດໃນຕະກູນໃຫຍ່
ທີ່ມີຊັບ ແລະທັນຍາຫານຫຼາກຫຼາຍ
ເປັນທີ່ສັ່ງສົມຣັດຕະນະຕ່າງ ໆ ໃນນະຄອນພາຣານະສີ

[໔໗໗] ຂ້າພະເຈົ້າໄດ້ເຂົ້າເຝົ້າພຣະຜູ້ຊົງເປັນຜູ້ນຳສັດໂລກ
ເຊິ່ງປະທັບນັ່ງຢູ່ກັບບໍລິວານຈຳນວນຫຼາຍ
ໄດ້ຟັງອະມະຕະທຳທີ່ນຳມາເຊິ່ງຄວາມຍິນດີແຫ່ງຈິດ

[໔໗໘] ພຣະພຸດທະອົງຊົງມີພຣະລັກສະນະອັນປະເສີດ ໓໔ ປະການ
ເໝືອນດວງຈັນເຊິ່ງເປັນນັກຂະສັດທີ່ງາມ
ຊົງສົມບູນດ້ວຍອະນຸພະຍັນຊະນະ
ເໝືອນຕົ້ນພະຍາໄມ້ສາລະມີດອກບານສະພັ່ງ

[໔໗໙] ມີຂ່າຍຄືພຣະຣັດສະໝີແວດລ້ອມ
ເໝືອນສຸວັນນະບັນພົດມີຣັດສະໝີຮຸ່ງເຮືອງ
ມີພຣະຣັດສະໝີລ້ອມຮອບດ້ານລະວາ
ເໝືອນດວງອາທິດມີຣັດສະໝີເປັນຮ້ອຍ

[໔໘໐] ມີພຣະພັກເໝືອນຄຳ
ເປັນພຣະຊິນນະເຈົ້າຜູ້ປະເສີດ

ເປັນດັ່ງຂຸນເຂົາທີ່ໃຫ້ເກີດຄວາມຍິນດີ
ມີພຣະຫະໄທເຕັມດ້ວຍພຣະກະລຸນາ
ມີພຣະຄຸນເໝືອນສາຄອນ

[໔໗໑] ມີພຣະກຽດຜາກົດແກ່ຊາວໂລກ
ເໝືອນພູເຂົາສິເນຣຸເຊິ່ງເປັນຂຸນເຂົາສູງສຸດ
ມີພຣະຍົດແຜ່ໄປ ເປັນນັກປາດ
ເປັນຜູ້ມີຄວາມຮູ້ດັ່ງອາກາດ

[໔໗໔] ມີພຣະຫະໄທບໍ່ຂ້ອງກັ່ງວໃນທີ່ທັງປວງເໝືອນສາຍລົມ
ຊຶ່ງເປັນຜູ້ນຳ ຊຶ່ງເປັນບ່ອນເພິ່ງຂອງສັບພະສັດດັ່ງແຜ່ນດິນ
ຊຶ່ງເປັນພຣະມຸນີຜູ້ປະເສີດ

[໔໗໓] ບໍ່ຖືກໂລກກະທຳແປດເປື້ອນ
ເໝືອນດອກບົວບໍ່ເປື້ອນດ້ວຍນ້ຳ
ປະທັບຢູ່ດັ່ງກອງໄຟທີ່ເຜົາສັງນຕໍຄືວາທະຊົ່ວ

[໔໗໔] ພຣະອົງຊຶ່ງເປັນເໝືອນຢາບຳບັດໂຣກ ໃນທີ່ທັງປວງ
ຊຶ່ງທຳລາຍຢາພິດຄືກິເລດໃຫ້ພິນາດ
ຊຶ່ງປະດັບດ້ວຍສຸຄັນທະຊາດຄືຄຸນ
ເໝືອນຍອດເຂົາຄັນທະມາດ

[໔໗໕] ຊຶ່ງເປັນນັກປາດເຊິ່ງເປັນບໍ່ເກີດແຫ່ງຄຸນ
ດັ່ງທະເລເປັນບໍ່ເກີດແຫ່ງຣັດຕະນະ
ແລະຊຶ່ງເປັນຜູ້ປະເສີດກວ່ານໍຣະຊົນ
ດັ່ງມ້າສິນທົບຊາດອາຊາໄນ
ຊຶ່ງກຳຈັດມົນທິນຄືກິເລດ

[໔໗໖] ຊຶ່ງຍ່ຳຍີມານແລະເສນາມານໄດ້
ເໝືອນຂຸນພົນຜູ້ມີໄຊໂດຍພິເສດ
ຊຶ່ງເປັນໃຫຍ່ຍ້ອນຣັດຕະນະຄືໂພດຊົງ ໗
ເໝືອນພຣະເຈົ້າຈັກກະພັດຊຶ່ງເປັນໃຫຍ່
ຍ້ອນຣັດຕະນະ ໗ ປະການ ສັນນັ້ນ

[໘໗໗] ຊົງເປັນຜູ້ບຳລຸງລ້ຽງພະຍາທິຄືໂທສະເໝືອນໝໍໃຫຍ່ຮັກສາໄຂ້
ຊົງຜ່າຝີຄືທິດຖິເໝືອນສັນລະຍາແພດຜູ້ປະເສີດ

[໘໗໙] ໃນຄັ້ງນັ້ນ ພຣະພຸດທະອົງຊົງສ່ອງໂລກໃຫ້ສະຫວ່າງ
ອັນມະນຸດແລະເທວະດາສັກກາຣະແລ້ວ
ເປັນດັ່ງດວງຕາເວັນສ່ອງແສງສະຫວ່າງໃຫ້ແກ່ນໍຣະຊົນ
ຊົງສະແດງທຳໃນທ່າມກາງບໍລິສັດ

[໘໗໙] ພຣະອົງຊົງພ່ຳສອນແນວນີ້ວ່າ
ບຸກຄົນຈະເປັນຜູ້ມີໂພຄະສົມບັດຫຼາຍໄດ້ກໍຍ້ອນການຖວາຍທານ
ຈະເຂົ້າເຖິງສຸກຄະຕິໄດ້ກໍຍ້ອນສີນ
ຈະດັບກິເລດໄດ້ກໍຍ້ອນການຈະເລີນພາວະນາ

[໘໙໐] ບໍລິສັດທັງຫຼາຍທັງປວງຟັງເທດສະໜານັ້ນທີ່ມີຄວາມເບົາໃຈຫຼາຍ
ເຊິ່ງມ່ວນທັງເບື້ອງຕົ້ນ ທ່າມກາງແລະທີ່ສຸດ
ມີຣົດເລີດປານວ່ານ້ຳອຳມະຣິດ

[໘໙໑] ຂ້າພະເຈົ້າໄດ້ຟັງພຣະທຳທີ່ມ່ວນຍິ່ງ
ກໍເກີດຄວາມເຫຼື້ອມໃສໃນສາດສະໜາຂອງພຣະຊິນນະເຈົ້າ
ຈຶ່ງເຖິງພຣະສຸຄົດເປັນບ່ອນເພິ່ງນອບນ້ອມບູຊາຈົນຕະຫຼອດຊີວິດ

[໘໙໘] ໃນຄັ້ງນັ້ນ ຂ້າພະເຈົ້ານັ້ນໄດ້ໃຊ້ຄັນທະຊາດ ໘ ຊະນິດ
ທາພື້ນພຣະຄັນທະກຸຕິຂອງພຣະມຸນີເດືອນລະ ໗ ວັນ

[໘໙໓] ໂດຍຕັ້ງປະນິທານໃຫ້ສະຣີຣະທີ່ປາສະຈາກກິ່ນຫອມໃຫ້ມີກິ່ນຫອມ
ໃນຄັ້ງນັ້ນ ພຣະຊິນນະເຈົ້າໄດ້ຕັດພະຍາກອນ
ຂ້າພະເຈົ້າຜູ້ຕ້ອງການໄດ້ກາຍມີກິ່ນຫອມວ່າ

[໘໙໔] ນໍຣະຊົນໃດ ໃຊ້ຂອງຫອມທາພື້ນພຣະຄັນທະກຸຕິເວລາດຽວ
ດ້ວຍຜົນຂອງກຳນັ້ນ ນໍຣະຊົນນັ້ນເກີດໃນພົບໃດພົບໜຶ່ງ
[໘໙໕] ນໍຣະຊົນນີ້ຈັກເປັນຜູ້ມີກິ່ນກາຍຫອມໄປທຸກ ໆ ຊາດ
ຈັກເປັນຜູ້ປະກອບດ້ວຍກິ່ນຄືຄຸນ ບໍ່ມີອາສະວະແລ້ວນິບພານ

[໘໙໖] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ

ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໙໗] ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າເກີດໃນຕະກູນພາມ
ເມື່ອຂ້າພະເຈົ້າຍັງຢູ່ໃນທ້ອງມານດາ
ມານດາເປັນຍິງສາວມີກາຍມີກິ່ນຫອມ

[໔໙໘] ແລະໃນເວລາທີ່ຂ້າພະເຈົ້າເກີດຈາກທ້ອງມານດານັ້ນ
ເມືອງຫຼວງສາວັດຖີຫອມຟຸ້ງເໝືອນອົບດ້ວຍກິ່ນຫອມທຸກຢ່າງ

[໔໙໙] ຂະນະນັ້ນ ຝົນດອກໄມ້ທີ່ຫອມຫວນ
ກິ່ນທິບທີ່ເປັນຕາອອນຊອນ ແລະທູບມີຄ່າຫຼາຍກໍຫອມຟຸ້ງໄປ

[໕໐໐] ຂ້າພະເຈົ້າເກີດໃນເຮືອນຫຼັງໃດ
ເຮືອນຫຼັງນັ້ນ ເທວະດາໄດ້ໃຊ້ທູບແລະດອກໄມ້
ລ້ວນແຕ່ມີກິ່ນຫອມແລະເຄື່ອງຫອມມາອົບ

[໕໐໑] ໃນເວລາທີ່ຂ້າພະເຈົ້າຍັງເຍົາແລະຈະເລີນໄວດຳຣົງຢູ່ໃນປະຖົມໄວ
ພຣະສາດສະດາຜູ້ເປັນສາຣະຖີຝຶກນໍຣະຊົນ
ຊົງແນະນຳບໍລິສັດຂອງພຣະອົງທີ່ເຫຼືອແລ້ວ

[໕໐໒] ມີສາວົກເຫຼົ່ານັ້ນທັງໝົດແວດລ້ອມສະເດັດມາເຖິງນະຄອນສາວັດຖີ
ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເຫັນພຸດທານຸພາບນັ້ນແລ້ວຈຶ່ງອອກບວດ

[໕໐໓] ຂ້າພະເຈົ້າຈະເລີນທຳ ໕ ປະການ
ຄື ສີນ ສະມາທິ ປັນຍາ ແລະວິມຸດຕິອັນປະເສີດ
ແລ້ວບັນລຸທຳເປັນທີ່ສິ້ນອາສະວະ

[໕໐໔] ໃນເວລາທີ່ຂ້າພະເຈົ້າອອກບວດ
ໃນເວລາທີ່ຂ້າພະເຈົ້າເປັນພຣະອະຣະຫັນ
ແລະໃນເວລາທີ່ຂ້າພະເຈົ້າຈັກປະຣິນິບພານ
ໄດ້ມີຝົນເຊິ່ງມີກິ່ນຫອມ (ຕົກລົງມາ)

[໕໐໕] ກໍກິ່ນກາຍທີ່ປະເສີດສຸດຂອງຂ້າພະເຈົ້າ
ຄອບງຳຈັນ ດອກຈຳປາແລະດອກອຸບົນເຊິ່ງມີຄ່າຫຼາຍໄດ້

ແລະຂ້າພະເຈົ້າໄປໃນບ່ອນໃດ ໆ
ກໍຈະສົ່ງກິ່ນຟຸ້ງໄປທົ່ວເໜືອກິ່ນຫອມນອກນີ້ໄດ້

[໓໐໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໐໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໓໐໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຈູລະສຸຄັນທະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຈູລະສຸຄັນທະເຖຣາປະທານທີ ໑໐ ຈົບ**

**ພັດທິຍະວັກທີ ໕໕ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ລະກຸນຕະກະພັດທິຍະເຖຣາປະທານ
໒. ສີວະລີເຖຣາປະທານ
໓. ນັນທະກະເຖຣາປະທານ
໗. ອະພະຍະເຖຣາປະທານ
໙. ວະນະວັດສະເຖຣາປະທານ
໔. ກັງຂາເຣວະຕະເຖຣາປະທານ
໕. ວັງຄີສະເຖຣາປະທານ
໖. ກາລຸທາຍີເຖຣາປະທານ
໘. ໂລມະສະຕິຍະເຖຣາປະທານ
໑໐. ຈູລະສຸຄັນທະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໓໑໖ ຄາຖາ**

# ລວມວັກ

໑. ກະມິກາຣະວັກ

໒. ຕິນະທາຍະກະວັກ

໓. ພັດທິຍະວັກ

໔. ຜະລະທາຍະກະວັກ

໕. ກັດຈາຍະນະວັກ

**ບັນດິດນັບຄາຖາໄວ້ຜະແໜກໜຶ່ງລວມໄດ້ ໓໗໔ ຄາຖາ**

**ແລະປະກາດອຸປາທານລວມໄດ້ ໕໕໒ ອຸປາທານ**

**ພ້ອມທັງອຸທານຄາຖາ ມີຄາຖາລວມ ໒,໔໑໗ ຄາຖາ**

# ໕໖. ຍະສະວັກ

## ໝວດວ່າດ້ວຍພຣະຍະສະເຖຣະເປັນຕົ້ນ

### ໑. ຍະສະເຖຣາປະທານ

#### ປະຫວັດໃນອະດີດຊາດຂອງພຣະຍະສະເຖຣະ

(ພຣະຍະສະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ວິມານ ຂ້າພະເຈົ້າໄດ້ສ້າງໄວ້ດີແລ້ວ
ໃຫ້ຍື່ນລົງໄປໃນມະຫາສະມຸດ
ສະໂບກຂະຣະນີຂ້າພະເຈົ້າກໍສ້າງໄວ້ດີແລ້ວ
ທັງຍັງມີນົກຈັກກະພາກມາສົ່ງສຽງຮ້ອງຂັບຂານ

[໒] ທີ່ວິມານນັ້ນແມ່ນ້ຳກໍເດຍລະດາດດ້ວຍບົວເຜື່ອນ
ດອກປະທຸມແລະດອກອຸບົນ
ມີທ່ານ້ຳຮາບພຽງເປັນຕາອອນຊອນ
ກະແສນ້ຳກໍໄຫຼໄປເອື່ອຍ ໆ

[໓] ແມ່ນ້ຳນັ້ນກໍຊຸກຊຸມໄປດ້ວຍປາແລະເຕົ່າ
ເຕັມໄປດ້ວຍນົກນານາຊະນິດ ມີນົກຍູງ ນົກກະຣຽນ
ແລະນົກກາເວົາເປັນຕົ້ນ ຕ່າງກໍສົ່ງສຽງຮ້ອງຢ່າງມ່ວນ

[໔] ຢູ່ແຄມແມ່ນ້ຳນີ້ມີນົກກາງແກ ນົກເປັດນ້ຳ
ນົກຈັກກະພາກ ນົກການ້ຳ ນົກກະທາ
ນົກສາລິກາ ນົກເຂົາໄຟ ນົກໂພຣະດົກ

[໕] ຫົງ ນົກກະຣຽນ ນົກເຄົ້າແມວ
ນົກຂີ້ມີ້ນເຫຼືອງອ່ອນຫຼາກຫຼາຍພາກັນສົ່ງສຽງຮ້ອງ
ແມ່ນ້ຳກໍສົມບູນດ້ວຍຣັດຕະນະ ໗ ປະການ
ມີແກ້ວມະນີ ແກ້ວມຸກດາ ແລະແກ້ວປະພາເປັນຕົ້ນ

[໖] ຕົ້ນໄມ້ທຸກຊະນິດລ້ວນເປັນຄຳ
ຕັ້ງຊອນລອນດ້ວຍລຳຕົ້ນຂະໜາດຕ່າງ ໆ

ສ່ອງວິມານຂອງຂ້າພະເຈົ້າໃຫ້ສະຫວ່າງ
ທັງກາງເວັນແລະກາງຄືນ ຕະຫຼອດການທຸກເມື່ອ

[໗] ເຄື່ອງດົນຕີ ໒໐,໐໐໐ ຢ່າງ ກໍບັນເລງຢູ່ທັງເຊົ້າແລະຄໍ່າ
ສະຕີ ໑໖,໐໐໐ ນາງ ກໍແວດລ້ອມຂ້າພະເຈົ້າຢູ່ທຸກເມື່ອ

[໘] ຂ້າພະເຈົ້າເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີອອກຈາກວິມານແລ້ວ
ຂາບໄຫວ້ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ຊົງເປັນຜູ້ນໍາສັດໂລກ ມີພຣະຍົດຍິ່ງໃຫຍ່ພຣະອົງນັ້ນ

[໙] ຂ້າພະເຈົ້າເມື່ອຖວາຍອະພິວາດພຣະສໍາມາສໍາພຸດທະເຈົ້າແລ້ວ
ຈຶ່ງທູນນິມົນພຣະພຸດທະອົງພ້ອມທັງພິກຂຸສົງ
ພຣະສໍາມາສໍາພຸດທະເຈົ້າພຣະນາມວ່າ ສຸເມທະ ຜູ້ຊົງເປັນຜູ້ນໍາສັດໂລກ
ຊົງເປັນນັກປາດພຣະອົງນັ້ນ ຊົງຮັບນິມົນແລ້ວ

[໑໐] ພຣະມະຫາມຸນີ ຊົງສະແດງທໍາມີກະຖາແກ່ຂ້າພະເຈົ້າແລ້ວ
ຈຶ່ງສົ່ງຂ້າພະເຈົ້າໄປ ຂ້າພະເຈົ້າຖວາຍອະພິວາດ
ພຣະສໍາມາສໍາພຸດທະເຈົ້າແລ້ວ
ຈຶ່ງເຂົ້າສູ່ວິມານຂອງຕົນ

[໑໑] ໃນຄັ້ງນັ້ນ ຂ້າພະເຈົ້າຮຽກບໍລິວານຊົນມາປະຊຸມກັນທັງໝົດ
ໂດຍແຈ້ງໃຫ້ຮູ້ວ່າ ພຣະພຸດທະເຈົ້າຈະສະເດັດມາຍັງວິມານຂອງເຮົາ
ໃນເວລາເຊົ້າ

[໑໒] ການທີ່ພວກເຮົາຢູ່ໃນທີ່ໃກ້ຂອງພຣະອົງ
ນັບວ່າເປັນລາບຂອງພວກເຮົາທີ່ພວກເຮົາໄດ້ດີແລ້ວ
ແມ່ນພວກເຮົາກໍຈັກໄດ້ບູຊາພຣະສາດສະດາ
ຜູ້ເປັນພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໑໓] ຂ້າພະເຈົ້າຈັດຕັ້ງເຂົ້ານໍ້າສໍາເລັດແລ້ວ
ຈຶ່ງໃຫ້ຄົນໄປຂາບທູນບອກເວລາ
ພຣະພຸດທະເຈົ້າຊົງເປັນຜູ້ນໍາສັດໂລກ
ໄດ້ສະເດັດມາເຖິງພ້ອມດ້ວຍພຣະອະຣະຫັນ ໑໐໐,໐໐໐ ອົງ ຜູ້ໄດ້ວະສີ

[໑໔] ຂ້າພະເຈົ້າໄດ້ຮັບສະເດັດດ້ວຍດົນຕີປະກອບດ້ວຍອົງ ໕

ພຣະພຸດທະເຈົ້າຜູ້ເປັນບຸຣຸດສູງສຸດ
ປະທັບນັ່ງເທິງຕັ່ງທີ່ເປັນຄຳລ້ວນ

[໑໕] ໃນເວລານັ້ນ ເຄື່ອງມຸງເບື້ອງເທິງເປັນຄຳລ້ວນ
ເຫຼົ່າຊົນພາກັນພັດໃຫ້ພິກຂຸສົງຜູ້ປະເສີດ

[໑໖] ຂ້າພະເຈົ້າລ້ຽງພິກຂຸສົງ
ໃຫ້ອີ່ມໜຳດ້ວຍເຂົ້ານ້ຳຢ່າງພຽງພໍ
ໄດ້ຖວາຍຜ້າແກ່ພິກຂຸສົງອົງລະຄູ່

[໑໗] ພຣະພຸດທະເຈົ້າພຣະນາມວ່າ ສຸເມທະ
ຜູ້ສົມຄວນຮັບເຄື່ອງບູຊາພຣະອົງນັ້ນ
ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ
ໄດ້ຕັດຄຳເປັນພຣະຄາຖາເຫຼົ່ານີ້ວ່າ

[໑໘] ເຮົາຈັກປະກາດກຽດຕິຄຸນ
ຂອງຜູ້ທີ່ລ້ຽງເຮົາແລະພິກຂຸເຫຼົ່ານີ້ທັງໝົດ
ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໑໙] ຜູ້ນັ້ນຈັກຣື່ນເຣິງໃນເທວະໂລກຕະຫຼອດ ໑,໘໐໐ ກັບ
ຈັກເກີດເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໒໐] ເຂົາຈະເກີດຍັງກຳເນີດໃດ
ຄືຈະເປັນກຳເນີດເທວະດາຫຼືກຳເນີດມະນຸດກໍຕາມ
ເຂົາຈັກມີເຄື່ອງມຸງບັງທີ່ເປັນຄຳລ້ວນຄອຍຖ້າກາງກັ້ງ

[໒໑] ໃນກັບທີ ໓໐,໐໐໐ ນັບຈາກກັບນີ້
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໒໒] ເຂົາຈັກເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໔໓] ເຂົາຈັກນັ່ງໃນທ່າມກາງພຣະສົງ ບັນລືສີຫະນາດ
ຊົນທັງຫຼາຍຄອຍຖ້າກັ້ງສະເວດຕະສັດໃຫ້ເຂົາແມ່ນທີ່ກອງຟອນ
ເຂົາຈັກຖືກເຜົາພາຍໃຕ້ສະເວດຕະສັດ

[໔໔] ສາມັນຍະຜົນຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ຂ້າພະເຈົ້າບໍ່ມີຄວາມສະດຸ້ງບໍ່ວ່າຈະເປັນທີ່ມົນດົບຫຼືຢູ່ທີ່ເຫງົ້າໄມ້

[໔໕] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຂ້າພະເຈົ້າໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທານທັງປວງ

[໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຍະສະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຍະສະເຖຣາປະທານທີ ໑ ຈົບ**

## ໔. ນະທີກັດສະປະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະນະທີກັດສະປະເຖຣະ

(ພຣະນະທີກັດສະປະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໙] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່ ຜູ້ເປັນພຣະສາດສະດາ
ສະເດັດໂຄຈອນບິນທະບາດ
ຂ້າພະເຈົ້າໄດ້ຖືໝາກໄມ້ທີ່ມີຣົດເລີດ ອັນປະເສີດ ມີຊື່ສຽງ
ຕາມອາຣະໄດ້ຖວາຍແດ່ພຣະອົງ

[໕໐] ຍ້ອນກຳນັ້ນ ຂ້າພະເຈົ້າໄດ້ເກີດເປັນຈອມເທບ
ຜູ້ຈະເລີນທີ່ສຸດໃນໂລກ ເປັນຜູ້ອົງອາດກວ່ານໍຣະຊົນ
ລະຄວາມຊະນະແລະຄວາມພ່າຍແພ້ໄດ້ແລ້ວ
ບັນລຸຖານະທີ່ບໍ່ຫວັ່ນໄຫວ

[໕໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້ທີ່ມີຣົດເລີດ

[໕໒] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໓] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະນະທິກັດສະປະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນະທີກັດສະປະເຖຣາປະທານທີ ໔ ຈົບ**

## ໓. ຄະຍາກັດສະປະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຄະຍາກັດສະປະເຖຣະ

(ພຣະຄະຍາກັດສະປະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໓໕] ໃນຄັ້ງນັ້ນ ຂ້າພະເຈົ້ານຸ່ງຫົ່ມໜັງສັດ
ພາຍຫາບບໍຣິຂານ
ໄດ້ນຳຫາບໃສ່ໝາກກະເບົາໄປອາສົມ

[໓໖] ສະໄໝນັ້ນ ພຣະຜູ້ມີພຣະພາກຊິນນະເຈົ້າພຣະອົງດຽວ
ບໍ່ມີສາວົກຕິດຕາມ ຊົງມີພຣະຣັດສະໝີສ່ອງແສງຕະຫຼອດການທັງປວງ
ໄດ້ສະເດັດເຂົ້າມາຍັງອາສົມຂອງຂ້າພະເຈົ້າ

[໓໗] ຂ້າພະເຈົ້າເຮັດຈິດຂອງຕົນໃຫ້ເຫຼື້ອມໃສ
ຖວາຍອະພິວາດພຣະຊິນນະເຈົ້າຜູ້ມີວັດຕະງົດງາມ
ຖວາຍໝາກກະເບົາແດ່ ພຣະພຸດທະເຈົ້າດ້ວຍມືທັງ ໒

[໓໘] ໃນກັບທີ ໓໑ ນັບຈາກກັບນີ້
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກກະເບົາ

[໓໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໔໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະຄະຍາກັດສະປະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຄະຍາກັດສະປະເຖຣາປະທານທີ ໓ ຈົບ**

## ໔. ກິມິລະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະກິມິລະເຖຣະ

(ພຣະກິມິລະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໘] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະ
ຜູ້ເປັນເຜົ່າພັນຂອງພາມ ຊົງຢູ່ຈົບພົມມະຈັນ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າຖືເອົາພວງມາໄລດອກສົນໄປໃຫ້ຊ່າງເຮັດມົນດົບ (ສະຖູບ)

[໔໓] ຂ້າພະເຈົ້າໄປເກີດໃນສະຫວັນຊັ້ນຕາວະຕິງສາ
ໄດ້ວິມານຊັ້ນສູງສຸດຮຸ່ງເຮືອງລ່ວງເທວະດາເຫຼົ່າອື່ນ
ນີ້ເປັນຜົນແຫ່ງບຸນກຳ

[໔໔] ຂ້າພະເຈົ້າເມື່ອຈົງກົມແລະຢືນຢູ່ໃນເວລາກາງເວັນ
ຫຼືກາງຄືນກໍຕາມ ກໍມີດອກສົນມຸງບັງ
ນີ້ເປັນຜົນແຫ່ງບຸນກຳ

[໔໕] ໃນກັບນີ້ເອງ ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[๔๗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະກິມິລະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກິມິລະເຖຣາປະທານທີ ໔ ຈົບ**

## ໕. ວັດຊີປຸດຕະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະວັດຊີບຸດເຖຣະ

(ພຣະວັດຊີບຸດເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๔๘] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ສະທັດສະຣັງສີ
ຊົງເປັນພຣະສະຍໍາພູ ຜູ້ບໍ່ຊົງພ່າຍແພ້
ຊົງອອກຈາກວິເວກແລ້ວ ສະເດັດອອກໂຄຈອນບິນທະບາດ

[๕๐] ຂ້າພະເຈົ້າຖືໝາກໄມ້ຢູ່ເຫັນແລ້ວຈຶ່ງໄປໃກ້ພຣະພຸດທະອົງ
ຜູ້ອົງອາດກວ່ານໍຣະຊົນ ເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ
ໄດ້ຖວາຍໝາກໄມ້ພ້ອມທັງຂວັ້ນ

[๕๑] ໃນກັບທີ ๗๔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍໝາກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍໝາກໄມ້

[๕๔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[๕๓] ການທີ່ຂ້າພະເຈົ້າມາໃນສໍານັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ๓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທໍາສໍາເລັດແລ້ວ

[໔໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະວັດຊີບຸດເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ວັດຊີປຸດຕະເຖຣາປະທານທີ ໕ ຈົບ**

## ໖. ອຸດຕະຣະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸດຕະຣະເຖຣະ

(ພຣະອຸດຕະຣະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕] ພຣະຜູ້ມີພຣະພາກສຳມາສຳພຸດທະເຈົ້າພຣະນາມວ່າສຸເມທະ
ມີພຣະລັກສະນະອັນປະເສີດ ໓໒ ປະການ
ພຣະອົງຜູ້ມີວິເວກເປັນເລີດ ຈຶ່ງສະເດັດເຂົ້າໄປສູ່ປ່າຫິມະພານ

[໔໖] ເມື່ອສະເດັດເຖິງປ່າຫິມະພານແລ້ວ ພຣະມຸນີຜູ້ເລີດ
ຜູ້ເປັນບຸຣຸດສູງສຸດ ຊົງປະກອບດ້ວຍພຣະກະລຸນາ
ກໍປະທັບນັ່ງຂັດສະມາທິ

[໔໗] ໃນຄັ້ງນັ້ນ ຂ້າພະເຈົ້າເປັນວິທະຍາທອນສັນຈອນໄປໃນອາກາດ
ຖືຫຼາວຄົມເຊິ່ງເຮັດດີແລ້ວ ເຫາະໄປໃນທ້ອງຟ້າ

[໔໘] ພຣະພຸດທະເຈົ້າຊົງເຮັດປ່າໃຫຍ່ໃຫ້ສະຫວ່າງສະໄຫວ
ເໝືອນໄຟເທິງຈອມພູເຂົາ ເໝືອນດວງຈັນໃນວັນເພັງ
ເໝືອນຕົ້ນພະຍາໄມ້ສາລະເຊິ່ງມີດອກບານສະພັ່ງ ສັນນັ້ນ

[໔໙] ຂ້າພະເຈົ້າເຫັນພຸດທະຣັງສີ ມີສີຄ້າຍແປວໄຟທີ່ໄໝ້ໄມ້ອໍ້
ພວຍພຸ່ງອອກຈາກປ່າ ຈຶ່ງເຮັດຈິດໃຫ້ເຫຼື້ອມໃສ

[໕໐] ຂ້າພະເຈົ້າເລືອກເກັບດອກໄມ້ຢູ່
ໄດ້ເຫັນດອກກັນນິກາເຊິ່ງມີກິ່ນຫອມຄ້າຍກິ່ນທິບ
ຈຶ່ງເກັບມາ ໓ ດອກ ໄດ້ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໖໑] ໃນຄັ້ງນັ້ນ ດ້ວຍອານຸພາບແຫ່ງພຣະພຸດທະເຈົ້າ
ດອກໄມ້ຂອງຂ້າພະເຈົ້າທັງ ໓ ດອກກັບກ້ານຂຶ້ນອວ່າຍກີບດອກລົງ
ເຮັດເປັນຮົ່ມເງົາເພື່ອບັງພຣະສາດສະດາ

[໖໒] ດ້ວຍກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້າພະເຈົ້າລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໖໓] ໃນສະຫວັນຊັ້ນຕາວະຕິງສານັ້ນ
ວິມານສູງ ໖໐ ໂຍດ ກວ້າງ ໓໐ ໂຍດ
ເຊິ່ງບຸນກຳສ້າງຂຶ້ນຢ່າງສວຍງາມເພື່ອຂ້າພະເຈົ້າ
ຮູ້ຈັກກັນວ່າກັນນິກາວິມານ

[໖໔] ຜາສາດ ໆ ຊັ້ນສູງ ໑,໐໐໐ ຊົ່ວລູກທະນູ
ສະພັ່ງໄປດ້ວຍທຸງ ເຫຼື້ອມໄປດ້ວຍແກ້ວມະນີສີຂຽວ
ແລະປ້ອມ ໑໐໐,໐໐໐ ປ້ອມ ຜາກົດໃນວິມານຂອງຂ້າພະເຈົ້າ

[໖໕] ບັນລັງຄຳ ບັນລັງແກ້ວມະນີ
ບັນລັງແກ້ວທັບທິມ ແລະບັນລັງແກ້ວຜຶກ
ເກີດຂຶ້ນຕາມປາຖະໜາຕາມປະສົງ

[໖໖] ບ່ອນນອນມີຣາຄາຫຼາຍຍັດດ້ວຍນຸ່ນ
ມີລວດລາຍຕ່າງ ໆ ມີຂົນຕັ້ງຂຶ້ນດ້ານດຽວແລະໝອນພ້ອມ

[໖໗] ຂ້າພະເຈົ້າມີໝູ່ເທວະດາຫ້ອມລ້ອມອອກຈາກວິມານ
ທ່ຽວຈາຣິກໄປໃນເທວະໂລກ
ໃນເວລາທີ່ປາຖະໜາຈະໄປ

[໖໘] ຢືນຢູ່ພາຍໃຕ້ດອກໄມ້
ຂ້າພະເຈົ້າມີດອກໄມ້ເປັນເຄື່ອງມຸງບັງຢູ່ເບື້ອງເທິງ
ສະຖານທີ່ປະມານ ໑໐໐ ໂຍດມຸງບັງໄປດ້ວຍດອກກັນນິກາ

[໖໙] ເຄື່ອງດົນຕີ ໖໐,໐໐໐ ຢ່າງ ບັນເລງກ່ອມຂ້າພະເຈົ້າທັງເຊົ້າແລະຄ່ຳ
ບໍ່ຢຸດຢ່ອນ ແວດລ້ອມຂ້າພະເຈົ້າເປັນນິດ ຕະຫຼອດຄືນຕະຫຼອດວັນ

[໗໐] ໃນວິມານນັ້ນ ຂ້າພະເຈົ້າຮື່ນຣົມດ້ວຍການຟ້ອນ
ການຂັບຮ້ອງ ການເຄາະກັງສະດານ ແລະການປະໂຄມ
ຂ້າພະເຈົ້າເປັນຜູ້ມີກຸ່ມໃນການ ບັນເທີງຢູ່ດ້ວຍຄວາມຍິນດີໃນການຫຼິ້ນ

[໗໑] ໃນຄັ້ງນັ້ນ ຂ້າພະເຈົ້າບໍຣິໂພກແລະດື່ມຢູ່ໃນວິມານນັ້ນ
ບັນເທີງຢູ່ໃນສະຫວັນຊັ້ນຕາວະຕິງສາ
ຂ້າພະເຈົ້າພ້ອມດ້ວຍໝູ່ນາງອັບປະສອນບັນເທີງຢູ່ໃນວິມານອັນອຸດົມ

[໗໔] ຂ້າພະເຈົ້າຄອງເທວະສົມບັດຕະຫຼອດ ໕໐໐ ຊາດ
ເປັນພຣະເຈົ້າຈັກກະພັດ ໓໐໐ ຊາດ
ແລະໄດ້ເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໗໓] ເມື່ອຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຍ່ອມໄດ້ໂພຄະຫຼາກຫຼາຍ ຂ້າພະເຈົ້າບໍ່ມີຄວາມບົກຜ່ອງໃນໂພຄະເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໔] ຂ້າພະເຈົ້າວຽນວ່າຍຕາຍເກີດຢູ່ໃນ ໔ ພົບ
ຄື (໑) ພົບເທວະດາ (໔) ພົບມະນຸດ
ຄະຕິອື່ນຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໕] ຂ້າພະເຈົ້າເກີດສະເພາະໃນ ໔ ຕະກູນ
ຄື (໑) ຕະກູນກະສັດ (໔) ຕະກູນພາມ
ຕະກູນຕ່ຳຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໖] ຍານຄືຊ້າງ ຍານຄືມ້າ ວໍແລະຄານຫາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໗] ໝູ່ທາດຍິງ ທາດຊາຍ
ແລະເຫຼົ່ານາຣີທີ່ປະດັບຕົກແຕ່ງຢ່າງສວຍງາມ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໗] ຜ້າໄໝ ຜ້າກຳພົນ ຜ້າເປືອກໄມ້ ແລະຜ້າຝ້າຍ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໘] ຜ້າໃໝ່ ໝາກໄມ້ໃໝ່ ໂພຊະນະມີຣົດເລີດໃໝ່ ໆ
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໐] (ຄຳເຊື້ອເຊີນເຊັ່ນນີ້ວ່າ) ເຊີນຫຍໍ້າກິນສິ່ງນີ້
ເຊີນບໍຣິໂພກສິ່ງນີ້ ເຊີນນອນເທິງບ່ອນນອນນີ້
ຂ້າພະເຈົ້າກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໑] ຂ້າພະເຈົ້າເປັນຜູ້ທີ່ເຂົາບູຊາໃນທີ່ທຸກສະຖານ
ມີຍົດສູງສົ່ງ ມີພວກຫຼາຍ ມີບໍລິວານບໍ່ແຕກແຍກກັນທຸກເມື່ອ
ບັນດາພວກຍາດຕິພີ່ນ້ອງ ຂ້າພະເຈົ້າເປັນຜູ້ປະເສີດທີ່ສຸດ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໒] ຂ້າພະເຈົ້າບໍ່ຮູ້ຈັກຄວາມໜາວ ຄວາມຮ້ອນ
ທັງບໍ່ມີຄວາມຮ້ອນຮົນ
ອັນໜຶ່ງ ທຸກທາງໃຈກໍບໍ່ມີໃນຫົວໃຈຂອງຂ້າພະເຈົ້າ

[໘໓] ຂ້າພະເຈົ້າເປັນຜູ້ມີຜິວພັນເໝືອນຄຳ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ຄວາມເປັນຜູ້ຜິວພັນຊາມຂ້າພະເຈົ້າບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໔] ຂ້າພະເຈົ້າຖືກກຸສົນມູນຕັກເຕືອນແລ້ວຈຸຕິຈາກເທວະໂລກ
ເກີດໃນຕະກູນມະຫາສານທີ່ມັ່ງຄັ່ງໃນນະຄອນສາວັດຖີ

[໘໕] ຂ້າພະເຈົ້າໄດ້ລະກາມມະຄຸນ ໕ ອອກບວດເປັນບັນພະຊິດ
ມີອາຍຸໄດ້ ໗ ປີ ກໍໄດ້ບັນລຸອະຣະຫັນຕະຜົນ

[໘໖] ພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງຮູ້ຄຸນວິເສດຂອງຂ້າພະເຈົ້າ

ຈຶ່ງໃຫ້ຂ້າພະເຈົ້າອຸປະສົມບົດ
ຂ້າພະເຈົ້າມີອາຍຸໜ້ອຍຢູ່ກໍໄດ້ເປັນປູຊະນີຍະບຸກຄົນ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໗] ທິບພະຈັກຂຸຂອງຂ້າພະເຈົ້າບໍລິສຸດ ຂ້າພະເຈົ້າຜູ້ສະຫຼາດໃນສະມາທິ
ເຖິງຄວາມສຳເລັດອະພິນຍາ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໘] ຂ້າພະເຈົ້າບັນລຸປະຕິສຳພິທາ ສະຫຼາດໃນອິດທິບາດ
ເຖິງຄວາມສຳເລັດໃນທຳທັງຫຼາຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໙] ໃນກັບທີ ໓໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະພຸດທະເຈົ້າໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໙໐] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໑] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໙໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸດຕະຣະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸດຕະຣະເຖຣາປະທານທີ ໖ ຈົບ**

# ໗. ອະປະຣະອຸດຕະຣະເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະອະປະຣະອຸດຕະຣະເຖຣະ

(ພຣະອະປະຣະອຸດຕະຣະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໖໓] ເມື່ອພຣະສິດທັດຖະໂລກກະນາດ ຜູ້ຊົງເປັນຜູ້ນຳສັດໂລກ
ສະເດັດດັບຂັນທະປະຣິນິບພານແລ້ວ
ຂ້າພະເຈົ້າໄດ້ນຳໝູ່ຍາດຕິພີ່ນ້ອງຂອງຂ້າພະເຈົ້າມາກະທຳການບູຊາພຣະທາດ

[໖໔] ໃນກັບທີ ໖໔ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ບູຊາພຣະທາດໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະທາດ

[໖໕] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໖] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໖໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະອະປະຣະອຸດຕະຣະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອະປະຣະອຸດຕະຣະເຖຣາປະທານທີ ໗ ຈົບ**

# ໗. ພັດທະຊີເຖຣາປະທານ

## ປະຫວັດໃນອະດີດຊາດຂອງພຣະພັດທະຊີເຖຣະ

(ພຣະພັດທະຊີເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໗] ໃນຄັ້ງນັ້ນ ຂ້າພະເຈົ້າລົງສູ່ສະໂບກຂະຣະນີ
ທີ່ຊ້າງນານາຊະນິດອາໄສອາບກິນ
ຖອນເຫງົ້າບົວໃນສະໂບກຂະຣະນີນັ້ນຂຶ້ນມາ
ຍ້ອນເຫດຕ້ອງການຈະກິນ

[໙໘] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ຊົງຜ້າກາສາວະຮຸ່ງເຮືອງດັ່ງນະພາສີຄຳ
ສະເດັດເຫາະໄປໃນອາກາດ

[໑໐໐] ໃນຄັ້ງນັ້ນ ພຣະພຸດທະອົງຊົງສະບັດຜ້າບັງສຸກຸນ
ຂ້າພະເຈົ້າໄດ້ຍິນສຽງຈຶ່ງແຫງນໜ້າຂຶ້ນເບິ່ງ
ໄດ້ພົບພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ

[໑໐໑] ຂ້າພະເຈົ້າຢືນຢູ່ ໃນບ່ອນນັ້ນເອງ
ໄດ້ທູນອ້ອນວອນພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກວ່າ
ນ້ຳເຜີ້ງພ້ອມທັງເຫງົ້າບົວ
ນ້ຳນົມ ເນຍໃສທີ່ມີຢູ່ໃນກ້ານບົວ ມີຢູ່

[໑໐໘] ຂໍພຣະພຸດທະເຈົ້າຜູ້ມີພຣະຈັກຂຸຈົ່ງຮັບເພື່ອອະນຸເຄາະຂ້າພຣະອົງເທີ້ນ
ລຳດັບນັ້ນ ພຣະສາດສະດາຜູ້ປະກອບດ້ວຍພຣະກະລຸນາ
ມີພຣະຍົດຍິ່ງໃຫຍ່ສະເດັດລົງຈາກອາກາດ

[໑໐໓] ພຣະສຳມາສຳພຸດທະເຈົ້າຜູ້ມີພຣະຈັກຂຸ
ຊົງຮັບພິກສາຫານຂອງຂ້າພະເຈົ້າເພື່ອຊົງອະນຸເຄາະ
ເມື່ອຊົງຮັບພິກສາຫານແລ້ວ
ໄດ້ກະທຳອະນຸໂມທະນາແກ່ຂ້າພະເຈົ້າວ່າ

[໑໐໔] ທ່ານຜູ້ມີບຸນຫຼາຍ ຂໍຈົ່ງມີຄວາມສຸກເທີ້ນ
ຄະຕິຈົ່ງສຳເລັດແກ່ທ່ານ ດ້ວຍການຖວາຍເຫງົ້າບົວນີ້
ທ່ານຈົ່ງໄດ້ຮັບຄວາມສຸກອັນໄພບູນເທີ້ນ

[໑໐໔] ພຣະຊິນນະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ເມື່ອຕັດພຣະດຳຣັດນີ້ແລ້ວ
ຊົງຮັບພິກສາຫານແລ້ວເຫາະໄປທາງອາກາດ

[໑໐໕] ລຳດັບນັ້ນ ຂ້າພະເຈົ້າຖືເຫງົ້າບົວກັບມາຍັງອາສົມ
ຂອງຂ້າພະເຈົ້າແຂວນເຫງົ້າບົວໄວ້ທີ່ຕົ້ນໄມ້
ແລ້ວຣະລຶກເຖິງທານຂອງຕົນ

[໑໐໗] ໃນຄັ້ງນັ້ນ ລົມພາຍຸໃຫຍ່ກໍເກີດຂຶ້ນ
ໄດ້ພັດປ່າໃຫ້ປັ່ນປ່ວນ
ໃນຄັ້ງນັ້ນ ອາກາດບັນລືລັ່ນແລະຟ້າຜ່າລົງມາ

[໑໐໘] ລຳດັບນັ້ນ ສາຍຟ້າຜ່າລົງທີ່ຫົວຂອງຂ້າພະເຈົ້າ
ຂ້າພະເຈົ້າເປັນຜູ້ນັ່ງຕາຍໃນບ່ອນນັ້ນເອງ

[໑໐໙] ຂ້າພະເຈົ້າປະກອບດ້ວຍບຸນກຳ
ຈຶ່ງໄປເກີດໃນສະຫວັນຊັ້ນດຸສິດ ຖິ້ມໄວ້ແຕ່ຊາກສົບ
ຂ້າພະເຈົ້າອະພິຣົມຢູ່ໃນເທວະໂລກ

[໑໑໐] ເທບອັບປະສອນ ໘໖,໐໐໐ ນາງລ້ວນປະດັບຕົກແຕ່ງຢ່າງສວຍງາມ
ປົນນິບັດຂ້າພະເຈົ້າທັງເຊົ້າແລະຄ່ຳ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໑໑໑] ໃນຄັ້ງນັ້ນ ຂ້າພະເຈົ້າກັບມາເກີດຍັງກຳເນີດມະນຸດ
ເປັນຜູ້ມີຄວາມສຸກ ຂ້າພະເຈົ້າບໍ່ມີຄວາມຂາດໃນໂພຄະເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໑໑໒] ຂ້າພະເຈົ້າອັນພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບ
ຜູ້ຄົງທີ່ພຣະອົງນັ້ນຊົງອະນຸເຄາະແລ້ວ ອາສະວະທັງປວງກໍສິ້ນໄປ
ບັດນີ້ ພົບໃໝ່ຍ່ອມບໍ່ມີ

[໑໑໓] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍເຫງົ້າບົວໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຫງົ້າບົວ

[໑໑໔] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໑໕] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໑໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະພັດທະຊິເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ພັດທະຊິເຖຣາປະທານທີ ໘ ຈົບ**

## ໙. ສີວະກະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະສີວະກະເຖຣະ

(ພຣະສີວະກະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑໗] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ສະເດັດທ່ຽວບິນທະບາດຢູ່
ຂ້າພະເຈົ້າເຫັນບາດທີ່ວ່າງເປົ່າ
ຈຶ່ງໄດ້ຖວາຍເຂົ້າໜົມກຸມມາດຈົນເຕັມບາດ

[໑໑໘] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ຖວາຍພິກສາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍເຂົ້າໜົມກຸມມາດ

[໑໑໙] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ

ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໐] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະສີວະກະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສີວະກະເຖຣາປະທານທີ ໙ ຈົບ**

## ໑໐. ອຸປະວານະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸປະວານະເຖຣະ

(ພຣະອຸປະວານະເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໒] ພຣະຊິນະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ
ຮຸ່ງເຮືອງດັ່ງກອງໄຟສະເດັດດັບຂັນທະປະຣິນິບພານແລ້ວ

[໑໘໓] ມະຫາຊົນມາປະຊຸມກັນບູຊາພຣະຕະຖາຄົດເຈົ້າ
ສ້າງຈິຕະກາທານຢ່າງງົດງາມແລ້ວ ຍົກພຣະສະຣີຣະຂຶ້ນວາງໄວ້

[໑໘໔] ຊົນເຫຼົ່ານັ້ນທັງໝົດພ້ອມທັງເທວະດາແລະມະນຸດ
ຖວາຍພຣະເພີງພຸດທະສະຣີຣະແລ້ວລວບລວມພຣະທາດ
ພາກັນສ້າງພຸດທະສະຖູບໄວ້ ໃນບ່ອນນັ້ນ

[໑໘໕] ສະຖູບຊັ້ນທີ ໑ ເຮັດດ້ວຍຄຳ
ຊັ້ນທີ ໒ ເຮັດດ້ວຍແກ້ວມະນີ ຊັ້ນທີ ໓ ເຮັດດ້ວຍເງິນ
ຊັ້ນທີ ໔ ເຮັດດ້ວຍແກ້ວຜຼຶກ

[໑໔໖] ທີ່ພຣະສະຖູບນັ້ນ ຊັ້ນທີ ໕ ເຮັດດ້ວຍແກ້ວທັບທິມ
ຊັ້ນທີ ໖ ເຮັດດ້ວຍແກ້ວລາຍ
ຊັ້ນທີ່ສູງ ໆ ຂຶ້ນໄປຈາກນີ້ເຮັດດ້ວຍແກ້ວທັງໝົດ

[໑໔໗] ຮ່າງຮ້ານ ເຮັດດ້ວຍແກ້ວມະນີ
ໄພທີ (ແທ່ນສຳລັບວາງເຄື່ອງສັກກາຣະ) ເຮັດດ້ວຍຣັດຕະນະ
ອົງພຣະສະຖູບເຮັດດ້ວຍຄຳລ້ວນ ສູງຂຶ້ນໄປໜຶ່ງໂຍດ

[໑໔໘] ໃນຄັ້ງນັ້ນ ໝູ່ເທວະດາມາປະຊຸມກັນ ໃນບ່ອນນັ້ນແລ້ວຮ່ວມປຶກສາກັນວ່າ
ເຖິງພວກເຮົາກໍຈັກສ້າງພຣະສະຖູບເພື່ອບູຊາພຣະໂລກກະນາດ ຜ຺ູ້ຄົງທີ່

[໑໔໙] ພຣະບໍຣົມສາຣີຣິກະທາດບໍ່ແຍກກັນ ຄືລວມເປັນກຸ່ມດຽວກັນ
ພວກເຮົາຈັກສ້າງພຣະສະຖູບຄອບໄວ້ທີ່ພຣະພຸດທະສະຖູບນີ້

[໑໕໐] ໝູ່ເທບໄດ້ຂະຫຍາຍພຣະສະຖູບໃຫ້ສູງຂຶ້ນໄປອີກໜຶ່ງໂຍດ
ດ້ວຍຣັດຕະນະທັງ ໗ ປະການ
ພຣະສະຖູບອົງນັ້ນຈຶ່ງມີຄວາມສູງ ໔ ໂຍດ
ເຊິ່ງສ່ອງສະຫວ່າງຂະຈັດຄວາມມືດໄດ້

[໑໕໑] ໃນຄັ້ງນັ້ນ ພວກນາກມາປະຊຸມກັນ ໃນບ່ອນນັ້ນແລ້ວ
ຮ່ວມປຶກສາກັນວ່າ ມະນຸດແລະເທວະດາເຫຼົ່ານັ້ນ
ໄດ້ພາກັນສ້າງພຣະພຸດທະສະຖູບສຳເລັດແລ້ວ
[໑໕໒] ພວກເຮົາຢ່າໄດ້ຜະໝາດກັນເລີຍ
ມະນຸດແລະເທວະດາບໍ່ຜະໝາດກັນແລ້ວ
ເຖິງພວກເຮົາກໍຈັກສ້າງພຣະສະຖູບ
ເພື່ອບູຊາພຣະໂລກກະນາດ ຜູ້ຄົງທີ່
[໑໕໓] ພວກນາກພາກັນລວບລວມແກ້ວມໍຣະກົດ ແກ້ວມະຫານິນ
ແລະແກ້ວມະນີໂຊຕິຣົດຊ່ອຍກັນປະດັບພຣະພຸດທະສະຖູບ
[໑໕໔] ໃນຄັ້ງນັ້ນ ພຣະສະຖູບທັງອົງ ສຳເລັດດ້ວຍແກ້ວມະນີ
ຈົນກະທັ້ງເປັນພຸດທະເຈດີສູງ ໓ ໂຍດ ສ່ອງແສງສະຫວ່າງສະໄຫວ

[໑໕໕] ໃນຄັ້ງນັ້ນ ພວກຄຸດມາປະຊຸມກັນແລ້ວ
ຮ່ວມປຶກສາກັນວ່າ ມະນຸດ ເທວະດາ
ແລະນາກເຫຼົ່ານັ້ນໄດ້ພາກັນເຮັດພຸດທະບູຊາແລ້ວ

[໑໓໖] ພວກເຮົາຢ່າມົວຜະໝາດຢູ່ເລີຍ
ມະນຸດ ນາກແລະເທວະດາບໍ່ຜະໝາດກັນແລ້ວ
ເຖິງພວກເຮົາກໍຈັກສ້າງພຣະສະຖູບ
ເພື່ອບູຊາພຣະໂລກກະນາດ ຜູ້ຄົງທີ່

[໑໓໗] ຄຸດເຫຼົ່ານັ້ນ ໄດ້ສ້າງພຣະສະຖູບ
ຄອບພຣະສະຖູບແກ້ວມະນີທັງອີງ
ແມ່ນພວກເຂົາກໍໄດ້ຂະຫຍາຍພຣະພຸດທະເຈດີໃຫ້ກວ້າງໄປອີກໜຶ່ງໂຍດ

[໑໓໘] ພຣະພຸດທະສະຖູບສູງຂຶ້ນໄປອີກ ໔ ໂຍດ ຮຸ່ງເຮືອງ
ຍ່ອມສ່ອງສະຫວ່າງໄປທົ່ວທຸກທິດ ເໝືອນດວງອາທິດອຸໄທ

[໑໓໙] ໃນຄັ້ງນັ້ນ ພວກກຸມພັນມາປະຊຸມກັນແລ້ວ
ຮ່ວມປຶກສາກັນວ່າ ມະນຸດ ເທວະດາ
ນາກແລະຄຸດກໍເປັນຄືກັນໝົດ

[໑໔໐] ຕ່າງກໍໄດ້ພາກັນສ້າງພຣະສະຖູບທີ່ອຸດົມພວກລະອີງ
ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ພວກເຮົາຢ່າມົວຜະໝາດກັນເລີຍ
ມະນຸດແລະເທວະດາບໍ່ຜະໝາດກັນແລ້ວ

[໑໔໑] ເຖິງພວກເຮົາກໍຈັກສ້າງພຣະສະຖູບ
ເພື່ອບູຊາພຣະໂລກກະນາດ ຜູ້ຄົງທີ່
ຈັກໃຊ້ຣັດຕະນະທັງຫຼາຍປະດັບພຣະພຸດທະເຈດີໃຫ້ກວ້າງອອກໄປ

[໑໔໒] ກຸມພັນແມ່ນເຫຼົ່ານັ້ນ
ໄດ້ຂະຫຍາຍພຣະພຸດທະເຈດີໃຫ້ກວ້າງອອກໄປອີກໜຶ່ງໂຍດ
ໃນຄັ້ງນັ້ນ ພຣະສະຖູບຈຶ່ງສູງຂຶ້ນເປັນ ໕ ໂຍດ
ຍ່ອມສ່ອງແສງສະຫວ່າງສະໄຫວ

[໑໔໓] ໃນຄັ້ງນັ້ນ ພວກຍັກມາປະຊຸມກັນ ໃນບ່ອນນັ້ນແລ້ວ
ຮ່ວມປຶກສາກັນວ່າ ມະນຸດ ເທວະດາ
ນາກ ຄຸດ ແລະກຸມພັນ

[໑໔໔] ຕ່າງກໍໄດ້ພາກັນສ້າງພຣະສະຖູບ
ທີ່ປະເສີດສຸດພວກລະອີງບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

ພວກເຮົາຢ່າມົວຜະໝາດກັນເລີຍ
ມະນຸດແລະເທວະດາບໍ່ຜະໝາດກັນແລ້ວ

[໑໔໕] ເຖິງພວກເຮົາກໍຈັກສ້າງພຣະສະຖູບ ບູຊາພຣະໂລກກະນາດ ຜູ້ຄົງທີ່
ນຳແກ້ວຜຶກມາປະດັບພຣະພຸດທະເຈດີໃຫ້ກວ້າງອອກໄປອີກ

[໑໔໖] ຍັກແມ່ນເຫຼົ່ານັ້ນ
ໄດ້ຂະຫຍາຍພຣະພຸດທະເຈດີໃຫ້ກວ້າງອອກໄປອີກໜຶ່ງໂຍດ
ໃນຄັ້ງນັ້ນ ພຣະສະຖູບຈຶ່ງສູງຂຶ້ນເປັນ ໖ ໂຍດ ສ່ອງແສງສະຫວ່າງສະໄຫວ

[໑໔໗] ໃນຄັ້ງນັ້ນ ພວກຄົນທັນມາປະຊຸມກັນແລ້ວ
ຮ່ວມປຶກສາກັນວ່າ ມະນຸດ ເທວະດາ
ນາກ ກຸມພັນ ແລະຄຸດກໍຄືກັນ

[໑໔໘] ພວກເຂົາທັງໝົດໄດ້ພາກັນສ້າງພຣະພຸດທະສະຖູບ
ໃນເລື້ອງສ້າງພຣະສະຖູບນີ້ ພວກເຮົາຍັງບໍ່ໄດ້ສ້າງ
ເຖິງພວກເຮົາກໍຈັກສ້າງພຣະສະຖູບ ບູຊາພຣະໂລກກະນາດ ຜູ້ຄົງທີ່

[໑໔໙] ໃນຄັ້ງນັ້ນ ຄົນທັນເຫຼົ່ານັ້ນ
ສ້າງໄພທີເປັນ ໗ ແຫ່ງແລ້ວໄດ້ເຮັດທຸງແລະສະເວດຕະສັດໄວ້
ພວກຄົນທັນໄດ້ຊ່ອຍກັນສ້າງພຣະສະຖູບເຊິ່ງສຳເລັດດ້ວຍຄຳລ້ວນ

[໑໕໐] ໃນຄັ້ງນັ້ນ ພຣະສະຖູບສູງຂຶ້ນເປັນ ໗ ໂຍດ
ສ່ອງແສງສະຫວ່າງສະໄຫວ ຈົນບໍ່ຮູ້ກາງເວັນຫຼືກາງຄືນ
ຍ້ອນມີແສງສະຫວ່າງຢູ່ຕະຫຼອດເວລາ

[໑໕໑] ດວງຈັນ ດວງອາທິດພ້ອມທັງດວງດາວ
ກໍຂົ່ມແສງພຣະສະຖູບນັ້ນບໍ່ໄດ້
ໃນທີ່ປະມານ ໑໐໐ ໂຍດໂດຍຮອບ ແມ່ນປະທີບກໍບໍ່ສ່ອງແສງ

[໑໕໒] ໂດຍການນັ້ນ ມະນຸດເຫຼົ່າໃດເຫຼົ່າໜຶ່ງຈະບູຊາພຣະສະຖູບ
ພວກເຂົາບໍ່ຂຶ້ນໄປສູ່ພຣະສະຖູບ
ພຽງໂຍນເຄື່ອງສັກກາຣະຂຶ້ນໄປເທິງອາກາດ

[໑໕໓] ຍັກທີ່ມີນາມວ່າອະພິສຳມະຕະ

ເຊິ່ງເຫຼົ່າເທວະດາຕັ້ງໄວ້ (ເພື່ອຮັກສາພຣະສະຖູບ)
ຄອຍຖ້າຮັບທຸງຫຼືພວງດອກໄມ້ໄປບູຊາໃຫ້ຍິ່ງຂຶ້ນ

[໑໕໔] ຊົນເຫຼົ່ານັ້ນບໍ່ເຫັນຍັກນັ້ນ
ຄົງເຫັນແຕ່ພວງດອກໄມ້ຂອງຍັກລອຍໄປຢູ່
ພວກເຂົາທັງໝົດເຫັນແລ້ວຢ່າງນີ້
ເມື່ອຕາຍໄປຈຶ່ງໄປສູ່ສຸຄະຕິ

[໑໕໕] ມະນຸດທັງຫຼາຍທີ່ບໍ່ພໍໃຈໃນພຣະພຸດທະພົດ
ແລະມະນຸດທັງຫຼາຍທີ່ເຫຼື້ອມໃສສາດສະໜາ
ຜູ້ມີຄວາມຕ້ອງການຈະເຫັນປາຕິຫານ
ຈະພາກັນບູຊາພຣະສະຖູບ

[໑໕໖] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ເປັນຄົນຮັບຈ້າງຢູ່ໃນນະຄອນຫົງສະວະດີ
ເຫັນປະຊາຊົນພາກັນຮື່ນເຣິງບັນເທີງໃຈ
ຈຶ່ງຄິດແນວນີ້ໃນຄັ້ງນັ້ນວ່າ

[໑໕໗] ໝູ່ຊົນເຫຼົ່ານີ້ພາກັນດີໃຈບໍ່ເຄີຍອີ່ມເຖິງສັກກາຣະ
ເຊິ່ງຜາກົດທີ່ເຮືອນແຫ່ງພຣະທາດ
ຂອງພຣະຜູ້ມີພຣະພາກເຈົ້າພຣະອົງໃດ
ພຣະຜູ້ມີພຣະພາກເຈົ້າຜູ້ຍິ່ງໃຫຍ່ພຣະອົງນັ້ນ ບໍ່ເປັນເຊັ່ນນັ້ນ

[໑໕໘] ແມ່ນເຮົາກໍຈັກເຮັດສັກກາຣະບູຊາພຣະໂລກກະນາດ ຜູ້ຄົງທີ່
ເປັນທຳທາຍາດຂອງພຣະອົງໃນອະນາຄົດຕະການ

[໑໕໙] ຂ້າພະເຈົ້າຈຶ່ງໃຊ້ຜ້າຫົ່ມຂອງຂ້າພະເຈົ້າທີ່ຊ່າງຍ້ອມຊັກໄວ້ຢ່າງດີ
ຄ້ອງໄວ້ທີ່ປາຍໄມ້ໄຜ່ແລ້ວຈຶ່ງຍົກຂຶ້ນເປັນທຸງໃນທ້ອງຟ້າ

[໑໖໐] ຍັກອະພິສຳມະຕະ ຈັບທຸງຂອງຂ້າພະເຈົ້ານຳໄປໃນທ້ອງຟ້າ
ຂ້າພະເຈົ້າເຫັນແຕ່ທຸງສະບັດປິວຍ້ອນສາຍລົມ
ຈຶ່ງທຳຄວາມຮ່າເຣິງໃຫ້ເກີດຂຶ້ນຢ່າງຍິ່ງ

[໑໖໑] ຂ້າພະເຈົ້າເຮັດຈິດໃຫ້ເຫຼື້ອມໃສໃນທຸງນັ້ນແລ້ວ
ເຂົ້າໄປຫາພຣະສະມະນະ ອະພິວາດພຣະພິກຂຸອົງນັ້ນແລ້ວ
ຈຶ່ງຖາມເຖິງວິບາກໃນການບູຊາດ້ວຍທຸງ

[໑໖໘] ພຣະພິກຂຸອົງນັ້ນມີຄວາມຍິນດີຫຼາຍຕໍ່ຂ້າພະເຈົ້າ
ຈຶ່ງກ່າວຄຳເວົ້າທີ່ກະທຳຄວາມປີຕິໃຫ້ເກີດແກ່ຂ້າພະເຈົ້າວ່າ
ທ່ານຈັກໄດ້ສະເຫວີຍວິບາກແຫ່ງທຸງນັ້ນຕະຫຼອດການ

[໑໖໓] ກອງທັບ ໔ ເຫຼົ່າ ຄື ພົນຊ້າງ ພົນມ້າ ພົນລົດ
ພົນຍ່າງ ຈັກແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໑໖໔] ເຄື່ອງດົນຕີ ໖໐,໐໐໐ ຢ່າງ
ກອງທີ່ປະດັບຕົກແຕ່ງຢ່າງສວຍງາມ
ຈັກແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໑໖໕] ສາວໄວລຸ້ນ ໘໖,໐໐໐ ນາງ ລ້ວນປະດັບຕົກແຕ່ງສວຍງາມ
ສວມໃສ່ຜ້າອາພອນອັນງົດງາມ ຫ້ອຍຕຸ້ມຫູແກ້ວມະນີ

[໑໖໖] ມີຕາກົມໃຫຍ່ ມີປີກກະຕິຣ່າເຣີງ ຮູບຮ່າງງາມ
ແອວນ້ອຍແອວບາງ ຈັກແວດລ້ອມທ່ານເປັນນິດ
ນີ້ເປັນຜົນແຫ່ງການຖວາຍທຸງ

[໑໖໗] ທ່ານຈັກຣື່ນຣົມໃນເທວະໂລກຕະຫຼອດ ໓໐,໐໐໐ ກັບ
ຈັກເກີດເປັນຈອມເທບ ຄອງເທວະສົມບັດຕະຫຼອດ ໘໐ ຊາດ

[໑໖໘] ຈັກເປັນພຣະເຈົ້າຈັກກະພັດ ໑,໐໐໐ ຊາດ
ຈັກເປັນພຣະເຈົ້າປະເທດຣາດອັນໄພບູນນັບຊາດບໍ່ຖ້ວນ

[໑໖໙] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໗໐] ທ່ານຖືກກຸສົນມູນຕັກເຕືອນແລ້ວຈຸຕິຈາກເທວະໂລກ
ປະກອບດ້ວຍບຸນກຳ
ຈັກເກີດເປັນເຜົ່າພັນຂອງພາມ

[໑໗໑] ທ່ານຈັກລະຖິ້ມສົມບັດປະມານ ໘໐ ໂກດ

ແລະທາດກຳມະກອນຈຳນວນຫຼາຍແລ້ວ
ບວດໃນສາດສະໜາຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂຄດົມ

[໑໗໔] ທ່ານມີຊື່ວ່າ ອຸປະວານະ
ຈັກໃຫ້ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ໂຄດົມ
ຜູ້ປະເສີດແຫ່ງວົງສາກະຍະ ຜູ້ປະເສີດ ຊົງພໍພຣະທະໄທແລ້ວ
ເປັນສາວົກຂອງພຣະສາດສະດາ

[໑໗໓] ກຳທີ່ຂ້າພະເຈົ້າໄດ້ເຮັດໄວ້ໃນກັບທີ ໑໐໐,໐໐໐
ໄດ້ສະແດງຜົນແກ່ຂ້າພະເຈົ້າແລ້ວໃນອັດຕະພາບນີ້
ຂ້າພະເຈົ້າລຸດພົ້ນດີແລ້ວ (ຈາກກິເລດ)
ເໝືອນຄວາມໄວຂອງລູກສອນທີ່ພົ້ນໄປຈາກແລ່ງ
ຂ້າພະເຈົ້າເຜົາກິເລດທັງຫຼາຍໄດ້ແລ້ວ

[໑໗໔] ເມື່ອຂ້າພະເຈົ້າເປັນພຣະເຈົ້າຈັກກະພັດ
ເປັນໃຫຍ່ໃນທະວີບທັງ ໔ ຊົນທັງຫຼາຍ
ຈັກໂບກທຸງຢູ່ປະຈຳຕະຫຼອດ ໓ ໂຍດໂດຍຮອບທຸກເວລາ

[໑໗໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້າພະເຈົ້າໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍທຸງ

[໑໗໖] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗໗] ການທີ່ຂ້າພະເຈົ້າມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໗໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ທ່ານພຣະອຸປະວານະເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸປະວານະເຖຣາປະທານທີ ໑໐ ຈົບ**

## ໑໑. ຣັດຖະປາລະເຖຣາປະທານ

### ປະຫວັດໃນອະດີດຊາດຂອງພຣະຣັດຖະບານເຖຣະ

(ພຣະຣັດຖບານເຖຣະ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໙] ຂ້າພະເຈົ້າໄດ້ຖວາຍຊ້າງປະເສີດ ມີງາງອນງາມ
ສົມຄວນເປັນພາຫະນະແດ່ພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າ ປະທຸມຸດຕະຣະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່

[໑໘໐] ພະຍາຊ້າງນັ້ນງົດງາມດ້ວຍສະເວດຕະສັດ
ພ້ອມທັງເຄື່ອງປະດັບແລະຄວານຊ້າງ
ຂ້າພະເຈົ້າໃຫ້ຕີຣາຄາ ທັງໝົດນັ້ນແລ້ວ
ໃຫ້ສ້າງສັງຄາຣາມ (ດ້ວຍຣາຄາຊ້າງນັ້ນ)

[໑໘໑] ຂ້າພະເຈົ້າໃຫ້ສ້າງຜາສາດ ໕໔,໐໐໐ ຫຼັງ
ພ່ຳເພັງທານເໝືອນຫ້ວງນ້ຳໃຫຍ່
ມອບຖວາຍພຣະພຸດທະເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໘໒] ພຣະສະຍຳພູພຸດທະເຈົ້າ ຜູ້ມີຄວາມພຽນຫຼາຍ
ເປັນບຸກຄົນຜູ້ເລີດ ໄດ້ຊົງອະນຸໂມທະນາແລ້ວ
ເມື່ອຈະໃຫ້ຊົນທັງໝົດຮື່ນເຣີງ ຊົງສະແດງອະມະຕະບົດແລ້ວ

[໑໘໓] ພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ປະທັບນັ່ງໃນທ່າມກາງພິກຂຸສົງແລ້ວ
ຊົງພະຍາກອນກຳນັ້ນແກ່ຂ້າພະເຈົ້າ
ໄດ້ຕັດພຣະຄາຖາເຫຼົ່ານີ້ວ່າ

[໑໘໔] ບຸກຄົນນີ້ໃຫ້ສ້າງຜາສາດ ໕໔,໐໐໐ ຫຼັງ
ເຮົາຈັກກ່າວຜົນວິບາກຂອງເຂົາ
ພວກທ່ານຈົ່ງຟັງເຮົາກ່າວເທີ້ນ

[໑໗໔] ເຮືອນຍອດ ໑໗,໐໐໐ ຫຼັງ ຈັກເກີດມີ
ແລະເຮືອນຍອດເຫຼົ່ານັ້ນສຳເລັດດ້ວຍຄຳລ້ວນ
ບັງເກີດຂຶ້ນໃນວິມານຊັ້ນສູງສຸດ

[໑໗໕] ຜູ້ນີ້ຈັກເກີດເປັນຈອມເທບ
ຄອງເທວະສົມບັດຕະຫຼອດ ໕໐ ຊາດ
ຈັກເກີດເປັນພຣະເຈົ້າຈັກກະພັດ ໕໗ ຊາດ

[໑໗໖] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໗໗] ເຂົາຖືກກຸສົນມູນຕັກເຕືອນແລ້ວ ຈັກຈຸຕິຈາກເທວະໂລກ
ບັງເກີດໃນຕະກູນທີ່ມັ່ງຄັ່ງ ມີໂພຄະເປັນຈຳນວນຫຼາຍ

[໑໗໘] ເຂົາຈັກມີຊື່ວ່າຣັດຖະບານ
ພາຍຫຼັງຖືກກຸສົນມູນຕັກເຕືອນແລ້ວ
ຈັກອອກບວດເປັນສາວົກຂອງພຣະສາດສະດາ

[໑໘໐] ເຂົາມີຈິດເດັດດ່ຽວຍິນດີເພື່ອພ່ຳເພັງພຽນ
ສະງົບຣະງັບ ບໍ່ມີອຸປະທິ
ກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໑໘໑] ຂ້າພະເຈົ້າຂວນຂວາຍອອກບວດ ລະໂພຄະສົມບັດ
ບໍ່ມີຄວາມຮັກໃນໂພຄະ ເຊິ່ງເໝືອນກ້ອນນ້ຳລາຍ

[໑໘໔] ຂ້າພະເຈົ້າມີຄວາມພຽນນຳພາທຸຣະໄປ
ອັນເປັນເຫດນຳທຳເປັນແດນກະເສມຈາກໂຍຄະມາໃຫ້
ຂ້າພະເຈົ້າຊົງຮ່າງກາຍອັນມີໃນພົບສຸດທ້າຍ
ຢູ່ໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ

[໑໘໓] ກິເລດທັງຫຼາຍຂ້າພະເຈົ້າກໍເຜົາໄດ້ແລ້ວ
ພົບທັງປວງຂ້າພະເຈົ້າກໍຖອນໄດ້ແລ້ວ
ຂ້າພະເຈົ້າຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘໔] ການທີ່ຂ້າພະເຈົ້າໄດ້ມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້າພະເຈົ້າໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ

[໑໘໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້າພະເຈົ້າໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້າພະເຈົ້າກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະຣັດຖະປານເຖຣະໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ຣັດຖະປາລະເຖຣາປະທານທີ ໑໑ ຈົບ**

**ຍະສະວັກທີ ໕໖ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ຍະສະເຖຣາປະທານ
໒. ນະທີກັດສະປະເຖຣາປະທານ
໓. ຄະຍາກັດສະປະເຖຣາປະທານ
໔. ກິມິລະເຖຣາປະທານ
໕. ວັດຊີປຸດຕະເຖຣາປະທານ
໖. ອຸດຕະຣະເຖຣາປະທານ
໗. ອະປະຣະອຸດຕະຣະເຖຣາປະທານ
໘. ພັດທະຊິເຖຣາປະທານ
໙. ສີວະກະເຖຣາປະທານ
໑໐. ອຸປະວານະເຖຣາປະທານ
໑໑. ຣັດຖະປາລະເຖຣາປະທານ

**ໃນວັກນີ້ ບັນດິດນັບຄາຖາໄດ້ ໑໘໕ ຄາຖາ**

**ເຖຣາປະທານ ຈົບ**

**ພຸດທາປະທານ ປັດເຈກະພຸດທາປະທານ**

**ແລະເຖຣາປະທານ ຈົບພຽງເທົ່ານີ້**

# ພຣະສຸດຕັນຕະປິດົກ

## ຂຸດທະກະນິກາຍ ເຖຣີອະປະທານ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໑. ສຸເມທາວັກ

### ໝວດວ່າດ້ວຍພຣະເຖຣີຊື່ສຸເມທາເປັນຕົ້ນ

### ໑. ສຸເມທາເຖຣີຍາປະທານ

#### ປະຫວັດໃນອະດີດຊາດຂອງພຣະສຸເມທາເຖຣີ

ລຳດັບຕໍ່ໄປນີ້ ຈົ່ງສະດັບອຸປາທານຂອງພຣະເຖຣີຕໍ່ໄປ
(ພຣະສຸເມທາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າໂກນາຄະມະນະ
ປະທັບຢູ່ທີ່ສັງຄາຣາມ
ຂ້ານ້ອຍເປັນຍິງສາວສະຫາຍກັນ ໓ ຄົນ ໄດ້ຖວາຍວິຫານທານ

[໒] ຂ້ານ້ອຍທັງຫຼາຍເກີດໃນເທວະໂລກ ໑໐ ເທື່ອ ໑໐໐ ເທື່ອ
໑໐໐,໐໐໐ ເທື່ອ ໃນມະນຸດໂລກ ບໍ່ຈຳຕ້ອງເວົ້າເຖິງ

[໓] ໃນເທວະໂລກຂ້ານ້ອຍເປັນຜູ້ມີລິດຫຼາຍ
ໃນມະນຸດໂລກບໍ່ຈຳຕ້ອງເວົ້າເຖິງ
ໄດ້ເປັນນາງແກ້ວ ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ

[໔] ຊົນ ໓ ຄົນ ຄື ນາງທະນັນຊານີພາມມະນີ
ພຣະນາງເຂມາເຖຣີ ແລະຂ້ານ້ອຍ ໄດ້ສັ່ງສົມກຸສົນໄວ້ໃນຊາດນັ້ນ
ເກີດໃນຕະກູນທີ່ພຽບພ້ອມທຸກຢ່າງ

[໕] ໄດ້ສ້າງອາຣາມຢ່າງສວຍງາມ
ປະດັບດ້ວຍເຄື່ອງຕົກແຕ່ງທຸກຢ່າງສຳເລັດແລ້ວ

ມອບຖວາຍພຣະສົງມີພຣະພຸດທະເຈົ້າເປັນປະມຸກ
ເປັນຜູ້ເພີດເພີນແລ້ວ

[໖] ຍ້ອນອຳນາດແຫ່ງກຳນັ້ນ
ຂ້ານ້ອຍເກີດໃນບ່ອນໃດ ໆ
ໃນເທວະໂລກກໍຕາມ ໃນມະນຸດໂລກກໍຕາມ
ກໍເຖິງຄວາມເປັນຜູ້ເລີດ

[໗] ໃນກັບນີ້ເອງ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າ ກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໘] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າກິກີ
ຊົງເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ອຸດົມ
ຊົງເປັນອຸປັດຖາກຂອງພຣະພຸດທະເຈົ້າຜູ້ສະແຫວງຫາພຣະຄຸນອັນຍິ່ງໃຫຍ່

[໙] ພຣະອົງມີພຣະຣາດຊະທິດາ ໗ ພຣະອົງ
ພຣະຣາດຊະກັນຍາເຫຼົ່ານັ້ນດຳຣົງຢູ່ໃນຄວາມສຸກ
ຊົງພໍພຣະທະໄທໃນການອຸປັດຖາກພຣະພຸດທະເຈົ້າ
ແລະປະພຶດພົມມະຈັນ

[໑໐] ຂ້ານ້ອຍເປັນພຣະສະຫາຍຂອງພຣະຣາດຊະທິດາເຫຼົ່ານັ້ນ
ເປັນສະຕີຜູ້ໝັ້ນຄົງໃນສີນ ໄດ້ຖວາຍທານໂດຍເຄົາລົບ
ປະພຶດວັດຢູ່ໃນເຮືອນນັ້ນເອງ

[໑໑] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໒] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນຕາວະຕິງສານັ້ນແລ້ວ
ໄປເກີດໃນສະຫວັນຊັ້ນຍາມາ
ຈຸຕິຈາກສະຫວັນຊັ້ນຍາມານັ້ນແລ້ວໄປເກີດໃນສະຫວັນຊັ້ນດຸສິດ
ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວໄປເກີດໃນສະຫວັນຊັ້ນນິມມານະຣະດີ

จุติจากสะหวันຊັ້ນนิมมานะระดีນັ້ນແລ້ວໄປເກີດໃນສະຫວັນ
ຊັ້ນປະຣະນິມມິຕະວະສະວັດດີ

[໑໓] ຂ້ານ້ອຍປະກອບບຸນກຳໄວ້
ເກີດໃນພົບໃດ ໆ ໃນພົບນັ້ນ ໆ
ກໍໄດ້ເປັນພຣະມະເຫສີຂອງພຣະຣາຊາ

[໑໔] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນປະຣະນິມມິຕະວະສະວັດດີນັ້ນແລ້ວ
ມາເກີດໃນໝູ່ມະນຸດ ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າແຜ່ນດິນ

[໑໕] ສະເຫວີຍສົມບັດທັງໃນເທວະໂລກແລະມະນຸດໂລກ
ມີຄວາມສຸກທຸກຊາດ ວຽນວ່າຍຕາຍເກີດຢູ່ຫຼາຍຊາດ

[໑໖] ນັ້ນເປັນເຫດ ເປັນແດນເກີດ ແລະມູນເຫດ
ຄືເປັນຄວາມສົມຄວນໃນພຣະສາດສະໜາ
ນັ້ນເປັນສະໂມທານຂໍ້ທີ ໑
ຂໍ້ນັ້ນເປັນຄວາມດັບຂອງຂ້ານ້ອຍຜູ້ຍິນດີໃນທຳ

[໑໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໘] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະສຸເມທາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສຸເມທາເຖຣີຍາປະທານທີ ໑ ຈົບ**

# ໘. ເມຂະລະທາຍິກາເຖຣີຍາປະທານ

## ປະຫວັດໃນອະດີດຊາດຂອງພຣະເມຂະລະທາຍິກາເຖຣີ

(ພຣະເມຂະລະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໐] ຂ້ານ້ອຍໄດ້ສ້າງພຣະສະຖູບ
ເພື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າສິດທັດຖະ
ຂ້ານ້ອຍໄດ້ຖວາຍສັງວານ ເພື່ອນະວະກຳສະຖູບຂອງພຣະສາດສະດາ

[໘໑] ແລະເມື່ອມະຫາສະຖູບສຳເລັດແລ້ວ ຂ້ານ້ອຍເຫຼື້ອມໃສຕໍ່ພຣະມຸນີ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ໄດ້ຖວາຍສັງວານອີກດ້ວຍມືທັງ ໘ ຂອງຕົນ

[໘໒] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍສັງວານໄວ້ໃນຄັ້ງນັ້ນ ໆ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການສ້າງພຣະສະຖູບ

[໘໓] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໘໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະເມຂະລະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເມຂະລະທາຍິກາເຖຣີຍາປະທານທີ ໘ ຈົບ**

# ໓. ມັນທະປະທາຍິກາເຖຣີຍາປະທານ

## ປະຫວັດໃນອະດີດຊາດຂອງພຣະມັນທະປະທາຍິກາເຖຣີ

(ພຣະມັນທະປະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ຂ້ານ້ອຍໄດ້ໃຫ້ນາຍຊ່າງສ້າງພື້ນດິນ
ຖວາຍພຣະພຸດທະເຈົ້າພຣະນາມວ່າ ໂກນາຄະມະນະ
ແລະໄດ້ອຸທິດຖວາຍພຣະສະຖູບທີ່ປະເສີດແກ່ພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນຂອງໂລກໄວ້

[໔໗] ຂ້ານ້ອຍໄປສູ່ຊົນນະບົດ ນິຄົມ ຫຼື ຣາດຊະທານີໃດ ໆ
ຍ່ອມໄດ້ຮັບການບູຊາໃນບ່ອນນັ້ນ ໆ ທຸກແຫ່ງ
ນີ້ເປັນຜົນແຫ່ງບຸນກຳ

[໔໘] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໙] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໕໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະມັນທະປະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມັນທະປະທາຍິກາເຖຣີຍາປະທານທີ ໓ ຈົບ**

## ໔. ສັງກະມະນະທາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະສັງກະມະນະທາເຖຣີ

(ພຣະສັງກະມະນະທາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໑] ເມື່ອພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ຈະເລີນທີ່ສຸດໃນໂລກ ຜູ້ຄົງທີ່
ຊົງຊ່ອຍສັດໃຫ້ຂ້າມພົ້ນ ສະເດັດດຳເນີນໄປຕາມຖະໜົນ

[໓໒] ກຸນລະບຸດກຸນລະທິດາອອກຈາກເຮືອນແລ້ວນອນຄວ່ຳໜ້າ
ໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ຈະເລີນທີ່ສຸດໃນໂລກ ຜູ້ຊົງອະນຸເຄາະ
ໄດ້ສະເດັດຢຽບໄປເທິງຫົວຂ້ານ້ອຍ

[໓໓] ພຣະອົງຊົງເປັນຜູ້ນຳສັດໂລກ
ເມື່ອສະເດັດຢຽບແລ້ວ ໄດ້ສະເດັດເລີຍໄປ
ຂ້ານ້ອຍໄດ້ໄປເກີດໃນສະຫວັນຊັ້ນດຸສິດ
ກໍຍ້ອນຈິດທີ່ເຫຼື້ອມໃສນັ້ນ

[໓໔] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໕] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະສັງກະມະນະທາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສັງກະມະນະທາເຖຣີຍາປະທານທີ ໔ ຈົບ**

# ໕. ນະລະມາລິກາເຖຣິຍາປະທານ

## ປະຫວັດໃນອະດີດຊາດຂອງພຣະນະລະມາລິກາເຖຣີ

(ພຣະນະລະມາລິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເກີດເປັນນາງກິນນະຣີ
ອາໄສຢູ່ທີ່ຝັ່ງແມ່ນ້ຳຈັນທະພາຄາ
ຂ້ານ້ອຍໄດ້ເຫັນພຣະສະຍຳພູພຸດທະເຈົ້າ
ຜູ້ປາສະຈາກທຸລິຄືກິເລດ ບໍ່ຊິງພ່າຍແພ້

[໓໘] ຂ້ານ້ອຍເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ເກີດໂສມະນັດ
ປະນົມມືແລ້ວ ຖືພວງມາໄລດອກອໍ້ມາບູຊາພຣະສະຍຳພູ

[໓໙] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍກິນນະຣີແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໐] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໓໖ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໑໐ ພຣະອົງ
ຂ້ານ້ອຍສະເທືອນກຸສົນກຳແລ້ວກໍອອກບວດເປັນບັນພະຊິດ

[໔໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ອາສະວະທັງປວງກໍສິ້ນແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໒] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້ານ້ອຍໃຊ້ດອກໄມ້ບູຊາໄວ້
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໔໓] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ

ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ພຣະນະລະມາລິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນະລະມາລິກາເຖຣີຍາປະທານທີ ໕ ຈົບ**

## ໖. ເອກະປິນດະປາຕະທາຍິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະເອກະປິນດະປາຕະທາຍິກາເຖຣີ

(ພຣະເອກະປິນດະປາຕະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໔໖] ໃນນະຄອນພັນທຸມະດີ ມີກະສັດພຣະອົງໜຶ່ງ
ພຣະນາມວ່າພັນທຸມາ ຂ້ານ້ອຍເປັນພຣະມະເຫສີຂອງພຣະອົງ
ຍ່ອມສົນທະນາກັນເປັນບາງເທື່ອບາງເວລາເທົ່ານັ້ນ

[໔໗] ໃນຄັ້ງນັ້ນ ຂ້ານ້ອຍນັ່ງຢູ່ໃນບ່ອນສະຫງັດ ຄິດແນວນີ້ວ່າ
ກຸສົນທີ່ຈະນຳຕິດຕົວໄປເຊິ່ງເຮົາເຮັດໄວ້ບໍ່ມີເລີຍ

[໔໘] ເຮົາຄົງຈະຕ້ອງຕົກນະຮົກທີ່ມີຄວາມຮ້ອນຮົນຫຼາຍ
ທັງເຜັດຮ້ອນໂຫດຮ້າຍແສນຈະທາລຸນຢ່າງແນ່ນອນ
ເຮົາບໍ່ມີຄວາມສົງໄສໃນຂໍ້ນີ້ເລີຍ

[໔໙] ຂ້ານ້ອຍຈຶ່ງໄປເຂົ້າເຝົ້າພຣະຣາຊາແລ້ວຂາບທູນດັ່ງນີ້ວ່າ
ຂ້າແຕ່ພຣະອົງຜູ້ເປັນກະສັດ
ຂໍພຣະອົງຊົງພຣະຣາດຊະທານສະມະນະ

ແກ່ຂ້ານ້ອຍຈັກອີງໜຶ່ງເທີ້ນ
ຂ້ານ້ອຍຈັກນິມົນທ່ານໃຫ້ສັນ

[໕໐] ພຣະມະຫາຣາຊາໄດ້ພຣະຣາດຊະທານສະມະນະ
ຜູ້ມີອິນຊີອັນອົບຮົມແລ້ວແກ່ຂ້ານ້ອຍ
ຂ້ານ້ອຍຮັບບາດຂອງທ່ານມາແລ້ວ
ນິມົນໃຫ້ສັນຈົນອີ່ມໜຳດ້ວຍອາຫານຢ່າງດີເລີດ

[໕໑] ຂ້ານ້ອຍໄດ້ປຸງອາຫານຢ່າງດີເລີດ
ແລະເຄື່ອງລູບທາທີ່ມີກິ່ນຫອມ
ປິດດ້ວຍຕາໜ່າງ ຄຸມດ້ວຍຜ້າສີເຫຼືອງ

[໕໒] ຂ້ານ້ອຍຣະລຶກເຖິງວັດຖຸທານຂອງຂ້ານ້ອຍນີ້ເປັນອາລົມຈົນຕະຫຼອດຊີວິດ
ເຮັດຈິດໃຫ້ເຫຼື້ອມໃສໃນກຸສົນກຳນັ້ນແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໕໓] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໓໐ ພຣະອົງ
ສິ່ງທີ່ໃຈຂອງຂ້ານ້ອຍປາຖະໜາກໍບັງເກີດຕາມຄວາມປາຖະໜາ

[໕໔] ຂ້ານ້ອຍໄດ້ເປັນພຣະມະເຫສີ
ຂອງພຣະເຈົ້າຈັກກະພັດ ໒໐ ພຣະອົງ
ເປັນຍິງສາວຜູ້ມີກຸສົນອັນສັ່ງສົມໄວ້ແລ້ວ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່

[໕໕] ຂ້ານ້ອຍເປັນຜູ້ພົ້ນຈາກເຄື່ອງຜູກພັນທຸກຢ່າງແລ້ວ
ຂ້ານ້ອຍປາສະຈາກຕັນຫາທີ່ຈະໃຫ້ເກີດອີກ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໕໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໕໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ

ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໗] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໕໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະເອກະປິນດະປາຕະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການດັ່ງນີ້

**ເອກະປິນດະປາຕະທາຍິກາເຖຣີຍາປະທານທີ ໖ ຈົບ**

## ໗. ກະຕັດສຸພິກຂະທາຍິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະກະຕັດສຸພິກຂະທາຍິກາເຖຣີ

(ພຣະກະຕັດສຸພິກຂະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໖໐] ຂ້ານ້ອຍໄດ້ຕັກພິກສາຫານຈອງໜຶ່ງຖວາຍພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດພຣະນາມວ່າ ຕິດສະ ຜູ້ພຣະສາດສະດາ
ເຊິ່ງກຳລັງສະເດັດບິນທະບາດຢູ່

[໖໑] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຕິດສະ ຜູ້ພຣະສາດສະດາ
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ ຊົງຮັບແລ້ວ
ໄດ້ປະທັບຢືນທີ່ຖະໜົນຊົງເຮັດອະນຸໂມທະນາແກ່ຂ້ານ້ອຍວ່າ

[໖໒] ທ່ານຖວາຍພິກສາຫານຈອງໜຶ່ງນີ້ແລ້ວ
ຈັກໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ຈັກເປັນພຣະມະເຫສີຂອງທ້າວເທວະຣາດ ໓໖ ພຣະອົງ

[໖໓] ຈັກເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໕໐ ພຣະອົງ
ແລະຈັກໄດ້ສິ່ງຕາມທີ່ໃຈປາຖະໜາທຸກຢ່າງໃນການທັງປວງ

[໖໔] ທ່ານສະເຫວີຍສົມບັດແລ້ວ ຈັກເປັນຜູ້ບໍ່ມີຄວາມຫ່ວງໃຍບວດ
ຈັກກຳນົດຮູ້ອາສະວະທັງປວງເປັນຜູ້ບໍ່ມີອາສະວະແລ້ວນິບພານ

[໖໕] ເມື່ອຕັດຢ່າງນີ້ແລ້ວພຣະສຳມາສຳພຸດທະເຈົ້າພຣະນາມວ່າ ຕິດສະ
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ ເປັນນັກປາດ
ໄດ້ສະເດັດເຫາະຂຶ້ນສູ່ທ້ອງຟ້າ ເໝືອນພະຍາຫົງໄປໃນອາກາດ

[໖໖] ທານຂ້ານ້ອຍຖວາຍໄວ້ດີແລ້ວ
ຍັນສົມບັດຂ້ານ້ອຍກໍໄດ້ບູຊາດີແລ້ວ
ຂ້ານ້ອຍໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ
ກໍຍ້ອນການຖວາຍພິກສາຫານຈອງໜຶ່ງ

[໖໗] ໃນກັບທີ ໗໔ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພິກສາຫານ

[໖໘] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໖໙] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໗໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະກະຕັດສຸພິກຂະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກະຕັດສຸພິກຂະທາຍິກາເຖຣິຍາປະທານທີ ໗ ຈົບ**

# ໗. ສັດຕະອຸບປະລະມາລິກາເຖຣີຍາປະທານ

## ປະຫວັດໃນອະດີດຊາດຂອງພຣະສັດຕະອຸບປະລະມາລິກາເຖຣີ

(ພຣະສັດຕະອຸບປະລະມາລິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໑] ໃນນະຄອນອະຣຸນະວະດີ ມີກະສັດພຣະອົງໜຶ່ງພຣະນາມວ່າ ອະຣຸນ
ຂ້ານ້ອຍເປັນພຣະມະເຫສີຂອງພຣະອົງ ຂ້ານ້ອຍບໍ່ໄດ້ຮ້ອຍພວງມາໄລ

[໗໒] ໄດ້ຈັບດອກອຸບົນມີກິ່ນຫອມເໝືອນດອກໄມ້ທິບມາ ໗ ດອກ
ແລ້ວນັ່ງໃນຜາສາດທີ່ປະເສີດ ຄິດແນວນີ້ໃນຂະນະນັ້ນວ່າ

[໗໓] ປະໂຫຍດອັນໃດສຳລັບເຮົາດ້ວຍພວງມາໄລເຫຼົ່ານີ້
ເຊິ່ງເຮົານຳມາປະດັບຫົວຂອງຕົນເອງ
ເຮົາຄວນນຳໄປບູຊາພຣະຍານຂອງພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດ ຈະປະເສີດກວ່າ

[໗໔] ເຮົາເມື່ອຈະບູຊາພຣະສຳມາສຳພຸດທະເຈົ້າ ນັ່ງແລ້ວທີ່ໃກ້ປະຕູ
ຈັກບູຊາພຣະມະຫາມຸນີສຳມາສຳພຸດທະເຈົ້າ ໃນເວລາທີ່ພຣະອົງສະເດັດມາ

[໗໕] ພຣະຊິນນະເຈົ້າຜູ້ງົດງາມດັ່ງຕົ້ນຣົກຟ້າຂາວ
ເໝືອນພະຍາໄກສອນຣາດຊະສີ
ພ້ອມດ້ວຍພິກຂຸສົງ ສະເດັດມາຕາມຖະໜົນ

[໗໖] ຂ້ານ້ອຍເຫັນພຣະພຸດທະຣັງສີແລ້ວ ກໍຣ່າເຣິງຕື່ນເຕັ້ນ
ຍັງບໍ່ທັນເຖິງປະຕູ ກໍໄດ້ບູຊາພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໗໗] ເຮັດດອກອຸບົນ ໗ ດອກເຫຼົ່ານັ້ນ
ໃຫ້ແຜ່ຂະຫຍາຍເປັນຫຼັງຄາກັ້ນຢູ່ໃນທ້ອງຟ້າ
ເໜືອພຣະສຽນຂອງພຣະພຸດທະເຈົ້າ

[໗໘] ຂ້ານ້ອຍມີຈິດເບີກບານ ມີໃຈຍິນດີ
ເກີດໂສມະນັດ ປະນົມມື ເຮັດຈິດໃຫ້ເຫຼື້ອມໃສໃນບູຊານັ້ນ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໙] ເໜືອຫົວຂອງຂ້ານ້ອຍ ເຂົາກັ້ງເຄື່ອງມຸງບັງດອກໄມ້
ສີຂຽວຂະໜາດໃຫຍ່ ກິ່ນທິບຫອມຟຸ້ງໄປ
ນີ້ເປັນຜົນແຫ່ງດອກອຸບົນ ໆ ດອກ

[໘໐] ບາງເທື່ອ ເມື່ອຂ້ານ້ອຍຖືກໝູ່ຍາດຕິພີ່ນ້ອງນຳອອກໄປ
ໃນຄັ້ງນັ້ນ ເຂົາກັ້ງເຄື່ອງມຸງບັງດອກໄມ້ສີຂຽວ
ໃຫ້ບໍລິວານຂອງຂ້ານ້ອຍເທົ່າທີ່ມີຢູ່

[໘໑] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໗໐ ພຣະອົງ
ເປັນໃຫຍ່ໃນທຸກພົບ ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່

[໘໒] ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໖໓ ພຣະອົງ
ຊົນທັງຫຼາຍອະນຸວັດຕາມຂ້ານ້ອຍທັງໝົດ ຂ້ານ້ອຍມີວາຈາໜ້າເຊື່ອຖື

[໘໓] ຜິວພັນຂອງຂ້ານ້ອຍເໝືອນສີດອກອຸບົນ
ແລະກິ່ນກາຍຂອງຂ້ານ້ອຍກໍຫອມຟຸ້ງໄປຄ້າຍກິ່ນຫອມຂອງດອກອຸບົນ
ຂ້ານ້ອຍບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໔] ຂ້ານ້ອຍເປັນຜູ້ສະຫຼາດໃນອິດທິບາດ
ຍິນດີໃນການຈະເລີນໂພດຊົງ ເຖິງຄວາມສຳເລັດອະພິນຍາ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໕] ຂ້ານ້ອຍເປັນຜູ້ສະຫຼາດໃນສະຕິປັດຖານ
ມີສະມາທິຊານເປັນໂຄຈອນ ຂວນຂວາຍໃນສຳມັບປະທານ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໖] ຂ້ານ້ອຍມີຄວາມພຽນນຳພາທຸຣະໄປ
ອັນເປັນເຫດນຳທຳເປັນແດນກະເສມຈາກໂຍຄະມາໃຫ້
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໘໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ໃຊ້ດອກໄມ້ບູຊາໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໗໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໗໙] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໙໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະສັດຕະອຸບປະລະມາລິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສັດຕະອຸບປະລະມາລິກາເຖຣີຍາປະທານທີ ໗ ຈົບ**

## ໙. ປັນຈະທີປີກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະປັນຈະທີປີກາເຖຣີ

(ພຣະປັນຈະທີປີກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໙໑] ໃນຄັ້ງນັ້ນ ຂ້ານ້ອຍເປັນຜູ້ປະພຶດທຳຢູ່ໃນນະຄອນຫົງສະວະດີ
ມີຄວາມຕ້ອງການກຸສົນ ຈຶ່ງທ່ອງທ່ຽວໄປຕາມວັດວາອາຮາມ

[໙໘] ໄດ້ເຫັນຕົ້ນໂພທີ່ປະເສີດ ໃນກາລະປັກ (ຂ້າງແຮມ)
ຈຶ່ງເຮັດຈິດໃຫ້ເຫຼື້ອມໃສໃນຕົ້ນໂພນັ້ນແລ້ວນັ່ງຢູ່ທີ່ເຫງົ້າຕົ້ນໂພ

[໙໓] ຂ້ານ້ອຍຕັ້ງຈິດຄາຣະວະປະນົມມືເໜືອຫົວ
ປະກາດເຖິງຄວາມໂສມະນັດແລ້ວຄິດແນວນີ້ໃນຂະນະນັ້ນວ່າ

[໙໔] ຖ້າພຣະພຸດທະເຈົ້າຊົງມີພຣະຄຸນຫາປະມານບໍ່ໄດ້
ບໍ່ມີບຸກຄົນປຽບສະເໝີເໝືອນ
ໂຜດສະແດງປາຕິຫານແກ່ເຮົາເທີ້ນ
ຄືຂໍໃຫ້ຕົ້ນໂພນີ້ຈົ່ງເປ່ງຣັດສະໝີເທີ້ນ

[໙໕]	ທັນໃດນັ້ນເອງ ພ້ອມກັບທີ່ຂ້ານ້ອຍຮ່ຳເພິງ
ຕົ້ນໂພມີຣັດສະໝີດັ່ງຄຳລ້ອນ
ສ່ອງແສງສະຫວ່າງສະໄຫວໄປທົ່ວທຸກທິດ

[໙໖]	ຂ້ານ້ອຍນັ່ງຢູ່ທີ່ເຫງົ້າຕົ້ນໂພນັ້ນຕະຫຼອດ ໆ ຄືນ ໆ ວັນ
ເມື່ອເຖິງວັນທີ ໆ ຂ້ານ້ອຍໄດ້ທຳການບູຊາດ້ວຍປະທີບ

[໙໗]	ປະທີບ ໕ ດວງ ສ່ອງແສງລ້ອມຮອບອາສະນະ
ໃນຄັ້ງນັ້ນ ປະທີບຂອງຂ້ານ້ອຍສ່ອງແສງຢູ່ຈົນອາທິດອຸໄທ

[໙໘]	ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙໙]	ວິມານທີ່ບຸນກຳສ້າງຂຶ້ນຢ່າງສວຍງາມເພື່ອຂ້ານ້ອຍ
ໃນສະຫວັນຊັ້ນຕາວະຕິງສານັ້ນ ຮຽກວ່າປັນຈະທີປະວິມານ
ສູງ ໑໐໐ ໂຍດ ກວ້າງ ໖໐ ໂຍດ

[໑໐໐]	ປະທີບນັບບໍ່ຖ້ວນສ່ອງສະຫວ່າງລ້ອມຮອບຂ້ານ້ອຍຢູ່
ທົ່ວທັງເທວະວິມານສ່ອງແສງດ້ວຍແສງປະທີບ

[໑໐໑]	ຂ້ານ້ອຍນັ່ງອວ່າຍໜ້າໄປທາງທິດບູນພາ
ຖ້າປາຖະໜາຈະເບິ່ງ ກໍຈະເຫັນໄດ້ທຸກຢ່າງດ້ວຍຈັກຂຸ
ທັງໃນເບື້ອງເທິງ ເບື້ອງລຸ່ມ ແລະເບື້ອງຂວາງ

[໑໐໒]	ຂ້ານ້ອຍປາຖະໜາຈະເຫັນກຳດີແລະກຳຊົ່ວ
ທີ່ຄົນເຮັດແລ້ວໃນທີ່ມີປະມານເທົ່າໃດ ທີ່ມີປະມານເທົ່ານັ້ນ
ຍ່ອມບໍ່ມີຕົ້ນໄມ້ຫຼືພູເຂົາມາກາງກັ້ນໄດ້

[໑໐໓]	ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໘໐ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໑໐໐ ພຣະອົງ

[໑໐໔]	ຂ້ານ້ອຍເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ປະທີບນັບແສນດວງສ່ອງແສງລ້ອມຮອບຂ້ານ້ອຍ

[໑໐໕] ຂ້ານ້ອຍຈຸຕິຈາກເທວະໂລກແລ້ວ ເກີດໃນທ້ອງມານດາ
ເມື່ອຂ້ານ້ອຍຢູ່ໃນທ້ອງມານດາ ຕາຂອງຂ້ານ້ອຍບໍ່ໄດ້ຫຼັບ

[໑໐໖] ປະທີບນັບແສນດວງສ່ອງສະຫວ່າງຢູ່ທີ່ເຮືອນເກີດຂອງຂ້ານ້ອຍ
ຜູ້ພຽບພ້ອມດ້ວຍບຸນກຳ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໑໐໗] ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍກັບໃຈໃຫ້ວິເສດ
ຈຶ່ງເຫັນພຣະນິບພານອັນເປັນສະພາວະເຢືອກເຢັນ
ບໍ່ມີຊະຣາແລະມໍລະນະ

[໑໐໘] ພໍຂ້ານ້ອຍອາຍຸໄດ້ ໗ ປີກໍໄດ້ບັນລຸອະຣະຫັດຕະຜົນ
ພຣະພຸດທະເຈົ້າພຣະນາມວ່າ ໂຄດົມ
ຊົງຮູ້ເຖິງຄຸນທຳຂອງຂ້ານ້ອຍ
ແລ້ວຈຶ່ງປະທານອຸປະສົມບົດໃຫ້

[໑໐໙] ປະທີບ ໕ ດວງ ລຸກສະຫວ່າງແຈ້ງສ່ອງສະຫວ່າງໃຫ້ຂ້ານ້ອຍ
ທີ່ມົນດົບ ເຫງົ້າໄມ້ ຜາສາດ ຖ້ຳ ຫຼື ທີ່ເຮືອນວ່າງ

[໑໑໐] ທິບພະຈັກຂຸຂອງຂ້ານ້ອຍບໍລິສຸດ
ຂ້ານ້ອຍສະຫຼາດໃນສະມາທິ ເຖິງຄວາມສຳເລັດອະພິນຍາ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໑໑໑] ຂ້ານ້ອຍເປັນຜູ້ຢູ່ຈົບພົມມະຈັນທັງປວງ
ທຳກິດສຳເລັດແລ້ວ ບໍ່ມີອາສະວະ
ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍຊື່ວ່າປັນຈະທີປາ ຂໍຂາບພຣະຍຸຄົນບາດຂອງພຣະອົງ

[໑໑໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍປະທີບໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໑໑໓] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ

ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໑໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໑໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະປັນຈະທີປິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປັນຈະທີປິກາເຖຣີຍາປະທານທີ ໙ ຈົບ**

## ໑໐. ອຸທະກະທາຍິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸທະກະທາຍິກາເຖຣີ

(ພຣະອຸທະກະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑໖] ຂ້ານ້ອຍເປັນຍິງສາວຫາບນ້ຳຂາຍຢູ່ໃນນະຄອນພັນທຸມະດີ
ລ້ຽງຊີບຢູ່ດ້ວຍການຫາບນ້ຳຂາຍ
ລ້ຽງດູເດັກ ໆ ດ້ວຍວຽກງານນັ້ນ

[໑໑໗] ຂ້ານ້ອຍບໍ່ມີໄທຍະທຳ ຂ້ານ້ອຍເຂົ້າໄປສູ່ຊຸ້ມນ້ຳແລ້ວ
ຕັ້ງນ້ຳຖວາຍໄວ້ໃນໝູ່ສົງຜູ້ເປັນບຸນຍະເຂດທີ່ປະເສີດ

[໑໑໘] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ໃນສະຫວັນຊັ້ນຕາວະຕິງສານັ້ນ ວິມານອັນບຸນກຳເນຣະມິດ
ສ້າງຂຶ້ນຢ່າງສວຍງາມເພື່ອຂ້ານ້ອຍຍ້ອນການຫາບນ້ຳຖວາຍ

[໑໑໙] ໃນຄັ້ງນັ້ນ ຂ້ານ້ອຍເປັນຜູ້ປະເສີດກວ່ານາງອັບປະສອນຕັ້ງ ໑,໐໐໐
ຂ້ານ້ອຍປົກຄອງນາງອັບປະສອນເຫຼົ່ານັ້ນທັງໝົດດ້ວຍຖານະ ໑໐ ປະການ

[๑๘๐] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ๕๐ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ๘๐ ພຣະອົງ

[๑๘๑] ຂ້ານ້ອຍວຽນວ່າຍຕາຍເກີດຢູ່ໃນ ๒ ພົບ
ຄື (๑) ພົບເທວະດາ (๒) ພົບມະນຸດ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນໍ້າ

[๑๘๒] ເທິງຈອມພູເຂົາ ປາຍໄມ້ ໃນອາກາດຫຼືຢູ່ພື້ນດິນກໍຕາມ
ໃນເວລາທີ່ຕ້ອງການນໍ້າຂ້ານ້ອຍຍ່ອມໄດ້ທັນທີ

[๑๘๓] ທິດທີ່ບໍ່ມີຝົນຕົກ ຍ້ອນແດດຮ້ອນຈັດຂ້ານ້ອຍຈຶ່ງກະຫາຍນໍ້າ
ມະຫາເມກດັ່ງຈະຮູ້ຄວາມດຳຣິຂອງຂ້ານ້ອຍຍ່ອມໃຫ້ຝົນຕົກ

[๑๘๔] ບາງເທື່ອ ເມື່ອຂ້ານ້ອຍຖືກໝູ່ຍາດຕິພີ່ນ້ອງນຳອອກໄປ
ໃນຄັ້ງນັ້ນ ມະຫາເມກກໍບັນດານໃຫ້ຝົນຕົກໃນເວລາທີ່ຂ້ານ້ອຍປາຖະໜາ

[๑๘๕] ໃນສະຣີຣະຂອງຂ້ານ້ອຍ ບໍ່ມີຄວາມຮ້ອນຫຼືຄວາມຮ້ອນຮົນເລີຍ
ແລະທີ່ກາຍຂອງຂ້ານ້ອຍກໍບໍ່ມີລະອອງທຸລີເລີຍ
ນີ້ເປັນຜົນແຫ່ງການຖວາຍນໍ້າອາບ

[๑๘๖] ວັນນີ້ ຂ້ານ້ອຍມີໃຈບໍລິສຸດ ປາສະຈາກຈິດທີ່ຫຍາບຊ້າ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[๑๘๗] ໃນກັບທີ ๗๑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍນໍ້າອາບ

[๑๘๘] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໙] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໓໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະອຸທະກະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸທະກະທາຍິກາເຖຣີຍາປະທານທີ ໑໐ ຈົບ**

**ສຸເມທາວັກທີ ໑ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ສຸເມທາເຖຣີຍາປະທານ
໒. ມັນທະປະທາຍິກາເຖຣີຍາປະທານ
໓. ນະລະມາລິກາເຖຣີຍາປະທານ
໗. ກະຕັດສຸພິກຂະທາຍິກາເຖຣີຍາປະທານ
໙. ປັນຈະທີປິກາເຖຣີຍາປະທານ
໔. ເມຂະລະທາຍິກາເຖຣີຍາປະທານ
໕. ສັງກະມະນະທາເຖຣີຍາປະທານ
໖. ເອກະປິນດະປາຕະທາຍິກາເຖຣີຍາປະທານ
໘. ສັດຕະອຸບປະລະມາລິກາເຖຣີຍາປະທານ
໑໐. ອຸທະກະທາຍິກາເຖຣີຍາປະທານ

**ໃນວັກນີ້ ບັນດິດນັບຈຳນວນຄາຖາໄດ້ ໑໓໐ ຄາຖາ**

# ໔. ເອກູໂປສະຖິກະວັກ

## ໝວດວ່າດ້ວຍຜູ້ຮັກສາອຸໂປສົດຢ່າງດຽວ

### ໑. ເອກູໂປສະຖິກາເຖຣີຍາປະທານ

#### ປະຫວັດໃນອະດີດຊາດຂອງພຣະເອກູໂປສະຖິກາເຖຣີ

(ພຣະເອກູໂປສະຖິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ໃນນະຄອນພັນທຸມະດີ ມີກະສັດພຣະອົງໜຶ່ງພຣະນາມວ່າ ພັນທຸມາ
ໃນວັນເພັງ ພຣະອົງຊົງຢູ່ຈຳອຸໂປສົດ

[໒] ສະໄໝນັ້ນ ຂ້ານ້ອຍໄດ້ເປັນນາງກຸມພະທາສີຢູ່ໃນນະຄອນພັນທຸມະດີນັ້ນ
ເຫັນເສນາພ້ອມທັງພຣະຣາຊາ
ຈຶ່ງຄິດແນວນີ້ໃນຄັ້ງນັ້ນວ່າ

[໓] ແມ່ນພຣະຣາຊາກໍຍັງຊົງລະຣາດຊະກິດມາຢູ່ຈຳອຸໂປສົດ
ກຳນັ້ນຕ້ອງມີຜົນແນ່ນອນ ໝູ່ຊົນຈຶ່ງພາກັນເບີກບານໃຈ

[໔] ຂ້ານ້ອຍພິຈາລະນາທຸກຄະຕິ ແລະຄວາມເປັນຄົນຍາກຈົນໄດ້
ໂດຍອຸບາຍທີ່ແຍບຄາຍ ເຮັດຈິດໃຈໃຫ້ຣ່າເຣີງແລ້ວຢູ່ຈຳອຸໂປສົດ

[໕] ຂ້ານ້ອຍຮັກສາອຸໂປສົດໃນສາດສະໜາຂອງພຣະສຳມາສຳພຸດທະເຈົ້າ
ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ຂ້ານ້ອຍຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໖] ວິມານທີ່ບຸນກຳສ້າງໃຫ້ຂ້ານ້ອຍຢ່າງສວຍງາມ
ໃນສະຫວັນຊັ້ນຕາວະຕິງສານັ້ນ
ສູງຂຶ້ນໄປ ໑ ໂຍດ ປະກອບດ້ວຍເຮືອນຍອດອັນປະເສີດ
ມີບ່ອນນັ່ງມີຄ່າຫຼາຍປະດັບຢ່າງສວຍງາມ

[໗] ເທບອັບປະສອນ ໑໐໐,໐໐໐ ນາງ ຕ່າງກໍຢູ່ໃກ້ຂ້ານ້ອຍທຸກເມື່ອ
ຂ້ານ້ອຍຮຸ່ງເຮືອງເໜືອກວ່າເທບອັບປະສອນເຫຼົ່າອື່ນ ໃນການທັງປວງ

[໘] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໖໔ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໖໓ ພຣະອົງ

[໙] ຂ້ານ້ອຍມີຜິວພັນງາມດັ່ງຄຳ
ວຽນວ່າຍຕາຍເກີດຢູ່ໃນພົບທັງຫຼາຍ
ໄດ້ເປັນຜູ້ປະເສີດໃນທຸກພົບ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໐] ຍານຄືຊ້າງ ຍານຄືມ້າ ແລະຍານຄືລົດ
ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໑] ພາຊະນະຄຳ ພາຊະນະເງິນ ພາຊະນະແກ້ວຜຼຶກ
ແລະພາຊະນະແກ້ວທັບທິມ ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ

[໑໒] ຜ້າໄໝ ຜ້າກຳພົນ ຜ້າເປືອກໄມ້ ຜ້າຝ້າຍ
ແລະຜ້າທີ່ມີຣາຄາແພງ ໆ ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ

[໑໓] ເຂົ້າ ນ້ຳ ຂອງຫຍ້ຳ ຜ້າ ແລະເສນາສະນະ
ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໔] ເຄື່ອງຫອມຊະນິດດີ ດອກໄມ້ ແລະຈຸນສຳລັບລູບທາ
ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໕] ເຮືອນຍອດ ຜາສາດ ມົນດົບ ເຮືອນໂລ້ນ ແລະຖ້ຳ
ຂ້ານ້ອຍກໍໄດ້ຮັບມາຄົບຖ້ວນ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໖] ຂ້ານ້ອຍອາຍຸ ໗ ປີກໍໄດ້ບວດເປັນບັນພະຊິດ
ຍັງບໍ່ເຖິງເຄິ່ງເດືອນກໍໄດ້ບັນລຸອະຣະຫັດຕະຜົນ

[໑໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໗] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ເຮັດກຳໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຮັກສາອຸໂປສົດ

[໑໙] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໐] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະເອກູໂປສະຖິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກູໂປສະຖິກາເຖຣີຍາປະທານທີ ໑ ຈົບ**

## ໔. ສະລະປຸບຜິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະສະລະປຸບຜິກາເຖຣີ

(ພຣະສະລະປຸບຜິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໔] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເກີດເປັນນາງກິນນະຣີ
ອາໄສຢູ່ທີ່ຝັ່ງແມ່ນ້ຳຈັນທະພາຄາ
ຂ້ານ້ອຍໄດ້ເຫັນພຣະພຸດທະເຈົ້າຜູ້ຊົງອົງອາດກວ່ານໍຣະຊົນ
ຜູ້ເປັນເທບຍິ່ງກວ່າເທບ ສະເດັດຈົງກົມຢູ່

[໘໓] ຂ້ານ້ອຍໄດ້ເລືອກເກັບດອກສົນ
ມາຖວາຍພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

พระมะหาวิระซิ่งสูบดົມກິ່ນດອກສົນ
ເຊິ່ງມີກິ່ນຫອມເໝືອນກິ່ນທິບ

[໘໔] ພຣະມະຫາວີຣະສຳມາສຳພຸດທະເຈົ້າ
ຊຶ່ງເປັນຜູ້ນຳສັດໂລກພຣະນາມວ່າວິປັດສີ ຊຶ່ງຮັບແລ້ວ
ໄດ້ສູບກິ່ນໃນຂະນະທີ່ຂ້ານ້ອຍຍັງແນມເບິ່ງຢູ່ນັ້ນເອງ

[໘໕] ຂ້ານ້ອຍປະນົມມືໄຫວ້ພຣະພຸດທະອົງ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ເຮັດຈິດຂອງຕົນໃຫ້ເຫຼື້ອມໃສແລ້ວ ຈາກນັ້ນຈຶ່ງຂຶ້ນພູໄປ

[໘໖] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍດອກໄມ້ໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການບູຊາພຣະພຸດທະເຈົ້າ

[໘໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໘] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໘໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະສະລະປຸບຜິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສະລະປຸບຜິກາເຖຣິຍາປະທານທີ ໘ ຈົບ**

# ໓. ໂມທະກະທາຍິກາເຖຣີຍາປະທານ

## ປະຫວັດໃນອະດີດຊາດຂອງພຣະໂມທະກະທາຍິກາເຖຣີ

(ພຣະໂມທະກະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໐] ຂ້ານ້ອຍໄດ້ເປັນນາງກຸມພະທາສີຢູ່ໃນນະຄອນພັນທຸມະດີ
ຂ້ານ້ອຍຖືເຂົ້າຕົ້ມທີ່ເປັນສ່ວນຂອງຂ້ານ້ອຍໄປສູ່ທ່ານ້ຳ

[໓໑] ໄດ້ເຫັນພຣະສະມະນະຜູ້ມີຈິດສະງົບ ມີໃຈຕັ້ງໝັ້ນ ທີ່ຫົນທາງ
ກໍເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ຈຶ່ງໄດ້ຖວາຍເຂົ້າຕົ້ມ ໓ ມັດ

[໓໒] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍຈຶ່ງບໍ່ຕົກວິນິບາດນະຣົກເລີຍຕະຫຼອດ ໙໔ ກັບ

[໓໓] ຂ້ານ້ອຍສ້າງສົມບັດໄວ້ແລ້ວໄດ້ສະເຫວີຍສົມບັດທຸກຢ່າງ
ຂ້ານ້ອຍໄດ້ບັນລຸບົດທີ່ບໍ່ຫວັ່ນໄຫວ
ຍ້ອນຖວາຍເຂົ້າຕົ້ມ ໓ ມັດ

[໓໔] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໕] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໓໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະໂມທະກະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂມທະກະທາຍິກາເຖຣີຍາປະທານທີ ໓ ຈົບ**

# ៤. ເອກາສະນະທາຍິກາເຖຣີຍາປະທານ

## ປະຫວັດໃນອະດີດຊາດຂອງພຣະເອກາສະນະທາຍິກາເຖຣີ

(ພຣະເອກາສະນະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[៣៧] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເປັນຍິງສາວຮ້ອຍພວງມາໄລຢູ່ໃນນະຄອນຫົງສະວະດີ
ມານດາບິດາຂອງຂ້ານ້ອຍໄປເຮັດວຽກ

[៣៨] ຂ້ານ້ອຍໄດ້ເຫັນພຣະສະມະນະກຳລັງຍ່າງໄປຕາມຖະໜົນ
ໃນເວລາທ່ຽງວັນ ຈຶ່ງໄດ້ປູອາສະນະຖວາຍ

[៣៩] ເມື່ອປູອາສະນະດ້ວຍຜ້າໂກເຊົາອັນວິຈິດເປັນຕົ້ນແລ້ວ
ເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີກ່າວດັ່ງນີ້ວ່າ

[៤០] ພູມິພາກຮ້ອນຣະອຸ ໃນເວລາທ່ຽງວັນ
ລົມກໍບໍ່ພັດມາ ແລະເວລາກໍຈະລ່ວງເລີຍແລ້ວ

[៤១] ຂ້າແດ່ພຣະມະຫາມຸນີ ອາສະນະນີ້ຂ້ານ້ອຍປູໄວ້ເພື່ອພຣະອົງ
ຂໍພຣະອົງໄດ້ໂຜດອະນຸເຄາະ ນັ່ງເທິງອາສະນະຂອງຂ້ານ້ອຍເທີ້ນ

[៤២] ພຣະສະມະນະຜູ້ຝຶກຕົນດີແລ້ວ
ມີໃຈບໍລິສຸດ ໄດ້ນັ່ງເທິງອາສະນະນັ້ນ
ຂ້ານ້ອຍຮັບບາດຂອງທ່ານແລ້ວ
ໄດ້ຖວາຍບິນທະບາດຕາມທີ່ຕົນຫຸງຕົ້ມໄວ້

[៤៣] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[៤៤] ໃນສະຫວັນຊັ້ນຕາວະຕິງສາ
ວິມານສູງ ៦០ ໂຍດ ກວ້າງ ៣០ ໂຍດ
ເຊິ່ງບຸນກຳເນຣະມິດສ້າງຂຶ້ນຢ່າງສວຍງາມ
ເພື່ອຂ້ານ້ອຍເພາະ (ການປູ) ອາສະນະ

[໔໕] ບັນລັງຂອງຂ້ານ້ອຍມີຫຼາຍຊະນິດ
ຄືບັນລັງຄຳ ບັນລັງແກ້ວມະນີ
ບັນລັງແກ້ວຜຼຶກ ແລະບັນລັງແກ້ວທັບທິມ

[໔໖] ບັນລັງຂອງຂ້ານ້ອຍປູດ້ວຍເຄື່ອງລາດທີ່ຍັດດ້ວຍນຸ່ນ
ດ້ວຍເຄື່ອງລາດອັນວິຈິດດ້ວຍຮູບຣາດຊະສີແລະເສືອໂຄ່ງເປັນຕົ້ນກໍມີ
ດ້ວຍເຄື່ອງປູແກມໄໝປະດັບດ້ວຍເພັດພອຍກໍມີ
ດ້ວຍເຄື່ອງປູມີຂົນຕັ້ງຂຶ້ນດ້ານດຽວກໍມີ

[໔໗] ຂ້ານ້ອຍພຽບພ້ອມດ້ວຍຄວາມຮ່າເຣິງສະໜຸກສະໜານ
ໄປໄດ້ຕາມທີ່ຂ້ານ້ອຍປາຖະໜາ
ພ້ອມກັບບັນລັງອັນປະເສີດໃນເວລາທີ່ຂ້ານ້ອຍຕ້ອງການຈະໄປ

[໔໘] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໘໐ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໗໐ ພຣະອົງ

[໔໙] ເມື່ອຂ້ານ້ອຍຍັງວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ໂພຄະສົມບັດຫຼາກຫຼາຍ
ຂ້ານ້ອຍບໍ່ມີຄວາມບົກຜ່ອງດ້ວຍໂພຄະສົມບັດເລີຍ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[໕໐] ຂ້ານ້ອຍວຽນວ່າຍຕາຍເກີດຢູ່ໃນ ໒ ພົບ
ຄື (໑) ພົບເທວະດາ (໒) ພົບມະນຸດ
ພົບອື່ນຂ້ານ້ອຍບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[໕໑] ຂ້ານ້ອຍເກີດສະເພາະໃນ ໒ ຕະກູນ
ຄື (໑) ຕະກູນກະສັດ (໒) ຕະກູນພາມ
ຂ້ານ້ອຍເກີດໃນຕະກູນສູງທຸກ ໆ ພົບ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[໕໒] ຄວາມໂທມະນັດທີ່ເຮັດຈິດຂອງຂ້ານ້ອຍໃຫ້ຮ້ອນຮົນຂ້ານ້ອຍກໍບໍ່ຮູ້ຈັກ
ຄວາມເປັນຜູ້ມີຜິວພັນຊາມຂ້ານ້ອຍກໍບໍ່ຮູ້ຈັກ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[๕๓]	ເອື້ອຍລ້ຽງນາງນົມ ແລະຍິງສາວຮັບໃຊ້ຈຳນວນຫຼາຍ
ຕ່າງກໍປົນນິບັດຂ້ານ້ອຍ ຂ້ານ້ອຍຖືກເອື້ອຍລ້ຽງຕ່າງຜັດກັນອຸ້ມ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[๕๔]	ເອື້ອຍລ້ຽງພວກໜຶ່ງອາບນ້ຳໃຫ້ຂ້ານ້ອຍ
ພວກໜຶ່ງຄອຍຖ້າປ້ອນເຂົ້າຂ້ານ້ອຍ
ພວກໜຶ່ງປະດັບຕົກແຕ່ງຂ້ານ້ອຍ
ພວກໜຶ່ງຊວນຂ້ານ້ອຍໃຫ້ມ່ວນຊື່ນທຸກເວລາ
ພວກໜຶ່ງລູບທາຂອງຫອມໃຫ້
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[๕๕]	ບັນລັງດັ່ງຈະຮູ້ຄວາມດຳຣິຂອງຂ້ານ້ອຍຜູ້ຢູ່ທີ່ມົນດົບ
ເຫງົ້າໄມ້ ຫຼື ທີ່ເຮືອນວ່າງ ຍ່ອມຜາກົດຂຶ້ນ

[๕๖]	ພົບນີ້ເປັນພົບສຸດທ້າຍຂອງຂ້ານ້ອຍ
ພົບສຸດທ້າຍກຳລັງເປັນໄປຢູ່
ແມ່ນໃນວັນນີ້ຂ້ານ້ອຍກໍສະລະຣາດຊະສົມບັດອອກບວດເປັນບັນພະຊິດ

[๕๗]	ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການປູອາສະນະເທື່ອດຽວຖວາຍ

[๕๘]	ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[๕๙]	ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ๓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ
[๖๐]	ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະເອກາສະນະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເອກາສະນະທາຍິກາເຖຣີຍາປະທານທີ ໔ ຈົບ**

## ໕. ປັນຈະທີປະທາຍິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະປັນຈະທີປະທາຍິກາເຖຣີ

(ພຣະປັນຈະທີປະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໖໑] ໃນຄັ້ງນັ້ນ ຂ້ານ້ອຍເປັນຜູ້ປະພຶດທຳຢູ່ໃນນະຄອນຫົງສະວະດີ
ມີຄວາມຕ້ອງການກຸສົນ ຈຶ່ງທ່ອງທ່ຽວໄປຕາມວັດວາອາຮາມ

[໖໒] ໄດ້ເຫັນຕົ້ນໂພທີ່ປະເສີດ ໃນກາລະປັກ (ຂ້າງແຮມ)
ຈຶ່ງເຮັດຈິດໃຫ້ເຫຼື້ອມໃສໃນຕົ້ນໂພນັ້ນແລ້ວນັ່ງຢູ່ທີ່ເຫງົ້າຕົ້ນໂພ

[໖໓] ຂ້ານ້ອຍຕັ້ງຈິດຄາຣະວະປະນົມມືເໜືອຫົວ
ປະກາດເຖິງຄວາມໂສມະນັດແລ້ວຄິດແນວນີ້ໃນຂະນະນັ້ນວ່າ

[໖໔] ຖ້າພຣະພຸດທະເຈົ້າຊົງມີພຣະຄຸນຫາປະມານບໍ່ໄດ້
ບໍ່ມີບຸກຄົນປຽບສະເໝີເໝືອນ
ໂຜດສະແດງປາຕິຫານແກ່ເຮົາເທີ້ນ
ຄືຂໍໃຫ້ຕົ້ນໂພນີ້ຈົ່ງເປ່ງຣັດສະໝີເທີ້ນ

[໖໕] ທັນໃດນັ້ນເອງ ພ້ອມກັບທີ່ຂ້ານ້ອຍຮ່ຳເພິງ
ຕົ້ນໂພມີຣັດສະໝີດັ່ງຄຳລ້ວນ ສ່ອງແສງສະຫວ່າງສະໄຫວໄປທົ່ວທຸກທິດ

[໖໖] ຂ້ານ້ອຍນັ່ງຢູ່ທີ່ເຫງົ້າຕົ້ນໂພນັ້ນຕະຫຼອດ ໗ ຄືນ ໗ ວັນ
ເມື່ອເຖິງວັນທີ ໗ ຂ້ານ້ອຍໄດ້ກະທຳການບູຊາດ້ວຍປະທີບ

[໖໗] ປະທີບ ໕ ດວງ ສ່ອງແສງລ້ອມຮອບອາສະນະ
ໃນຄັ້ງນັ້ນ ປະທີບຂອງຂ້ານ້ອຍສ່ອງແສງຢູ່ຈົນອາທິດອຸໄທ

[໖໘] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ

ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໖໙] ວິມານທີ່ບຸນກຳສ້າງຂຶ້ນຢ່າງສວຍງາມເພື່ອຂ້ານ້ອຍ
ໃນສະຫວັນຊັ້ນຕາວະຕິງສານັ້ນ ຮຽກວ່າປັນຈະທີປະວິມານ
ສູງ ໖໐ ໂຍດ ກວ້າງ ໓໐ ໂຍດ

[໗໐] ປະທີບນັບບໍ່ຖ້ວນສ່ອງສະຫວ່າງລ້ອມຮອບຂ້ານ້ອຍຢູ່
ທົ່ວທັງເທວະວິມານສ່ອງແສງດ້ວຍແສງປະທີບ

[໗໑] ຂ້ານ້ອຍນັ່ງອວ່າຍໜ້າໄປທາງທິດບູນພາ
ຖ້າປາຖະໜາຈະເບິ່ງ ກໍຈະເຫັນໄດ້ທຸກຢ່າງດ້ວຍຈັກຂຸ
ທັງໃນເບື້ອງເທິງ ເບື້ອງລຸ່ມ ແລະເບື້ອງຂວາງ

[໗໒] ຂ້ານ້ອຍປາຖະໜາຈະເຫັນກຳດີແລະກຳຊົ່ວ
ທີ່ຄົນເຮັດແລ້ວໃນທີ່ມີປະມານເທົ່າໃດ ທີ່ມີປະມານເທົ່ານັ້ນ
ຍ່ອມບໍ່ມີຕົ້ນໄມ້ຫຼືພູເຂົາມາກາງກັ້ນໄດ້

[໗໓] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໘໐ ພຣະອົງ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໑໐໐ ພຣະອົງ

[໗໔] ຂ້ານ້ອຍເກີດໃນກຳເນີດໃດ ໆ
ຄືຈະເກີດເປັນເທວະດາຫຼືມະນຸດກໍຕາມ
ໃນກຳເນີດນັ້ນ ໆ ປະທີບນັບແສນດວງສ່ອງແສງລ້ອມຮອບຂ້ານ້ອຍ

[໗໕] ຂ້ານ້ອຍຈຸຕິຈາກເທວະໂລກແລ້ວ ເກີດໃນທ້ອງມານດາ
ເມື່ອຂ້ານ້ອຍຢູ່ໃນທ້ອງມານດາ ຕາຂອງຂ້ານ້ອຍບໍ່ໄດ້ຫຼັບ

[໗໖] ປະທີບນັບແສນດວງສ່ອງແສງສະຫວ່າງຢູ່ທີ່ເຮືອນເກີດຂອງຂ້ານ້ອຍ
ຜູ້ພຽບພ້ອມດ້ວຍບຸນກຳ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໗໗] ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍກັບໃຈໃຫ້ວິເສດ
ຈຶ່ງເຫັນພຣະນິບພານອັນເປັນສະພາວະເຢືອກເຢັນ
ບໍ່ມີຊະຣາແລະມໍລະນະ

[໗໗] ພໍຂ້ານ້ອຍອາຍຸໄດ້ ໗ ປີກໍໄດ້ບັນລຸອະຣະຫັດຕະຜົນ
ພຣະພຸດທະເຈົ້າຈຶ່ງໃຫ້ຂ້ານ້ອຍອຸປະສົມບົດ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໗໙] ປະທີບລຸກຮຸ່ງແຈ້ງສ່ອງສະຫວ່າງໃຫ້ຂ້ານ້ອຍ
ຜູ້ຢູ່ທີ່ມົນດົບ ເຫງົ້າໄມ້ ຫຼື ທີ່ເຮືອນວ່າງ ທຸກເມື່ອ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໘໐] ທິບພະຈັກຂຸຂອງຂ້ານ້ອຍບໍລິສຸດ
ຂ້ານ້ອຍສະຫຼາດໃນສະມາທິ ເຖິງຄວາມສຳເລັດອະພິນຍາ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໘໑] ຂ້ານ້ອຍເປັນຜູ້ຢູ່ຈົບພົມມະຈັນທັງປວງ
ທຳກິດສຳເລັດແລ້ວ ບໍ່ມີອາສະວະ
ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍຊື່ວ່າປັນຈະທີປາ ຂໍຂາບພຣະຍຸຄົນບາດຂອງພຣະອົງ

[໘໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງປະທີບ ໕ ດວງ

[໘໓] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໘໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະປັນຈະທີປະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປັນຈະທີປະທາຍິກາເຖຣີຍາປະທານທີ ໕ ຈົບ**

## ໖. ນະລະມາລິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະນະລະມາລິກາເຖຣີ

(ພຣະນະລະມາລິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໗໖] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເກີດເປັນນາງກິນນະຣີ
ອາໄສຢູ່ທີ່ຝັ່ງແມ່ນ້ຳຈັນທະພາຄາ
ຂ້ານ້ອຍໄດ້ເຫັນພຣະສະຍຳພູພຸດທະເຈົ້າ
ຜູ້ປາສະຈາກທຸລິຄືກິເລດ ຜູ້ບໍ່ຊົງພ່າຍແພ້

[໗໗] ຂ້ານ້ອຍເປັນຜູ້ມີຈິດເຫຼື້ອມໃສ ມີໃຈຍິນດີ ເກີດໂສມະນັດ
ປະນົມມືແລ້ວ ຖືພວງມາໄລດອກອໍ້ມາບູຊາພຣະສະຍຳພູ

[໗໘] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍກິນນະຣີແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໙] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໓໖ ພຣະອົງ
ສິ່ງທີ່ຂ້ານ້ອຍປາຖະໜາດ້ວຍໃຈຍ່ອມບັງເກີດຕາມຄວາມປາຖະໜາ

[໘໐] ຂ້ານ້ອຍໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໑໐ ພຣະອົງ
ເປັນສະຕີມີບຸນກຸສົນສັ່ງສົມໄວ້ແລ້ວ ວຽນວ່າຍຕາຍເກີດຢູ່ໃນພົບ

[໘໑] ກຸສົນຂອງຂ້ານ້ອຍມີ ຂ້ານ້ອຍໄດ້ບວດເປັນບັນພະຊິດ
ວັນນີ້ ຂ້ານ້ອຍເປັນບຸກຄົນຜູ້ຄວນແກ່ການບູຊາ
ໃນສາດສະໜາຂອງພຣະສາກະຍະບຸດ

[໘໒] ວັນນີ້ ຂ້ານ້ອຍມີໃຈບໍລິສຸດ ປາສະຈາກຈິດທີ່ຫຍາບຊ້າ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[៧៦] ໃນກັບທີ ៧៨ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ບູຊາພຣະພຸດທະເຈົ້າໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍພວງມາໄລດອກອໍ້

[៧៨] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[៧៩] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ៣ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[៧៥] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ៤ ວິໂມກ ៨
ແລະອະພິນຍາ ៦ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະນະລະມາລິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນະລະມາລິກາເຖຣີຍາປະທານທີ ៦ ຈົບ**

## ៗ. ມະຫາປະຊາປະຕີໂຄຕະມີເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະມະຫາປະຊາບໍດີໂຄຕະມີເຖຣີ

(ພຣະມະຫາປະຊາບໍດີໂຄຕະມີເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ
ຈຶ່ງກ່າວວ່າ)

[៧ៗ] ໃນເວລາໜຶ່ງ ພຣະພຸດທະເຈົ້າຜູ້ຊົງສ່ອງໂລກໃຫ້ສະຫວ່າງ
ຊົງເປັນສາຣະຖີຝຶກນໍຣະຊົນ
ປະທັບຢູ່ ໃນກູຕາຄາຣະສາລາປ່າມະຫາວັນ ເຂດນະຄອນເວສາລີ
[៧៨] ໃນຄັ້ງນັ້ນ ພຣະມະຫາປະຊາບໍດີໂຄຕະມີພິກຂຸນີພຣະມາຕຸດສາ (ນ້າສາວ)
ຂອງພຣະຊິນນະເຈົ້າ ຢູ່ໃນສຳນັກຂອງພິກຂຸນີ
ໃນນະຄອນທີ່ໜ້າອອນຊອນນັ້ນ

[៩៩] ພ້ອມດ້ວຍພິກຂຸນີອີກ ៥០០ ອົງ
ເຊິ່ງລ້ວນແຕ່ພົ້ນຈາກກິເລດແລ້ວ
ເມື່ອພຣະມະຫາປະຊາບໍດີໂຄຕະມີນັ້ນ
ຢູ່ໃນບ່ອນສະຫງັດໄດ້ນຶກ (ຄິດ) ແນວນີ້ວ່າ

[១០០] ການປະຣິນິບພານຂອງພຣະພຸດທະເຈົ້າກໍດີ
ຂອງພຣະອັກຄະຣະສາວົກທັງຄູ່ກໍດີ ຂອງພຣະຣາຫຸນກໍດີ
ຂອງພຣະອານົນ ແລະຂອງພຣະນັນທະກໍດີ ເຮົາຈະບໍ່ໄດ້ເຫັນ

[១០១] ກ່ອນແຕ່ການປະຣິນິບພານຂອງພຣະພຸດທະເຈົ້າ
ຂອງພຣະອັກຄະຣະສາວົກທັງຄູ່ ຂອງພຣະມະຫາກັດສະປະ
ຂອງພຣະນັນທະ ຂອງພຣະອານົນ ແລະຂອງພຣະຣາຫຸນ
ເຮົາກໍຈະບໍ່ໄດ້ເຫັນຄືກັນ

[១០២] ເຮົາຜູ້ທີ່ພຣະໂລກກະນາດ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຊົງອະນຸຍາດແລ້ວ
ເພິ່ງປົງອາຍຸສັງຂານແລ້ວນິບພານ

[១០៣] ພິກຂຸນີທັງ ៥០០ ອົງ ກໍໄດ້ນຶກແນວນັ້ນ
ແມ່ນພຣະເຂມາພິກຂຸນີເປັນຕົ້ນກໍໄດ້ນຶກແນວນີ້ຄືກັນ

[១០៤] ໃນຄັ້ງນັ້ນ ເກີດແຜ່ນດິນໄຫວ ກອງທິບບັນລືລັ່ນ
ເທບທີ່ສະຖິດຢູ່ໃນສຳນັກພິກຂຸນີ
ຖືກຄວາມເສົ້າໂສກບີບຄັ້ນ

[១០៥] ຈົ່ມເພີ້ຢູ່ຢ່າງໜ້າສົງສານ ຫຼັ່ງນ້ຳຕາໃນບ່ອນນັ້ນ
ພິກຂຸນີທຸກອົງພ້ອມດ້ວຍເທບເຫຼົ່ານັ້ນ
ໄດ້ເຂົ້າໄປຫາພຣະໂຄຕະມີພິກຂຸນີ

[១០៦] ຊົບຫົວລົງແທບຕີນແລ້ວກ່າວຄຳນີ້ວ່າ ຂ້າແຕ່ພຣະແມ່ເຈົ້າ
ຍ້ອນຂ້ານ້ອຍມີປົກກະຕິຢູ່ດ້ວຍການຫຼຽບຄຽງໃນທຳເຫຼົ່ານັ້ນ
ຂ້ານ້ອຍຈຶ່ງໄດ້ຢູ່ໃນບ່ອນສະຫງັດ

[១០៧] ແຜ່ນດິນໄຫວສະເທືອນເລື່ອນລັ່ນ ກອງທິບບັນລືລັ່ນ
ແລະຂ້ານ້ອຍໄດ້ຍິນສຽງຄ່ຳຄວນ
ຂ້າແຕ່ພຣະໂຄຕະມີ ຈະຕ້ອງມີເຫດອັນໃດເກີດຂຶ້ນແນ່

[໑໐໗] ໃນຄັ້ງນັ້ນ ພຣະມະຫາປະຊາບໍດີໂຄຕະມີນັ້ນ
ໄດ້ບອກເຖິງເຫດທຸກຢ່າງຕາມທີ່ຕົນໄດ້ນຶກແລ້ວ
ລຳດັບນັ້ນ ພິກຂຸນີທຸກອົງກໍໄດ້ບອກເຖິງເຫດທີ່ຕົນນຶກແລ້ວກ່າວວ່າ

[໑໐໙] ຂ້າແຕ່ພຣະແມ່ເຈົ້າ ຖ້າພຣະແມ່ເຈົ້າພໍໃຈການນິບພານ
ທີ່ກະເສມຢ່າງຍິ່ງແລ້ວ ເຖິງຂ້ານ້ອຍທັງຫຼາຍກໍຈັກນິບພານທັງໝົດ
ໃນການທີ່ພຣະພຸດທະເຈົ້າຈະຊົງອະນຸຍາດກ່ອນ

[໑໑໐] ແມ່ນຂ້ານ້ອຍທັງຫຼາຍກໍໄດ້ອອກຈາກເຮືອນ
ແລະຈາກພົບພ້ອມກັບພຣະແມ່ເຈົ້າ
ຂ້ານ້ອຍທັງຫຼາຍກໍຈັກໄປສູ່ເມືອງອັນປະເສີດຄືພຣະນິບພານ
ພ້ອມກັບພຣະແມ່ເຈົ້າຄືກັນ

[໑໑໑] ພຣະມະຫາປະຊາບໍດີໂຄຕະມີກ່າວວ່າ
ເມື່ອທ່ານທັງຫຼາຍຈະໄປນິບພານ ເຮົາຈັກວ່າອັນໃດໄດ້ນໍ
ແລ້ວໄດ້ອອກຈາກສຳນັກພິກຂຸນີໄປ
ພ້ອມກັບພິກຂຸນີທັງໝົດໃນຄັ້ງນັ້ນ

[໑໑໒] ພຣະມະຫາປະຊາບໍດີໂຄຕະມີພິກຂຸນີ
ໄດ້ກ່າວກັບທວຍເທບທັງຫຼາຍວ່າ
ຂໍເທບທັງຫຼາຍທີ່ສະຖິດຢູ່ ໃນສຳນັກພິກຂຸນີ
ຈົ່ງຍົກໂທດໃຫ້ຂ້າພະເຈົ້າດ້ວຍເທີ້ນ
ການເຫັນສຳນັກພິກຂຸນີຂອງຂ້າພະເຈົ້ານີ້ເປັນການເຫັນເທື່ອສຸດທ້າຍ

[໑໑໓] ໃນບ່ອນໃດບໍ່ມີຄວາມແກ່ແລະຄວາມຕາຍ
ບໍ່ມີການສະມາຄົມກັບສັດແລະສັງຂານເຊິ່ງບໍ່ເປັນທີ່ຮັກ
ບໍ່ມີການພັດພາກຈາກສັດແລະສັງຂານເຊິ່ງເປັນທີ່ຮັກ
ບ່ອນນັ້ນນັກປາດກ່າວວ່າເປັນອະສັງຂະຕະສະຖານ
(ສະຖານທີ່ທີ່ບໍ່ມີປັດໄຈປຸງແຕ່ງ)

[໑໑໔] ພຣະໂອຣົດຂອງພຣະສຸຄົດເຈົ້າທັງຫຼາຍທີ່ຍັງບໍ່ປາສະຈາກຣາຄະ
ໄດ້ສະດັບຄຳນັ້ນ ເປັນຜູ້ອັດອັ້ນຕັນໃຈດ້ວຍຄວາມເສົ້າໂສກຄ່ຳຄວນວ່າ
ໜ້າສັງເວດແທ້ນໍ ເຮົາທັງຫຼາຍຊ່າງມີບຸນໜ້ອຍ

[໑໑໕] ສຳນັກພິກຂຸນີນີ້ຈັກວ່າງເປົ່າ
ຍ້ອນເວັ້ນຈາກພິກຂຸນີເຫຼົ່ານັ້ນ
ພິກຂຸນີຜູ້ເປັນຊີໂນຣົດຈະບໍ່ຜາກົດ
ເໝືອນດວງດາວທັງຫຼາຍບໍ່ຜາກົດໃນເວລາສະຫວ່າງ

[໑໑໖] ພຣະມະຫາປະຊາບໍດີໂຄຕະມີຈະນິບພານ
ພ້ອມດ້ວຍພິກຂຸນີອີກ ໕໐໐ ອົງ
ເໝືອນກັບແມ່ນ້ຳຄົງຄາໄຫຼໄປສູ່ສາຄອນ
ພ້ອມກັບແມ່ນ້ຳ ໕໐໐ ສາຍ

[໑໑໗] ອຸປາສິກາທັງຫຼາຍຜູ້ມີສັດທາ
ເຫັນພິກຂຸນີທັງຫຼາຍກຳລັງຍ່າງໄປຕາມຖະໜົນ
ໄດ້ພາກັນອອກຈາກເຮືອນໄປໝອບລົງແທບຕີນ
ແລ້ວກ່າວຄຳນີ້ກັບພຣະໂຄຕະມີນັ້ນວ່າ

[໑໑໘] ການທີ່ພຣະແມ່ເຈົ້າລະຖິ້ມຂ້ານ້ອຍທັງຫຼາຍ
ຜູ້ຈົມຢູ່ໃນໂພຄະເປັນຈຳນວນຫຼາຍ ບໍ່ມີບ່ອນເພິ່ງແລ້ວນິບພານບໍ່ສົມຄວນ
ອຸປາສິກາເຫຼົ່ານັ້ນມີຄວາມຕ້ອງການບີບຄັ້ນຈຶ່ງພ່ຳເພີ້
[໑໑໙] ເພື່ອຈະໃຫ້ອຸປາສິກາເຫຼົ່ານັ້ນລະຄວາມເສົ້າໂສກ
ພຣະນາງຈຶ່ງໄດ້ຕັດຢ່າງມ່ວນວ່າ
ຢ່າຮ້ອງໄຫ້ໄປເລີຍ ລູກທັງຫຼາຍ
ວັນນີ້ເປັນເວລາບັນເທີງຂອງທ່ານທັງຫຼາຍ

[໑໒໐] ທຸກເຮົາໄດ້ກຳນົດຮູ້ແລ້ວ
ເຫດແຫ່ງທຸກ (ສະມຸໄທ) ເຮົາໄດ້ເວັ້ນຂາດແລ້ວ
ນິໂຣດເຮົາໄດ້ເຮັດໃຫ້ແຈ້ງແລ້ວ
ແລະມັກເຮົາກໍໄດ້ອົບຮົມດີແລ້ວ

**ພານະວານທີ ໑ ຈົບ**

[໑໒໑] ພຣະສາດສະດາເຮົາກໍໄດ້ບຳຣຸງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າເຮົາກໍໄດ້ກະທຳສຳເລັດແລ້ວ
ພາຣະໜັກເຮົາກໍປົງລົງໄດ້ແລ້ວ
ຕັນຫາທີ່ເປັນເຫດນຳໄປສູ່ພົບເຮົາກໍຖອນໄດ້ແລ້ວ

[໑໘໘] ກຸນລະບຸດກຸນລະທິດາອອກບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ເຮົາໄດ້ບັນລຸແລ້ວໂດຍລຳດັບ

[໑໘໙] ພຣະພຸດທະເຈົ້າແລະພຣະສັດທຳຂອງພຣະອົງ
ບໍ່ໄດ້ຫຍໍ້ຫຍ່ອນຍັງດຳຣົງຢູ່ຕາບໃດ ຕາບນັ້ນເປັນເວລາສົມຄວນແລ້ວ
ທີ່ເຮົາຈະນິບພານ ລູກເອີຍ ຢ່າໄດ້ເສົ້າໂສກເຖິງແມ່ເລີຍ

[໑໘໔] ພຣະຊິນນະເຈົ້າ ພຣະຣາຫຸນ ພຣະອັນຍາໂກນທັນຍະ
ພຣະອານົນ ແລະພຣະນັນທະເປັນຕົ້ນ ກໍຍັງດຳຣົງຢູ່
ຂໍພຣະສົງຈົ່ງມີປະໂຫຍດສຸກຮ່ວມກັນ
ຂໍໃຫ້ເດຍຣະຖີຈົ່ງເປັນຜູ້ມີຄວາມໂງ່ຈ້ຳຖືກກຳຈັດເສຍເທີ້ນ

[໑໘໕] ຍົດຄືການຍ່ຳຍີມານແຫ່ງວົງພຣະເຈົ້າໂອກກາກະຣາດ
ສັນເຮົາກໍໃຫ້ຮຸ່ງເຮືອງແລ້ວ
ລູກ ໆ ເຖິງເວລາທີ່ແມ່ຈະນິບພານແລ້ວບໍ່ແມ່ນບໍ?

[໑໘໖] ຄວາມປາຖະໜາທີ່ແມ່ຕັ້ງໄວ້ຕັ້ງແຕ່ຕົ້ນເປັນເວລາດົນນານ
ຈະສຳເລັດແກ່ແມ່ໃນວັນນີ້
ເວລານີ້ເປັນເວລາທີ່ກອງອານັນທະເພຣີບັນລືສຽງ
ລູກເອີຍ ນ້ຳຕາຈະມີປະໂຫຍດອັນໃດແກ່ພວກລູກ

[໑໘໗] ຖ້າລູກທັງຫຼາຍຈະມີຄວາມອີດູ
ຫຼືມີຄວາມກະຕັນຍູໃນມານດາ
ກໍຂໍໃຫ້ລູກທຸກຄົນຈົ່ງກະທຳຄວາມພຽນໃຫ້ໝັ້ນ
ເພື່ອຄວາມດຳຣົງໝັ້ນແຫ່ງພຣະສັດທຳເທີ້ນ

[໑໘໘] ພຣະສຳມາພຸດທະເຈົ້າ ເຊິ່ງແມ່ທູນອ້ອນວອນ
ຈຶ່ງໄດ້ຊົງປະທານການບັນພະຊາແກ່ສະຕີທັງຫຼາຍ
ຍ້ອນແນວນັ້ນ ແມ່ຍິນດີ ສັນໃດ
ລູກທັງຫຼາຍກໍຈົ່ງຈະເລີນຮອຍຕາມຄວາມຍິນດີນັ້ນ ສັນນັ້ນເທີ້ນ

[໑໘໙] ເມື່ອພຣະນາງພ່ຳສອນອຸປາສິກາເຫຼົ່ານັ້ນຢ່າງນີ້ແລ້ວ
ມີພິກຂຸນີທັງຫຼາຍຫ້ອມລ້ອມເຂົ້າເຝົ້າພຣະພຸດທະເຈົ້າ
ໄຫວ້ແລ້ວໄດ້ຂາບທູນຄຳນີ້ວ່າ

[໑໓໐] ຂ້າແຕ່ພຣະສຸຄົດເຈົ້າ ຂ້ານ້ອຍເຄີຍເປັນມານດາລ້ຽງຂອງພຣະອົງ
ຂ້າແຕ່ພຣະທີຣະເຈົ້າ ສ່ວນພຣະອົງເປັນບິດາຂອງຂ້ານ້ອຍ
ຂ້າແຕ່ພຣະໂລກກະນາດ ພຣະອົງຊົງເປັນຜູ້ປະທານຄວາມສຸກ
ທີ່ເກີດຈາກພຣະສັດທຳ
ຂ້າແຕ່ພຣະໂຄດົມ ຂ້ານ້ອຍເປັນຜູ້ທີ່ພຣະອົງຊົງໃຫ້ເກີດແລ້ວ

[໑໓໑] ຂ້າແຕ່ພຣະສຸຄົດເຈົ້າ ພຣະຮູບກາຍຂອງພຣະອົງນີ້
ອັນຂ້ານ້ອຍເຄີຍຟູມຟັກໃຫ້ຈະເລີນເຕີບໃຫຍ່ແລ້ວ
ສ່ວນພຣະທຳມະກາຍທີ່ໜ້າເພີດເພີນຂອງຂ້ານ້ອຍ
ອັນພຣະອົງຊົງຟູມຟັກໃຫ້ຈະເລີນແລ້ວ

[໑໓໒] ພຣະອົງຂ້ານ້ອຍໃຫ້ດື່ມນ້ຳນົມ
ອັນຣະງັບຄວາມຫິວໄດ້ພຽງບໍ່ດົນ
ສ່ວນຂ້ານ້ອຍພຣະອົງຊົງໃຫ້ດື່ມແມ່ນນ້ຳນົມ
ຄືພຣະທຳເຊິ່ງສະງົບຣະງັບໄດ້ແທ້ຈິງ

[໑໓໓] ຂ້າແຕ່ພຣະມະຫາມຸນີ ພຣະອົງຊື່ວ່າບໍ່ໄດ້ເປັນໜີ້ຂ້ານ້ອຍ
ຍ້ອນການລ້ຽງດູດ້ວຍຄວາມຜູກພັນ
ຂ້ານ້ອຍໄດ້ຟັງມາວ່າ ສະຕີທັງຫຼາຍຜູ້ປາຖະໜາບຸດຂໍຢູ່
ກໍຍ່ອມໄດ້ບຸດເຊັ່ນນັ້ນ

[໑໓໔] ມານດາໃດຂອງຈອມນໍຣະຊົນ ມີພຣະເຈົ້າມັນທາດເປັນຕົ້ນ
ມານດານັ້ນຊື່ວ່າຍັງບຸດໃຫ້ຈົມຢູ່ໃນຫ້ວງມະຫັນນົບຄືພົບ
ຂ້າແຕ່ພຣະປິໂຍຣົດ ສ່ວນຂ້ານ້ອຍຜູ້ຈົມຢູ່ແລ້ວ
ພຣະອົງຊົງຊ່ອຍໃຫ້ຂ້າມພົ້ນຈາກສາຄອນຄືພົບໄດ້

[໑໓໕] ພຣະນາມວ່າ ພຣະພັນປີຫຼວງ
ສະຕີທັງຫຼາຍໄດ້ມາໂດຍງ່າຍ
(ແຕ່) ພຣະນາມວ່າ ພຸດທະມານດາ ນີ້
ສະຕີທັງຫຼາຍໄດ້ມາໂດຍຍາກຢ່າງຍິ່ງ

[໑໓໖] ຂ້າແຕ່ພຣະມະຫາວີຣະ ກໍພຣະນາມວ່າ
ພຸດທະມານດານັ້ນອັນຂ້ານ້ອຍໄດ້ແລ້ວ
ປະນິທານນ້ອຍໃຫຍ່ຂອງຂ້ານ້ອຍພຣະອົງກໍຊົງໃຫ້ສຳເລັດແລ້ວ
ທັງໝົດນັ້ນພຣະອົງຊົງໃຫ້ບໍລິບູນແລ້ວ

[໑໓໗] ຂ້ານ້ອຍປາຖະໜາທີ່ຈະລະຮ່າງນີ້ປະຣິນິບພານ
ຂ້າແຕ່ພຣະວີຣະເຈົ້າ ຜູ້ເຮັດບ່ອນສຸດແຫ່ງທຸກ ຊົງເປັນຜູ້ນຳ
ຂໍພຣະອົງຊົງໂຜດອະນຸຍາດໃຫ້ຂ້ານ້ອຍເທີ້ນ

[໑໓໘] ຂໍພຣະອົງໂຜດຊົງຢຽດພຣະຍຸຄົນບາດ
ທີ່ວິຈິດດ້ວຍລາຍກົງຈັກ (ລາຍກົງຈັກກົ້ນຫອຍ)
ແລະທຸງອັນລະອຽດອ່ອນເໝືອນດອກບົວອອກເທີ້ນ
ຂ້ານ້ອຍຈະນອບນ້ອມພຣະຍຸຄົນບາດນັ້ນ
ຈັກຂໍທຳຄວາມຮັກໃນບຸດ

[໑໓໙] ຂ້າແຕ່ພຣະອົງຜູ້ຊົງເປັນຜູ້ນຳ
ຂ້ານ້ອຍຈະເຮັດສະຣີຣະຄືຮ່າງກາຍຂອງພຣະອົງ
ເໝືອນກອງຄຳ ອັນຜາກົດເໝືອນທັບທິມ
ໃຫ້ເປັນອັນຂ້ານ້ອຍເຫັນດີແລ້ວຈຶ່ງຈະນິບພານ

[໑໔໐] ພຣະຊິນນະເຈົ້າຊົງສະແດງໃຫ້ພຣະມາຕຸດສາເຫັນພຣະວໍຣະກາຍ
ທີ່ປະກອບດ້ວຍພຣະລັກສະນະ ໓໒ ປະການ
ປະດັບດ້ວຍພຣະຣັດສະໝີຢ່າງງົດງາມ
ເຊິ່ງເປັນເໝືອນດຶງດູດດວງຕາຂອງຄົນພານ

[໑໔໑] ລຳດັບນັ້ນ ພຣະນາງມະຫາປະຊາບໍດີໂຄຕະມີນັ້ນ
ໄດ້ຊົບພຣະສຽນລົງແທບພື້ນພຣະຍຸຄົນບາດ
ເຊິ່ງເປັນລາຍກົງຈັກຄ້າຍດອກບົວບານ
ມີພຣະຣັດສະໝີດັ່ງດວງອາທິດທຳອິດທໍແສງ ແລ້ວໄດ້ຂາບທູນວ່າ

[໑໔໒] ຂ້າແຕ່ພຣະອົງຜູ້ເປັນເໝືອນດວງອາທິດຂອງນໍຣະຊົນ
ຂ້ານ້ອຍນອບນ້ອມພຣະອົງ ຜູ້ເປັນທຸງແຫ່ງວົງພຣະອາທິດ
ຂໍພຣະອົງຊົງໂພດເປັນບ່ອນເພິ່ງຂອງຂ້ານ້ອຍໃນການສຸດທ້າຍດ້ວຍເທີ້ນ
ຂ້ານ້ອຍຈະບໍ່ໄດ້ເຫັນພຣະອົງອີກ

[໑໔໓] ຂ້າແຕ່ພຣະອົງຜູ້ເລີດໃນໂລກ ຜູ້ເປັນບໍ່ເກີດແຫ່ງພຣະກະລຸນາ
ທຳມະດາສະຕີທັງຫຼາຍຮູ້ກັນວ່າມີແຕ່ຈະກໍ່ໂທດທຸກປະການ
ຖ້າໂທດແນວໃດແນວໜຶ່ງຂອງຂ້ານ້ອຍມີຢູ່
ກໍຂໍພຣະອົງໄດ້ໂຜດຍົກໂທດແກ່ຂ້ານ້ອຍດ້ວຍເທີ້ນ

[໑໘໔] ອັນໜຶ່ງ ຂ້ານ້ອຍໄດ້ທູນຂໍເລື້ອຍ ໆ
ໃຫ້ສະຕິທັງຫຼາຍໄດ້ບວດ
ຂ້າແຕ່ພຣະອົງຜູ້ອົງອາດກວ່ານໍຣະຊົນ
ຖ້າໂທດໃນຂໍ້ນັ້ນຈະມີແກ່ຂ້ານ້ອຍ
ຂໍໄດ້ໂຜດຍົກໂທດນັ້ນດ້ວຍເທີ້ນ

[໑໘໕] ຂ້າແຕ່ພຣະວີຣະເຈົ້າຜູ້ຊົງໄວ້ເຊິ່ງການຍົກໂທດ
ພິກຂຸນີທັງຫຼາຍ ອັນຂ້ານ້ອຍສັ່ງສອນແລ້ວ
ຕາມທີ່ພຣະອົງຊົງອະນຸຍາດ
ຖ້າຂໍ້ນັ້ນຈະມີການແນະນຳຜິດ
ຂໍໄດ້ໂຜດຍົກໂທດໃນຂໍ້ນັ້ນດ້ວຍເທີ້ນ

[໑໘໖] (ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ)
ໂຄຕະມີຜູ້ປະດັບໄປດ້ວຍຄຸນ
ຊື່ວ່ານິບພານກໍສົມຄວນແກ່ທ່ານ ຈະມີໂທດອັນໃດ
ເມື່ອທ່ານບອກວ່າຈະລານິບພານ
ຕະຖາຄົດຈັກໄປວ່າອັນໃດທ່ານໃຫ້ຫຼາຍນໍ

[໑໘໗] ເມື່ອພິກຂຸສົງຂອງຕະຖາຄົດບໍລິສຸດ
ບໍ່ບົກຜ່ອງ ທ່ານຈະອອກໄປຈາກໂລກນີ້ກໍຄວນ
ຍ້ອນໃນເວລາສະຫວ່າງ ເມື່ອດວງດາວໝົດແສງ
ຈັນທະເລຂາກໍເຫັນເລືອນໄປ

[໑໘໘] ພິກຂຸນີທັງຫຼາຍນອກຈາກພຣະມະຫາປະຊາບໍດີໂຄຕະມີ
ພາກັນທຳປະທັກຂິນພຣະຊິນນະເຈົ້າຜູ້ເລີດ
ເໝືອນໝູ່ດາວທີ່ຕິດຕາມດວງຈັນ
ກະທຳປະທັກຂິນພູເຂົາພຣະສຸເມຣຸ ໝອບລົງແທບພຣະຍຸຄົນບາດແລ້ວ
ຢືນເພ່ງເບິ່ງພຣະພັກຂອງພຣະພຸດທະເຈົ້າແລ້ວຂາບທູນວ່າ

[໑໘໙] ຈັກຂຸຂອງຂ້ານ້ອຍ
ບໍ່ເຄີຍອີ່ມດ້ວຍການເຫັນພຣະອົງ
ໂສຕະຂອງຂ້ານ້ອຍກໍບໍ່ເຄີຍອີ່ມດ້ວຍພາສິດຂອງພຣະອົງ
ຈິດຂອງຂ້ານ້ອຍດວງດຽວເທົ່ານັ້ນ
ບັນລຸທຳຈຶ່ງອີ່ມດ້ວຍຣົດແຫ່ງທຳ

[໑໕໐] ຂ້າແຕ່ພຣະອົງຜູ້ເປັນນະຣະຜູ້ປະເສີດ
ເມື່ອພຣະອົງບັນລືຢູ່ໃນທ່າມກາງບໍລິສັດກຳຈັດທິດຖິມານະ
ຊົນເຫຼົ່າໃດເຫັນພຣະພັກຂອງພຣະອົງ
ຊົນເຫຼົ່ານັ້ນຊື່ວ່າເປັນຜູ້ມີໂຊກດີ

[໑໕໑] ຂ້າແຕ່ພຣະອົງຜູ້ເຖິງທີ່ສຸດແຫ່ງສົງຄາມ
ຊົນເຫຼົ່າໃດປະນົບນ້ອມພຣະຍຸຄົນບາດຂອງພຣະອົງ
ເຊິ່ງມີພຣະອົງຄຸລີຍາວ ມີພຣະນະຂາແດງງົດງາມ ມີສົ້ນພຣະຍຸຄົນບາດຍາວ
ແມ່ນຊົນເຫຼົ່ານັ້ນກໍຊື່ວ່າເປັນຜູ້ມີໂຊກດີ

[໑໕໒] ຂ້າແຕ່ພຣະອົງຜູ້ເປັນນະຣະຜູ້ສູງສຸດ
ຊົນເຫຼົ່າໃດໄດ້ສະດັບພຣະດຳຣັດຂອງພຣະອົງ
ເຊິ່ງມ່ວນໜ້າພໍໃຈ ເຜົາເຊິ່ງໂທດໄດ້ ເປັນປະໂຫຍດເກື້ອກູນ
ແມ່ນຊົນເຫຼົ່ານັ້ນກໍຊື່ວ່າເປັນຜູ້ມີໂຊກດີ

[໑໕໓] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍ
ອີ່ມໄປດ້ວຍການບູຊາພຣະຍຸຄົນບາດຂອງພຣະອົງ
ຂ້າມພົ້ນທາງກັນດານຄືສົງສານໄດ້
ດ້ວຍພຣະສຸນທະຣະກະຖາຂອງພຣະອົງຜູ້ມີພຣະສິຣິ
ດັ່ງນັ້ນ ຂ້ານ້ອຍຈຶ່ງຊື່ວ່າເປັນຜູ້ມີໂຊກດີ

[໑໕໔] ລຳດັບນັ້ນ ພຣະມະຫາປະຊາບໍດີໂຄຕະມີຜູ້ມີຂໍ້ວັດງາມ
ປະກາດໃນໝູ່ພິກຂຸສົງແລ້ວໄຫວ້ພຣະຣາຫຸນ
ພຣະອານົນ ແລະພຣະນັນທະແລ້ວໄດ້ຕັດດັ່ງນີ້ວ່າ

[໑໕໕] ຂ້ານ້ອຍເບື່ອໜ່າຍຮ່າງກາຍເຊິ່ງສະເໝີດ້ວຍບ່ອນຢູ່ຂອງອະສໍຣະພິດ
ເປັນຮັງແຫ່ງໂຣກ ເປັນສະຖານທີ່ເກີດທຸກ
ມີຊະຣາແລະມໍລະນະເປັນໂຄຈອນ

[໑໕໖] ເຕັມໄປໄປດ້ວຍມົນທິນຄືຊາກສົບຕ່າງ ໆ
ຕ້ອງເພິ່ງພາຜູ້ອື່ນ ປາສະຈາກຄວາມໜ້າໃຝ່ໃຈ
ດັ່ງນັ້ນ ຂ້ານ້ອຍຈຶ່ງປາຖະໜາຈະນິບພານສາ
ຂໍລູກ ໆ ທັງຫຼາຍຈົ່ງເຂົ້າໃຈຕາມສົມຄວນເທີ້ນ

[໑໘໗] ພຣະບັນທະເຖຣະແລະພຣະພັດທະຣາທຸນ
ເປັນຜູ້ປາສະຈາກຄວາມເສົ້າໂສກ ໝົດອາສະວະ ຕັ້ງໝັ້ນ
ບໍ່ຫວັ່ນໄຫວ ມີປັນຍາ ມີຄວາມພຽນ ໄດ້ຄຶດຕາມທຳມະດາວ່າ

[໑໘໘] ໜ້າຕິຽນ ຮ່າງກາຍທີ່ປັດໄຈປຸງແຕ່ງ
ມີພາວະຫວັ່ນໄຫວ ປາສະຈາກແກ່ນສານປຽບໄດ້ກັບຕົ້ນກ້ວຍ
ເຊັ່ນດຽວກັບພະຍັບແດດເຊິ່ງເປັນມາຍາ ຫຼອກລວງບໍ່ໝັ້ນຄົງ

[໑໘໙] ພຣະໂຄຕະມີເຖຣີພຣະມາຕຸດສາຂອງພຣະຊິນນະເຈົ້ານີ້
ເຊິ່ງໄດ້ເຄີຍລ້ຽງດູພຣະພຸດທະເຈົ້າກໍຍັງຕ້ອງສະເດັດນິບພານ
ສິ່ງທີ່ປັດໄຈປຸງແຕ່ງລ້ວນບໍ່ທ່ຽງ

[໑໙໐] ໃນຄັ້ງນັ້ນ ທ່ານພຣະອານົນພຸດທະອະນຸຊາ
ເຊິ່ງເປັນພຣະອຸປັດຖາກຂອງພຣະຊິນນະເຈົ້າ
ຍັງເປັນພຣະເສຂະບຸກຄົນຢູ່ ທ່ານຫຼັ່ງນ້ຳຕາ
ຄ່ຳຄວນຢ່າງໜ້າເວທະນາໃນບ່ອນນັ້ນວ່າ

[໑໙໑] ພຣະໂຄຕະມີເຖຣີຕັດຢູ່ດຽວນີ້ເອງ ກໍຈະສະເດັດນິບພານສາແລ້ວ
ຄົງອີກບໍ່ດົນ ແມ່ນພຣະພຸດທະເຈົ້າກໍຈະສະເດັດດັບຂັນທະປະຣິນິບພານ
ເໝືອນໄຟທີ່ໝົດເຊື້ອແລ້ວ

[໑໙໒] ພຣະໂຄຕະມີເຖຣີໄດ້ຕັດກັບພຣະອານົນ
ຜູ້ຊ່ຽວຊານພຣະປະຣິຍັດຕິທຳທີ່ເລີກລ້ຳປານສາຄອນ
ຝັກໃຝ່ໃນການອຸປັດຖາກພຣະພຸດທະເຈົ້າເຊິ່ງລຳພັນຢູ່ດັ່ງກ່າວມາວ່າ

[໑໙໓] ລູກເອີຍ ເມື່ອເວລາເປັນທີ່ບັນເທີງຜາກົດແລ້ວ
ລູກບໍ່ຄວນທີ່ຈະເສົ້າໂສກເຖິງການຕາຍຂອງແມ່
ການນິບພານຂອງແມ່ນັ້ນໃກ້ເຂົ້າມາແລ້ວ

[໑໙໔] ລູກເອີຍ ພຣະສາດສະດາລູກໄດ້ທູນໃຫ້ຊົງຍິນຍອມ
ຈຶ່ງໄດ້ຊົງອະນຸຍາດໃຫ້ແມ່ບວດ
ລູກເອີຍ ລູກຢ່າເສຍໃຈໄປເລີຍ
ຄວາມພະຍາຍາມຂອງລູກຕ້ອງມີຜົນ

[໑໖໔] ກໍບົດໃດ ທີ່ເຈົ້າລັດທິທັງຫຼາຍຜູ້ເກົ່າກ່ອນບໍ່ເຫັນ
ບົດນັ້ນອັນເດັກຍິງເຊິ່ງມີອາຍຸ ໗ ປີຮູ້ແຈ້ງປະຈັກແລ້ວ

[໑໖໖] ລູກຈົ່ງຮັກສາພຸດທະສາດສະໜາໄວ້
ການເຫັນລູກເປັນການເຫັນເທື່ອສຸດທ້າຍ
ລູກເອີຍ ແມ່ຈະໄປສະຖານທີ່ທີ່ບຸກຄົນໄປແລ້ວບໍ່ຜາກົດ

[໑໖໗] ໃນການບາງເວລາ ພຣະຜູ້ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຊົງເປ່ງວາຈາສະແດງທຳ
ໃນຄັ້ງນັ້ນ ແມ່ຜູ້ມີຄວາມອະນຸເຄາະຈຶ່ງກ່າວວາຈາທີ່ມີຄວາມຫວັງວ່າ

[໑໖໘] ຂ້າແຕ່ພຣະມະຫາວີຣະ ຂໍພຣະອົງຈົ່ງຊົງພະຊົນຢູ່ດົນໆ
ຂ້າແຕ່ພຣະມະຫາມຸນີ ຂໍພຣະອົງຈົ່ງດຳຣົງພະຊົນຢູ່ຕະຫຼອດກັບ
ເພື່ອປະໂຫຍດເກື້ອກູນແກ່ຊາວໂລກທັງປວງເທີ້ນ
ຂໍພຣະອົງຊົງຢ່າຊະຣາແລະປະຣິນິບພານເລີຍ

[໑໖໙] ພຣະພຸດທະເຈົ້າພຣະອົງນັ້ນ ໄດ້ຕັດກັບແມ່ຜູ້ຂາບທູນຢູ່
ເຊັ່ນນັ້ນວ່າພຣະນາງໂຄຕະມີ ພຣະພຸດທະເຈົ້າທັງຫຼາຍ
ເປັນຜູ້ອັນໃຜ ໆ ບໍ່ຄວນວິງວອນ ເໝືອນຢ່າງທີ່ທ່ານວິງວອນຢູ່ເລີຍ

[໑໗໐] ກໍແນວໃດ ພຣະຕະຖາຄົດເຈົ້າຜູ້ສັບພັນຍູ
ຈຶ່ງຊື່ວ່າອັນບຸກຄົນເພິ່ງວິງວອນ
ແລະແນວໃດພຣະພຸດທະເຈົ້າຈຶ່ງຊື່ວ່າອັນບຸກຄົນບໍ່ເພິ່ງວິງວອນ
ພຣະອົງອັນຂ້ານ້ອຍທູນຖາມເຖິງເຫດນັ້ນແລ້ວ
ຂໍໄດ້ໂຜດຕັດບອກເຫດນັ້ນແກ່ຂ້ານ້ອຍດ້ວຍເທີ້ນ

[໑໗໑] ທ່ານຈົ່ງເບິ່ງສາວົກທັງຫຼາຍຜູ້ຜາຣົບຄວາມພຽນ
ມີໃຈເດັດດ່ຽວເພື່ອພ່ຳເພັງພຽນ ມີຄວາມບາກບັ່ນໝັ້ນຄົງເປັນນິດ
ເປັນຜູ້ພ້ອມພຽງກັນ
ນີ້ເປັນການວິງວອນຂອງພຣະພຸດທະເຈົ້າທັງຫຼາຍ

[໑໗໒] ຕໍ່ແຕ່ນັ້ນ ຂ້ານ້ອຍໄປສູ່ສຳນັກຂອງພິກຂຸນີ
ຢູ່ຄົນດຽວຄິດໄດ້ຢ່າງແຈ້ງຊັດວ່າ

ພຣະພຸດທະເຈົ້າຜູ້ຊົງເປັນບ່ອນເພິ່ງ ຜູ້ເຖິງບ່ອນສຸດແຫ່ງໄຕຣພົບ
ຊົງພໍພຣະທະໄທບໍລິສັດທີ່ສາມັກຄີກັນ

[໑໗໓] ເອົາເທີ້ນ ເຮົາຈະນິບພານ
ຢ່າໄດ້ພົບເຫັນຄວາມວິບັດນັ້ນເລີຍ
ເມື່ອຂ້ານ້ອຍຄິດດັ່ງນີ້ແລ້ວ
ໄດ້ເຂົ້າເຝົ້າພຣະລືສີຜູ້ປະເສີດ (ພຣະພຸດທະເຈົ້າ)

[໑໗໔] ແລ້ວໄດ້ຂາບທູນການເປັນທີ່ປະຣິນິບພານ
ກັບພຣະຜູ້ຊົງເປັນຜູ້ນໍາວິເສດ
ລໍາດັບນັ້ນ ພຣະອົງໄດ້ຊົງອະນຸຍາດວ່າ
ຈົ່ງຮູ້ການເອງເທີ້ນ ພຣະນາງໂຄຕະມີ

[໑໗໕] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗໖] ການທີ່ຂ້ານ້ອຍມາໃນສໍານັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທໍາສໍາເລັດແລ້ວ

[໑໗໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

[໑໗໘] (ພຣະຜູ້ມີພຣະພາກເຈົ້າຕັດວ່າ)
ໂຄຕະມີ ຄົນພານເຫຼົ່າໃດມີຄວາມສົງໄສ
ໃນການຕັດສະຣູ້ທໍາຂອງສະຕີທັງຫຼາຍ
ທ່ານຈົ່ງສະແດງລິດເພື່ອການລະທິດຖິຂອງຄົນພານເຫຼົ່ານັ້ນ

[໑໗໙] ໃນຄັ້ງນັ້ນ ພຣະໂຄຕະມີເຖຣີໝອບຂາບພຣະສໍາມາສໍາພຸດທະເຈົ້າແລ້ວ
ເຫາະຂຶ້ນສູ່ທ້ອງຟ້າ ສະແດງລິດເປັນອະເນກປະການ
ຕາມພຸດທານຸຍາດ

[໑໗໐] ຄືຄົນດຽວເປັນຫຼາຍຄົນກໍໄດ້
ຫຼາຍຄົນເປັນຄົນດຽວກໍໄດ້ ເຮັດໃຫ້ຜາກົດກໍໄດ້
ເຮັດໃຫ້ຫາຍໄປກໍໄດ້ ຊອດຝາກຳແພງ ພູເຂົາກໍໄດ້

[໑໗໑] ໄປໄດ້ບໍ່ຕິດຂັດ ດຳລົງໄປໃນແຜ່ນດິນເໝືອນດຳລົງໄປໃນນ້ຳກໍໄດ້
ຍ່າງໄປເທິງນ້ຳໂດຍທີ່ນ້ຳບໍ່ແຕກກະຈາຍເໝືອນຍ່າງໄປເທິງແຜ່ນດິນກໍໄດ້

[໑໗໒] ນັ່ງຂັດສະມາທິລອຍໄປໃນອາກາດເໝືອນນາງນົກກໍໄດ້
ໃຊ້ອຳນາດທາງກາຍໄປຕະຫຼອດພົມມະໂລກກໍໄດ້

[໑໗໓] ທຳສິເນຣຸບັນພົດໃຫ້ເປັນຄັນຮົ່ມ
ທຳແຜ່ນດິນໃຫຍ່ໃຫ້ເປັນຕົວຮົ່ມ
ຫຼືກເອົາເບື້ອງລຸ່ມຂຶ້ນ ຍ່າງກັ້ນຮົ່ມໄປມາໃນອາກາດ

[໑໗໔] ໄດ້ເຮັດໂລກໃຫ້ສວຍງາມຄືດັ່ງເວລາອາທິດ ໖ ດວງ
ອຸໄທເໜືອພູເຂົາຍຸຄັນທອນ
ແລະໄດ້ເຮັດໂລກໃຫ້ເປັນເໝືອນກຸ່ມຕາຂ່າຍດອກໄມ້ທີ່ຍອດພູເຂົາຍຸຄັນທອນ

[໑໗໕] ໃຊ້ພຣະຫັດຂ້າງໜຶ່ງກຳພູເຂົາມຸດຈະລິນ
ພູເຂົາສິເນຣຸ ພູເຂົາມັນທາຣະ
ແລະພູເຂົາທັດທະຣະໄວ້ໄດ້ທັງໝົດ
ເໝືອນກຳເມັດພັນຜັກກາດ

[໑໗໖] ໃຊ້ປາຍນິ້ວພຣະຫັດບັງດວງອາທິດແລະດວງຈັນໄວ້
ຫັດຊົ່ງດວງອາທິດແລະດວງຈັນໄວ້ເປັນພັນ ໆ ດວງ
ເໝືອນຫັດຊົ່ງພວງມາໄລ

[໑໗໗] ໃຊ້ຝ່າພຣະຫັດຂ້າງໜຶ່ງທານນ້ຳໃນມະຫາສະມຸດທັງ ໔ ໄວ້ໄດ້
ກະທຳຝົນຫ່າໃຫຍ່ໃຫ້ຕົກມີອາການດັ່ງສາຍນ້ຳທີ່ຕົກຈາກພູເຂົາຍຸຄັນທອນ

[໑໗໘] ພຣະນາງນັ້ນໄດ້ເນຣະມິດອົງເປັນພຣະເຈົ້າຈັກກະພັດ
ພ້ອມດ້ວຍບໍລິວານໃນທ້ອງຟ້າ ສະແດງເປັນຄຸດ
ຄົດຊະສານ ຣາດຊະສີ ຕ່າງບັນລືຮ້ອງຢູ່

[໑໗໙] ພຣະອົງດຽວຊົງເນຣະມິດເປັນຄະນະພິກຂຸນັບບໍ່ຖ້ວນ
ແລ້ວກໍອັນຕະຣະທານຫາຍກັບເປັນອົງດຽວຂາບທູນພຣະມຸນີວ່າ

[໑໗໐] ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍຜູ້ເປັນພຣະມາຕຸດສາຂອງພຣະອົງ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະອົງ
ບັນລຸປະໂຫຍດຕົນໂດຍລຳດັບແລ້ວ
ຂໍຂາບພຣະຍຸຄົນບາດ

[໑໗໑] ພຣະນາງ ເມື່ອສະແດງລິດຢ່າງຕ່າງ ໆ ແລ້ວລົງຈາກທ້ອງຟ້າ
ຊົງໄຫວ້ພຣະພຸດທະອົງຜູ້ຊົງສ່ອງໂລກໃຫ້ສະຫວ່າງແລ້ວ
ປະທັບນັ່ງ ໃນບ່ອນສົມຄວນແຫ່ງໜຶ່ງ (ຂາບທູນວ່າ)

[໑໗໒] ຂ້າແຕ່ພຣະມະຫາມຸນີວີຣະເຈົ້າ
ຜູ້ຊົງເປັນຜູ້ນຳ ຂ້ານ້ອຍນັ້ນມີອາຍຸໄດ້ ໑໒໐ ປີ
ພຽງເທົ່ານີ້ກໍພໍແລ້ວ ຂ້ານ້ອຍຈັກນິບພານ

[໑໗໓] ໃນຄັ້ງນັ້ນ ບໍລິສັດທັງໝົດນັ້ນ
ເຖິງຄວາມພິດສະຫວົງແທ້ນໍຈຶ່ງໄດ້ພາກັນປະນົມມືຖາມວ່າ
ຂ້າແຕ່ພຣະແມ່ເຈົ້າ ຜູ້ມີຄວາມບາກບັ່ນ ພຣະແມ່ເຈົ້າໄດ້ທຳບຸນອັນໃດໄວ້
ຈຶ່ງເປັນຜູ້ມີລິດຫາບ່ອນປຽບບໍ່ໄດ້

[໑໗໔] (ພຣະມະຫາປະຊາບໍດີໂຄຕະມີເຖຣີໄດ້ກ່າວບຸບພະຈະຣິຍາຂອງທ່ານດັ່ງຕໍ່ໄປນີ້ວ່າ)
ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໗໕] ໃນຄັ້ງນັ້ນ ຂ້າພະເຈົ້າເກີດໃນຕະກູນອຳມາດ
ເຊິ່ງສົມບູນດ້ວຍເຄື່ອງອຳນວຍຄວາມສະດວກທຸກຢ່າງ
ຈະເລີນຮຸ່ງເຮືອງ ຮັ່ງມີ ມີຊັບຫຼາຍ ໃນນະຄອນຫົງສະວະດີ

[໑໗໖] ໃນການບາງເວລາ ຂ້າພະເຈົ້າພ້ອມດ້ວຍບິດາ
ມີໝູ່ທາສີຫ້ອມລ້ອມເຂົ້າໄປເຝົ້າພຣະອົງຜູ້ອົງອາດກວ່ານໍຣະຊົນ
ພ້ອມດ້ວຍບໍລິວານຈຳນວນຫຼາຍ

[໑໗໗] ພຣະຊິນນະເຈົ້າຜູ້ບໍ່ມີອາສະວະ
ກະທຳຝົນຄືທຳໃຫ້ຕົກລົງຢູ່ ເໝືອນທ້າວວາສະວະ

ມີກຸ່ມແຫ່ງພຣະຣັດສະໝີສ່ອງແສງ
ເຊັ່ນກັບດວງອາທິດໃນສາຣະທະການ

[໑໙໗] ຂ້າພະເຈົ້າເຫັນແລ້ວເຮັດຈິດໃຫ້ເຫຼື້ອມໃສ
ແລະໄດ້ສະດັບສຸພາສິດຂອງພຣະອົງ
ໄດ້ສະດັບພຣະຜູ້ຊົງເປັນຜູ້ນຳຂອງນໍຣະຊົນ
ຊົງຕັ້ງພິກຂຸນີຜູ້ເປັນພຣະມາຕຸດສາໄວ້ໃນຕຳແໜ່ງທີ່ເລີດ

[໑໙໙] ຈຶ່ງໄດ້ຖວາຍມະຫາທານແລະປັດໄຈຈຳນວນຫຼາຍ
ແດ່ພຣະຜູ້ເລີດກວ່ານໍຣະຊົນ ຜູ້ຄົງທີ່ພຣະອົງນັ້ນ
ພ້ອມທັງພຣະສົງຕະຫຼອດ ໗ ວັນ

[໔໐໐] ແລ້ວຈຶ່ງໝອບລົງແທບພຣະຍຸຄົນບາດໄດ້ປາຖະໜາຕຳແໜ່ງນັ້ນ
ລຳດັບນັ້ນ ພຣະລືສີຜູ້ປະເສີດ (ພຣະພຸດທະເຈົ້າ)
ໄດ້ຕັດໃນທີ່ປະຊຸມໃຫຍ່ນັ້ນວ່າ

[໔໐໑] ເຮົາຈັກພະຍາກອນສະຕີຜູ້ທີ່ນິມົນພຣະຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມທັງພິກຂຸສົງໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນ
ທ່ານທັງຫຼາຍຈົ່ງຟັງເຮົາກ່າວເທີ້ນ

[໔໐໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໐໓] ສະຕີຜູ້ນີ້ຈັກມີນາມຜາກົດວ່າໂຄຕະມີ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໔໐໔] ຈັກເປັນພຣະມາຕຸດສາບຳຣຸງລ້ຽງຊີວິດ
ຂອງພຣະພຸດທະເຈົ້າພຣະອົງນັ້ນ
ໄດ້ຄວາມເປັນຜູ້ເລີດກວ່າພິກຂຸນີທັງຫຼາຍຝ່າຍຮູ້ຣາຕີດົນນານ

[໔໐໕] ໃນຄັ້ງນັ້ນ ຂ້າພະເຈົ້າໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ມີໃຈປາໂມດ ບຳຣຸງພຣະຊິນນະເຈົ້າ

ດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ
ຕໍ່ຈາກນັ້ນ ຂ້າພະເຈົ້າກໍໄດ້ຕາຍໄປ

[໔໐໖] ຂ້າພະເຈົ້າບັງເກີດໃນໝູ່ເທບຊັ້ນຕາວະຕິງສາ
ເຊິ່ງໃຫ້ສຳເລັດສິ່ງທີ່ໜ້າຕ້ອງການທຸກປະການ
ຄອບງຳພວກເທບເຫຼົ່າອື່ນດ້ວຍອົງ ໑໐ ປະການ

[໔໐໗] ຄື ດ້ວຍຮູບ ສຽງ ກິ່ນ ຣົດ ຜັດສະ (ທຳມາຣົມ)
ອາຍຸ ວັນນະ ສຸກ ແລະຍົດ

[໔໐໘] ອັນໜຶ່ງ ຮຸ່ງເຮືອງຄອບງຳເທບເຫຼົ່າອື່ນດ້ວຍຄວາມເປັນໃຫຍ່
ຂ້າພະເຈົ້າໄດ້ເປັນພຣະມະເຫສີຜູ້ເປັນທີ່ຮັກ
ຂອງທ້າວອຳມະຣິນທາທິຣາດຊັ້ນຕາວະຕິງສານັ້ນ

[໔໐໙] ເມື່ອຂ້າພະເຈົ້າຍັງວຽນວ່າຍຕາຍເກີດຢູ່ໃນສົງສານ
ເປັນຜູ້ຫວັ່ນໄຫວຍ້ອນພາຍຸຄືກຳ
ຈຶ່ງເກີດໃນໝູ່ບ້ານທາດໃນອານາເຂດຂອງພຣະເຈົ້າກາສີ

[໔໑໐] ໃນຄັ້ງນັ້ນ ທາດ ໕໐໐ ຄົນອາໄສຢູ່ໃນໝູ່ບ້ານນັ້ນ
ຂ້າພະເຈົ້າໄດ້ເປັນພັນລະຍາຂອງຫົວໜ້າທາດທັງໝົດໃນໝູ່ບ້ານນັ້ນ

[໔໑໑] ພຣະປັດເຈກພຸດທະເຈົ້າ ໕໐໐ ອົງ
ໄດ້ເຂົ້າໄປສູ່ບ້ານເພື່ອບິນທະບາດ
ຂ້າພະເຈົ້າກັບຍາດຕິພີ່ນ້ອງທຸກຄົນເຫັນພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ
ຈຶ່ງມີຄວາມຍິນດີ

[໔໑໒] ຂ້າພະເຈົ້າທັງຫຼາຍພ້ອມດ້ວຍສາມີ ເຫຼື້ອມໃສແລ້ວ
ຈຶ່ງຊ່ອຍກັນສ້າງກຸດຕິ ໕໐໐ ຫຼັງຖວາຍ
ອຸປັດຖາກຕະຫຼອດ ໔ ເດືອນແລ້ວຖວາຍໄຕຣຈີວອນ

[໔໑໓] ຈາກນັ້ນ ຂ້າພະເຈົ້າທັງຫຼາຍພ້ອມດ້ວຍສາມີຕາຍໄປ
ກໍໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ
ບັດນີ້ ເປັນພົບສຸດທ້າຍ ຂ້າພະເຈົ້າໄດ້ເກີດໃນນະຄອນເທວະທະຫະ

[໔໑໔] ພຣະຊະນົກຂອງຂ້າພະເຈົ້າຊົງພຣະນາມວ່າອັນຊະນະສາກະຍະ
ພຣະຊົນນີຂອງຂ້າພະເຈົ້າຊົງພຣະນາມວ່າ ສຸລັກຂະນາ

ຕໍ່ມາ ຂ້າພະເຈົ້າໄດ້ໄປສູ່ພຣະຣາດຊະວັງຂອງພຣະເຈົ້າສຸດໂທທະນະ
ໃນນະຄອນກະບິນລະພັດ

[໔໑໕] ສະຕິທຸກຄົນເກີດໃນຕະກູນສາກະຍະແລ້ວ
ໄດ້ໄປສູ່ພຣະຣາດຊະວັງຂອງເຈົ້າສາກະຍະທັງຫຼາຍ
ຂ້າພະເຈົ້າປະເສີດກວ່າສະຕິທຸກຄົນ
ໄດ້ເປັນຜູ້ບຳຣຸງລ້ຽງພຣະຊິນນະເຈົ້າ

[໔໑໖] ພຣະໂອຣົດຂອງຂ້າພະເຈົ້າພຣະອົງນັ້ນ
ສະເດັດອອກມະຫາພິເນດສະກົມແລ້ວ
ໄດ້ເປັນພຣະພຸດທະເຈົ້າ ຊົງເປັນຜູ້ນຳວິເສດ
ພາຍຫຼັງຂ້າພະເຈົ້າພ້ອມດ້ວຍນາງສາກິຍານີ ໕໐໐ ນາງຈຶ່ງໄດ້ບວດ

[໔໑໗] ແລ້ວໄດ້ປະສົບສັນຕິສຸກພ້ອມດ້ວຍນາງສາກິຍານີຜູ້ມີຄວາມພຽນ
ໃນຄັ້ງນັ້ນ ຊົນເຫຼົ່າໃດຜູ້ເຄີຍເປັນສາມີຂອງພວກຂ້າພະເຈົ້າໃນຊາດກ່ອນ ໆ

[໔໑໘] ຊົນເຫຼົ່ານັ້ນ ເຄີຍທຳບຸນຮ່ວມກັນມາ
ປະພຶດຕາມຄຳສອນທີ່ຄວນບູຊາ
ພຣະສຸຄົດຊົງອະນຸເຄາະແລ້ວ ໄດ້ບັນລຸອະຣະຫັດຕະຜົນ

[໔໑໙] ພິກຂຸນີທັງຫຼາຍຜູ້ມີລິດຫຼາຍ
ນອກຈາກພຣະມະຫາປະຊາບໍດີໂຄຕະມີເຖຣີນັ້ນ
ໄດ້ພາກັນເຫາະຂຶ້ນສູ່ທ້ອງຟ້າ ຮຸ່ງເຮືອງ
ເໝືອນດວງດາວທັງຫຼາຍທີ່ໂຄຈອນເກາະກຸ່ມກັນໄປ

[໔໒໐] ພິກຂຸນີເຫຼົ່ານັ້ນ ເປັນຜູ້ສຶກສາແລ້ວໃນບຸນກຳ
ຈຶ່ງສະແດງລິດໄດ້ເປັນອະເນກປະການ
ເໝືອນນາຍຊ່າງຄຳທີ່ໄດ້ຮັບການສຶກສາແລ້ວ
ສະແດງເຄື່ອງປະດັບຄຳຊະນິດຕ່າງ ໆ

[໔໒໑] ໃນຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນ
ເມື່ອສະແດງປາຕິຫານຫຼາຍຢ່າງແລ້ວ
ກະທຳພຣະມຸນີຜູ້ປະເສີດກວ່າດວງອາທິດ
ພ້ອມທັງບໍລິສັດໃຫ້ຊົງພໍພຣະທະໄທຍິນດີແລ້ວ

[๘๘๘] ໄດ້ພາກັນລົງຈາກທ້ອງຟ້າ
ໄຫວ້ພຣະລືສີຜູ້ປະເສີດ (ພຣະພຸດທະເຈົ້າ)
ຜູ້ອັນພຣະສາດສະດາຜູ້ເປັນນະຣະຜູ້ເລີດ
ຊົງອະນຸຍາດແລ້ວຈຶ່ງນັ່ງໃນບ່ອນສົມຄວນ

[๘๘๙] (ໄດ້ຂາບທູນວ່າ) ຂ້າແຕ່ພຣະວີຣະເຈົ້າ
ໜ້າຊົມເຊີຍ ພຣະໂຄຕະມິເຖຣີ
ເປັນຜູ້ອະນຸເຄາະຂ້ານ້ອຍທັງປວງ
ຂ້ານ້ອຍທັງຫຼາຍຖືກພຣະນາງອົບຮົມດ້ວຍບຸນ
ຈຶ່ງໄດ້ບັນລຸທຳເປັນທີ່ສິ້ນອາສະວະ

[๘๘๘] ກິເລດທັງຫຼາຍຂ້ານ້ອຍທັງຫຼາຍກຳເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍທັງຫຼາຍກຳຖອນໄດ້ແລ້ວ
ຂ້ານ້ອຍທັງຫຼາຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[๘๘๕] ການທີ່ຂ້ານ້ອຍທັງຫຼາຍມາໃນສຳນັກ
ຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ๓ ຂ້ານ້ອຍທັງຫຼາຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວ

[๘๘๖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ๔ ວິໂມກ ๘
ແລະອະພິນຍາ ๖ ຂ້ານ້ອຍທັງຫຼາຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ
ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

[๘๘๗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍ
ເປັນຜູ້ມີຄວາມຊຳນານໃນລິດ ໃນທິບພະໂສຕະທາດ
ແລະໃນເຈໂຕປະຣິຍະຍານ

[๘๘๘] ຮູ້ບຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍທັງຫຼາຍກໍຊຳຣະໃຫ້ບໍລິສຸດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໔໙] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ
ແລະປະຕິພານະປະຕິສຳພິທາຍານຂອງຂ້ານ້ອຍທັງຫຼາຍທີ່ມີຢູ່
ລ້ວນເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໔໕໐] ຂ້າແຕ່ພຣະອົງຜູ້ຊົງເປັນຜູ້ນຳ ຊົງເປັນມະຫາມຸນີ
ພຣະອົງຊົງເປັນຜູ້ທີ່ຂ້ານ້ອຍທັງຫຼາຍມີຈິດເມດຕາ ປະຕິບັດ
ຂໍພຣະອົງໂຜດຊົງອະນຸຍາດໃຫ້ຂ້ານ້ອຍທັງໝົດນິບພານເທີ້ນ

[໔໕໑] ພຣະຊິນນະເຈົ້າໄດ້ຕັດວ່າ ເມື່ອທ່ານທັງຫຼາຍກ່າວແນວນີ້ວ່າ
ຈັກນິບພານ ເຮົາຕະຖາຄົດຈະໄປກ່າວອັນໃດໄດ້
ກໍບັດນີ້ທ່ານທັງຫຼາຍຈົ່ງສຳຄັນການອັນສົມຄວນນັ້ນເທີ້ນ

[໔໕໔] ໃນຄັ້ງນັ້ນ ພິກຂຸນີເຫຼົ່ານັ້ນມີພຣະໂຄຕະມີເຖຣີເປັນອາທິ
ໄຫວ້ພຣະຊິນນະເຈົ້າແລ້ວ ໄດ້ພາກັນລຸກຈາກບ່ອນນັ່ງນັ້ນໄປ

[໔໕໕] ພຣະທີຣະເຈົ້າ ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ພ້ອມດ້ວຍໝູ່ຊົນຈຳນວນຫຼາຍ
ໄດ້ສະເດັດໄປສົ່ງພຣະມາຕຸດສາຈົນເຖິງຊຸ້ມປະຕູ

[໔໕໔] ໃນຄັ້ງນັ້ນ ພຣະໂຄຕະມີເຖຣີພ້ອມດ້ວຍພິກຂຸນີທຸກອົງນອກນີ້
ໄດ້ພາກັນໝອບລົງແທບພຣະຍຸຄົນບາດຂອງພຣະສາດສະດາ
ຜູ້ເປັນເຜົ່າພັນຂອງໂລກແລ້ວຂາບທູນວ່າ
ນີ້ເປັນການຂາບພຣະຍຸຄົນບາດເທື່ອສຸດທ້າຍ

[໔໕໕] ນີ້ເປັນການເຫັນພຣະໂລກກະນາດເທື່ອສຸດທ້າຍຂອງຂ້ານ້ອຍ
ຂ້ານ້ອຍຈັກບໍ່ໄດ້ເຫັນພຣະພັກ
ເຊິ່ງມີອາການດັ່ງນ້ຳອຳມະຣິດຂອງພຣະອົງອີກ
[໔໕໖] ຂ້າແຕ່ພຣະວີຣະຜູ້ເລີດໃນໂລກ
ການຂາບໄຫວ້ຂອງຂ້ານ້ອຍ
ຈັກບໍ່ສຳຜັດພຣະຍຸຄົນບາດອັນລະອຽດອ່ອນຂອງພຣະອົງ (ອີກ)
ວັນນີ້ ຂ້ານ້ອຍຈະນິບພານ
[໔໕໗] ພຣະສາດສະດາຕັດວ່າ ຈະມີປະໂຫຍດອັນໃດແກ່ທ່ານດ້ວຍຮູບນີ້
ເມື່ອທຳທີ່ທ່ານເຫັນແລ້ວຕາມຄວາມເປັນຈິງ

ສັງຂະຕະທຳທັງປວງນັ້ນຖືກປັດໄຈປຸງແຕ່ງ
ບໍ່ແມ່ນເປັນສິ່ງທີ່ໜ້າຍິນດີ ແລະເປັນຂອງຫຼອກລວງ

[໔໓໗] ພຣະມະຫາປະຊາບໍດີເຖຣີພ້ອມດ້ວຍພິກຂຸນີເຫຼົ່ານັ້ນ
ກັບໄປສູ່ສຳນັກຂອງຕົນແລ້ວ
ນັ່ງຂັດສະມາທິຊັ້ນດຽວເທິງອາສະນະທີ່ປະເສີດ

[໔໓໙] ໃນຄັ້ງນັ້ນ ອຸປາສິກາທັງຫຼາຍໃນບ່ອນນັ້ນ
ຜູ້ມີຄວາມເຄົາລົບຮັກໃນພຸດທະສາດສະໜາ
ໄດ້ສະດັບຄວາມເປັນໄປຂອງພຣະນາງ
ຕ່າງກໍເຂົ້າໄປນະມັດສະການພຣະຍຸຄົນບາດ

[໔໔໐] ຮ້ອງໄຫ້ ຄ່ຳຄວນຢ່າງໜ້າສົງສານ
ອັດອັ້ນຕັນໃຈດ້ວຍຄວາມເສົ້າໂສກ ລົ້ມລົງພື້ນ
ເໝືອນເຄືອເຂົາທີ່ມີຮາກຂາດແລ້ວກອງລົງ ລຳພັນດ້ວຍວາຈາວ່າ

[໔໔໑] ຂ້າແຕ່ພຣະແມ່ເຈົ້າຜູ້ປະທານບ່ອນເພິ່ງແກ່ຂ້ານ້ອຍທັງຫຼາຍ
ພຣະແມ່ເຈົ້າ ຢ່າໄດ້ລະຖິ້ມຂ້ານ້ອຍທັງຫຼາຍນິບພານເລີຍ
ຂ້ານ້ອຍທຸກຄົນຂໍຊີບສຽນອ້ອນວອນ

[໔໔໔] ພຣະມະຫາປະຊາບໍດີເຖຣີລູບຫົວຂອງອຸປາສິກາຜູ້ມີສັດທາ
ມີປັນຍາ ເຊິ່ງເປັນຫົວໜ້າຂອງອຸປາສິກາເຫຼົ່ານັ້ນ ໄດ້ກ່າວຄຳນີ້ວ່າ

[໔໔໓] ລູກທັງຫຼາຍເອີຍ
ຢ່າເລີຍ ການຮ້ອງໄຫ້ເຊິ່ງເປັນໄປໃນບ່ວງແຫ່ງມານ
ສັງຂະຕະທຳທັງປວງລ້ວນບໍ່ທ່ຽງ
ມີແຕ່ຈະຫວັ່ນໄຫວພັດພາກຈາກກັນໄປ

[໔໔໔] ຕໍ່ຈາກນັ້ນ ພຣະນາງກໍລະອຸປາສິກາເຫຼົ່ານັ້ນແລ້ວ
ເຂົ້າປະຖົມຊານ ທຸຕິຍະຊານ ຕະຕິຍະຊານ
ແລະຈະຕຸດຖະຊານ ອັນປະເສີດ

[໔໔໕] ແລ້ວເຂົ້າອາກາສານັນຈາຍະຕະນະຊານ
ວິນຍານັນຈາຍະຕະນະຊານ ອາກິນຈັນຍາຍະຕະນະຊານ
ແລະເນວະສັນຍານາສັນຍາຍະຕະນະຊານ ຕາມລຳດັບ

[໔໕໖] ແລ້ວພຣະໂຄຕະມີເຖຣີ ກໍເຂົ້າຊານທັງຫຼາຍໂດຍປະຕິໂລມ
ຈົນເຖິງປະຖົມຊານ ເຂົ້າຊານທັງ ໓ ຈົນເຖິງຈະຕຸດຖະຊານ

[໔໕໗] ເມື່ອອອກຈາກຈະຕຸດຖະຊານແລ້ວບໍ່ມີອາສະວະນິບພານ
ເໝືອນດວງປະທີບໝົດເຊື້ອດັບໄປ
ໄດ້ເກີດແຜ່ນດິນໄຫວໃຫຍ່ ສາຍຟ້າກໍຜ່າລົງມາຈາກນະພາກາດ

[໔໕໘] ກອງທິບກໍບັນລືລັ່ນຂຶ້ນເອງ ເທບທັງຫຼາຍພາກັນຄ່ຳຄວນ
ແລະຝົນດອກໄມ້ກໍໂຮຍລົງມາຈາກອາກາດລົງສູ່ພື້ນດິນ

[໔໕໙] ແມ່ນພູເຂົາເມຣຸຣາດກໍກຳປະນາດຫວັ່ນໄຫວ
ເໝືອນຄົນເຕັ້ນລຳທ່າມກາງໂຮງເຕັ້ນລຳ
ທະເລກໍປັ່ນປ່ວນຄວນຄາງຍ້ອນຄວາມເສົ້າໂສກ

[໔໖໐] ເທບ ນາກ ອະສູນ ແລະພົມຕ່າງກໍພາກັນສະລົດໃຈ
ກ່າວຂຶ້ນໃນຂະນະນັ້ນເອງວ່າ ສັງຂານທັງຫຼາຍບໍ່ທ່ຽງນໍ
ເໝືອນພຣະມະຫາປະຊາບໍດີເຖຣີນີ້
ເຖິງຄວາມຍ່ອຍຍັບໄປແລ້ວ

[໔໖໑] ແລະພຣະເຖຣີທັງຫຼາຍຜູ້ເຮັດຕາມຄຳສັ່ງສອນຂອງພຣະສາດສະດາ
ເຊິ່ງຫ້ອມລ້ອມພຣະມະຫາປະຊາບໍດີເຖຣີນີ້ກໍບໍ່ຍຶດໝັ້ນຖືໝັ້ນ
ພາກັນນິບພານໄປແລ້ວ
ເໝືອນດວງປະທີບໝົດເຊື້ອດັບໄປ

[໔໖໒] ໂອນໍ ຄວາມພົບພໍ້ກັນມີຄວາມພັດພາກເປັນບ່ອນສຸດ
ໂອນໍ ສິ່ງທີ່ປັດໄຈປຸງແຕ່ງລ້ວນບໍ່ທ່ຽງ
ໂອນໍ ຊີວິດມີຄວາມພິນາດເປັນບ່ອນສຸດ
ການຄ່ຳຄວນໄດ້ມີແລ້ວ ດ້ວຍປະການດັ່ງນີ້

[໔໖໓] ລຳດັບນັ້ນ ເທວະດາແລະພົມຕ່າງກໍເຂົ້າໄປເຝົ້າພຣະລືສີຜູ້ປະເສີດ
ຈຶ່ງທຳຄວາມປະພຶດຕາມໂລກກະທຳສົມຄວນແກ່ການ

[໔໖໔] ໃນຄັ້ງນັ້ນ ພຣະສາດສະດາຕັດຮຽກພຣະອານົນ
ຜູ້ເປັນພະຫູສູດ ມີປັນຍາເໝືອນຫ້ວງນ້ຳມາສັ່ງວ່າ
ອານົນ ທ່ານຈົ່ງໄປປະກາດໃຫ້ພິກຂຸທັງຫຼາຍຮູ້
ເຖິງການປະຣິນິບພານຂອງພຣະມານດາ

[໔໕໕] ໃນການນັ້ນ ທ່ານພຣະອານົນໝົດຄວາມແຊ່ມຊື່ນ
ມີນ້ຳຕານອງເນດ ປະກາດດ້ວຍສຽງສັ່ນເຄືອວ່າ
ຂໍພິກຂຸທັງຫຼາຍຈົ່ງມາປະຊຸມກັນ

[໔໕໖] ຄືພິກຂຸທັງຫຼາຍທີ່ເປັນໂອຣົດຂອງພຣະສຸຄົດເຈົ້າທັງທີ່ຢູ່ໃນທິດຕາເວັນອອກ
ທິດໃຕ້ ທິດຕາເວັນຕົກ ທິດເໜືອ
ພິກຂຸມີນັ້ນເປັນມານດາຂອງເຮົາ

[໔໕໗] ຜູ້ປະຄົບປະຫງົມສະຣີຣະສຸດທ້າຍຂອງພຣະມຸນີໃຫ້ຈະເລີນ
ດ້ວຍນ້ຳນົມຂອງຕົນ ພິກຂຸນີນັ້ນ ຄືພຣະໂຄຕະມີເຖຣີ
ດັບສະນິດແລ້ວເໝືອນດວງດາວດັບແສງໃນເວລາດວງອາທິດຂຶ້ນ

[໔໕໘] ພຣະນາງຊົງປະກາດໃຫ້ຮູ້ວ່າ ເປັນພຸດທະມານດາ
ແລ້ວນິບພານ ເຊິ່ງເປັນທີ່ທີ່ຄົນແມ່ນມີດວງຕາຮອດ ໕ ດວງກໍແນມບໍ່ເຫັນ
ແຕ່ພຣະຜູ້ມີພຣະພາກເຈົ້າຜູ້ເປັນຜູ້ນຳຊົງເຫັນໄດ້

[໔໕໙] ຂໍພຣະໂອຣົດຂອງພຣະສຸຄົດເຈົ້າ ຜູ້ມີສັດທາໃນພຣະສຸຄົດເຈົ້າ
ຫຼື ເປັນສິດຂອງພຣະມະຫາມຸນີ
ຈົ່ງເຮັດສັກກາຣະພຸດທະມານດາເທີ້ນ

[໔໖໐] ພິກຂຸທັງຫຼາຍເຖິງຢູ່ໃນບ່ອນໄກແສນໄກ
ໄດ້ສະດັບຄຳປະກາດນັ້ນແລ້ວ ກໍຟ້າວມາ
ບາງພວກມາດ້ວຍພຸດທານຸພາບ
ບາງພວກທີ່ຊຳນານໃນລິດກໍມາດ້ວຍລິດຂອງຕົນ

[໔໖໑] ຕ່າງຊ່ອຍກັນຍົກຕຽງທີ່ພຣະໂຄຕະມີເຖຣີນອນສະງົບນິ່ງ
ຂຶ້ນຕັ້ງເທິງເຮືອນຍອດທີ່ປະເສີດ
ສຳເລັດດ້ວຍຄຳລ້ວນ ງົດງາມໜ້າຍິນດີ

[໔໖໒] ທ້າວໂລກກະບານທັງ ໔ ຕ່າງກໍໃຊ້ບ່າຮອງຮັບເຮືອນຍອດໄວ້
ເທວະດາທີ່ເຫຼືອມີທ້າວສັກກະເທວະຣາດເປັນຕົ້ນ
ກໍເຂົ້າຊ່ອຍຮັບເຮືອນຍອດດ້ວຍ

[໔໖໓] ກໍເຮືອນຍອດທັງໝົດມີ ໕໐໐ ຫຼັງ
ວິດສຸກຳເທບພະບຸດໄດ້ເນຣະມິດຂຶ້ນ
ມີສີເໝືອນດວງອາທິດໃນສາຣະທະການ

[໘໖໔] ພິກຂຸນີທັງໝົດ ຜູ້ນອນສະງົບນິ່ງຢູ່ເທິງຕຽງ
ໃນບ່ອນນັ້ນ ກໍຖືກເທບທັງຫຼາຍແບກນຳອອກໄປຕາມລຳດັບ

[໘໖໕] ພື້ນນະພາກາດຖືກເພດານບັງໄວ້ທົ່ວ
ທີ່ເພດານນັ້ນມີດວງຈັນ ດວງອາທິດ
ພ້ອມທັງດວງດາວທີ່ເຮັດດ້ວຍຄຳປະດັບຕິດໄວ້

[໘໖໖] ທຸງປະຕາກ (ທຸງຜ້າ) ໄດ້ຖືກຍົກຂຶ້ນປະດັບໄວ້ເປັນຈຳນວນຫຼາຍ
ເຄື່ອງຄຸມດອກໄມ້ທີ່ສວຍງາມ
ດອກບົວໃນອາກາດມີປາຍຫ້ອຍລົງ
ສ່ວນດອກໄມ້ຢູ່ພື້ນດິນມີປາຍຊີ້ຂຶ້ນ

[໘໖໗] ດວງຈັນແລະດວງອາທິດກໍຜາກົດ
ແລະດວງດາວທັງຫຼາຍກໍສ່ອງແສງ
ອັນໜຶ່ງ ດວງອາທິດແມ່ນຢູ່ໃນເວລາທ່ຽງວັນ
ກໍເໝືອນດວງຈັນບໍ່ສ່ອງແສງໃຫ້ຮ້ອນຮົນ

[໘໖໘] ເທບທັງຫຼາຍພາກັນບູຊາດ້ວຍຂອງຫອມ
ແລະດອກໄມ້ມີກິ່ນຫອມ
ດ້ວຍການປະໂຄມດົນຕີ ຟ້ອນລຳ ແລະຂັບຮ້ອງອັນເປັນທິບ

[໘໖໙] ນາກ ອະສູນ ແລະພົມ
ຕ່າງກໍພາກັນບູຊາພຸດທະມານດາຜູ້ນິບພານເຊິ່ງຖືກເຂົານຳອອກໄປແລ້ວ
ຕາມຄວາມສາມາດຕາມກຳລັງ

[໘໗໐] ພິກຂຸນີຜູ້ເປັນໂອຣົດຂອງພຣະສຸຄົດເຈົ້າ
ເຊິ່ງນິບພານແລ້ວທັງໝົດຖືກອັນເຊີນໄປຂ້າງໜ້າ
ພຣະໂຄຕະມີເຖຣີຜູ້ລ້ຽງດູພຣະພຸດທະເຈົ້າ
ຜູ້ອັນເທວະດາແລະມະນຸດສັກກາຣະແລ້ວຖືກອັນເຊີນໄປຂ້າງຫຼັງ

[໘໗໑] ເທວະດາ ມະນຸດ ພ້ອມດ້ວຍນາກ ອະສູນ
ແລະພົມໄປຂ້າງໜ້າ
ພຣະພຸດທະເຈົ້າພ້ອມດ້ວຍສາວົກສະເດັດໄປຂ້າງຫຼັງ
ເພື່ອບູຊາພຸດທະມານດາ

[໔໓໔] ການປະຣິນິບພານຂອງພຣະພຸດທະເຈົ້າ
ບໍ່ໄດ້ເປັນເຊັ່ນການປະຣິນິບພານຂອງພຣະໂຄຕະມີເຖຣີເລີຍ
ການປະຣິນິບພານຂອງພຣະໂຄຕະມີເຖຣີອັດສະຈັນແທ້ນໍ

[໔໓໕] ໃນເວລາທີ່ພຣະພຸດທະເຈົ້າສະເດັດດັບຂັນທະປະຣິນິບພານ
ບໍ່ມີພຣະພຸດທະເຈົ້າ ແລະພິກຂຸທັງຫຼາຍມີພຣະສາຣີບຸດເປັນຕົ້ນ
ເໝືອນໃນເວລາທີ່ພຣະໂຄຕະມີເຖຣີນິບພານ
ເຊິ່ງມີທັງພຣະພຸດທະເຈົ້າ ແລະພິກຂຸທັງຫຼາຍມີພຣະສາຣີບຸດເປັນຕົ້ນ

[໔໓໔] ຊົນທັງຫຼາຍຊ່ອຍກັນເຮັດຈິຕະກາທານ
ເຊິ່ງສຳເລັດດ້ວຍໄມ້ມີກິ່ນຫອມລ້ວນ ແລະໂຮຍຈຸນເຄື່ອງຫອມ
ແລ້ວຊາປະນະກິດພິກຂຸນີເຫຼົ່ານັ້ນເທິງຈິຕະກາທານນັ້ນ ໆ

[໔໓໕] ສ່ວນທີ່ເຫຼືອຖືກໄຟໄໝ້ໄປຈົນໝົດເຫຼືອໄວ້ພຽງອັດຖິ
ກໍເວລານັ້ນ ທ່ານພຣະອານົນໄດ້ກ່າວອາຈາ
ໃຫ້ເກີດຄວາມສັງເວດວ່າ

[໔໓໖] ພຣະໂຄຕະມີເຖຣີນິບພານແລ້ວ
ພຣະສະຣີຣະຂອງພຣະນາງກໍຖືກເຜົາແລ້ວ
ກໍານົດໄດ້ວ່າ ການປະຣິນິບພານຂອງພຣະພຸດທະເຈົ້ານີ້
ຄົງຈັກມີໂດຍການບໍ່ດົນ

[໔໓໗] ຈາກນັ້ນ ທ່ານພຣະອານົນຖືກພຣະພຸດທະເຈົ້າຊົງຕັກເຕືອນ
ຈຶ່ງໄດ້ນ້ອມນຳອັດຖິທາດຂອງພຣະໂຄຕະມີເຖຣີ
ເຊິ່ງຢູ່ໃນບາດຂອງພຣະນາງເຂົ້າມາຖວາຍພຣະໂລກະນາດ

[໔໓໘] ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນລືສີຜູ້ປະເສີດ
ຊົງໃຊ້ພຣະຫັດປະຄອງອັດຖິເຫຼົ່ານັ້ນ
ໄດ້ຕັດວ່າ ຕົ້ນໄມ້ໃຫຍ່ມີແກ່ນຢືນຕົ້ນ

[໔໓໙] ເຖິງຈະມີລຳຕົ້ນໃຫຍ່ໂຕ ກໍເພິ່ງທັກທຳລາຍໄປໄດ້
ຍ້ອນຄວາມບໍ່ທ່ຽງ ພຣະໂຄຕະມີເຖຣີກໍຄືກັນ
ເຖິງຈະເປັນໃຫຍ່ກວ່າພິກຂຸນີສົງກໍປະຣິນິບພານໄປແລ້ວ

[໔໘໐] ເບິ່ງເທີ້ນອານົນ ພຸດທະມານດາແມ່ນປະຣິນິບພານແລ້ວ
ເຫຼືອພຽງສະຣີຣະທາດ ທ່ານບໍ່ຄວນເສົ້າໂສກຄ່ຳຄວນເຖິງ

[໔໗໑] ຄົນອື່ນ ໆ ກໍບໍ່ຄວນເສົ້າໂສກເຖິງ
ພຣະນາງຜູ້ຂ້າມຫ້ວງນ້ຳຄືສັງສາຣະວັດໄປແລ້ວ
ລະເວັ້ນເຫດທີ່ເຮັດໃຫ້ເດືອດຮ້ອນໄດ້ແລ້ວ ເປັນຜູ້ເຢັນດັບສະນິດແລ້ວ
[໔໗໒] ພຣະນາງເປັນບັນດິດ ມີປັນຍາຫຼາຍແລະມີປັນຍາກວ້າງຂວາງ
ທັງເປັນຣັດຕັນຍູກວ່າພິກຂຸນີທັງຫຼາຍ
ພິກຂຸທັງຫຼາຍ ພວກທ່ານຈົ່ງຮູ້ຢ່າງນີ້ເທີ້ນ
[໔໗໓] ພຣະໂຄຕະມີເຖຣີເປັນຜູ້ຊໍານານໃນລິດ ໃນທິບພະໂສຕະທາດ
ແລະໃນເຈໂຕປະຣິຍະຍານ
[໔໗໔] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸພຣະໂຄຕະມີເຖຣີກໍຊໍາຣະໃຫ້ໝົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ
[໔໗໕] ອັດຖະປະຕິສໍາພິທາຍານ ທໍາມະປະຕິສໍາພິທາຍານ
ນິຣຸດຕິປະຕິສໍາພິທາຍານ ປະຕິພານະປະຕິສໍາພິທາຍານກໍບໍລິສຸດແລ້ວ
ຍ້ອນແນວນັ້ນ ພຣະໂຄຕະມີເຖຣີນັ້ນອັນໃຜ ໆ ບໍ່ຄວນເສົ້າໂສກເຖິງ

[໔໗໖] ຄວາມເປັນໄປຂອງໄຟທີ່ລຸກສະຫວ່າງແຈ້ງຂຶ້ນ
ທີ່ຖືກແຜ່ນເຫຼັກໜາທັບໄວ້ແລ້ວ
ດັບສະນິດໄປຕາມລໍາດັບ ໃຜ ໆ ກໍຮູ້ບໍ່ໄດ້ ສັນໃດ

[໔໗໗] ຄະຕິຂອງຜູ້ລຸດພົ້ນໂດຍຊອບແລ້ວ
ເຊິ່ງຂ້າມເຄື່ອງຜູກພັນຄືກາມແລະໂອຄະໄດ້
ບັນລຸບົດອັນບໍ່ຫວັ່ນໄຫວ ຍ່ອມບໍ່ມີ
ເພື່ອຈະໃຫ້ໃຜ ໆ ຮູ້ໄດ້ ກໍສັນນັ້ນ

[໔໗໘] ຍ້ອນແນວນັ້ນ ທ່ານທັງຫຼາຍຈົ່ງມີຕົນເປັນບ່ອນເພິ່ງ
ມີສະຕິປັດຖານເປັນໂຄຈອນ
ທ່ານທັງຫຼາຍຈະເລີນໂພດຊົງ ໗ ປະການແລ້ວ
ຈັກເຮັດບ່ອນສຸດແຫ່ງທຸກໄດ້

ໄດ້ຮູ້ວ່າ ພຣະນາງມະຫາປະຊາບໍດີໂຄຕະມີພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ມະຫາປະຊາປະຕິໂຄຕະມີເຖຣີຍາປະທານທີ ໗ ຈົບ**

## ໗. ເຂມາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະເຂມາເຖຣີ

(ພຣະເຂມາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໗໙] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ມີພຣະຈັກຂຸໃນທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໙໐] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນເສດຖີ
ມີຄວາມຮຸ່ງເຮື່ອງດ້ວຍຣັດຕະນະຕ່າງ ໆ ໃນນະຄອນຫົງສະວະດີ
ເປັນຜູ້ພຽບພ້ອມດ້ວຍຄວາມສຸກຫຼາຍ

[໔໙໑] ຂ້ານ້ອຍເຂົ້າໄປເຝົ້າພຣະມະຫາວີຣະພຣະອົງນັ້ນແລ້ວ
ໄດ້ຟັງພຣະທຳມະເທດສະໜາ
ແຕ່ນັ້ນຂ້ານ້ອຍເກີດຄວາມເຫຼື້ອມໃສ
ໄດ້ເຖິງພຣະຊິນນະເຈົ້າເປັນສະຣະນະ

[໔໙໒] ຂ້ານ້ອຍໄດ້ວິງວອນມານດາບິດາແລ້ວ
ຈຶ່ງທູນນິມົນພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳວິເສດ
ພ້ອມທັງສາວົກໃຫ້ສະເຫວີຍແລະສັນຕະຫຼອດ ໗ ວັນ

[໔໙໓] ເມື່ອ ໗ ວັນລ່ວງໄປແລ້ວ
ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນສາຣະຖີຝຶກນໍຣະຊົນ
ຊົງຕັ້ງພິກຂຸນີອົງໜຶ່ງ
ເຊິ່ງສູງສຸດຝ່າຍພິກຂຸນີຜູ້ມີປັນຍາຫຼາຍໃນເອຕະທັກຄະ

[໔໙໔] ຂ້ານ້ອຍໄດ້ຟັງເລື້ອງນັ້ນແລ້ວ ມີຄວາມຍິນດີ
ເຮັດສັກກາຣະພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະອົງນັ້ນອີກ
ແລ້ວໝອບລົງປາຖະໜາຕຳແໜ່ງນັ້ນ

[໔໙໕] ແຕ່ນັ້ນ ພຣະຊິນນະເຈົ້າພຣະອົງນັ້ນຕັດກັບຂ້ານ້ອຍວ່າ
ຄວາມປາຖະໜາຂອງທ່ານຈັກສຳເລັດ

ສັກກາຣະທີ່ທ່ານເຮັດແລ້ວແກ່ເຮົາ
ພ້ອມທັງພຣະສົງນີ້ມີຜົນປະມານບໍ່ໄດ້

[໘໙໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໘໙໗] ສະຕິຜູ້ນີ້ຈັກເປັນພິກຂຸນີມີນາມວ່າ ເຂມາ
ເປັນທຳທາຍາດຂອງພຣະສາດສະດາພຣະອົງນັ້ນ
ເປັນໂອຣົດທີ່ທຳເນຣະມິດຈັກໄດ້ຕຳແໜ່ງອັນເລີດນີ້

[໘໙໘] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໘໙໙] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນຕາວະຕິງສານັ້ນແລ້ວ
ໄປເກີດໃນສະຫວັນຊັ້ນຍາມາ
ຈຸຕິຈາກສະຫວັນຊັ້ນຍາມານັ້ນແລ້ວໄປເກີດໃນສະຫວັນຊັ້ນດຸສິດ
ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວໄປເກີດໃນສະຫວັນຊັ້ນນິມມານະຣະດີ
ຈຸຕິຈາກສະຫວັນຊັ້ນນິມມານະຣະດີນັ້ນແລ້ວ
ໄປເກີດໃນສະຫວັນຊັ້ນປະຣະນິມມິຕະວະສະວັດດີ

[໙໐໐] ຍ້ອນອຳນາດແຫ່ງກຳນັ້ນ ຂ້ານ້ອຍເກີດໃນພົບໃດ ໆ
ໃນພົບນັ້ນ ໆ ກໍໄດ້ເປັນພຣະມະເຫສີຂອງພຣະຣາຊາ

[໙໐໑] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນປະຣະນິມມິຕະວະສະວັດດີນັ້ນແລ້ວ
ມາເກີດໃນໝູ່ມະນຸດ ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າແຜ່ນດິນ

[໙໐໒] ສະເຫວີຍສົມບັດທັງໃນເທວະໂລກແລະໃນມະນຸດໂລກ
ມີຄວາມສຸກທຸກຊາດ ວຽນວ່າຍຕາຍເກີດຢູ່ໃນກັບເປັນຈຳນວນຫຼາຍ

[໙໐໓] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າພຣະນາມວ່າ ວິປັດສີ

ຊົງເປັນຜູ້ນຳສັດໂລກ ຈົດງານໜ້າທັດສະນາແທ້ນໍ
ຊົງເຫັນແຈ້ງໃນທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໓໐໔] ຂ້ານ້ອຍເຂົ້າເຝົ້າພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ຊົງເປັນຜູ້ນຳສັດໂລກ ຊົງເປັນສາຣະຖີຝຶກນໍຣະຊົນ
ໄດ້ຟັງທຳທີ່ປະນີດແລ້ວຈຶ່ງອອກບວດເປັນບັນພະຊິດ

[໓໐໕] ປະພຶດພົມມະຈັນຢູ່ໃນສາດສະໜາ
ຂອງພຣະວີຣະເຈົ້າພຣະອົງນັ້ນຕະຫຼອດ ໑໐,໐໐໐ ປີ
ປະກອບຄວາມພຽນ ເປັນພະຫູສູດ

[໓໐໖] ສະຫຼາດໃນປັດຈະຍາການ ຊຳນານໃນສັດຈະ ໔
ມີປັນຍາລະອຽດ ສະແດງທຳມ່ວນ
ປະຕິບັດຕາມສັດຖຸສາດ

[໓໐໗] ດ້ວຍຜົນແຫ່ງການປະພຶດພົມມະຈັນ
ຂ້ານ້ອຍຈຸຕິຈາກພົບນັ້ນແລ້ວໄປເກີດໃນສະຫວັນຊັ້ນດຸສິດ
ເປັນຜູ້ມີຍົດສະເຫວີຍສົມບັດຢູ່ໃນພົບນັ້ນແລະພົບອື່ນ

[໓໐໘] ຂ້ານ້ອຍເກີດໃນພົບໃດ ໆ ກໍເປັນຜູ້ມີໂພຄະຫຼາຍ
ມີຊັບຫຼາຍ ມີປັນຍາ ມີຮູບງາມ ມີບໍລິວານຊົນທີ່ເຊື່ອຟັງ

[໓໐໙] ດ້ວຍກຳແລະຄວາມພຽນໃນສາດສະໜາຂອງພຣະຊິນນະເຈົ້ານັ້ນ
ຂ້ານ້ອຍເປັນທີ່ຮັກດັ່ງດວງໃຈ (ຂອງສາມີ)
ສົມບັດທຸກຢ່າງຂ້ານ້ອຍໄດ້ໂດຍງ່າຍ

[໓໑໐] ດ້ວຍຜົນແຫ່ງການປະຕິບັດຂອງຂ້ານ້ອຍ
ເມື່ອຂ້ານ້ອຍຢູ່ໃນບ່ອນໃດ ໆ
ຜູ້ທີ່ເປັນສາມີຂ້ານ້ອຍກໍບໍ່ດູໝິ່ນ ທັງໃຜອື່ນ ໆ ກໍບໍ່ດູໝິ່ນຂ້ານ້ອຍ

[໓໑໑] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າ ໂກນາຄະມະນະ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໓໑໒] ໃນຄັ້ງນັ້ນເອງ ຄົນ ໓ ຄົນ ຄືນາງທະນັນຊານີພາມມະນີ

พระนางสุเมทาเถุธี และข้าน้อย
เป็นคืนของตะกูนที่สำเล้ดความปะสิงทุกย่างในนะคอนพาธานะสี

[๓๑๓] ข้าน้อยทังหลายได้ถวายสังคาธามแก่พระมุนีหลายพันอึง
และได้ส้างวิหานอุทิดถวายพระพุดทะเจ้าพ้อมทังสิงสาอึก

[๓๑๔] ข้าน้อยทังหลายทังหมดพากันจุติจากอัดตะพาบนั้นแล้ว
ได้ไปเกิดในสะหวันชั้นตาวะติงสา
เถิงความเป็นผู้เลิดด้อยยิด
และเมื่อเกิดในหมู่มะนุดก็คืกัน

[๓๑๕] ในภับนี้เอง พระพุดทะเจ้าพระนามว่าภัดสะปะ ตามพระโคด
ผู้เป็นเผ่าพันของพาม มีพระยิดยิ่งใหย่
ปะเสิดภว่าเจ้าลัดทิทังหลาย สะเด็ดอุบัดขึ้นแล้ว

[๓๑๖] ในคั้งนั้น พระเจ้ากาสีพระนามว่ากิกิ
เป็นใหย่ภว่านํระชินในนะคอนพาธานะสีที่ปะเสิดสุด
ซึ่งเป็นอุปัดถากของพระพุดทะเจ้าผู้สะแหวงหาคุนอันยิ่งใหย่

[๓๑๗] ข้าน้อยเป็นทิดาคืนใหย่ของพระอึงมีนามผาภ์ดว่า สะมะนี
ได้ฟังทำของพระชินนะเจ้าผู้เลิดแล้วพํใจภานบันพะชา
[๓๑๘] แต่พระชะนิกนาดบ่ได้ซึ่งอะนุยาดให้ข้าน้อยทังหลายบวด
ในคั้งนั้น ข้าน้อยทังหลายบ่ขี้ค้าน คองเฮือนยู่ ๒๐,๐๐๐ ปี

[๓๑๙] พระธาดชะภันยาทัง ๗ พระอึง
มีความสุภ ปะพึดพົມມະຈັນตั้งแต่ยังเป็นกุมาธี
เพิดเพินยินดีอุปัดถากพระพุดทะเจ้า

[๓๒๐] คື (๑) พระนางสะมะนี (๒) พระนางสะมะนะคุดตา
(๓) พระนางพิภขุนี (๔) พระนางพิภขุทาสิภา
(๕) พระนางทำมา (๖) พระนางสุทำมา
(๗) พระนางสังคะทาสิภา

[๓๒๑] (พระธาดชะทิดาทัง ๗ นั้นได้ภັບชาดมาเกิด)
คື ข้าน้อย ๑ พระอุบົນວັນນາເຖຣີ ๑

ພຣະປະຕາຈາຣາເຖຣີ ໑ ພຣະກຸນທົນເກສີເຖຣີ ໑
ພຣະກີສາໂຄຕະມີເຖຣີ ໑ ພຣະທຳມະທິນນາເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໓໔໔] ບາງເທື່ອພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ເປັນດັ່ງດວງອາທິດຂອງນໍຣະຊົນ
ຊົງສະແດງທຳເປັນອັດສະຈັນ
ຂ້ານ້ອຍໄດ້ຟັງມະຫານິທານສູດ ແລ້ວນຳມາສຶກສາປະຕິບັດຢູ່

[໓໔໓] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໓໔໔] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເປັນພຣະທິດາທີ່ພໍພຣະທະໄທ
ຮັກແພງ ໂຜດປານຂອງພຣະເຈົ້າມັດທະຣາດ
ໃນສາກົນນະຄອນທີ່ອຸດົມສົມບູນ

[໓໔໕] ພ້ອມກັບໃນການທີ່ຂ້ານ້ອຍພໍເກີດມາ
ນະຄອນນັ້ນໄດ້ມີແຕ່ຄວາມກະເສມສຳຣານ
ຍ້ອນແນວນັ້ນ ນາມວ່າເຂມາ ຈຶ່ງເກີດຂຶ້ນແກ່ຂ້ານ້ອຍໂດຍຄຸນ

[໓໔໖] ເມື່ອຂ້ານ້ອຍຈະເລີນໄວເປັນສາວ
ມີຮູບຮ່າງແລະຜິວພັນງົດງາມ
ພຣະຣາດຊະບິດາກໍໂຜດປະທານຂ້ານ້ອຍແກ່ພຣະເຈົ້າພິມພິສານ

[໓໔໗] ຂ້ານ້ອຍເປັນທີ່ໂຜດປານຂອງພຣະຣາດສະວາມີນັ້ນ
ຍິນດີແຕ່ໃນການບຳຣຸງຮູບໂສມ
ບໍ່ເອື້ອເຟື້ອຢ່າງຫຼາຍດ້ວຍຄິດວ່າ
ພຣະພຸດທະເຈົ້າມີປົກກະຕິກ່າວໂທດຂອງຮູບ

[໓໔໘] ໃນຄັ້ງນັ້ນ ພຣະເຈົ້າພິມພິສານຊົງໂຜດໃຫ້ນັກຂັບ
ຂັບຮ້ອງເພງພັນນາພຣະເວລຸວັນເຈາະຈົງຂ້ານ້ອຍ
ເພື່ອອະນຸເຄາະຂ້ານ້ອຍໃຫ້ມີຄວາມຮູ້ສຶກ

[໓໔໙] ຂ້ານ້ອຍສຳຄັນວ່າພຣະເວລຸວັນ
ເຊິ່ງເປັນທີ່ປະທັບຂອງພຣະສຸຄົດເຈົ້າ
ເປັນສະຖານທີ່ໜ້າອອນຊອນ ຜູ້ໃດຍັງບໍ່ໄດ້ເຫັນ
ຜູ້ນັ້ນກໍຈັດວ່າຍັງບໍ່ໄດ້ເຫັນສວນນັນທະວັນ

[໓໕໐] ພຣະເວລຸວັນ ເຊິ່ງເປັນສະຖານທີ່ໜ້າເພີດເພີນຍິນດີຂອງນໍຣະຊົນ
ຜູ້ໃດໄດ້ເຫັນແລ້ວ ຜູ້ນັ້ນເໝືອນໄດ້ເຫັນສວນນັນທະວັນ
ເຊິ່ງເປັນສະຖານທີ່ເພີດເພີນຂອງທ້າວອຳມະຣິນທາທິຣາດ

[໓໕໑] ທ້າວສັກກະເທວະຣາດແລະເທບທັງຫຼາຍລະສວນນັນທະວັນແລ້ວ
ລົງມາຢູ່ພື້ນປະຖະພີ ເຫັນພຣະເວລຸວັນທີ່ໜ້າອອນຊອນແລ້ວ
ກໍອັດສະຈັນໃຈ ບໍ່ຮູ້ເບື່ອ

[໓໕໔] ພຣະເວລຸວັນເກີດຂຶ້ນຍ້ອນບຸນຂອງພຣະຣາຊາ
ອັນບຸນຍານຸພາບແຫ່ງພຣະພຸດທະເຈົ້າປະດັບແລ້ວ
ຜູ້ໃດນໍ ຈະປະມວນຄຸນແຫ່ງພຣະເວລຸວັນມາກ່າວໃຫ້ໝົດສິ້ນໄດ້

[໓໕໓] ໃນຄັ້ງນັ້ນ ຂ້ານ້ອຍໄດ້ຟັງຄວາມສຳເລັດແຫ່ງສົມບັດຂອງພຣະເວລຸວັນ
ທີ່ມ່ວນໂສຕະມ່ວນຈັບໃຈຂ້ານ້ອຍ
ຕ້ອງການຈະໄດ້ຊົມອຸດະຍານນັ້ນຈຶ່ງຂາບທູນພຣະຣາຊາໃຫ້ຊົງຮູ້

[໓໕໔] ໃນຄັ້ງນັ້ນ ພຣະເຈົ້າແຜ່ນດິນຈຶ່ງໂຜດສົ່ງຂ້ານ້ອຍ
ຜູ້ມຸ້ງຈະຊົມອຸທະຍານນັ້ນ
ໄປພ້ອມດ້ວຍບໍລິວານເປັນຈຳນວນຫຼາຍ ດ້ວຍພຣະດຳຣັດວ່າ

[໓໕໕] ພຣະນາງຜູ້ມີໂພຄະເປັນຈຳນວນຫຼາຍ
ເຊີນໄປຊົມພຣະເວລຸວັນເຊິ່ງເປັນທີ່ສະບາຍຕາ
ເຊິ່ງຮຸ່ງເຮືອງດ້ວຍພຣະຣັດສະໝີຂອງພຣະສຸຄົດເຈົ້າ
ສະຫວ່າງສະໄຫວດ້ວຍພຣະສິຣິຕະຫຼອດເວລາ

[໓໕໖] (ຂ້ານ້ອຍທູນວ່າ)
ເມື່ອໃດພຣະມຸນີສະເດັດເຂົ້າມາຊົງຮັບບິນທະບາດ
ໃນນະຄອນຣາດຊະຄືອັນປະເສີດ
ເມື່ອນັ້ນ ຂ້ານ້ອຍຈະເຂົ້າໄປຊົມພຣະເວລຸວັນມະຫາວິຫານ

[໓໓໗] ຂະນະນັ້ນ ພຣະເວລຸວັນມະຫາວິຫານ
ມີສວນດອກໄມ້ທີ່ແຍ້ມບານ ມີສຽງຫຶ່ງດ້ວຍໝູ່ພະມອນນານາຊະນິດ
ມີສຽງນົກກາເວົາຮ່ຳຮ້ອງ ທັງໝູ່ນົກຍູງກໍລຳແພນ

[໓໓໘] ສະຫງັດຈາກສຽງຢ່າງອື່ນ ບໍ່ນອງນັນ
ປະດັບໄປດ້ວຍບ່ອນຈົງກົມຕ່າງ ໆ
ສະພັ່ງໄປດ້ວຍແຖວແຫ່ງກຸດຕິແລະມົນດົບ
ຊອນລອນໄປດ້ວຍພຣະໂຍຄີຜູ້ພ່ຳເພັງພຽນ

[໓໓໙] ຂ້ານ້ອຍເມື່ອຍ່າງທ່ຽວໄປໄດ້ຮູ້ສຶກວ່າ ໃນຕາຂອງເຮົາມີປະໂຫຍດ
ໃນຄັ້ງນັ້ນ ຂ້ານ້ອຍເຫັນພິກຂຸໜຸ່ມອົງໜຶ່ງປະກອບກິດຢູ່ ແລ້ວຄິດໄປວ່າ

[໓໔໐] ພິກຂຸນີ້ຍັງຢູ່ໃນໄວໄວລຸ້ນໜຸ່ມ ມີຮູບງາມ ໜ້າປາຖະໜາ
ປະຕິບັດດີຢູ່ໃນປ່າທີ່ໜ້າອອນຊອນເຊັ່ນນີ້ ເໝືອນຄົນຢູ່ໃນບ່ອນມືດ

[໓໔໑] ພິກຂຸນີ້ມີຫົວໂລ້ນ ຫົ່ມຜ້າສັງຄາຕິນັ່ງຢູ່ເຫງົ້າໄມ້
ລະຄວາມຍິນດີທີ່ເກີດຈາກອາລົມເຂົ້າຊານຢູ່ນໍ

[໓໔໒] ທຳມະດາຄະລືຫັດບໍຣິໂພກກາມຢ່າງມີຄວາມສຸກ
ແກ່ແລ້ວຈຶ່ງຄວນປະພຶດທຳອັນດີງາມນີ້ໃນພາຍຫຼັງບໍ່ແມ່ນບໍ?

[໓໔໓] ຂ້ານ້ອຍເຂົ້າໃຈວ່າ ພຣະຄັນທະກຸຕິທີ່ປະທັບແຫ່ງພຣະຊິນນະເຈົ້າວ່າງເປົ່າ
ຈຶ່ງຍ່າງເຂົ້າໄປ ໄດ້ເຫັນພຣະຊິນນະເຈົ້າຜູ້ງົດງາມດັ່ງດວງອາທິດອຸໄທ

[໓໔໔] ປະທັບສຳຮານຢູ່ພຣະອົງດຽວ ມີຜູ້ສາວງາມພັດວີຢູ່
ເມື່ອແລ້ວຈຶ່ງມີຄວາມຄິດຜິດແນວນີ້ວ່າ ພຣະຜູ້ມີພຣະພາກເຈົ້າ
ຜູ້ອົງອາດກວ່ານໍຣະຊົນພຣະອົງນີ້ບໍ່ໄດ້ເສົ້າໝອງເລີຍ

[໓໔໕] ຍິງສາວນັ້ນກໍມີຣັດສະໝີຮຸ່ງເຮືອງດັ່ງຄຳທຳມະຊາດ
ມີໜ້າຕາງົດງາມດັ່ງປະທຸມະຊາດ ຣິມຝີປາກກໍແດງດັ່ງໝາກຕຳນິນສຸກ
ຫຼຽວແນມເບິ່ງແຕ່ໜ້ອຍ ເປັນທີ່ຕິດຕາຕຶງໃຈຍິ່ງ

[໓໔໖] ມີລຳແຂນງາມເໝືອນຄຳ ວົງໜ້າງາມ
ຖັນທັງຄູ່ກໍເຕັ່ງຕຶງດັ່ງດອກບົວຕູມ ມີແອວຄອດກົມກັ່ງງ
ຕະໂພກຜຶ່ງຜາຍ ລຳຂາໜ້າຍິນດີ ມີເຄື່ອງປະດັບສວຍງາມ

[໓໔໗] ຜ້າສະໄບມີສີແດງແວວວາວ ນຸ່ງຫົ່ມຜ້າເນື້ອກ້ຽງສີຂຽວ
ມີຮູບສົມບັດທີ່ຊວນຊົມໂດຍບໍ່ຮູ້ເບື່ອ
ປະດັບດ້ວຍເຄື່ອງອາພອນທຸກຊະນິດ

[໓໔໘] ຂ້ານ້ອຍເຫັນຜູ້ສາວນັ້ນແລ້ວຈຶ່ງຄິດວ່າ
ໂອນໍ ຜູ້ສາວຄົນນີ້ມີຮູບງາມຫຼາຍແທ້
ເຮົາບໍ່ເຄີຍເຫັນງາມແນວນີ້ ມາກ່ອນເລີຍ

[໓໔໙] ຂະນະນັ້ນ ຜູ້ສາວຄົນນັ້ນຖືກຊະຣາຍ່ຳຍີ
ມີຜິວພັນແປກໄປ ປາກອ້າ ແຂ້ວຫຼ່ອນ ຜົມຫງອກ
ນ້ຳລາຍໄຫຼ ໜ້າບໍ່ສະອາດ

[໓໕໐] ຫູຕຶງ ຕາຝ້າຟາງ ຖັນຢ່ອນຍານ ບໍ່ງາມ
ຫນັງຍານທົ່ວກາຍ ມີຫົວແລະຮ່າງກາຍສັ່ນງັນງົກ

[໓໕໑] ຫຼັງງໍ ມີໄມ້ການເທົ້າເປັນໝູ່ໃນເວລາຍ່າງ
ຮ່າງກາຍຊູບຜອມຊີດໄປ ສັ່ນງັນງົກ ລົ້ມລົງແລ້ວຫາຍໃຈຫອບ

[໓໕໒] ຈາກນັ້ນ ຄວາມສັງເວດທີ່ກໍ່ໃຫ້ເກີດຂົນພອງສະຫຍອງເກົ້າ
ເຊິ່ງບໍ່ເຄີຍມີກໍໄດ້ມີແກ່ຂ້ານ້ອຍວ່າ
ໜ້າຕິຕຽນ ຮູບບໍ່ສະອາດທີ່ພວກຄົນຈົ່າຍິນດີກັນ

[໓໕໓] ໃນຄັ້ງນັ້ນ ພຣະພຸດທະເຈົ້າຜູ້ປະກອບດ້ວຍພຣະມະຫາກະລຸນາ
ມີຈິດເບີກບານໂສມະນັດ ທອດພຣະເນດເຫັນຂ້ານ້ອຍ
ຜູ້ມີໃຈສັງເວດແລ້ວ ຈຶ່ງຕັດພຣະຄາຖາເຫຼົ່ານີ້ວ່າ

[໓໕໔] ເຂມາ ທ່ານຈົ່ງເບິ່ງຮູບກາຍທີ່ກະສັບກະສ່າຍ
ບໍ່ສະອາດ ເປື່ອຍເນົ່າ (ມີຂອງແຫຼວ)
ໄຫຼເຂົ້າແລະໄຫຼອອກ ທີ່ພວກຄົນຈົ່າພາກັນຍິນດີຍິ່ງ

[໓໕໕] ທ່ານຈົ່ງອົບຮົມຈິດໃຫ້ເປັນສະມາທິມີອາລົມດຽວ
ດ້ວຍອາລົມທີ່ບໍ່ງາມເທີ້ນ
ທ່ານຈົ່ງຈະເລີນກາຍະຄະຕາສະຕິຫຼາຍໄປດ້ວຍຄວາມເບື່ອໜ່າຍເທີ້ນ

[໓໕໖] ຮູບຂອງຍິງສາວນີ້ເປັນສັນໃດ
ຮູບກາຍຂອງທ່ານນັ້ນກໍເປັນສັນນັ້ນ
ຮູບກາຍຂອງທ່ານນັ້ນເປັນສັນໃດ
ຮູບຂອງຍິງສາວນີ້ກໍເປັນສັນນັ້ນ
ທ່ານຈຶ່ງຄາຍຄວາມຍິນດີພໍໃຈໃນກາຍ
ທັງພາຍໃນແລະພາຍນອກເທີ້ນ

[໓໕໗] ຈົ່ງອົບຮົມອະນິມິດຕະວິໂມກ ຈຶ່ງລະມານານຸໄສສາ
ແຕ່ນັ້ນທ່ານຈັກເປັນຜູ້ຢູ່ຢ່າງສະງົບ
ຍ້ອນມານານຸໄສສະງົບຣະງັບໄປ

[໓໕໘] ຊົນເຫຼົ່າໃດກໍາໜັດຍ້ອນຣາຄະເກາະຕິດກະແສຢູ່
ເໝືອນແມງມຸມເກາະໃຍຢູ່ສູນກາງທີ່ເຮັດໄວ້ເອງ
ຊົນເຫຼົ່ານັ້ນຕັດກະແສຣາຄະນັ້ນແລ້ວ ບໍ່ມີຄວາມອາໄລ
ລະກາມສຸກ ຫຼີກໄປ

[໓໕໙] ໃນຄັ້ງນັ້ນ ພຣະພຸດທະເຈົ້າຜູ້ເປັນສາຣະຖີຝຶກນໍຣະຊົນ
ຊົງຮູ້ວ່າ ຂ້ານ້ອຍມີຈິດຄວນແລ້ວ
ຈຶ່ງຊົງສະແດງມະຫານິທານສູດເພື່ອຊົງແນະນໍາຂ້ານ້ອຍ

[໓໖໐] ຂ້ານ້ອຍໄດ້ຟັງພຣະສູດອັນປະເສີດນັ້ນແລ້ວ
ຈຶ່ງຣະລຶກເຖິງສັນຍາໃນການກ່ອນໄດ້
ຕັ້ງໝັ້ນຢູ່ໃນສັນຍານັ້ນແລ້ວ ຊໍາຣະທໍາມະຈັກຂຸໃຫ້ບໍ່ລິສຸດ

[໓໖໑] ຂະນະນັ້ນ ຂ້ານ້ອຍໝອບລົງແທບພຣະຍຸຄົນບາດ
ຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເພື່ອປະສົງຈະສະແດງໂທດ ຈຶ່ງໄດ້ຂາບທູນຄໍານີ້ວ່າ

[໓໖໒] ຂ້າແຕ່ພຣະອົງຜູ້ຊົງເຫັນແຈ້ງໃນທໍາທັງປວງ
ຂ້ານ້ອຍຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ເປັນບໍ່ເກີດແຫ່ງພຣະມະຫາກະລຸນາ
ຂ້ານ້ອຍຂໍນອບນ້ອມພຣະອົງ
ຂ້າແຕ່ພຣະອົງຜູ້ສະເດັດຂ້າມວັດຕະສົງສານໄດ້ແລ້ວ
ຂ້ານ້ອຍຂໍນອບນ້ອມພຣະອົງ

ຂ້າແຕ່ພຣະອົງຜູ້ຊົງປະທານອະມະຕະທຳ
ຂ້ານ້ອຍຂໍນອບນ້ອມພຣະອົງ

[໓໒໓] ຂ້ານ້ອຍຈົມຢູ່ໃນມິດສາທິດຖິ
ຫຼົງໃຫຼຍ້ອນການຣາຄະ
ພຣະອົງຊົງແນະນຳດ້ວຍອຸບາຍທີ່ສະຫຼາດ
ເປັນຜູ້ຍິນດີໃນທຳທີ່ຊົງແນະນຳ

[໓໒໔] ສັດທັງຫຼາຍພັດພາກຈາກປະໂຫຍດ
ຍ້ອນບໍ່ໄດ້ເຫັນພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ເຊັ່ນພຣະອົງ
ຈຶ່ງປະສົບມະຫັນຕະທຸກຢູ່ໃນສົງສານສາຄອນ

[໓໒໕] ໃນການໃດຂ້ານ້ອຍຍັງບໍ່ໄດ້ມາເຂົ້າເຝົ້າພຣະອົງ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ຜູ້ບໍ່ມີຂ້າເສິກຄືກິເລດ
ຊົງເຖິງບ່ອນສຸດແຫ່ງມໍຣະນະທຳ
ຊົງມີທຳທີ່ເປັນປະໂຫຍດຢ່າງດີ
ຂ້ານ້ອຍຂໍສະແດງໂທດນັ້ນ

[໓໒໖] ຂ້ານ້ອຍມົວແຕ່ຍິນດີໃນຮູບ
ຣະແວງວ່າພຣະອົງຈະບໍ່ເປັນປະໂຫຍດຈຶ່ງບໍ່ໄດ້ເຂົ້າເຝົ້າ
ພຣະອົງຜູ້ຊົງມີຄວາມເກື້ອກູນຫຼາຍ
ຊົງປະທານພຣະທຳທີ່ປະເສີດ
ຂ້ານ້ອຍຂໍສະແດງໂທດນັ້ນ

[໓໒໗] ໃນຄັ້ງນັ້ນ ພຣະຊິນນະເຈົ້າຜູ້ປະກອບດ້ວຍພຣະມະຫາກະລຸນາ
ມີພຣະສຸຣະສຽງມ່ວນແລະກ້ອງກັງວານ
ເມື່ອຈະຊົງໃຊ້ນ້ຳອຳມະຣິດຫົດຂ້ານ້ອຍຈຶ່ງຕັດວ່າ ລຸກຂຶ້ນເທີ້ນເຂມາ

[໓໒໘] ໃນຄັ້ງນັ້ນ ຂ້ານ້ອຍປະນົບນ້ອມນະມັດສະການດ້ວຍຂະໜ່ອມ
ກະທຳປະທັກຂິນພຣະອົງແລ້ວ ກັບໄປເຝົ້າພຣະຣາຊາ
ຜູ້ເປັນໃຫຍ່ກວ່ານໍຣະຊົນແລ້ວຂາບທູນຄຳນີ້ວ່າ

[໓໖໙] ຂ້າແຕ່ພຣະອົງຜູ້ຍິ່ງຍິຂ້າເສິກ
ອຸປາຍທີ່ພຣະອົງຊົງດຳຣິແລ້ວໂດຍຊອບນີ້ ໜ້າອັດສະຈັນ
ຂ້ານ້ອຍຜູ້ປາຖະໜາຈະທ່ຽວຊົມພຣະເວລຸວັນມະຫາວິຫານ
ໄດ້ເຝົ້າພຣະມຸນີຜູ້ບໍ່ມີກິເລດພຽງດັ່ງປ່າແລ້ວ

[໓໗໐] ຂ້າແຕ່ພຣະຣາຊາ ຖ້າພຣະອົງຊົງພໍພຣະທະໄທ
ຂ້ານ້ອຍຜູ້ເບື່ອໜ່າຍໃນຮູບຕາມທີ່ພຣະມຸນີຊົງຕັດສອນແລ້ວ
ຈັກບວດໃນສາດສະໜາຂອງພຣະມຸນີຜູ້ຄົງທີ່ພຣະອົງນັ້ນ

**ພານະວານທີ ໔ ຈົບ**

[໓໗໑] ໃນຄັ້ງນັ້ນ ພຣະເຈົ້າແຜ່ນດິນພຣະນາມວ່າພິມພິສານ ພຣະອົງນັ້ນ
ຊົງປະຄອງອັນຊະລີຕັດວ່າ ພຣະນ້ອງນາງ
ອ້າຍອະນຸຍາດແກ່ເຈົ້າ ຂໍການບັນພະຊາຈົ່ງສຳເລັດແກ່ເຈົ້າເທີ້ນ

[໓໗໒] ໃນຄັ້ງນັ້ນ ຂ້ານ້ອຍບວດມາແລ້ວຜ່ານໄປ ໗ ເດືອນ
ເຫັນປະທີບສະຫວ່າງຂຶ້ນແລະດັບໄປ ຈຶ່ງມີໃຈສັງເວດ

[໓໗໓] ມີຄວາມເບື່ອໜ່າຍໃນສັງຂານທັງປວງ ສະຫຼາດໃນປັດຈະຍາການ
ຂ້າມພົ້ນໂອຄະ ໔ ແລ້ວ ກໍໄດ້ບັນລຸອະຣະຫັດຕະຜົນ

[໓໗໔] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ

[໓໗໕] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ບໍລິສຸດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໓໗໖] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍານ
ນິຣຸດຕິປະຕິສຳພິທາຍານ
ແລະປະຕິພານະປະຕິສຳພິທາຍານທີ່ບໍລິສຸດຂອງຂ້ານ້ອຍ
ລ້ວນເກີດຂຶ້ນແລ້ວໃນສາດສະໜາຂອງພຣະພຸດທະເຈົ້າ

[໓໗໗] ຂ້ານ້ອຍເປັນຜູ້ສະຫຼາດໃນວິສຸດທິທັງຫຼາຍ

ຄ່ອງແຄ່ວໃນກະຖາວັດຖຸ
ຮູ້ແຈ້ງໄນຍະແຫ່ງພຣະອະພິທຳ ຊ່ຽວຊານໃນສາດສະໜາ

[໓໗໘] ຈາກນັ້ນ ພຣະຣາດສະວາມີຜູ້ສະຫຼາດ
ຕັດຖາມບັນຫາທີ່ລະອຽດເລິກເຊິ່ງໃນໂຕຣະນະວັດຖຸ
ຂ້ານ້ອຍໄດ້ວິສັດຊະນາໂດຍຄວນແກ່ກະຖາ

[໓໗໙] ໃນຄັ້ງນັ້ນ ພຣະຣາຊາສະເດັດເຂົ້າເຝົ້າພຣະສຸຄົດເຈົ້າແລ້ວ
ທູນຖາມບັນຫາເຫຼົ່ານັ້ນ
ພຣະພຸດທະເຈົ້າຊົງພະຍາກອນບັນຫາເຫຼົ່ານັ້ນ
ເໝືອນຢ່າງທີ່ຂ້ານ້ອຍພະຍາກອນ

[໓໘໐] ພຣະຊິນນະເຈົ້າຜູ້ສູງສຸດແຫ່ງນະຣະ
ຊົງພໍພຣະທະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະວ່າ
ເປັນຜູ້ເລີດກວ່າບັນດາພິກຂຸນີຜູ້ມີປັນຍາຫຼາຍ

[໓໘໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໘໒] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໓໘໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະເຂມາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເຂມາເຖຣີຍາປະທານທີ ໘ ຈົບ**

## ໙. ອຸບປະລະວັນນາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸບົນວັນນາເຖຣີ

(ພຣະອຸບົນວັນນາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໗໔] ພຣະອຸບົນວັນນາພິກຂຸນີເຖິງຄວາມສຳເລັດແຫ່ງລິດ
ຂາບໄຫວ້ພຣະຍຸຄົນບາດຂອງພຣະສາດສະດາແລ້ວຂາບທູນຄຳນີ້ວ່າ

[໓໗໕] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍຂ້າມພົ້ນຊາດສົງສານໄດ້ແລ້ວ
ບັນລຸບົດທີ່ບໍ່ຫວັ່ນໄຫວ ທຸກທັງປວງຂ້ານ້ອຍໃຫ້ສິ້ນໄປແລ້ວຈຶ່ງຂໍບອກວ່າ

[໓໗໖] ຂໍປະຊຸມຊົນຜູ້ເຫຼື້ອມໃສໃນສາດສະໜາຂອງພຣະຊິນນະເຈົ້າ
ແລະຊົນທີ່ຂ້າພະເຈົ້າໄດ້ທຳຄວາມຜິດໃຫ້ເທົ່າທີ່ມີຢູ່
ຈົ່ງຍົກໂທດໃຫ້ຂ້າພະເຈົ້າ ສະເພາະພຣະພັກຂອງພຣະຊິນນະເຈົ້າ

[໓໗໗] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍຂໍຂາບທູນວ່າ
ເມື່ອຂ້ານ້ອຍວຽນວ່າຍຕາຍເກີດຢູ່ໃນວັດຕະສົງສານ
ຖ້າຂ້ານ້ອຍມີຄວາມຜິດພາດ
ຂໍພຣະອົງຈົ່ງຍົກໂທດໃຫ້ຂ້ານ້ອຍດ້ວຍເທີ້ນ

[໓໗໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸບົນວັນນາ
ຜູ້ປະຕິບັດຕາມຄຳສັ່ງສອນຂອງເຮົາ ທ່ານຈົ່ງສະແດງລິດ
ແລະຕັດຄວາມສົງໄສຂອງບໍລິສັດ ໔ ເທົ່າທີ່ມີຢູ່ ໃນວັນນີ້ເທີ້ນ

[໓໗໙] ພຣະອຸບົນວັນນາເຖຣີຂາບທູນວ່າ
ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະປັນຍາ ຜູ້ຊົງພຣະຣັດສະໝີຣຸ່ງເຮືອງ
ຂ້ານ້ອຍເປັນທິດາຂອງພຣະອົງ
ກຳທີ່ເຮັດໄດ້ຍາກ ກະທຳໄດ້ແສນລຳບາກເຫຼືອຫຼາຍ
ຂ້ານ້ອຍໄດ້ເຮັດແລ້ວ

[໓໘໐] ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍມີຜິວພັນເໝືອນສີດອກອຸບົນ
ຈຶ່ງມີນາມວ່າອຸບົນວັນນາ
ເປັນທິດາຂອງພຣະອົງ ຂໍຂາບພຣະຍຸຄົນບາດ

[໓໙໑] ພຣະຣາຫຸນເຖຣະ ແລະຂ້ານ້ອຍ
ເກີດຮ່ວມພົບດຽວກັນຫຼາຍຮ້ອຍຊາດ
ເປັນຜູ້ມີຈິດສະມານສັນກັນ

[໓໙໔] ບັງເກີດພ້ອມກັນຮ່ວມຊາດດຽວກັນ
ເມື່ອເຖິງພົບສຸດທ້າຍ ແມ່ນເຮົາທັງ ໔ ກໍຊື່ວ່າເກີດຮ່ວມພົບດຽວກັນ

[໓໙໓] ພຣະເຖຣະນາມວ່າ ຣາຫຸນເປັນພຣະໂອຣົດ
ຂ້ານ້ອຍຜູ້ມີນາມວ່າອຸປົບວັນນາເປັນທິດາ
ຂ້າແຕ່ພຣະວີຣະ ຂໍເຊີນທອດພຣະເນດລິດຂອງຂ້ານ້ອຍເທີ້ນ
ຂ້ານ້ອຍຈັກສະແດງພະລັງຖວາຍພຣະສາດສະດາ

[໓໙໔] ພຣະອຸປົບວັນນາຮຽກມະຫາສະມຸດທັງ ໔
ວາງໄວ້ທີ່ຝາມືເໝືອນເດັກນ້ອຍຫຼິ້ນນໍ້າມັນທີ່ຢູ່ເທິງຝາມື

[໓໙໕] ຍົກແຜ່ນດິນແລ້ວ ວາງໄວ້ທີ່ຝາມື
ເໝືອນເດັກໜຸ່ມດຶງໄສ້ຫຍ້າປ້ອງ

[໓໙໖] ໃຊ້ຝາມືປິດຄອບຈັກກະວານແລ້ວ
ບັນດານຫຍາດຝົນສີຕ່າງ ໆ ໃຫ້ຕົກລົງເທິງຫົວເລື້ອຍ ໆ

[໓໙໗] ກະທຳພື້ນພະສຸທາໃຫ້ເປັນຄົກ ກະທຳກ້ອນຫີນນ້ອຍ ໆ ໃຫ້ເປັນເຂົ້າເປືອກ
ກະທຳພູເຂົາສິເນຣຸໃຫ້ເປັນສາກ
ແລ້ວຕຳຢູ່ເໝືອນນາງກຸມາຣິກາຊ້ອມເຂົ້າ

[໓໙໘] ຂ້ານ້ອຍມີນາມວ່າອຸປົບວັນນາ
ເປັນທິດາຂອງພຣະພຸດທະອົງຜູ້ປະເສີດທີ່ສຸດ
ມີຄວາມຊຳນານໃນອະພິນຍາທັງຫຼາຍ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະອົງ

[໓໙໙] ຂ້ານ້ອຍຜູ້ມີຈັກຂຸສະແດງລິດຕ່າງ ໆ
ຖວາຍພຣະອົງຊົງເປັນຜູ້ນຳສັດໂລກ
ປະກາດນາມແລະໂຄດແລ້ວຂໍຂາບພຣະຍຸຄົນບາດ

[໔໐໐] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ

[໔໐໑] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊໍາຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໐໘] ອັດຖະປະຕິສໍາພິທາຍານ ທໍາມະປະຕິສໍາພິທາຍານ
ນິຣຸດຕິປະຕິສໍາພິທາຍານ
ແລະປະຕິພານະປະຕິສໍາພິທາຍານຂອງຂ້ານ້ອຍ
ບໍລິສຸດໄພບູນຕາມສະພາວະແຫ່ງພຣະອົງ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໐໙] ຂ້າແຕ່ພຣະມະຫາມຸນີ ອະທິການເປັນຈໍານວນຫຼາຍຂອງຂ້ານ້ອຍ
ອັນຂ້ານ້ອຍຜູ້ສໍາເລັດສິ່ງຄາມສະແດງແລ້ວ (ທໍາແລ້ວ)
ແດ່ພຣະຊິນນະເຈົ້າຜູ້ປະເສີດທັງຫຼາຍໃນປາງກ່ອນ
ເພື່ອປະໂຫຍດແກ່ພຣະອົງ

[໔໐໔] ຂ້າແຕ່ພຣະມະຫາມຸນີ
ຂໍພຣະອົງຊົງຣະລຶກເຖິງກຸສົນກໍາຂອງຂ້ານ້ອຍ
ທີ່ຂ້ານ້ອຍທໍາແລ້ວໃນປາງກ່ອນ
ຂ້າແຕ່ພຣະມະຫາວີຣະ
ຂ້ານ້ອຍສັ່ງສົມບຸນໄວ້ແລ້ວເພື່ອປະໂຫຍດແກ່ພຣະອົງ

[໔໐໕] ຂ້າແຕ່ພຣະມະຫາວີຣະ ພຣະອົງຊົງເວັ້ນອະນາຈານ
ໃນສະຖານທີ່ບໍ່ຄວນ ອົບຮົມພຣະຍານໃຫ້ແກ່ກ້າຢູ່
ຂ້ານ້ອຍໄດ້ສະລະຊີວິດທີ່ສູງສຸດເພື່ອປະໂຫຍດແກ່ພຣະອົງ

[໔໐໖] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍໄດ້ຖວາຍຊີວິດ
ຂອງຂ້ານ້ອຍຫຼາຍໝື່ນໂກດກັບ
ແມ່ນຕົວຂ້ານ້ອຍ ຂ້ານ້ອຍກໍໄດ້ສະລະແລ້ວ
ເພື່ອປະໂຫຍດແກ່ພຣະອົງ

[໔໐໗] ໃນຄັ້ງນັ້ນ ບໍລິສັດທັງໝົດມີຄວາມພິດສະຫວົງແທ້ນໍ
ຈຶ່ງໄດ້ພາກັນປະນົມມືເໜືອຫົວ ເວົ້າວ່າ
ຂ້າແຕ່ພຣະແມ່ເຈົ້າ ເຮັດແນວໃດ

ພຣະແມ່ເຈົ້າຈຶ່ງມີຄວາມບາກບັ່ນ ມີລິດ
ຫາສິ່ງໃດປຽບປານບໍ່ໄດ້

[໔໐໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ໃນຄັ້ງນັ້ນ ຂ້າພະເຈົ້າເປັນນາງນາກກັນຍາມີນາມວ່າ ວິມະລາ
ໝູ່ນາກຍ້ອງຍໍວ່າ ເປັນຜູ້ປະເສີດກວ່າພວກນາງນາກກັນຍາ

[໔໐໘] ພະຍານາກຊື່ມະໂຫຣະຄະ
ເຫຼື້ອມໃສໃນສາດສະໜາຂອງພຣະຊິນນະເຈົ້າ
ທູນນິມົນພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງມີເດຊານຸພາບຫຼາຍ ພ້ອມທັງພຣະສາວົກ

[໔໑໐] ຕົກແຕ່ງມົນດົບແກ້ວ ບັນລັງແກ້ວ
ໂຣຍຊາຍແກ້ວ ເຄື່ອງອຸປະໂພກແກ້ວ

[໔໑໑] ແລະຕົກແຕ່ງຫົນທາງປະດັບດ້ວຍທຸງແກ້ວ
ພະຍານາກນັ້ນບັນເລງດົນຕີ
ຕ້ອນຮັບພຣະສຳມາສຳພຸດທະເຈົ້າ

[໔໑໒] ພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ຊົງແຜ່ຂະຫຍາຍບໍລິສັດ ໔ ປະທັບນັ່ງເທິງອາສະນະ
ອັນປະເສີດໃນພົບຂອງພະຍານາກຊື່ມະໂຫຣະຄະ

[໔໑໓] ພະຍານາກໄດ້ຖວາຍເຂົ້ານ້ຳ
ຂາທະນີຍະແລະໂພຊະນີຍາຫານຢ່າງດີ ໆ ມີຣາຄາຫຼາຍ
ແດ່ພຣະຜູ້ມີພຣະພາກເຈົ້າຜູ້ມີພຣະຍົດໃຫຍ່

[໔໑໔] ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ເມື່ອສະເຫວີຍສຳເລັດແລ້ວຊົງລ້າງບາດ
ໄດ້ຊົງກະທຳການອະນຸໂມທະນາອັນສົມຄວນ
ໂດຍອຸບາຍອັນແຍບຄາຍວ່າ ນາງນາກກັນຍາຈັ່ງເປັນຜູ້ມີລິດຫຼາຍ

[໔໑໕] ນາງນາກກັນຍາ ເຫັນພຣະສັບພັນຍູ
ຜູ້ເບີກບານ ມີພຣະຍົດຫຼາຍ
ຈຶ່ງເຮັດຈິດໃຫ້ເຫຼື້ອມໃສ ເຮັດໃຈໃຫ້ໝັ້ນຄົງຕໍ່ພຣະສາດສະດາ

[໔໑໖] ໃນຄັ້ງນັ້ນ ພຣະມະຫາວີຣະພຣະນາມວ່າ ປະທຸມຸດຕະຣະ
ຊົງຮູ້ວາຣະຈິດຂອງຂ້ານ້ອຍແລ້ວ
ຊົງສະແດງພິກຂຸນີອົງໜຶ່ງດ້ວຍລິດ

[໔໑໗] ພິກຂຸນີອົງນັ້ນມີຄວາມແກ່ກ້າສະແດງລິດໄດ້ຫຼາຍຢ່າງ
ຂ້ານ້ອຍເກີດປີຕິປາໂມດໄດ້ຂາບທູນພຣະສາດສະດາວ່າ

[໔໑໘] ຂ້ານ້ອຍໄດ້ເຫັນລິດທັງຫຼາຍທີ່ພິກຂຸນີອົງນີ້ສະແດງແລ້ວ
ຂ້າແຕ່ພຣະທີຣະເຈົ້າ ເຮັດແນວໃດ
ພິກຂຸນີອົງນັ້ນຈຶ່ງເປັນຜູ້ແກ່ກ້າໃນລິດ

[໔໑໙] (ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຕັດຕອບວ່າ)
ພິກຂຸນີອົງນັ້ນເປັນທິດາທີ່ເກີດຈາກໂອດຂອງເຮົາ
ປະຕິບັດຕາມຄຳສັ່ງສອນຂອງເຮົາ ມີລິດຫຼາຍ ມີຄວາມແກ່ກ້າໃນລິດ

[໔໒໐] ຂ້ານ້ອຍໄດ້ຟັງພຣະພຸດທະພົດແລ້ວ
ມີຄວາມຍິນດີໄດ້ຂາບທູນແນວນີ້ວ່າ
ແມ່ນຂ້ານ້ອຍກໍຂໍເປັນຜູ້ມີຄວາມແກ່ກ້າໃນລິດເຊັ່ນນັ້ນ

[໔໒໑] ຂ້າແຕ່ພຣະອົງຜູ້ຊົງເປັນຜູ້ນຳສັດໂລກ
ຂ້ານ້ອຍເບີກບານໂສມະນັດ ມີໃຈສູງສຸດເຖິງທີ່ແລ້ວ
ຂໍໃຫ້ໄດ້ເປັນເຊັ່ນພິກຂຸນີອົງນີ້ໃນອະນາຄົດຕະການເທີ້ນ

[໔໒໒] ຂ້ານ້ອຍຕົກແຕ່ງບັນລັງແກ້ວມະນີ
ແລະມົນດົບທີ່ພຸດຜ່ອງແລ້ວ
ທູນນິມົນພຣະຜູ້ນຳສັດໂລກພ້ອມທັງພຣະສົງ
ໃຫ້ສະເຫວີຍແລະສັນເຂົ້ານ້ຳຈົນອີ່ມໜຳ

[໔໒໓] ແລ້ວໄດ້ໃຊ້ດອກອຸບົນທີ່ມີຊື່ວ່າ ອະຣຸນ
ເຊິ່ງເປັນດອກໄມ້ອັນປະເສີດຂອງພວກນາກ
ບູຊາພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ໂດຍຕັ້ງຄວາມປາຖະໜາໄວ້ວ່າ
ຂໍໃຫ້ຜິວພັນຂອງຂ້າພະເຈົ້າຈົ່ງເປັນເຊັ່ນນີ້ເທີ້ນ

[໔໒໔] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ

ຂ້າພະເຈົ້າລະກາຍບາກແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໔໕] ຈຸຕິຈາກພົບນັ້ນແລ້ວກໍມາເກີດໃນໝູ່ມະນຸດ
ໄດ້ຖວາຍບິນທະບາດທີ່ໃຊ້ດອກອຸບົນປິດແດ່ພຣະສະຍຳພູ

[໔໔໖] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ຊົງເປັນຜູ້ນຳ ຜູ້ມີພຣະເນດງາມ
ມີພຣະຈັກຂຸໃນທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໔໔໗] ໃນຄັ້ງນັ້ນ ຂ້ານ້ອຍເປັນທິດາຂອງເສດຖີ
ໃນນະຄອນພາຣານະສີທີ່ປະເສີດສຸດ
ໄດ້ທູນນິມົນພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກພ້ອມທັງພຣະສົງ

[໔໔໘] ຖວາຍມະຫາທານແລະບູຊາພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳວິເສດ
ດ້ວຍດອກອຸບົນເປັນຈຳນວນຫຼາຍແລ້ວ
ໄດ້ປາຖະໜາໃຫ້ມີຜິວພັນງາມເໝືອນດອກອຸບົນເຫຼົ່ານັ້ນ

[໔໔໙] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໔໕໐] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກິກີ
ເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ປະເສີດສຸດ
ຊົງເປັນອຸປັດຖາກຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໕໑] ຂ້ານ້ອຍເປັນທິດາຄົນທີ ໔ ຂອງພຣະອົງ ມີນາມຜາກົດວ່າ
ສະມະນີຄຸດຕາ ໄດ້ຟັງທຳຂອງພຣະຊິນນະເຈົ້າຜູ້ເລີດແລ້ວ
ພໍໃຈການບັນພະຊາ

[໔໕໔] ແຕ່ພຣະຊະນົກນາດບໍ່ໄດ້ຊົງອະນຸຍາດໃຫ້ຂ້ານ້ອຍທັງຫຼາຍບວດ
ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍບໍ່ຂີ້ຄ້ານຄອງເຮືອນຢູ່ ໔໐,໐໐໐ ປີ

[໔໖໓] ພຣະຣາດຊະກັນຍາທັງ ໗ ພຣະອົງ
ມີຄວາມສຸກ ປະພຶດພົມມະຈັນຕັ້ງແຕ່ຍັງເປັນກຸມາຣີ
ເພີດເພີນຍິນດີອຸປັດຖາກພຣະພຸດທະເຈົ້າ

[໔໖໔] ຄື (໑) ພຣະນາງສະມະນີ (໒) ພຣະນາງສະມະນະຄຸດຕາ
(໓) ພຣະນາງພິກຂຸນີ (໔) ພຣະນາງພິກຂຸທາສິກາ
(໕) ພຣະນາງທຳມາ (໖) ພຣະນາງສຸທຳມາ
(໗) ພຣະນາງສັງຄະທາສິກາ

[໔໖໕] (ພຣະຣາດຊະທິດາທັງ ໗ ນັ້ນ ໄດ້ກັບຊາດມາເກີດ)
ຄື ຂ້ານ້ອຍ ໑ ພຣະເຂມາເຖຣີຜູ້ມີປັນຍາ ໑
ພຣະປະຕາຈາຣາເຖຣີ ໑ ພຣະກຸນທົນເກສີເຖຣີ ໑
ພຣະກິສາໂຄຕະມີເຖຣີ ໑ ພຣະທຳມະທິນນາເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໔໖໖] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໔໖໗] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນຕາວະຕຶງສານັ້ນແລ້ວ
ມາເກີດໃນຕະກູນໃຫຍ່ໃນໝູ່ມະນຸດ
ໄດ້ຖວາຍຜ້າຢ່າງດີມີສີເຫຼືອງ ເນື້ອກ້ຽງແກ່ພຣະອະຣະຫັນອົງໜຶ່ງ

[໔໖໘] ຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ໄປເກີດໃນຕະກູນພາມມະນະມະຫາສານໃນສັດທະບຸຣີ
ເປັນທິດາຂອງພາມຊື່ຕິຣິຕິວັດສະ
ມີຊື່ວ່າອຸມມາທັນຕີ ມີສີຣິໂສມງົດງາມເປັນທີ່ຈູງໃຈໃຫ້ຫຼົງໃຫຼ

[໔໖໙] ຈຸຕິຈາກອັດຕະພາບນັ້ນແລ້ວ ໄດ້ໄປເກີດໃນຕະກູນໜຶ່ງ
ທີ່ບໍ່ຄ່ອຍມີຄວາມອຸດົມສົມບູນເທົ່າໃດໃນຊົນນະບົດ
ຮັກສາເຂົ້າສາລີໃນຄັ້ງນັ້ນ

[໔໗໐] ຂ້ານ້ອຍເຫັນພຣະປັດເຈກພຸດທະເຈົ້າອົງໜຶ່ງ
ໄດ້ຖວາຍເຂົ້າຕອກ ໕໐໐ ດອກ ທໍ່ດ້ວຍດອກປະທຸມ
ປາຖະໜາມີບຸດ ໕໐໐ ຄົນ

[໔໔໑] ເມື່ອຂ້ານ້ອຍປາຖະໜາບຸດຈຳນວນເທົ່ານັ້ນແລ້ວ
ໄດ້ຖວາຍນ້ຳເຜິ້ງແດ່ພຣະສະຍຳພູ
ຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ເກີດພາຍໃນດອກບົວໃນປ່າ

[໔໔໒] ໄດ້ເປັນພຣະມະເຫສີຂອງພຣະເຈົ້າກາສີ ເປັນຜູ້ທີ່ປະຊາຊົນສັກກາຣະບູຊາ
ໄດ້ໃຫ້ກຳເນີດພຣະຣາດຊະບຸດຄົບ ໕໐໐ ອົງ

[໔໔໓] ເມື່ອພຣະຣາດຊະບຸດເຫຼົ່ານັ້ນຊົງຈະເລີນໄວແລ້ວ
ຊົງຫຼິ້ນນ້ຳ ໄດ້ເຫັນດອກບົວທີ່ຫຼຸດຫຼົ່ນໄປ
ກໍໄດ້ສຳເລັດເປັນພຣະປັດເຈກພຸດທະເຈົ້າ

[໔໔໔] ຂ້ານ້ອຍນັ້ນ ເມື່ອຕ້ອງພັດພາກຈາກບຸດຜູ້ປະເສີດເຫຼົ່ານັ້ນ
ກໍມີຄວາມເສົ້າໂສກ ຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ໄປເກີດໃນໝູ່ບ້ານຂ້າງພູເຂົາອິສິຄິລິ

[໔໔໕] ເມື່ອຂ້ານ້ອຍຮູ້ວ່າ ບຸດເປັນພຣະປັດເຈກພຸດທະເຈົ້າ
ໄດ້ຖືເຂົ້າຍາຄູໄປເພື່ອບຸດແລະເພື່ອຕົນເອງ
ໄດ້ເຫັນພຣະປັດເຈກພຸດທະເຈົ້າ ໘ ອົງ

[໔໔໖] ເຂົ້າໄປສູ່ບ້ານເພື່ອພິກສາຫານ ກໍຣະລຶກເຖິງບຸດຂຶ້ນມາ
ທານນ້ຳນົມຂອງຂ້ານ້ອຍກໍຫຼັ່ງໄຫຼອອກຍ້ອນຄວາມຮັກບຸດ

[໔໔໗] ຂ້ານ້ອຍມີຄວາມເຫຼື້ອມໃສ ໄດ້ຖວາຍເຂົ້າຍາຄູດ້ວຍມືຂອງຕົນ
ແກ່ພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ
ຂ້ານ້ອຍຈຸຕິຈາກອັດຕະພາບນັ້ນແລ້ວ
ໄປເກີດໃນສວນນັນທະວັນເທິງສະຫວັນຊັ້ນຕາວະຕິງສາ

[໔໔໘] ຂ້າແຕ່ພຣະມະຫາວີຣະ
ຂ້ານ້ອຍວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ສະເຫວີຍສຸກແລະທຸກແລະໄດ້ສະລະຊີວິດເພື່ອປະໂຫຍດແກ່ພຣະອົງ

[໔໔໙] ຂ້ານ້ອຍມີທຸກກໍຫຼາຍ ມີສົມບັດກໍຫຼາຍຊະນິດ
ດັ່ງທີ່ຂາບທູນມານີ້ ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍເກີດໃນນະຄອນສາວັດຖີ

[໔໕໐] ໃນຕະກູນເສດຖີມີຊັບຫຼາຍ
ປະກອບດ້ວຍສຸກສົມບັດ ມີຄວາມຮຸ່ງເຮືອງດ້ວຍຣັດຕະນະຕ່າງ ໆ
ໃຫ້ສຳເລັດສິ່ງທີ່ປາຖະໜາທຸກຢ່າງ

[໔໕໑] ເປັນຜູ້ທີ່ປະຊຸມຊົນສັກກາຣະບູຊາ
ນັບຖືແລະຢຳເກງ ປະກອບດ້ວຍສິຣິຮູບ
ອັນຊົນໃນຕະກູນທັງຫຼາຍສັກກາຣະຢ່າງຍິ່ງ

[໔໕໒] ຂ້ານ້ອຍເປັນຍິງສາວທີ່ໜ້າປາຖະໜາແທ້ນໍ
ດ້ວຍສິຣິຄືຮູບສົມບັດແລະໂພຄະສົມບັດ
ບຸດເສດຖີທັງຫຼາຍແລະບໍລິວານຂອງຕົນຈຳນວນຫຼາຍຕ່າງປາຖະໜາ

[໔໕໓] ຂ້ານ້ອຍລະເຮືອນ ອອກບວດເປັນບັນພະຊິດ
ຍັງບໍ່ເຖິງເຄິ່ງເດືອນກໍໄດ້ບັນລຸສັດຈະ ໔

[໔໕໔] ຂ້ານ້ອຍເນຣະມິດລົດເປັນສີ່ຫຼ່ຽມຈະຕຸລັດໄດ້ດ້ວຍລິດ
ຂໍຂາບພຣະຍຸຄົນບາດຂອງພຣະພຸດທະເຈົ້າ
ຜູ້ຊົງເປັນບ່ອນເພິ່ງຂອງໂລກຜູ້ມີພຣະສິຣິ

[໔໕໕] (ພະຍາມານມາກ່າວກັບຂ້ານ້ອຍວ່າ)
ທ່ານເຂົ້າມາຍັງຕົ້ນໄມ້ຊັ້ນເລີດທີ່ມີດອກແຍ້ມບານດີແລ້ວ
ຢືນຢູ່ພຽງຜູ້ດຽວຢູ່ທີ່ເຫງົ້າຕົ້ນສາລະ
ບໍ່ມີໃຜເປັນເພື່ອນ ທ່ານຜູ້ໂງ່ຈ້າ
ທ່ານບໍ່ຢ້ານພວກນັກເລງແດ່ບໍ

[໔໕໖] ຂ້ານ້ອຍກ່າວວ່າ ເຖິງພວກນັກເລງເປັນ ໑໐໐,໐໐໐ ຄົນມາໃນບ່ອນນີ້
ເພິ່ງເປັນເໝືອນກັບທ່ານນີ້ ກໍເຮັດຂົນຂອງເຮົາໃຫ້ເອນໃຫ້ໄຫວບໍ່ໄດ້
ພະຍາມານ ທ່ານພຽງຜູ້ດຽວຈັກເຮັດຫຍັງເຮົາໄດ້

[໔໕໗] ເຮົານີ້ຈັກຫາຍຕົວໄປກໍໄດ້ ຫຼື ວ່າເຂົ້າໄປໃນທ້ອງຂອງທ່ານກໍໄດ້
ທ່ານຈັກແນມບໍ່ເຫັນເຮົາຜູ້ຢືນຢູ່ລະຫວ່າງຄິ້ວຂອງທ່ານ

[໔໕໘] ເຮົາມີຄວາມຊຳນານໃນເລື້ອງຈິດ ອິດທິບາດເຮົາກໍຈະເລີນດີແລ້ວ
ພົ້ນຈາກສັບພະກິເລດເຄື່ອງຜູກທັງປວງ
ພະຍາມານ ເຮົາບໍ່ໄດ້ເກງກົວທ່ານ

[໔໕໙] ການທັງຫຼາຍປຽບດ້ວຍຫອກແລະຫຼາວ
ແມ່ນຂັນທັງຫຼາຍກໍຄ້າຍກອງໄຟ
ທ່ານກ່າວເຖິງຄວາມຍິນດີໃນການ
ບັດນີ້ ເຮົາບໍ່ມີຄວາມຍິນດີໃນການ

[໔໖໐] ຄວາມເພີດເພີນໃນອາລົມທັງປວງເຮົາກຳຈັດໄດ້ໝົດແລ້ວ
ກອງແຫ່ງຄວາມມືດເຮົາກໍທຳລາຍໄດ້ແລ້ວ
ມານຜູ້ມີບາບ ທ່ານຈົ່ງຮູ້ແນວນີ້ ທ່ານຖືກເຮົາກຳຈັດແລ້ວ

[໔໖໑] ພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳວິເສດ
ຊົງພໍພຣະຫະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະໃນບໍລິສັດທັງຫຼາຍວ່າ
ອຸບົນວັນນາພິກຂຸນີເປັນຜູ້ປະເສີດສຸດ
ແຫ່ງພິກຂຸນີທັງຫຼາຍຜູ້ມີລິດ

[໔໖໒] ພຣະສາດສະດາຂ້ານ້ອຍກໍປົນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ
ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໔໖໓] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໔໖໔] ທາຍົກທັງຫຼາຍນ້ອມປັດໄຈ ຄື ຈີວອນ ບິນທະບາດ ເສນາສະນະ
ແລະຄິລານະປັດໄຈເພສັດບໍຣິຂານ ເຂົ້າມາເທື່ອລະຫຼາຍພັນໂດຍຮອບ

[໔໖໕] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໖໖] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້

ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໕໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ພຣະອຸບົນວັນນາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸບປະລະວັນນາເຖຣີຍາປະທານທີ ໙ ຈົບ**

## ໑໐. ປະຕາຈາຣາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະປະຕາຈາຣາເຖຣີ

(ພຣະປະຕາຈາຣາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໕໘] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໕໙] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນເສດຖີ
ມີຄວາມຮຸ່ງເຮືອງດ້ວຍຣັດຕະນະຕ່າງ ໆ ໃນນະຄອນຫົງສະວະດີ
ເປັນຜູ້ພຽບພ້ອມດ້ວຍຄວາມສຸກຫຼາຍ

[໔໖໐] ຂ້ານ້ອຍໄດ້ເຂົ້າເຝົ້າພຣະມະຫາວີຣະພຣະອົງນັ້ນແລ້ວ
ໄດ້ຟັງພຣະທຳມະເທດສະໜາ
ແຕ່ນັ້ນຂ້ານ້ອຍເກີດຄວາມເຫຼື້ອມໃສ
ໄດ້ເຖິງພຣະຊິນນະເຈົ້າເປັນສະຣະນະ

[໔໖໑] ໃນຄັ້ງນັ້ນ ພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳ
ຊົງສັນເສີນພິກຂຸນີອົງໜຶ່ງຜູ້ມີຫິຣິ ຜູ້ຄົງທີ່
ຄ່ອງແຄ່ວໃນກິດທີ່ຄວນແລະບໍ່ຄວນວ່າ
ເປັນຜູ້ເລີດກວ່າພິກຂຸນີທັງຫຼາຍຜູ້ຊົງວິໄນ

[໔໖໒] ໃນຄັ້ງນັ້ນ ຂ້ານ້ອຍມີຈິດເບີກບານ ຫວັງຕຳແໜ່ງນັ້ນ
ຈຶ່ງທູນນິມົນພຣະທົດສະພົນຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມທັງພຣະສົງ

[໔໗໓] ໃຫ້ສະເຫວີຍແລະສັນຕະຫຼອດ ໆ ວັນ ຖວາຍບາດແລະຈີວອນແລ້ວ
ຊົບຫົວລົງແທບພຣະຍຸຄົນບາດ ແລ້ວໄດ້ຂາບທູນຄຳນີ້ວ່າ

[໔໗໔] ຂ້າແຕ່ພຣະທີຣະມຸນີ ຜູ້ຊົງເປັນຜູ້ນຳສັດໂລກ
ພິກຂຸນີອົງໃດ ທີ່ພຣະອົງຊົງສັນເສີນໃນຕຳແໜ່ງທີ່ເລີດ
ໃນວັນທີ ໗ ແຕ່ນີ້ ຖ້າຕຳແໜ່ງນັ້ນຈະສຳເລັດແກ່ຂ້ານ້ອຍ
ຂ້ານ້ອຍຈັກເປັນເຊັ່ນນັ້ນ

[໔໗໕] ໃນຄັ້ງນັ້ນ ພຣະສາດສະດາໄດ້ຕັດກັບຂ້ານ້ອຍວ່າ
ນາງຜູ້ຈະເລີນ ຢ່າຢ້ານເລີຍ ຈົ່ງເບົາໃຈເຖີ້ນ
ທ່ານຈັກໄດ້ຕຳແໜ່ງນັ້ນສົມຄວາມປາຖະໜາໃນອະນາຄົດຕະການ

[໔໗໖] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໗໗] ສະຕີຜູ້ນີ້ຈັກມີນາມວ່າ ປະຕາຈາຣາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໔໗໘] ໃນຄັ້ງນັ້ນ ຂ້ານ້ອຍເປັນຜູ້ເບີກບານ ມີຈິດປະກອບດ້ວຍເມດຕາ
ປົນນິບັດພຣະຊິນນະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມທັງພຣະສົງຈົນຕະຫຼອດຊີວິດ

[໔໗໙] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໘໐] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ພຣະນາມວ່າ ກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍສະເດັດອຸບັດຂຶ້ນແລ້ວ

[໔໘໑] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກິກີ
ເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ປະເສີດສຸດ
ຊົງເປັນອຸປັດຖາກຂອງພຣະພຸດທະເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໗໔] ຂ້ານ້ອຍເປັນທິດາຄົນທີ ໓ ຂອງພຣະອົງ
ມີນາມຜາກົດວ່າພິກຂຸນີ
ໄດ້ຟັງທຳຂອງພຣະຊິນນະເຈົ້າຜູ້ເລີດແລ້ວພໍໃຈການບັນພະຊາ

[໔໗໓] ແຕ່ພຣະຊະນົກນາດບໍ່ໄດ້ຊົງອະນຸຍາດໃຫ້ຂ້ານ້ອຍທັງຫຼາຍບວດ
ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍບໍ່ຂີ້ຄ້ານຄອງເຮືອນຢູ່ ໒໐,໐໐໐ ປີ

[໔໗໔] ພຣະຣາດຊະກັນຍາທັງ ໗ ພຣະອົງ
ມີຄວາມສຸກ ປະພຶດພົມມະຈັນຕັ້ງແຕ່ຍັງເປັນກຸມາຣີ
ເພີດເພີນຍິນດີອຸປັດຖາກພຣະພຸດທະເຈົ້າ

[໔໗໕] ຄື (໑) ພຣະນາງສະມະນີ (໒) ພຣະນາງສະມະນະຄຸດຕາ
(໓) ພຣະນາງພິກຂຸນີ (໔) ພຣະນາງພິກຂຸທາສິກາ
(໕) ພຣະນາງທຳມາ (໖) ພຣະນາງສຸທຳມາ
(໗) ພຣະນາງສັງຄະທາສິກາ

[໔໗໖] (ພຣະຣາດຊະທິດາທັງ ໗ ນັ້ນໄດ້ກັບຊາດມາເກີດ)
ຄື ຂ້ານ້ອຍ ໑ ພຣະອຸບົນວັນນາເຖຣີ ໑
ພຣະເຂມາເຖຣີ ໑ ພຣະພັດທະຣາພິກຂຸນີເຖຣີ ໑
ພຣະກິສາໂຄຕະມີເຖຣີ ໑ ພຣະທຳມະທິນນາເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໔໗໗] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໔໗໘] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນເສດຖີ
ໃນນະຄອນສາວັດຖີທີ່ຈະເລີນມັ່ງຄັ່ງ ກວ້າງຂວາງ ມີຊັບຫຼາຍ
[໔໗໙] ເມື່ອຂ້ານ້ອຍຈະເລີນໄວເປັນສາວ
ໄດ້ຕົກຢູ່ໃນອຳນາດຂອງວິຕົກ
ພົບບຸຣຸດຊາວຊິນນະບົດຜູ້ໜຶ່ງແລ້ວໄດ້ຕາມໄປຢູ່ກັບເຂົາ
[໔໘໐] ຂ້ານ້ອຍເກີດບຸດຄົນທີໜຶ່ງ ຖືພາບຸດຄົນທີ ໒
ເມື່ອນັ້ນ ຂ້ານ້ອຍປາຖະໜາວ່າຈະໄປຢ້ຽມມານດາບິດາ

[໔໖໑] ໃນຄັ້ງນັ້ນ ຂ້ານ້ອຍບໍ່ໄດ້ບອກສາມີ ເມື່ອສາມີຂອງຂ້ານ້ອຍບໍ່ຢູ່
ຂ້ານ້ອຍຄົນດຽວອອກຈາກເຮືອນ
ຈະເດີນທາງໄປສູ່ນະຄອນສາວັດຖີທີ່ປະເສີດສຸດ

[໔໖໒] ພາຍຫຼັງສາມີຂອງຂ້ານ້ອຍຕາມມາທັນຢູ່ທີ່ນທາງ
ຂະນະນັ້ນ ລົມກຳມະຊະວາດແສນຈະທາຣຸນເກີດຂຶ້ນແກ່ຂ້ານ້ອຍ

[໔໖໓] ໃນຄັ້ງນັ້ນ ມະຫາເມກກໍເກີດຂຶ້ນໃນເວລາທີ່ຂ້ານ້ອຍຈະເກີດ
ສາມີໄປຫາເຄື່ອງມຸງບັງແຕ່ຖືກງູກັດຕາຍ

[໔໖໔] ໃນຄັ້ງນັ້ນ ຂ້ານ້ອຍມີທຸກຍ້ອນການເກີດ ໝົດບ່ອນເພິ່ງ
ເປັນຄົນກຳພ້າ ຍ່າງໄປເຫັນແມ່ນ້ຳນ້ອຍແຫ່ງໜຶ່ງ
ເຊິ່ງມີນ້ຳເຕັມປ່ຽມ ເປັນບ່ອນຢູ່ອາໄສຂອງນົກແຫຼວ

[໔໖໕] ຂ້ານ້ອຍອຸ້ມລູກຄົນນ້ອຍ ຂ້າມໄປທີ່ຝັ່ງນັ້ນຄົນດຽວ
ໃຫ້ລູກຄົນນ້ອຍດື່ມນົມຈົນອີ່ມແລ້ວ
ປະສົງທີ່ຈະນຳບຸດອີກຄົນໜຶ່ງ (ຄົນໃຫຍ່) ໃຫ້ຂ້າມມາ

[໔໖໖] ຈຶ່ງຍ້ອນກັບມາ ແຫຼວຕົວໜຶ່ງເວີ່ນລົງມາຫຍຸມເອົາລູກຄົນນ້ອຍໄປ
ບຸດຄົນໃຫຍ່ກະແສນ້ຳກໍພັດໄປ
ຂ້ານ້ອຍນັ້ນປ່ຽມໄປດ້ວຍຄວາມເສົ້າໂສກເຫຼືອປະມານ

[໔໖໗] ຈຶ່ງເດີນທາງຕໍ່ໄປໃນນະຄອນສາວັດຖີ ໄດ້ຟັງຂ່າວວ່າ
ຍາດພີ່ນ້ອງຂອງຕົນ (ມານດາ ບິດາແລະອ້າຍ) ໄດ້ຕາຍແລ້ວ
ເວລານັ້ນ ຂ້ານ້ອຍອັດອັ້ນຕັນໃຈດ້ວຍຄວາມເສົ້າໂສກ
ປ່ຽມດ້ວຍຄວາມໂສກາດູນຢ່າງໃຫຍ່ຫຼວງ ໄດ້ກ່າວວ່າ

[໔໖໘] ລູກ ໒ ຄົນກໍຕາຍສາແລ້ວ ສາມີຂອງເຮົາກໍຕາຍໃນປ່າ
ມານດາບິດາ ແລະອ້າຍຂອງເຮົາ
ກໍຖືກເຜົາຢູ່ທີ່ກອງຟອນດຽວກັນ

[໔໖໙] ໃນຄັ້ງນັ້ນ ຂ້ານ້ອຍທັງຊູບຜອມ ທັງເຫຼືອງຫຼ່າ
ບໍ່ມີບ່ອນເພິ່ງ ຕອມໃຈຢູ່ທຸກວັນ ເມື່ອຂ້ານ້ອຍເສຍສະຕິໂຊເຊໄປ
ໄດ້ພົບພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນສາຣະຖີຝຶກນໍຣະຊົນ

[໕໐໐] ລຳດັບນັ້ນ ພຣະສາດສະດາໄດ້ຕັດກັບຂ້ານ້ອຍວ່າ
ທ່ານຢ່າເສົ້າໂສກເຖິງບຸດເລີຍ
ຈົ່ງມີສະຕິເທີ້ນ ຈົ່ງສະແຫວງຫາຕົນເອງເທີ້ນ
ຈະຮ້ອນໃຈເພື່ອສິ່ງທີ່ແກ້ໄຂບໍ່ໄດ້ໄປເຮັດຫຍັງ

[໕໐໑] ບຸດ ທິດາ ຍາດຕິພີ່ນ້ອງແລະມິດສະຫາຍ
ມີໄວ້ເພື່ອຕ້ານທານຄົນຜູ້ເຖິງຄວາມຕາຍບໍ່ໄດ້ເລີຍ
ບັນດາໝູ່ຍາດຕິພີ່ນ້ອງ ເອງກໍຈະຕ້ອງຕາຍລົງໄປຄືກັນ

[໕໐໒] ຂ້ານ້ອຍໄດ້ຟັງພຣະດຳຣັດຂອງພຣະມຸນີນັ້ນແລ້ວ
ໄດ້ບັນລຸໂສດາປັດຕິຜົນ
ບວດແລ້ວບໍ່ດົນກໍໄດ້ບັນລຸອະຣະຫັດຕະຜົນ

[໕໐໓] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະເຈໂຕປະຣິຍະຍານ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະສາດສະດາ

[໕໐໔] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ຂ້ານ້ອຍເຮັດອາສະວະທັງປວງໃຫ້ສິ້ນໄປແລ້ວ
ເປັນຜູ້ບໍລິສຸດສະອາດປາສະຈາກມົນທິນ

[໕໐໕] ໃນຄັ້ງນັ້ນ ຂ້ານ້ອຍຮຽນວິໄນທັງປວງ
ໃນສຳນັກຂອງພຣະຜູ້ຊົງຮູ້ເຫັນທຳທັງປວງ
ແລະກ່າວອະທິບາຍພຣະວິໄນທັງປວງໄດ້ຢ່າງພິດສະດານຕາມເປັນຈິງ

[໕໐໖] ພຣະຊິນນະເຈົ້າຊົງພໍພຣະຫະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍໄວ້ໃນຕຳແໜ່ງເອຕະທັກຄະວ່າ
ປະຕາຈາຣາພິກຂຸນີພຽງຜູ້ດຽວເລີດກວ່າພິກຂຸນີທັງຫຼາຍຜູ້ຊົງວິໄນ

[໕໐໗] ພຣະສາດສະດາຂ້ານ້ອຍກໍປົນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍກະທຳສຳເລັດແລ້ວ
ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໕໐໘] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໕໐໙] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໑໐] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໕໑໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ປະຕາຈາຣາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປະຕາຈາຣາເຖຣີຍາປະທານທີ ໑໐ ຈົບ**

**ເອກູໂປສະຖິກະວັກທີ ໔ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ເອກູໂປສະຖິກາເຖຣີຍາປະທານ
໒. ສະລະປຸບຜິກາເຖຣີຍາປະທານ
໓. ໂມທະກະທາຍິກາເຖຣີຍາປະທານ
໔. ເອກາສະນະທາຍິກາເຖຣີຍາປະທານ
໕. ປັນຈະທີປະທາຍິກາເຖຣີຍາປະທານ
໖. ນະລະມາລີກາເຖຣີຍາປະທານ
໗. ມະຫາປະຊາປະຕິໂຄຕະມີເຖຣີຍາປະທານ
໘. ເຂມາເຖຣີຍາປະທານ
໙. ອຸບປະລະວັນນາເຖຣີຍາປະທານ
໑໐. ປະຕາຈາຣາເຖຣີຍາປະທານ

**ໃນວັກນີ້ ບັນດິດນັບຈຳນວນຄາຖາໄດ້ ໕໐໙ ຄາຖາ**

# ໓. ກຸນທະລະເກສິວັກ

## ໝວດວ່າດ້ວຍພຣະເຖຣີຊື່ກຸນທົນເກສີເປັນຕົ້ນ

### ໑. ກຸນທະລະເກສີເຖຣີຍາປະທານ

#### ປະຫວັດໃນອະດີດຊາດຂອງພຣະກຸນທົນເກສີເຖຣີ

(ພຣະກຸນທົນເກສີເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໒] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນເສດຖີ
ທີ່ມີຄວາມຣຸ່ງເຮື່ອງດ້ວຍຣັດຕະນະຕ່າງ ໆ ໃນນະຄອນຫົງສະວະດີ
ເປັນຜູ້ພຽບພ້ອມດ້ວຍຄວາມສຸກຫຼາຍ

[໓] ຂ້ານ້ອຍໄດ້ເຂົ້າເຝົ້າພຣະມະຫາວີຣະພຣະອົງນັ້ນແລ້ວໄດ້ຟັງທຳທີ່ສູງສຸດ
ແຕ່ນັ້ນຂ້ານ້ອຍເກີດຄວາມເຫຼື້ອມໃສ
ໄດ້ເຖິງພຣະຊິນນະເຈົ້າເປັນສະຣະນະ

[໔] ໃນຄັ້ງນັ້ນ ພຣະຊິນນະເຈົ້າຊົງເປັນຜູ້ນຳ ພຣະນາມວ່າ ປະທຸມຸດຕະຣະ
ຜູ້ປະກອບດ້ວຍພຣະມະຫາກະລຸນາ
ຊົງຕັ້ງພິກຂຸນີອົງໜຶ່ງຜູ້ມີປັນຍາດີໄວ້ໃນເອຕະທັກຄະວ່າ
ເປັນຜູ້ເລີດກວ່າພິກຂຸນີທັງຫຼາຍຜູ້ຂິບປາພິນຍາ (ຮູ້ໄດ້ໄວ)

[໕] ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວ ເປັນຜູ້ເບີກບານ
ໄດ້ຖວາຍທານແດ່ ພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຊົບຫົວລົງແທບພຣະຍຸຄົນບາດ ປາຖະໜາຕຳແໜ່ງນັ້ນ

[໖] ພຣະມະຫາວີຣະພຸດທະເຈົ້າຕັດອະນຸໂມທະນາວ່າ
ນາງຜູ້ຈະເລີນ ຕຳແໜ່ງໃດທີ່ທ່ານປາຖະໜາແລ້ວ
ຕຳແໜ່ງນັ້ນທັງປວງຈັກສຳເລັດແກ່ທ່ານ
ທ່ານຈົ່ງເປັນຜູ້ມີສຸກນິບພານເທີ້ນ

[໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໘] ສະຕີຜູ້ນີ້ຈັກມີນາມວ່າ ກຸນທົນເກສີ ຜູ້ຈະເລີນ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໙] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໑໐] ຂ້ານ້ອຍ ຈຸຕິຈາກສະຫວັນຊັ້ນຕາວະຕຶງສານັ້ນແລ້ວ
ໄດ້ໄປເກີດໃນສະຫວັນຊັ້ນຍາມາ
ຈຸຕິຈາກສະຫວັນຊັ້ນຍາມານັ້ນແລ້ວໄປເກີດໃນສະຫວັນຊັ້ນດຸສິດ
ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວໄປເກີດໃນສະຫວັນຊັ້ນນິມມານະຣະດີ
ຈຸຕິຈາກສະຫວັນຊັ້ນນິມມານະຣະດີນັ້ນແລ້ວ
ໄປເກີດໃນສະວັກຊັ້ນປະຣະນິມມິຕະວະສະວັດດີ

[໑໑] ຍ້ອນອຳນາດແຫ່ງກຳນັ້ນ ຂ້ານ້ອຍເກີດໃນພົບໃດ ໆ
ໃນພົບນັ້ນ ໆ ກໍໄດ້ເປັນພຣະມະເຫສີຂອງພຣະຣາຊາ

[໑໒] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນປະຣະນິມມິຕະວະສະວັດດີນັ້ນແລ້ວ
ມາເກີດໃນໝູ່ມະນຸດ ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າແຜ່ນດິນ

[໑໓] ສະເຫວີຍສົມບັດທັງໃນເທວະໂລກແລະໃນມະນຸດໂລກ
ມີຄວາມສຸກທຸກຊາດ ວຽນວ່າຍຕາຍເກີດຢູ່ໃນກັບເປັນຈຳນວນຫຼາຍ

[໑໔] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍສະເດັດອຸບັດຂຶ້ນແລ້ວ

[໑໕] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກິກີ

ເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ປະເສີດສຸດ
ຊຶ່ງເປັນຜູ້ອຸປັດຖາກຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໖] ຂ້ານ້ອຍເປັນທິດາຄົນທີ ໔ ຂອງພຣະອົງ
ມີນາມຜາກົດວ່າພິກຂຸທາສີ
ໄດ້ຟັງທຳຂອງພຣະຊິນນະເຈົ້າຜູ້ເລີດແລ້ວພໍໃຈການບັນພະຊາ

[໑໗] ແຕ່ພຣະຊະນົກນາດບໍ່ໄດ້ຊົງອະນຸຍາດໃຫ້ຂ້ານ້ອຍທັງຫຼາຍບວດ
ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍບໍ່ຂີ້ຄ້ານຄອງເຮືອນຢູ່ ໒໐,໐໐໐ ປີ

[໑໘] ພຣະຣາດຊະກັນຍາທັງ ໗ ພຣະອົງ
ມີຄວາມສຸກ ປະພຶດພົມມະຈັນຕັ້ງແຕ່ຍັງເປັນກຸມາຣີ
ເພີດເພີນຍິນດີອຸປັດຖາກພຣະພຸດທະເຈົ້າ

[໑໙] ຄື (໑) ພຣະນາງສະມະນີ (໒) ພຣະນາງສະມະນະຄຸດຕາ
(໓) ພຣະນາງພິກຂຸນີ (໔) ພຣະນາງພິກຂຸທາສີກາ
(໕) ພຣະນາງທຳມາ (໖) ພຣະນາງສຸທຳມາ
(໗) ພຣະນາງສັງຄະທາສີກາ

[໒໐] (ພຣະຣາດຊະທິດາທັງ ໗ ນັ້ນ ໄດ້ກັບຊາດມາເກີດ)
ຄື ຂ້ານ້ອຍ ໑ ພຣະເຂມາເຖຣີ ໑
ພຣະອຸບົນວັນນາເຖຣີ ໑ ພຣະປະຕາຈາຣາເຖຣີ ໑
ພຣະກີສາໂຄຕະມີເຖຣີ ໑ ພຣະທຳມະທິນນາເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໒໑] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໒໒] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນເສດຖີ
ທີ່ມີຄວາມຈະເລີນໃນນະຄອນຣາດຊະຄືທີ່ອຸດົມສົມບູນ
ເມື່ອຂ້ານ້ອຍຍັງເປັນສາວ

[໒໓] ໄດ້ເຫັນຣາດບຸຣຸດນຳໂຈນໄປເພື່ອປະຫານ ມີຄວາມຮັກໃນໂຈນຄົນນັ້ນ

ບິດາຂອງຂ້ານ້ອຍໃຊ້ຊັບ ໑,໐໐໐ ປິດເປື້ອງໂຈນນັ້ນ
ໃຫ້ລຸດພົ້ນຈາກການຖືກປະຫານ

[໔໔] ບິດາຮູ້ຈິດໃຈຂອງຂ້ານ້ອຍແລ້ວ ຈຶ່ງຍົກຂ້ານ້ອຍໃຫ້ໂຈນນັ້ນ
ຂ້ານ້ອຍໄວ້ວາງໃຈ ອີດູ ເກື້ອກູນໂຈນຄົນນັ້ນເຫຼືອລົ້ນ

[໔໕] ໂຈນນັ້ນ ມີຄວາມໂລບໃນເຄື່ອງປະດັບຂອງຂ້ານ້ອຍ
ແລ້ວຄິດຈະຂ້າຂ້ານ້ອຍຜູ້ຊ່ອຍນຳເຄື່ອງບວງສວງ
ໄປສູ່ເຫວຖິ້ມໂຈນເທິງພູເຂົາ

[໔໖] ເວລານັ້ນ ຂ້ານ້ອຍເມື່ອຈະຮັກສາຊີວິດຂອງຕົນໄວ້
ຈຶ່ງປະນົມມືໄຫວ້ໂຈນຜູ້ເປັນສັດຕູທີ່ດຸຮ້າຍແລ້ວກ່າວວ່າ

[໔໗] ນາຍຜູ້ຈະເລີນ ສ້ອຍຄໍຄຳ ແກ້ວມຸກດາ
ແລະແກ້ວໄພທູນເປັນຈຳນວນຫຼາຍ
ທັງໝົດນີ້ ທ່ານຈົ່ງເອົາໄປເທີ້ນແລ້ວຈົ່ງປ່ອຍຂ້ານ້ອຍໄປ
ແລະຈົ່ງປະກາດຂ້ານ້ອຍໃຫ້ຮູ້ວ່າເປັນທາສີເທີ້ນ

[໔໘] (ໂຈນກ່າວວ່າ) ນີ້ນາງ ຈົ່ງປົດອອກມາ
ຢ່າເອົາແຕ່ເວົ້າຮ້ອງຂໍຢູ່ເລີຍ ເຮົາຮູ້ພຽງວ່າ
ບໍ່ຂ້າເຈົ້າຜູ້ມາເຖິງປ່າແລ້ວບໍ່ໄດ້

[໔໙] (ຂ້ານ້ອຍກ່າວວ່າ) ຕັ້ງແຕ່ຂ້ານ້ອຍຮູ້ຄວາມ ຈຳຄວາມໄດ້
ຍັງບໍ່ຮູ້ຈັກຮັກຊາຍອື່ນຍິ່ງໄປກວ່າທ່ານເລີຍ

[໕໐] ມາເທີ້ນ ຂ້ານ້ອຍຈັກຂໍກອດທ່ານເປັນເທື່ອສຸດທ້າຍ
ຂໍກທຳປະທັກຂິນທ່ານ ໄຫວ້ທ່ານ
ຍ້ອນຂ້ານ້ອຍກັບທ່ານຈະບໍ່ມີໂອກາດຢູ່ຮ່ວມກັນອີກແລ້ວ

[໕໑] (ເທວະດາເຊິ່ງສະຖິດຢູ່ໃນບ່ອນນັ້ນໄດ້ກ່າວວ່າ)
ບຸຣຸດເທົ່ານັ້ນຈະເປັນຄົນສະຫຼາດໃນຖານະທັງປວງ ກໍບໍ່ແມ່ນ
ແມ່ນສະຕີຜູ້ມີປັນຍາເຫັນປະຈັກໃນຖານະນັ້ນ ໆ
ກໍເປັນຄົນສະຫຼາດໄດ້

[໕໔] ບຸຣຸດເທົ່ານັ້ນຈະເປັນຄົນສະຫຼາດໃນຖານະທັງປວງ ກໍບໍ່ແມ່ນ
ແມ່ນສະຕີຜູ້ຄິດອຸບາຍເອົາໂຕລອດໄດ້ໄວ ກໍເປັນຄົນສະຫຼາດໄດ້

[໓໓] ໃນຄັ້ງນັ້ນ ຂ້ານ້ອຍຄິດອຸບາຍຂຶ້ນໄດ້
ເໝືອນບໍ່ເກີດແຫ່ງປັນຍາຈຶ່ງໄດ້ຂ້າສັດຕູທີ່ດຸຮ້າຍນາຍໂຈນຜູ້ເປັນຜົວຕົນໄດ້

[໓໔] ຜູ້ໃດບໍ່ຮູ້ຈັກອຸບາຍໃນການເອົາຕົວລອດໄດ້ທັນ
ຜູ້ນັ້ນເປັນຄົນຈ້ຳ ຍ່ອມຖືກເຂົາຂ້າຕາຍ
ເໝືອນໂຈນເຊິ່ງຖືກຂ້າຢູ່ປາກເຫວ

[໓໕] ຜູ້ໃດຮູ້ຈັກກົນອຸບາຍໃນການເອົາຕົວລອດໄດ້ທັນ
ຜູ້ນັ້ນກໍພົ້ນຈາກພວກສັດຕູບຽດບຽນ
ເໝືອນທີ່ຂ້ານ້ອຍພົ້ນຈາກໂຈນເຊິ່ງເປັນສັດຕູໃນຄັ້ງນັ້ນ

[໓໖] ເມື່ອຂ້ານ້ອຍຍູ້ສັດຕູຕົກເຫວໄປແລ້ວ
ໄດ້ເຂົ້າໄປບວດຍັງສຳນັກຂອງປະຣິພາຊິກຄອງຜ້າຂາວ

[໓໗] ໃນຄັ້ງນັ້ນ ພວກປະຣິພາຊິກໃຊ້ແໜບລົກຜົມຂອງຂ້ານ້ອຍ
ຈົນໝົດແລ້ວໃຫ້ບວດ ສອນວິຊາຂອງລັດທິໃຫ້ຈົນໝົດ

[໓໘] ຂ້ານ້ອຍຮຽນລັດທິນັ້ນແລ້ວ ນັ່ງຄົນດຽວຄິດເຖິງລັດທິ
ເຊິ່ງເຮັດມະນຸດໃຫ້ເປັນຄືໝານັ້ນ

[໓໙] ປະຣິພາຊິກຖືຜົມທີ່ລົກອອກແລ້ວໂຍນໄວ້ໃກ້ຂ້ານ້ອຍແລ້ວກໍຫຼີກໄປ
ຂ້ານ້ອຍເຫັນແລ້ວໄດ້ນິມິດເໝືອນໝູ່ໜອນກອງກັນຢູ່

[໔໐] ແຕ່ນັ້ນ ຂ້ານ້ອຍມີຄວາມສະລົດໃຈລຸກຂຶ້ນ
ໄດ້ສອບຖາມພວກປະຣິພາຊິກທີ່ມີລັດທິດຽວກັນ
ພວກນັ້ນບອກວ່າ
ພິກຂຸສາກະຍະບຸດທັງຫຼາຍຍ່ອມຮູ້ເລື້ອງນັ້ນ

[໔໑] ຂ້ານ້ອຍເຂົ້າໄປຫາພຸດທະສາວົກແລ້ວຖາມເລື້ອງນັ້ນ
ພຸດທະສາວົກເຫຼົ່ານັ້ນພາຂ້ານ້ອຍ
ໄປສູ່ສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໒] ພຣະອົງຜູ້ຊົງເປັນຜູ້ນຳ
ຊົງສະແດງທຳແກ່ຂ້ານ້ອຍວ່າ ຂັນ ອາຍະຕະນະ

ແລະທາດທັງຫຼາຍ ບໍ່ງາມ ບໍ່ທ່ຽງ
ເປັນທຸກ ແລະເປັນອະນັດຕາ

[໔໓] ຂ້ານ້ອຍໄດ້ຟັງພຣະທຳຂອງພຣະອົງແລ້ວ
ຊຳຣະທຳມະຈັກຂຸໃຫ້ມົດຈົດໂດຍວິເສດ
ຮູ້ແຈ້ງພຣະສັດທຳແລ້ວໄດ້ທູນຂໍບັນພະຊາອຸປະສົມບົດ

[໔໔] ໃນຄັ້ງນັ້ນ ພຣະພຸດທະເຈົ້າອັນຂ້ານ້ອຍທູນຂໍແລ້ວໄດ້ຕັດວ່າ
ທ່ານຈົ່ງເປັນພິກຂຸນີມາເທີ້ນ ນາງຜູ້ຈະເລີນ
ຂ້ານ້ອຍອຸປະສົມບົດແລ້ວ ໄດ້ເຫັນນ້ຳ

[໔໕] ຮູ້ຈັກສັງຂານທີ່ມີຄວາມເກີດແລະຄວາມດັບໄປດ້ວຍນ້ຳລ້າງຕີນ
ຄິດວ່າ ສັງຂານແມ່ນທັງປວງ ກໍເປັນແນວນັ້ນ

[໔໖] ຈາກນັ້ນຈິດຂອງຂ້ານ້ອຍລຸດພົ້ນແລ້ວ
ຍ້ອນບໍ່ຖືໝັ້ນໂດຍປະການທັງປວງ
ໃນຄັ້ງນັ້ນ ພຣະຊິນນະເຈົ້າຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະວ່າ
ເປັນຜູ້ເລີດກວ່າພິກຂຸນີທັງຫຼາຍ ຜູ້ຂົບປາພິນຍາ

[໔໗] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະສາດສະດາ

[໔໘] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ຂ້ານ້ອຍເຮັດອາສະວະທັງປວງໃຫ້ສິ້ນໄປແລ້ວ
ເປັນຜູ້ບໍລິສຸດສະອາດປາສະຈາກມົນທິນ

[໔໙] ພຣະສາດສະດາຂ້ານ້ອຍກໍປົນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ
ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໕໐] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດ
ເພື່ອປະໂຫຍດໃດ ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໕໑] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍາຍ
ນິຣຸດຕິປະຕິສຳພິທາຍານ ແລະປະຕິພານະປະຕິສຳພິທາຍານ
ຂອງຂ້ານ້ອຍ ບໍລິສຸດໄພບູນ
ໃນສາດສະໜາຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໕໒] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໓] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໕໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະພັດທາກຸນທົນເກສີພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກຸນທະລະເກສີເຖຣີຍາປະທານທີ ໑ ຈົບ**

## ໒. ກີສາໂຄຕະມີເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະກີສາໂຄຕະມີເຖຣີ

(ພຣະກີສາໂຄຕະມີເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໕໕] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໕໖] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນໜຶ່ງໃນນະຄອນຫົງສະວະດີ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ປະເສີດກວ່ານໍຣະຊົນພຣະອົງນັ້ນ
ແລ້ວໄດ້ເຖິງພຣະອົງເປັນສະຣະນະ

[໕໗] ຂ້ານ້ອຍໄດ້ຟັງທຳຂອງພຣະອົງ
ເຊິ່ງປະກອບດ້ວຍສັດຈະ ໔ ທີ່ມ່ວນຈັບໃຈຢ່າງຍິ່ງ
ນຳມາເຊິ່ງສັນຕິສຸກແຫ່ງຈິດ

[໕໘] ແມ່ນໃນຄັ້ງນັ້ນ ພຣະທີຣະເຈົ້າຜູ້ສູງສຸດແຫ່ງບຸຣຸດ
ຊົງຍ້ອງຍໍຕັ້ງພິກຂຸນີອົງໜຶ່ງ ຜູ້ຊົງຈີວອນເສົ້າໝອງ
ໄວ້ໃນເອຕະທັກຄະ

[໕໙] ຂ້ານ້ອຍໄດ້ຟັງຄຸນຂອງພິກຂຸນີນັ້ນແລ້ວ ເກີດປີຕິບໍ່ແມ່ນໜ້ອຍ
ກະທຳສັກກາຣະພຣະພຸດທະເຈົ້າຕາມກຳລັງຄວາມສາມາດ

[໖໐] ໝອບລົງໃກ້ພຣະທີຣະມຸນີແລ້ວ ປາຖະໜາຕຳແໜ່ງນັ້ນ
ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າຊົງເປັນຜູ້ນຳ
ຕັດອະນຸໂມທະນາເພື່ອການໄດ້ຕຳແໜ່ງວ່າ

[໖໑] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໖໒] ສະຕີຜູ້ນີ້ ຈັກມີນາມຜາກົດວ່າກີສາໂຄຕະມີ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໖໓] ໃນຄັ້ງນັ້ນ ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ມີຄວາມຍິນດີ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າ ຜູ້ຊົງເປັນຜູ້ນຳວິເສດ
ດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ

[໖໔] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໖໕] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໖໖] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າ ກີກີ
ຊົງເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ປະເສີດສຸດ
ຊົງເປັນອຸປັດຖາກຂອງພຣະພຸດທະເຈົ້າ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໖໗] ຂ້ານ້ອຍເປັນທິດາຄົນທີ ໕ ຂອງພຣະອົງ
ມີນາມຜາກົດວ່າທຳມາ ໄດ້ຟັງທຳຂອງພຣະຊິນນະເຈົ້າຜູ້ເລີດແລ້ວ
ພໍໃຈການບັນພະຊາ

[໖໘] ແຕ່ພຣະຊະນົກນາດບໍ່ໄດ້ຊົງອະນຸຍາດໃຫ້ຂ້ານ້ອຍທັງຫຼາຍບວດ
ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍບໍ່ຂີ້ຄ້ານ ຄອງເຮືອນຢູ່ ໒໐,໐໐໐ ປີ

[໖໙] ພຣະຣາດຊະກັນຍາທັງ ໗ ພຣະອົງ
ມີຄວາມສຸກ ປະພຶດພົມມະຈັນຕັ້ງແຕ່ຍັງເປັນກຸມາຣີ
ເພີດເພີນຍິນດີອຸປັດຖາກພຣະພຸດທະເຈົ້າ

[໗໐] ຄື (໑) ພຣະນາງສະມະນີ (໒) ພຣະນາງສະມະນະຄຸດຕາ
(໓) ພຣະນາງພິກຂຸນີ (໔) ພຣະນາງພິກຂຸທາສິກາ
(໕) ພຣະນາງທຳມາ (໖) ພຣະນາງສຸທຳມາ
(໗) ພຣະນາງສັງຄະທາສິກາ

[໗໑] (ພຣະຣາດຊະທິດາທັງ ໗ ນັ້ນໄດ້ກັບຊາດມາເກີດ)
ຄືພຣະເຂມາເຖຣີ ໑ ພຣະອຸບົນວັນນາເຖຣີ ໑
ພຣະປະຕາຈາຣາເຖຣີ ໑ ພຣະກຸນທົນເກສີເຖຣີ ໑
ຂ້ານ້ອຍ ໑ ພຣະທຳມະທິນນາເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໗໒] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໓] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນເສດຖີ
ທີ່ຕົກຍາກ ຈົນຊັບ ເປັນຕະກູນທີ່ຕ່ຳຕ້ອຍ
ໄດ້ (ແຕ່ງງານ) ໄປສູ່ຕະກູນທີ່ມີຊັບ

[ໆ໔] ຊົນທັງຫຼາຍທີ່ເວັ້ນສາມີຂອງຂ້ານ້ອຍ
ກຽດຊັງວ່າເປັນຍິງສາວບໍ່ມີຊັບ
ເມື່ອຂ້ານ້ອຍເກີດບຸດແລ້ວ
ກໍເປັນທີ່ຊື່ນຊອບຂອງຊົນທັງປວງ

[ໆ໕] ໃນເວລາທີ່ບຸດຍັງເປັນເດັກອ່ອນ ມີຄວາມສຸກ
ເປັນທີ່ຮັກແພງຂອງຂ້ານ້ອຍເໝືອນດັ່ງຊີວິດຂອງຕົນ
ກໍຕົກໄປສູ່ອຳນາດຂອງພະຍາຍົມ (ຕາຍໄປ)

[ໆ໖] ຂ້ານ້ອຍອັດອັ້ນຕັນໃຈດ້ວຍຄວາມເສົ້າໂສກ
ມີໜ້າເສົ້າໝອງ ຮ້ອງໄຫ້ນ້ຳຕານອງໜ້າ
ອຸ້ມສົບລູກທີ່ຕາຍແລ້ວທ່ຽວຮ້ອງຂໍໄປທົ່ວ

[ໆໆ] ໃນຄັ້ງນັ້ນ ຂ້ານ້ອຍອັນບຸຣຸດຄົນໜຶ່ງເຫັນແລ້ວ
ພາເຂົ້າເຝົ້າພຣະພຸດທະເຈົ້າ
ຜູ້ຊົງເປັນນາຍແພດທີ່ປະເສີດທີ່ສຸດ
ຈຶ່ງໄດ້ທູນວ່າ ຂ້າແຕ່ພຣະອົງຜູ້ຈະເລີນ
ຂໍພຣະອົງໂຜດປະທານຢາໃຫ້ບຸດຄືນຊີບດ້ວຍເທີ້ນ

[ໆ໘] ພຣະຊິນນະເຈົ້າຜູ້ຊົງສະຫຼາດໃນອຸບາຍແນະນຳຮັບສັ່ງວ່າ
ໃນເຮືອນຫຼັງໃດບໍ່ມີຄົນຕາຍ
ທ່ານຈຶ່ງໄປນຳເມັດພັນຜັກກາດຈາກເຮືອນຫຼັງນັ້ນມາ

[ໆ໙] ໃນຄັ້ງນັ້ນ ຂ້ານ້ອຍຊອກຫາໄປຈົນທົ່ວນະຄອນສາວັດຖີ
ບໍ່ໄດ້ພົບເຮືອນທີ່ບໍ່ມີຄົນຕາຍເລີຍ
ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງກັບໄດ້ສະຕິວ່າ
ຈັກໄດ້ເມັດພັນຜັກກາດຊະນິດນີ້ໄດ້ຈັ່ງໃດ
ໃນເມື່ອທຸກຄອບຄົວລ້ວນແຕ່ມີຄົນຕາຍ

[໘໐] ຈຶ່ງຖິ້ມສົບແລ້ວເຂົ້າເຝົ້າພຣະພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກ ພຣະອົງຜູ້ມີພຣະສຸຣະສຽງອັນມ່ວນ
ທອດພຣະເນດເຫັນຂ້ານ້ອຍແຕ່ບ່ອນໄກ ແລ້ວຕັດວ່າ

[໘໑] ກໍຄວາມເປັນຢູ່ພຽງວັນດຽວຂອງບຸກຄົນຜູ້ເຫັນຄວາມເກີດຂຶ້ນ

ແລະຄວາມເສື່ອມໄປ ປະເສີດກວ່າຄວາມເປັນຢູ່ຕັ້ງ ໑໐໐ ປີ
ຂອງບຸກຄົນຜູ້ບໍ່ໄດ້ເຫັນຄວາມເກີດຂຶ້ນແລະຄວາມເສື່ອມໄປ

[໗໔] ທຳນີ້ ບໍ່ແມ່ນທຳສຳລັບຊາວບ້ານ
ບໍ່ແມ່ນທຳສຳລັບຊາວນິຄົມ ບໍ່ແມ່ນທຳສຳລັບສະກຸນດຽວ
ແຕ່ເປັນທຳສຳລັບຊາວໂລກທັງປວງພ້ອມທັງເທວະໂລກ
ທຳນັ້ນຄືອະນິດຈະຕາ (ຄວາມບໍ່ທ່ຽງ)

[໗໕] ຂ້ານ້ອຍໄດ້ຟັງຄາຖາເຫຼົ່ານີ້ແລ້ວ
ໄດ້ຊຳຣະທຳມະຈັກຂຸໃຫ້ມົດຈິດໂດຍພິເສດ
ແຕ່ນັ້ນ ຮູ້ແຈ້ງພຣະສັດທຳແລ້ວໄດ້ບວດເປັນບັນພະຊິດ

[໗໔] ແມ່ນເມື່ອບວດແລ້ວແນວນັ້ນ
ປະກອບຄວາມພຽນໃນສາດສະໜາຂອງພຣະຊິນນະເຈົ້າ
ບໍ່ດົນຫຼາຍກໍໄດ້ບັນລຸອະຣະຫັດຕະຜົນ

[໗໕] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງສາດສະດາ

[໗໖] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈິດແລ້ວ
ຂ້ານ້ອຍເຮັດອາສະວະທັງປວງໃຫ້ສິ້ນແລ້ວ
ເປັນຜູ້ບໍລິສຸດສະອາດປາສະຈາກມົນທິນ

[໗໗] ພຣະສາດສະດາຂ້ານ້ອຍກໍປິ່ນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ
ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໗໘] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໗໙] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍານ

ນິຣຸດຕິປະຕິສຳພິທາຍານ ແລະປະຕິພານະປະຕິສຳພິທາຍານ
ຂອງຂ້ານ້ອຍບໍລິສຸດໄພບູນ
ຍ້ອນອຳນາດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໙໐] ຂ້ານ້ອຍເກັບຜ້າມາຈາກກອງຂີ້ເຫຍື້ອ ປ່າຊ້າ ທາງລົດແລະທາງກວຽນ
ແລ້ວ ເຮັດເປັນຜ້າສັງຄາຕິຈາກຜ້ານັ້ນ
ຊົງຈີວອນທີ່ເສົ້າໝອງ

[໙໑] ພຣະຊິນນະເຈົ້າ ຊົງເປັນຜູ້ນຳວິເສດ
ຊົງພໍພຣະທະໄທໃນຄຸນສົມບັດຄືການຊົງຈີວອນເສົ້າໝອງນັ້ນ
ຈຶ່ງຊົງແຕ່ງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະໃນບໍລິສັດທັງຫຼາຍ

[໙໒] ກິເລດທັງຫຼາຍຂ້ານ້ອຍກໍໄດ້ເຜົາແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໙໓] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໙໔] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະກິສາໂຄຕະມີພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ກິສາໂຄຕະມີເຖຣີຍາປະທານທີ ໒ ຈົບ**

## ໓. ທຳມະທິນນາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະທຳມະທິນນາເຖຣີ

(ພຣະທຳມະທິນນາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[๙๕] พระຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊຶ່ງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[๙๖] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນໜຶ່ງໃນນະຄອນຫົງສະວະດີ
ເປັນຜູ້ມີປັນຍາ ສັງລວມຢູ່ໃນສິນ ຮັບຈ້າງເຮັດວຽກຂອງຄົນອື່ນ

[๙๗] ພຣະເຖຣະນາມວ່າ ສຸຊາຕະ
ອັກຄະຣະສາວົກຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ອອກຈາກວິຫານໄປບິນທະບາດ

[๙๘] ໃນຄັ້ງນັ້ນ ຂ້ານ້ອຍເປັນຄົນຫາບນ້ຳ ຖືໝໍ້ນ້ຳຍ່າງໄປຢູ່
ເຫັນທ່ານແລ້ວເຫຼື້ອມໃສ ໄດ້ຖວາຍເຂົ້າໜົມດ້ວຍມືຂອງຕົນ

[๙๙] ທ່ານຮັບແລ້ວນັ່ງສັນ ໃນບ່ອນນັ້ນເອງ
ແຕ່ນັ້ນຂ້ານ້ອຍນິມົນທ່ານໄປສູ່ເຮືອນ
ໄດ້ຖວາຍໂພຊະນາຫານແກ່ທ່ານ

[๑๐๐] ຈາກນັ້ນ ເຈົ້ານາຍຂອງຂ້ານ້ອຍມີຄວາມຍິນດີແລ້ວ
ໄດ້ແຕ່ງຂ້ານ້ອຍເປັນລູກສະໃພ້ຂອງຕົນ
ຂ້ານ້ອຍໄດ້ໄປຖວາຍອະພິວາດພຣະສຳມາສຳພຸດທະເຈົ້າພ້ອມກັບແມ່ຜົວ

[๑๐๑] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຊົງປະກາດແຕ່ງຕັ້ງພິກຂຸນີອົງໜຶ່ງ
ຜູ້ເປັນທຳກະຖຶກໄວ້ໃນເອຕະທັກຄະ
ຂ້ານ້ອຍໄດ້ຟັງພຸດທະດຳຣັດນັ້ນແລ້ວມີຄວາມເບີກບານ

[๑๐๒] ໄດ້ທູນນິມົນພຣະສຸຄົດເຈໄ້າຊົງເປັນຜູ້ນຳສັດໂລກ
ພ້ອມທັງພຣະສົງ ຖວາຍມະຫາທານແລ້ວ ປາຖະໜາຕຳແໜ່ງນັ້ນ

[๑๐๓] ລຳດັບນັ້ນ ພຣະສຸຄົດເຈົ້າຜູ້ມີພຣະສຸຣະສຽງມ່ວນເໝືອນເມກຄຳຣົນ
ໄດ້ຕັດກັບຂ້ານ້ອຍວ່າ ທ່ານຈົ່ງຍິນດີບຳຣຸງ ອັງຄາດເຮົາພ້ອມທັງພຣະສົງ

[๑๐๔] ຂວນຂວາຍໃນການສະດັບພຣະສັດທຳ
ມີໃຈຈະເລີນດ້ວຍຄຸນທຳ ທ່ານຜູ້ຈະເລີນ

ທ່ານຈຶ່ງເປັນຜູ້ເບີກບານເທີ້ນ ທ່ານຈັກໄດ້ຕຳແໜ່ງນັ້ນ
ເຊິ່ງເປັນຜົນແຫ່ງຄວາມປາຖະໜາ

[໑໐໕] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊຶ່ງສືບພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໐໖] ສະຕີຜູ້ນີ້ຈັກມີນາມຜາກົດວ່າທຳມະທິນນາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ
[໑໐໗] ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວເປັນຜູ້ມີຄວາມຍິນດີ
ມີຈິດປະກອບດ້ວຍເມດຕາ ບຳຣຸງພຣະມະຫາມຸນີ
ຜູ້ຊຶ່ງເປັນຜູ້ນຳວິເສດດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ

[໑໐໘] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໐໙] ໃນພັດທະກັບນີ້ ພຣະພຸດທະເຈົ້າ ຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍສະເດັດອຸບັດຂຶ້ນແລ້ວ

[໑໑໐] ໃນຄັ້ງນັ້ນ ພຣະເຈົ້າກາສີພຣະນາມວ່າກິກີ
ຊຶ່ງເປັນໃຫຍ່ກວ່ານໍຣະຊົນໃນນະຄອນພາຣານະສີທີ່ປະເສີດສຸດ
ຊຶ່ງເປັນອຸປັດຖາກຂອງພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໑໑] ຂ້ານ້ອຍເປັນທິດາຄົນທີ ໖ ຂອງພຣະອົງ
ມີນາມຜາກົດວ່າສຸທຳມາ ໄດ້ຟັງທຳຂອງພຣະຊິນນະເຈົ້າຜູ້ເລີດແລ້ວ
ພໍໃຈການບັນພະຊາ

[໑໑໒] ແຕ່ພຣະຊະນົກນາດບໍ່ໄດ້ຊົງອະນຸຍາດໃຫ້ຂ້ານ້ອຍທັງຫຼາຍບວດ
ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍບໍ່ຂີ້ຄ້ານ ຄອງເຮືອນຢູ່ ໒໐,໐໐໐ ປີ

**ພານະວານທີ ໓ ຈົບ**

[໑໑໓] ພຣະຣາດຊະກັນຍາທັງ ໗ ອົງ
ມີຄວາມສຸກ ປະພຶດພົມມະຈັນຕັ້ງແຕ່ຍັງເປັນກຸມາຣີ
ເພີດເພີນຍິນດີອຸປັດຖາກພຣະພຸດທະເຈົ້າ

[໑໑໔] ຄື (໑) ພຣະນາງສະມະນີ (໒) ພຣະນາງສະມະນະຄຸດຕາ
(໓) ພຣະນາງພິກຂຸນີ (໔) ພຣະນາງພິກຂຸທາສິກາ
(໕) ພຣະນາງທຳມາ (໖) ພຣະນາງສຸທຳມາ
(໗) ພຣະນາງສັງຄະທາສິກາ

[໑໑໕] (ພຣະຣາດຊະທິດາທັງ ໗ ນັ້ນໄດ້ກັບຊາດມາເກີດ)
ຄື ພຣະເຂມາເຖຣີ ໑ ພຣະອຸບົນວັນນາເຖຣີ ໑
ພຣະປະຕາຈາຣາເຖຣີ ໑ ພຣະກຸນທົນເກສີເຖຣີ ໑
ຂ້ານ້ອຍ ໑ ພຣະກີສາໂຄຕະມີເຖຣີ ໑
ແລະຄົນທີ ໗ ເປັນວິສາຂາມະຫາອຸປາສິກາ

[໑໑໖] ດ້ວຍກຳທັງຫຼາຍທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໑໗] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນເສດຖີ
ທີ່ມີຄວາມຈະເລີນມັ່ງຄັ່ງໃຫ້ສຳເລັດຄວາມປະສົງທັງປວງ
ໃນນະຄອນຣາດຊະຄືທີ່ປະເສີດສຸດ

[໑໑໘] ໃນເວລາທີ່ຂ້ານ້ອຍດຳຣົງຢູ່ໃນປະຖົມໄວເປັນສາວ
ປະກອບດ້ວຍຣູບສົມບັດ ໄດ້ໄປສູ່ຕະກູນອື່ນ (ແຕ່ງງານ)
ເປັນຜູ້ພຽບພ້ອມດ້ວຍຄວາມສຸກຢູ່

[໑໑໙] ສາມີຂອງຂ້ານ້ອຍເປັນຜູ້ມີຄວາມຮູ້ດີ
ເຂົ້າໄປເຝົ້າພຣະພຸດທະເຈົ້າຜູ້ເປັນບ່ອນເພິ່ງຂອງສັດໂລກ
ສະດັບພຣະທຳມະເທດສະໜາແລ້ວໄດ້ບັນລຸອະນາຄາມີຜົນ

[໑໒໐] ໃນຄັ້ງນັ້ນ ຂ້ານ້ອຍໄດ້ຂໍອະນຸຍາດສາມີນັ້ນແລ້ວ
ອອກບວດເປັນບັນພະຊິດ ໂດຍການບໍ່ດົນຫຼາຍກໍໄດ້ບັນລຸອະຣະຫັດຕະຜົນ

[໑໘໑] ໃນຄັ້ງນັ້ນ ສາມີຜູ້ເປັນອຸປາສົກນັ້ນໄດ້ເຂົ້າໄປຫາຂ້ານ້ອຍແລ້ວ
ໄດ້ຖາມບັນຫາທີ່ລະອຽດເລິກເຊິ່ງຫຼາຍ
ຂ້ານ້ອຍແກ້ບັນຫາທັງໝົດນັ້ນໄດ້

[໑໘໘] ພຣະຊິນນະເຈົ້າຊົງພໍພຣະທະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະດ້ວຍພຣະດຳຣັດວ່າ
ເຮົາບໍ່ໄດ້ເຫັນພິກຂຸນີອື່ນ ຜູ້ເປັນພຣະທຳມະກະຖຶກ
ເໝືອນພິກຂຸນີທຳມະທິນນານີ້ເລີຍ

[໑໘໙] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳ
ພິກຂຸນີທຳມະທິນນາວ່າເປັນນັກປາດ
ຂ້ານ້ອຍອັນພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳຊົງອະນຸເຄາະແລ້ວ
ຊື່ວ່າເປັນບັນດິດແນວນີ້

[໑໘໔] ພຣະສາດສະດາຂ້ານ້ອຍກໍປົນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍໄດ້ເຮັດແລ້ວ
ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໑໘໕] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໑໘໖] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າ

[໑໘໗] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ບໍລິສຸດແລ້ວ
ຂ້ານ້ອຍເຮັດອາສະວະທັງປວງໃຫ້ສິ້ນແລ້ວ
ເປັນຜູ້ບໍລິສຸດສະອາດປາສະຈາກມົນທິນ

[໑໘໘] ກິເລດທັງຫຼາຍຂ້ານ້ອຍກໍໄດ້ເຜົາແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ

ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໗] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໓໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະທຳມະທິນນາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ທຳມະທິນນາເຖຣີຍາປະທານທີ ໓ ຈົບ**

## ໔. ສະກຸລາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະສະກຸລາເຖຣີ

(ພຣະສະກຸລາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໓໑] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊຶ່ງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໓໒] ພຣະອົງເປັນຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ
ເປັນບຸຣຸດອາຊາໄນ
ຊຶ່ງປະຕິບັດເພື່ອເກື້ອກູນ ເພື່ອຄວາມສຸກ
ເພື່ອປະໂຫຍດແກ່ສັບພະສັດໃນໂລກພ້ອມທັງເທວະໂລກ

[໑໓໓] ພຣະຊິນນະເຈົ້າ ຜູ້ມີພຣະຍົດອັນເລີດ ມີພຣະສິຣິ
ມີພຣະກຽດຕິຄຸນຟຸ້ງຂະຈອນໄປ ອັນຊາວໂລກທັງປວງບູຊາແລ້ວ
ມີພຣະຄຸນຜາກົດໄປທົ່ວທິດ

[໑໓໔] ພຣະອົງຊຶ່ງຂ້າມພົ້ນຄວາມສົງໄສແລ້ວ

ຊົງລ່ວງຄວາມເຄືອບແຄງແລ້ວ
ມີຄວາມດຳຣິໃນພຣະຫະໄທບໍລິບູນເຕັມທີ່
ຊົງບັນລຸສຳໂພທິຍານທີ່ປະເສີດສຸດ

[໑໓໕] ພຣະອົງຊົງເປັນຜູ້ສູງສຸດແຫ່ງນະຣະ
ຊົງເຮັດມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
ຕັດບອກມັກທີ່ຍັງບໍ່ມີໃຜບອກ
ຊົງເຮັດທຳທີ່ຍັງບໍ່ເກີດໃຫ້ເກີດພ້ອມ

[໑໓໖] ພຣະອົງຊົງຮູ້ມັກ ຮູ້ແຈ້ງມັກ
ຕັດບອກມັກ ເປັນຜູ້ອົງອາດກວ່ານໍຣະຊົນ
ເປັນພຣະສາດສະດາຜູ້ສະຫຼາດໃນມັກ
ຜູ້ປະເສີດສູງສຸດ ໃນບັນດາສາຣະຖີທັງຫຼາຍ

[໑໓໗] ຜູ້ປະກອບດ້ວຍພຣະມະຫາກະລຸນາ ຜູ້ເປັນບ່ອນເພິ່ງ ຊົງເປັນຜູ້ນຳ
ຊົງສະແດງທຳຖອນເຫຼົ່າສັດຜູ້ຈົມຢູ່ໃນເປືອກຕົມຄືການ

[໑໓໘] ໃນຄັ້ງນັ້ນ ຂ້ານ້ອຍເກີດເປັນນາງກະສັດໃນນະຄອນຫົງສະວະດີ
ມີນາມວ່ານັນທະນາ
ມີຮູບງາມ ຣວຍຊັບ ເປັນຕາແພງ ມີສີຣິ

[໑໓໙] ເປັນທິດາຂອງມະຫາຣາດພຣະນາມວ່າອານັນທະ ງົດງາມຢ່າງຍິ່ງ
ເປັນພະຄິນີຕ່າງມານດາຂອງພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ

[໑໔໐] ຫ້ອມລ້ອມດ້ວຍຣາດຊະກັນຍາທັງຫຼາຍ
ປະດັບດ້ວຍເຄື່ອງອາພອນທຸກຊະນິດ
ເຂົ້າໄປເຝົ້າພຣະມະຫາວີຣະ ໄດ້ຟັງພຣະທຳມະເທດສະໜາ

[໑໔໑] ໃນຄັ້ງນັ້ນ ພຣະມະຫາວີຣະເຈົ້າພຣະອົງນັ້ນຜູ້ຊົງຮູ້ແຈ້ງໂລກ
ຊົງຕັ້ງພິກຂຸນີອົງໜຶ່ງ ຜູ້ມີທິບພະຈັກຂຸໄວ້ໃນເອຕະທັກຄະ
ໃນທ່າມກາງບໍລິສັດ ໔

[໑໔໒] ຂ້ານ້ອຍໄດ້ຟັງພຸດທະດຳຣັດນັ້ນແລ້ວ ມີຄວາມຍິນດີ
ຖວາຍທານແດ່ພຣະສາດສະດາແລະບູຊາພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ປາຖະໜາທິບພະຈັກຂຸ

[໑໔໓] ຈາກນັ້ນ ພຣະສາດສະດາໄດ້ຕັດກັບຂ້ານ້ອຍວ່າ
ນັນທະນາ ທ່ານຈັກໄດ້ຕຳແໜ່ງຕາມທີ່ທ່ານປາຖະໜາ
ຕຳແໜ່ງທີ່ທ່ານປາຖະໜານີ້ເປັນຜົນແຫ່ງປະທີບທຳແລະທານ

[໑໔໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໔໕] ສະຕີຜູ້ນີ້ຈັກມີນາມວ່າສະກຸລາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໑໔໖] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໑໔໗] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໑໔໘] ໃນຄັ້ງນັ້ນ ຂ້ານ້ອຍເປັນປະຣິພາຊິກາ ປະພຶດຢູ່ຜູ້ດຽວ
ທ່ຽວພິກຂາຈານໄດ້ພຽງນ້ຳມັນ

[໑໔໙] ມີໃຈຜ່ອງໃສ ໃຊ້ນ້ຳມັນນັ້ນໄຕ້ປະທີບບູຊາ
ພຣະເຈດີຊື່ວ່າສັບພະສັງວອນ
ຂອງພຣະພຸດທະເຈົ້າຜູ້ເລີດກວ່າເທວະດາແລະມະນຸດ

[໑໕໐] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາ

[໑໕໑] ຍ້ອນອຳນາດແຫ່ງກຳນັ້ນ ຂ້ານ້ອຍເກີດໃນບ່ອນໃດ ໆ
ປະທີບເປັນຈຳນວນຫຼາຍສ່ອງແສງສະຫວ່າງເພື່ອຂ້ານ້ອຍຜູ້ຢູ່ໃນບ່ອນນັ້ນ ໆ

[໑໕໔] ຂ້ານ້ອຍເຫັນສິ່ງທີ່ຢູ່ນອກຝາຫຼືສິ່ງທີ່ຢູ່ນອກກຳແພງ
ແລະສາມາດແນມຊອດພູເຂົາຕາມທີ່ປາຖະໜາ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໑໕໕] ຂ້ານ້ອຍມີຕາແຈ່ມໃສ ຮຸ່ງເຮື່ອງດ້ວຍຍົດ
ມີສັດທາ ມີປັນຍາ
ນີ້ເປັນຜົນແຫ່ງການຖວາຍປະທີບ

[໑໕໖] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນມະຫາສານ
ມີຊັບແລະເຂົ້າເປືອກຫຼວງຫຼາຍ
ທີ່ມະຫາຊົນຍິນດີ ພຣະຣາຊາຊົງບູຊາ (ຍ້ອງຍໍ)

[໑໕໗] ຂ້ານ້ອຍຜູ້ສົມບູນດ້ວຍອະໄວຍະວະທັງປວງ
ປະດັບດ້ວຍເຄື່ອງອາພອນທຸກຊະນິດ ຢືນຢູ່ທີ່ໜ້າຕ່າງ
ໄດ້ເຫັນພຣະສຸຄົດເຈົ້າສະເດັດເຂົ້າໄປໃນເມືອງ

[໑໕໘] ພຣະອົງຊົງຮຸ່ງເຮື່ອງດ້ວຍພຣະຍົດ
ອັນເທວະດາແລະມະນຸດສັກກາຣະບູຊາ
ຊົງສົມບູນດ້ວຍອະນຸພະຍັນຊະນະ
ປະດັບດ້ວຍພຣະລັກສະນະທັງຫຼາຍ

[໑໕໙] ຂ້ານ້ອຍມີຈິດເບີກບານ ມີໃຈຍິນດີ
ບວດແລ້ວບໍ່ດົນກໍໄດ້ບັນລຸອະຣະຫັດຕະຜົນ

[໑໕໙] ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ
ເປັນຜູ້ປະຕິບັດຕາມຄຳສັ່ງສອນຂອງພຣະສາດສະດາ

[໑໕໙] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ຂ້ານ້ອຍເຮັດອາສະວະທັງປວງໃຫ້ສິ້ນແລ້ວ
ເປັນຜູ້ບໍລິສຸດສະອາດປາສະຈາກມົນທິນ

[໑໖໐] ພຣະສາດສະດາຂ້ານ້ອຍກໍປົນນິບັດແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍໄດ້ເຮັດແລ້ວ

ພາຣະອັນໜັກຂ້ານ້ອຍກໍປົງລົງໄດ້ແລ້ວ
ຕັນຫາທີ່ນຳໄປສູ່ພົບຂ້ານ້ອຍກໍຖອນໄດ້ແລ້ວ

[໑໖໑] ກຸນລະບຸດກຸນລະທິດາອອກຈາກເຮືອນບວດເປັນບັນພະຊິດເພື່ອປະໂຫຍດໃດ
ປະໂຫຍດນັ້ນຄືຄວາມສິ້ນສັງໂຍດທັງປວງ
ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ

[໑໖໒] ຈາກນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ປະກອບດ້ວຍພຣະມະຫາກະລຸນາ
ຜູ້ສູງສຸດແຫ່ງນໍຣະຊົນ ຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະວ່າ
ສະກຸລາພິກຂຸນີເປັນຜູ້ເລີດກວ່າບັນດາພິກຂຸນີທັງຫຼາຍ
ຝ່າຍຜູ້ມີທິບພະຈັກຂຸ

[໑໖໓] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໖໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໖໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ພຣະສະກຸລາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສະກຸລາເຖຣີຍາປະທານທີ ໔ ຈົບ**

## ໕. ນັນທາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະນັນທາເຖຣີ

(ພຣະນັນທາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໖໖] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ

ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວ ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໑໕໗] ພຣະອົງເປັນຜູ້ຕັດສອນ ຊົງສະແດງທຳໃຫ້ສັດຮູ້ຊັດແຈ້ງໄດ້
ຊົງຊ່ອຍສັບພະສັດໃຫ້ຂ້າມພົ້ນ (ວັດຕະສົງສານ)
ຊົງສະຫຼາດໃນເທດສະໜາ ເປັນພຣະພຸດທະເຈົ້າ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໑໕໘] ພຣະອົງເປັນຜູ້ອະນຸເຄາະປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນເພື່ອສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນປັນຈະສີນ

[໑໕໙] ເມື່ອເປັນເຊັ່ນນີ້ ສາດສະໜາຈຶ່ງໝົດຄວາມອາກູນ (ໝົດສົງໃສ)
ວ່າງຈາກພວກເດຍຣະຖີແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍ
ຜູ້ໄດ້ວະສີ ຜູ້ຄົງທີ່

[໑໖໐] ພຣະມະຫາມຸນີພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໕໘ ສອກ
ມີພຣະສະຫວີວັນຮຸ່ງເຮືອງດັ່ງຄຳທີ່ລ້ຳຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໑໖໑] ໃນຄັ້ງນັ້ນ ສັດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະຊິນນະສີພຣະອົງນັ້ນ
ກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໑໖໒] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນເສດຖີ
ທີ່ມີຄວາມຮຸ່ງເຮືອງດ້ວຍຣັດຕະນະຕ່າງ ໆ ໃນນະຄອນຫົງສະວະດີ
ເປັນຜູ້ພຽບພ້ອມດ້ວຍຄວາມສຸກຫຼາຍ
[໑໖໓] ຂ້ານ້ອຍໄດ້ເຂົ້າເຝົ້າພຣະມະຫາວີຣະພຣະອົງນັ້ນແລ້ວ
ໄດ້ຟັງພຣະທຳມະເທດສະໜາອັນປະກາດເຖິງປະຣະມັດຖະທຳ
ທີ່ມ່ວນຢ່າງຈັບໃຈຍິ່ງ ເຊິ່ງເປັນອະມະຕະທຳ
[໑໖໔] ໃນຄັ້ງນັ້ນ ຂ້ານ້ອຍມີຄວາມເຫຼື້ອມໃສ
ໄດ້ທູນນິມົນພຣະພຸດທະຜູ້ເຈົ້າຊົງເປັນຜູ້ນຳສັດໂລກພ້ອມທັງພຣະສົງ
ໄດ້ຖວາຍມະຫາທານແດ່ພຣະອົງດ້ວຍມືຂອງຕົນ

[໑໗໕] ໄດ້ຊົບຫົວລົງໃກ້ພຣະວີຣະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ພ້ອມທັງພຣະສົງ
ປາຖະໜາຕຳແໜ່ງທີ່ເລີດກວ່າພິກຂຸນີທັງຫຼາຍຜູ້ເຂົ້າຊານ

[໑໗໖] ໃນຄັ້ງນັ້ນ ພຣະສຸຄົດເຈົ້າຜູ້ຝຶກນໍຣະຊົນທີ່ຍັງບໍ່ໄດ້ຝຶກ
ເປັນບ່ອນເພິ່ງຂອງໂລກທັງ ໓ ຊົງເປັນໃຫຍ່
ຊົງປະຄອງນໍຣະຊົນໄວ້ເປັນຢ່າງດີຕັດພະຍາກອນວ່າ
ທ່ານຈັກໄດ້ຕຳແໜ່ງທີ່ທ່ານປາຖະໜາໄວ້ດີແລ້ວນັ້ນ

[໑໗໗] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໑໗໘] ສະຕີຜູ້ນີ້ຈັກມີນາມຜາກົດວ່ານັນທາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໑໗໙] ໃນຄັ້ງນັ້ນ ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວເປັນຜູ້ມີຄວາມຍິນດີ
ມີຈິດປະກອບດ້ວຍເມດຕາ ບຳຣຸງພຣະຊິນນະເຈົ້າ ຜູ້ຊົງເປັນຜູ້ນຳວິເສດ
ດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ

[໑໘໐] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໑] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນຕາວະຕິງສານັ້ນແລ້ວ
ໄປເກີດໃນສະຫວັນຊັ້ນຍາມາ
ຈຸຕິຈາກສະຫວັນຊັ້ນຍາມານັ້ນແລ້ວໄປເກີດໃນສະຫວັນຊັ້ນດຸສິດ
ຈຸຕິຈາກສະຫວັນຊັ້ນດຸສິດນັ້ນແລ້ວໄປເກີດໃນສະຫວັນຊັ້ນນິມມານະຣະດີ
ຈຸຕິຈາກສະຫວັນຊັ້ນນິມມານະຣະດີນັ້ນແລ້ວ
ໄປເກີດໃນສະຫວັນຊັ້ນປະຣະນິມມິຕະວະສະວັດດີ
[໑໘໔] ຍ້ອນອຳນາດແຫ່ງກຳນັ້ນ ຂ້ານ້ອຍເກີດໃນພົບໃດ ໆ
ໃນພົບນັ້ນ ໆ ກໍໄດ້ເປັນພຣະມະເຫສີຂອງພຣະຣາຊາ

[໑໗໓] ຂ້ານ້ອຍຈຸຕິຈາກສະຫວັນຊັ້ນປະຣະນິມມິຕະວະສະວັດດີນັ້ນແລ້ວ
ມາເກີດໃນໝູ່ມະນຸດ ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ
ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າແຜ່ນດິນຫຼາຍຊາດ

[໑໗໔] ສະເຫວີຍສົມບັດທັງໃນເທວະໂລກແລະມະນຸດໂລກ
ມີຄວາມສຸກທຸກຊາດ
ວຽນວ່າຍຕາຍເກີດຢູ່ໃນກັບເປັນຈຳນວນຫຼາຍ

[໑໗໕] ເມື່ອເຖິງພົບສຸດທ້າຍ
ຂ້ານ້ອຍເກີດເປັນທິດາຂອງພຣະເຈົ້າສຸດໂທທະນະ
ໃນນະຄອນກະບິນລະພັດ ເປັນຜູ້ມີຮູບສົມບັດອັນໃຜ ໆ ດູຖູກບໍ່ໄດ້

[໑໗໖] ຣາດຊະສະກຸນນັ້ນເຫັນຂ້ານ້ອຍມີຮູບງາມດັ່ງດວງອາທິດ
ຈຶ່ງພາກັນຊື່ນຊົມ ຍ້ອນແນວນັ້ນ ຂ້ານ້ອຍຈຶ່ງມີນາມວ່ານັນທາ
ເປັນຜູ້ມີຮູບກາຍທີ່ງົດງາມປະເສີດ

[໑໗໗] ໃນນະຄອນກະບິນລະພັດ ເຊິ່ງເປັນຣາດຊະທານີທີ່ຣື່ນຣົມນັ້ນ
ນອກຈາກພຣະນາງຍະໂສທະຣາແລ້ວ
ຜາກົດວ່າຂ້ານ້ອຍມີຄວາມງາມກວ່າຍຸວະນາຣີທຸກຄົນ

[໑໗໘] ພຣະເຊດຖະພາດາກໍເປັນພຣະພຸດທະເຈົ້າຜູ້ເລີດໃນໂລກ ໓
ພຣະພາດາອົງສຸດທ້າຍກໍເປັນພຣະອະຣະຫັນ
ຂ້ານ້ອຍເປັນສະຕີພຽງຜູ້ດຽວທີ່ເປັນຄະລິຫັດ
ພຣະມານດາຊົງຕັກເຕືອນວ່າ

[໑໗໙] ລູກຮັກ ເຈົ້າເກີດໃນສາກະຍະສະກຸນ
ເປັນນ້ອງຂອງພຣະພຸດທະເຈົ້າ ເມື່ອເວັ້ນຈາກນັນທະກຸມານແລ້ວ
ຈັກໄດ້ປະໂຫຍດອັນໃດໃນວັງນໍ

[໑໘໐] ຄວາມເປັນໜຸ່ມສາວ ກໍມີຄວາມແກ່ເປັນບ່ອນສຸດ
ຮູບບັນດິດຮູ້ກັນວ່າເປັນຂອງບໍ່ສະອາດ
ແມ່ນເຫັນວ່າບໍ່ມີໂຣກແຕ່ກໍມີໂຣກເປັນບ່ອນສຸດ
ຊີວິດມີຄວາມຕາຍເປັນບ່ອນສຸດ

[໑໘໑] ຮູບທີ່ສວຍງາມຂອງທ່ານເປັນທີ່ໜ້າຕ້ອງການດັ່ງດວງຈັນ
ຈູງໃຈໃຫ້ນິຍົມ ອະລັງການດ້ວຍເຄື່ອງປະດັບທັງຫຼາຍ
ຄ້າຍກຳນົດຮູ້ໄດ້ດ້ວຍສິຣິ

[໑໘໒] ເໝືອນເປັນສິ່ງສຳຄັນຂອງຊາວໂລກທີ່ເຂົາບູຊາກັນ
ເປັນບ່ອນດຶງດູດແຫ່ງດວງຕາ
ເປັນບ່ອນກໍ່ເກີດການສັນເສີນບຸນ
ເປັນທີ່ຊື່ນຊົມແຫ່ງວົງໂອກາກາກະຣາດ

[໑໘໓] ໂດຍການບໍ່ດົນຫຼາຍ ຄວາມແກ່ກໍຈັກມາຄອບງຳລູກຮັກ
ຜູ້ມີຮູບອັນໃຜ ໆ ບໍ່ນິນທາ ຈົ່ງລະພຣະຣາດຊະຖານແລະຮູບກາຍ
ທີ່ບັນດິດຕຳໜິແລ້ວປະພຶດທຳເທີ້ນ

[໑໘໔] ຂ້ານ້ອຍຜູ້ຍັງໂລເລໃນຮູບທີ່ຍັງເປັນສາວ
ໄດ້ຟັງພຣະດຳຣັດຂອງພຣະມານດາແລ້ວ
ກໍອອກບວດເປັນບັນພະຊິດແຕ່ພຽງກາຍ
ບໍ່ໄດ້ອອກບວດດ້ວຍຈິດໃຈເລີຍ

[໑໘໕] ຂ້ານ້ອຍຣະລຶກເຖິງຕົນດ້ວຍຄວາມຂວນຂວາຍກວດກາຢ່າງຫຼາຍ
ພຣະມານດາຕັດຕັກເຕືອນເພື່ອໃຫ້ປະພຶດທຳ
ແຕ່ຂ້ານ້ອຍບໍ່ໄດ້ສົນໃຈຂວນຂວາຍໃນການປະພຶດທຳນັ້ນເລີຍ

[໑໘໖] ໃນຄັ້ງນັ້ນ ພຣະຊິນນະເຈົ້າຜູ້ປະກອບດ້ວຍພຣະມະຫາກະລຸນາ
ທອດພຣະເນດເຫັນຂ້ານ້ອຍຜູ້ມີຜິວໜ້າດັ່ງດອກບົວ
ເພື່ອໃຫ້ຂ້ານ້ອຍເກີດຄວາມເບື່ອໜ່າຍໃນຮູບກາຍ

[໑໘໗] ຈຶ່ງຊົງເນຣະມິດຍິງສາວຄົນໜຶ່ງມີຄວາມງາມເປັນຕາເບິ່ງ ໜ້າພໍໃຈຍິ່ງ
ເຊິ່ງມີຮູບງາມກວ່າຂ້ານ້ອຍ ໃຫ້ຢູ່ໃນຄອງແຫ່ງຈັກຊຸຂອງຂ້ານ້ອຍ
ດ້ວຍອານຸພາບຂອງພຣະອົງ

[໑໘໘] ຂ້ານ້ອຍອັດສະຈັນໃຈ ຍ້ອນເຫັນຍິງສາວທີ່ມີເຮືອນຮ່າງ
ອັນໜ້າອັດສະຈັນແທ້ນໍ ກໍຄິດວ່າ ເຮົາເຫັນຍິງສາວມະນຸດດັ່ງກ່າວ
ນີ້ມີຜົນດີແລະເປັນລາບແກ່ດວງຕາຂອງເຮົາ

[໑໙໙] ເຊີນເທີ້ນນາງຄົນງາມ ນາງຈົ່ງບອກສິ່ງທີ່ຕ້ອງປະສົງແກ່ເຮົາ
ເຮົາຈະໃຫ້ ນາງຈົ່ງບອກນາມແລະ
ໂຄດຂອງນາງແກ່ເຮົາ ຖ້ານາງພໍໃຈ

[໔໐໐] ນາງຄົນງາມ ເວລານີ້ຍັງບໍ່ແມ່ນເວລາແຫ່ງບັນຫາ
ນາງຈົ່ງນອນໝູນຕັກເຮົາ
ທັບຊ້ອນຮ່າງກາຍເຮົາຫຼັບຕາລົງເທີ້ນ

[໔໐໑] ຈາກນັ້ນນາງຄົນແສນງາມກໍນອນພາດຫົວເທິງຕັກຂ້ານ້ອຍ
ຂອງແຂງຂະໜາດໃຫຍ່ຕົກໃສ່ໜ້າຜາກຂອງນາງ

[໔໐໒] ພ້ອມກັບຂອງແຂງທີ່ຕົກມາກະທົບ ຮອຍໄປໄຂ່ກໍຜາກົດຂຶ້ນ
ແລະທັງໜອງທັງເລືອດກໍໄຫຼອອກຈາກບາດແຜທີ່ແຕກ

[໔໐໓] ແມ່ນໃບຫນ້າທີ່ແຕກແລ້ວນັ້ນ ກໍມີກິ່ນຄ້າຍຊາກສົບເນົ່າໄຊຍອອກມາ
ທົ່ວທັງສະຣີຣະພອງຂຶ້ນຂຽວຄ້ຳ

[໔໐໔] ນາງຄົນງາມມີສັນພາງກາຍສັ່ນ ຫາຍໃຈຫອບຖີ່ ໆ
ສະເຫວີຍທຸກຂອງຕົນຢູ່ ລຳພັນຢ່າງໜ້າສົງສານ

[໔໐໕] ຂ້ານ້ອຍເປັນທຸກຍ້ອນທຸກນັ້ນ ຕ້ອງເວທະນາຈົມຢູ່ໃນທຸກໃຫຍ່
ຂໍພຣະອົງຊົງເປັນບ່ອນເພິ່ງ ນາງເປັນເພື່ອນຂອງຂ້ານ້ອຍ

[໔໐໖] ໃບໜ້າທີ່ງາມຂອງນາງຫາຍໄປໃສແລ້ວ
ດັງທີ່ໂດ່ງຄົມງາມຂອງນາງຫາຍໄປໃສແລ້ວ
ຮີມຝີປາກທີ່ແດງງາມເໝືອນສີໝາກພັບສຸກຂອງນາງຫາຍໄປໃສແລ້ວ
ວົງໜ້າທີ່ງົດງາມຂອງນາງຫາຍໄປໃສແລ້ວ

[໔໐໗] ວັນນະທີ່ຮຸ່ງເຮືອງດັ່ງດວງຈັນຫາຍໄປໃສແລ້ວ
ແລະລຳຄໍທີ່ຄ້າຍປ້ອງຄຳຂອງນາງຫາຍໄປໃສແລ້ວ
ໃບຫູຂອງນາງດັ່ງພວງດອກໄມ້ກໍໝົດສີສັນວັນນະໄປສາແລ້ວ

[໔໐໘] ນົມທີ່ກົມກ້ຽງຄ້າຍດອກບົວຕູມທັງຄູ່ຂອງນາງແຕກແລ້ວ
ມີກິ່ນເໝັນຟຸ້ງໄປຄ້າຍຊາກສົບເນົ່າ

[໔໐໙] ນາງມີແອວຄອດກົມ ມີສະໂພກຜຶ່ງຜາຍ
ນຳສິ່ງຊົ່ວຮ້າຍມາໃຫ້ເໝືອນຊຽງ
ເຕັມໄປດ້ວຍສິ່ງທີ່ບໍ່ສະອາດ ໂອນໍ ຮູບບໍ່ທ່ຽງ

[໔໑໐] ອະໄວຍະວະທີ່ເກີດຈາກສະຣີຣະທັງໝົດມີກິ່ນເໝັນເນົ່າ
ເປັນຕາຍ້ານ ໜ້າກຽດຊັງເໝືອນຊາກສົບໃນປ່າຊ້າ
ທີ່ພວກຄົນຈົ້າພາກັນຍິນດີ

[໔໑໑] ໃນຄັ້ງນັ້ນ ພຣະພາດາຂອງຂ້ານ້ອຍຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ປະກອບດ້ວຍພຣະມະຫາກະລຸນາ
ທອດພຣະເນດເຫັນຂ້ານ້ອຍຜູ້ມີຈິດສັງເວດ
ຈຶ່ງໄດ້ຕັດຄາຖາເຫຼົ່ານີ້ວ່າ

[໔໑໒] ນັນທາ ທ່ານຈົ່ງເບິ່ງຮູບກາຍທີ່ກະສັບກະສ່າຍ
ເປື່ອຍເນົ່າດັ່ງຊາກສົບ ຈົ່ງອົບຮົມຈິດໃຫ້ຕັ້ງໝັ້ນດ້ວຍດີ
ມີອາລົມດຽວ ດ້ວຍອາລົມອັນບໍ່ງາມ

[໔໑໓] ຮູບນີ້ເປັນສັນໃດ ຮູບຂອງທ່ານນັ້ນກໍເປັນສັນນັ້ນ
ຮູບຂອງທ່ານນັ້ນເປັນສັນໃດ ຮູບນີ້ກໍເປັນສັນນັ້ນ
ມີກິ່ນເໝັນເນົ່າຟຸ້ງໄປ
ທີ່ພວກຄົນຈົ້າພາກັນຍິນດີຍິ່ງ

[໔໑໔] ທ່ານບໍ່ຂີ້ຄ້ານ
ພິຈາລະນາເຫັນຮູບເປັນແນວນັ້ນ ທັງກາງຄືນກາງເວັນ
ແຕ່ນັ້ນຈະເບື່ອໜ່າຍຍິ່ງເຫັນດ້ວຍປັນຍາຂອງຕົນຢູ່

[໔໑໕] ຈາກນັ້ນ ຂ້ານ້ອຍມີຈິດສະລົດ ຍ້ອນຟັງຄາຖາສຸພາສິດ
ຢືນຢູ່ ໃນບ່ອນນັ້ນ ກໍໄດ້ບັນລຸອະຣະຫັດຕະຜົນ

[໔໑໖] ຂ້ານ້ອຍເຂົ້າຊານຕະຫຼອດເວລາ ບໍ່ວ່າຈະນັ່ງຢູ່ໃນບ່ອນໃດ ໆ
ພຣະຊິນນະເຈົ້າຊົງພໍພຣະທະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍໄວ້ໃນເອຕະທັກຄະ

[໔໑໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ

ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑໗] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ๓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໑໘] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

ໄດ້ຮູ້ວ່າ ພຣະນັນທາພິກຂຸນີຜູ້ເປັນຊົນນະບົດກັນລະຍານີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ນັນທາເຖຣີຍາປະທານທີ ໕ ຈົບ**

## ໖. ໂສນາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະໂສນາເຖຣີ

(ພຣະໂສນາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໐] ພຣະຊິນນະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໔໑] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນເສດຖີ ເປັນຜູ້ມີຄວາມສຸກ
ຖືກປະດັບຕົກແຕ່ງ ເປັນທີ່ຮັກ
ເຂົ້າໄປເຝົ້າພຣະມຸນີຜູ້ປະເສີດພຣະອົງນັ້ນ
ໄດ້ຟັງພຣະດຳຣັດທີ່ມ່ວນ

[໔໔໒] ພຣະຊິນນະເຈົ້າຊົງສັນເສີນພິກຂຸນີອົງໜຶ່ງວ່າ
ເປັນຜູ້ເລີດກວ່າພິກຂຸນີທັງຫຼາຍຜູ້ຜາຣົບຄວາມພຽນ
ຂ້ານ້ອຍໄດ້ຟັງພຸດທະດຳຣັດນັ້ນແລ້ວເປັນຜູ້ມີຄວາມຍິນດີ
ທຳສັກກາຣະພຣະສາດສະດາ

[໔໘໓] ຂ້ານ້ອຍໄຫວ້ພຣະສຳມາສຳພຸດທະເຈົ້າແລ້ວ
ໄດ້ປາຖະໜາຕຳແໜ່ງນັ້ນໃນການນັ້ນ
ພຣະມະຫາວີຣະພຸດທະເຈົ້າຊົງອະນຸໂມທະນາວ່າ
ຄວາມຕັ້ງໃຈປາຖະໜາຂອງທ່ານຈັກສຳເລັດ

[໔໘໔] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໘໕] ສະຕີຜູ້ນີ້ຈັກມີນາມຜາກົດວ່າໂສນາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໔໘໖] ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ມີຄວາມຍິນດີ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າ ຜູ້ຊົງເປັນຜູ້ນຳວິເສດ
ດ້ວຍປັດໄຈທັງຫຼາຍໂດຍປະການເຊັ່ນນັ້ນຈົນຕະຫຼອດຊີວິດ

[໔໘໗] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໘໘] ບັດນີ້ ເປັນພົບສຸດທ້າຍ
ຂ້ານ້ອຍເກີດໃນຕະກູນເສດຖີ ຈະເລີນມັ່ງຄັ່ງດ້ວຍຊັບຫຼາຍ
ໃນນະຄອນສາວັດຖີທີ່ປະເສີດ

[໔໘໙] ເມື່ອຂ້ານ້ອຍຈະເລີນໄວເປັນສາວແລ້ວ
ໄດ້ໄປສູ່ຕະກູນສາມີ ເກີດບຸດຊາຍ ໑໐ ຄົນ
ລ້ວນແຕ່ມີຮູບງາມຢ່າງຍິ່ງ

[໔໙໐] ບຸດທຸກຄົນນັ້ນດຳຣົງຢູ່ໃນຄວາມສຸກ
ຕິດຕາຕຶງໃຈຜູ້ຄົນໃຫ້ນິຍົມ ແມ່ນແຕ່ພວກສັດຕູກໍພໍໃຈ
ສຳລັບຂ້ານ້ອຍບໍ່ຕ້ອງເວົ້າຮອດ ພວກເຂົາເປັນທີ່ຮັກ

[໔໓໑] ໃນຄັ້ງນັ້ນ ໂດຍທີ່ຂ້ານ້ອຍບໍ່ຕ້ອງການ
ສາມີຂ້ານ້ອຍພ້ອມດ້ວຍບຸດທັງ ໑໐ ຄົນ
ພາກັນໄປບວດໃນສາດສະໜາຂອງພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບ

[໔໓໒] ໃນການນັ້ນ ຂ້ານ້ອຍຢູ່ແຕ່ຜູ້ດຽວຄິດວ່າ ພໍແລ້ວດ້ວຍຊີວິດຂອງເຮົາ
ຜູ້ພັດພາກຈາກສາມີແລະບຸດ ເປັນຄົນແກ່ ໜ້າສົງສານ

[໔໓໓] ແມ່ນເຮົາກໍຈັກໄປສູ່ອາຮາມທີ່ສາມີເຮົາໄປເຖິງ
ເມື່ອຄິດແນວນີ້ແລ້ວຈຶ່ງບວດເປັນບັນພະຊິດ

[໔໓໔] ໃນຄັ້ງນັ້ນ ພວກພິກຂຸນີປ່ອຍຂ້ານ້ອຍໄວ້ໃນສຳນັກແຕ່ພຽງຜູ້ດຽວ
ສັ່ງຂ້ານ້ອຍວ່າ ທ່ານຈົ່ງຕົ້ມນ້ຳໄວ້ ແລ້ວກໍພາກັນຈາກໄປ

[໔໓໕] ຂະນະນັ້ນ ຂ້ານ້ອຍນຳນ້ຳມາແລ້ວ ໃສ່ລົງໄປໃນໝໍ້
ຕັ້ງເທິງກ້ອນເສົ້າແລ້ວນັ່ງ ຈາກນັ້ນກໍຕັ້ງຈິດໃຫ້ເປັນສະມາທິ

[໔໓໖] ໄດ້ພິຈາລະນາເຫັນຂັນໂດຍຄວາມເປັນຂອງບໍ່ທ່ຽງ
ເປັນທຸກ ແລະເປັນອະນັດຕາ
ທຳອາສະວະທັງປວງໃຫ້ສິ້ນໄປແລ້ວ ກໍໄດ້ບັນລຸອະຣະຫັດຕະຜົນ

[໔໓໗] ເມື່ອພິກຂຸນີກັບມາໄດ້ຖາມເຖິງນ້ຳຮ້ອນ
ຂ້ານ້ອຍອະທິຖານເຕໂຊທາດໃຫ້ນ້ຳຮ້ອນທັນທີ

[໔໓໘] ພິກຂຸນີເຫຼົ່ານັ້ນພາກັນອັດສະຈັນໃຈ
ໄປຂາບທູນພຣະຊິນນະເຈົ້າຜູ້ປະເສີດໃຫ້ຊົງຮູ້ເລື້ອງນັ້ນ
ພຣະຜູ້ເປັນນາຖະຊົງສະດັບເລື້ອງນັ້ນແລ້ວຊົງຊື່ນຊົມ ໄດ້ຕັດຄາຖານີ້ວ່າ

[໔໓໙] ແທ້ຈິງ ບຸກຄົນຜູ້ຜາຣົບຄວາມພຽນຢ່າງໜັກ
ມີຊີວິດຢູ່ພຽງວັນດຽວ ກໍປະເສີດກວ່າຄົນຂີ້ຄ້ານ
ແລະລະຖິ້ມຄວາມພຽນມີຊີວິດຢູ່ຕັ້ງ ໑໐໐ ປີ

[໔໔໐] ພຣະມະຫາວີຣະເຈົ້າ ຂ້ານ້ອຍໃຫ້ຊົງພໍພຣະທະໄທແລ້ວ
ຍ້ອນການປະຕິບັດດີ ພຣະມະຫາມຸນີພຣະອົງນັ້ນ
ຕັດສັນເສີນຂ້ານ້ອຍວ່າເປັນຜູ້ເລີດກວ່າບັນດາພິກຂຸນີທັງຫຼາຍ
ຜູ້ຜາຣົບຄວາມພຽນ

[໔໔໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔໒] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໔໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະໂສນາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ໂສນາເຖຣີຍາປະທານທີ ໖ ຈົບ**

## ໗. ພັດທະກາປິລານີເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະພັດທະກາປິລານີເຖຣີ

(ພຣະພັດທະກາປິລານີເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໔] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໔໔໕] ໃນຄັ້ງນັ້ນ ຂ້ານ້ອຍເປັນພະຣິຍາຂອງເສດຖີຊື່ວ່າ ວິເທຫະ
ມີຣັດຕະນະຫຼາຍ ໃນນະຄອນຫົງສະວະດີ

[໔໔໖] ບາງເວລາເສດຖີນັ້ນພ້ອມດ້ວຍຊົນທີ່ເປັນບໍລິວານ
ເຂົ້າເຝົ້າພຣະພຸດທະເຈົ້າຜູ້ເປັນດັ່ງສຸຣິຍະເທບພະບຸດ
ໄດ້ຟັງພຣະທຳອັນນຳຄວາມສິ້ນທຸກທັງປວງມາໃຫ້
ຂອງພຣະພຸດທະເຈົ້າ

[໔໔໗] ພຣະອົງຊົງເປັນຜູ້ນຳປະກາດສັນເສີນພິກຂຸ
ຜູ້ເປັນສາວິກາອົງໜຶ່ງວ່າ ເປັນຜູ້ເລີດກວ່າບັນດາພິກຂຸທັງຫຼາຍຜູ້ຖືທຸດົງ
ຂ້ານ້ອຍໄດ້ຟັງແລ້ວ ໄດ້ຖວາຍທານແດ່ ພຣະພຸດທະເຈົ້າ
ຜູ້ຄົງທີ່ຕະຫຼອດ ໗ ວັນ

[໔໔໘] ແລ້ວຊົບຫົວລົງແທບພຣະຍຸຄົນບາດປາຖະໜາຕຳແໜ່ງນັ້ນ
ກໍໃນຄັ້ງນັ້ນ ພຣະພຸດທະເຈົ້າຜູ້ປະເສີດແຫ່ງນະຣະ
ເມື່ອຈະຊົງໃຫ້ບໍລິສັດຮ່າເຣິງ

[໔໔໙] ໄດ້ຕັດຄາຖາເຫຼົ່ານີ້ ເພື່ອຊົງອະນຸເຄາະເສດຖີວ່າ
ດູກ່ອນບຸດ ທ່ານຈັກໄດ້ຕຳແໜ່ງທີ່ທ່ານປາຖະໜາ
ຈົ່ງເປັນຜູ້ເຢັນໃຈເທີ້ນ

[໔໕໐] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າ ໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດສະກຸນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໔໕໑] ທ່ານຈັກມີນາມຜາກົດວ່າກັດສະປະ ຕາມໂຄດ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ຈັກເປັນສາວົກຂອງພຣະສາດສະດາພຣະອົງນັ້ນ

[໔໕໒] ເສດຖີໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ມີຄວາມຍິນດີ ມີຈິດປະກອບດ້ວຍເມດຕາ
ບຳຣຸງພຣະຊິນນະເຈົ້າ ຜູ້ຊົງເປັນຜູ້ນຳວິເສດ
ດ້ວຍປັດໄຈທັງຫຼາຍຈົນຕະຫຼອດຊີວິດ

[໔໕໓] ພຣະອົງຊົງປະກາດສາດສະໜາໃຫ້ຮຸ່ງເຮືອງແລ້ວ
ອົບຣົມເດຍຣະຖີຜູ້ຫຼອກລວງໄດ້ແລ້ວ
ຊົງແນະນຳເວໄນຍະສັດ (ຄືຜູ້ທີ່ຄວນແນະນຳໄດ້)
ພຣະອົງພ້ອມທັງພຣະສາວົກປະຣິນິບພານແລ້ວ

[໔໕໔] ເມື່ອພຣະພຸດທະເຈົ້າຊົງເປັນຜູ້ເລີດໃນໂລກນັ້ນປະຣິນິບພານແລ້ວ
ເພື່ອຈະບູຊາພຣະສາດສະດາ ເສດຖີນັ້ນ
ຈຶ່ງເຊີນຍາດຕິພີ່ນ້ອງ ແລະມິດມາປະຊຸມແລ້ວ
ພ້ອມກັບຍາດຕິພີ່ນ້ອງແລະມິດເຫຼົ່ານັ້ນໄດ້ສ້າງ

[໘໕໕] ພຣະສະຖູບຣັດຕະນະສູງໄດ້ ໗ ໂຍດ
ເຊິ່ງມີຄວາມຮຸ່ງເຮືອງເໝືອນດວງອາທິດ
ແລະເໝືອນຕົ້ນພະຍາໄມ້ສາລະທີ່ກຳລັງມີດອກບານສະພັ່ງ

[໘໕໖] ຂ້ານ້ອຍໄດ້ໃຫ້ຊ່າງ ໗ ຄົນໃຊ້ຣັດຕະນະ ໗ ປະການ
ເຮັດໄຫ ໗໐໐,໐໐໐ ໜ່ວຍ ເຊິ່ງສ່ອງແສງເໝືອນໄຟໄໝ້ໄມ້ອໍ້

[໘໕໗] ຂ້ານ້ອຍບັນຈຸນ້ຳມັນຫອມຈົນເຕັມ
ໄຕ້ປະທີບໄວ້ ພຣະສະຖູບນັ້ນ
ເພື່ອບູຊາພຣະສາດສະດາ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຜູ້ຊົງອະນຸເຄາະສັບພະສັດ

[໘໕໘] ຂ້ານ້ອຍໃຫ້ຊ່າງເຮັດໝໍ້ ໗໐໐,໐໐໐ ໃບ
ໃສ່ຣັດຕະນະຕ່າງ ໆ ຈົນເຕັມຄົບທຸກໃບ
ເພື່ອບູຊາພຣະສາດສະດາ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໘໕໙] ໃນລະຫວ່າງກາງໝໍ້ທຸກ ໘ ໃບ ຍົກພວງຄຳຕັ້ງປະດັບໄວ້
ເຊິ່ງມີຣັດສະໝີຮຸ່ງເຮືອງເໝືອນດວງອາທິດໃນສາຣະທະການ

[໘໖໐] ທີ່ປະຕູທັງ ໔ ມີເສົາຣະນຽດເຊິ່ງເຮັດດ້ວຍຣັດຕະນະ
ທັງມີແຜ່ນແປ້ນທີ່ເຮັດດ້ວຍຣັດຕະນະໜ້າຣື່ນຣົມ
ຍົກຂຶ້ນໄວ້ຍ່ອມງົດງາມ

[໘໖໑] ຄູແລະປ່ອງທີ່ສ້າງໄວ້ຢ່າງດີ ກໍຮຸ່ງເຮືອງ
ທຸງຣັດຕະນະທີ່ຍົກຂຶ້ນໄວ້ລ້ວນງາມໄພໂຣດ

[໘໖໒] ພຣະເຈດີທີ່ສ້າງດ້ວຍຣັດຕະນະນັ້ນ
ສ້າງໄວ້ຢ່າງສວຍງາມ ມີສີສຸກ
ມີຣັດສະໝີຮຸ່ງເຮືອງເໝືອນດວງຈັນແລະດວງອາທິດ

[໘໖໓] ພຣະສະຖູບຂອງຂ້ານ້ອຍມີ ໓ ດ້ານ ດ້ານໜຶ່ງບັນຈຸຫໍຣະດານ
ດ້ານໜຶ່ງບັນຈຸມະໂນສີລາ ດ້ານໜຶ່ງໃສ່ແຮ່ພູວງຈົນເຕັມ

[໘໖໔] ຂ້ານ້ອຍໃຫ້ຊ່າງເຮັດເຄື່ອງບູຊາທີ່ໜ້າຍິນດີເຊັ່ນນີ້ແລ້ວ
ໄດ້ຖວາຍທານແກ່ພຣະສົງຜູ້ກ່າວທຳທີ່ປະເສີດ
ຕາມກຳລັງ ຈົນຕະຫຼອດຊີວິດ

[໔໖໕] ຂ້ານ້ອຍກັບເສດຖີນັ້ນ ທຳບຸນເຫຼົ່ານັ້ນ
ໂດຍປະການທັງປວງຈົນຕະຫຼອດຊີວິດ
ແລ້ວໄດ້ໄປເກີດໃນສຸຄະຕິຮ່ວມກັນ

[໔໖໖] ສະເຫວີຍສົມບັດທັງຫຼາຍທັງໃນເທວະດາແລະໃນມະນຸດ
ວຽນວ່າຍຕາຍເກີດຮ່ວມກັບເສດຖີນັ້ນ
ພໍປານວ່າເງົາຕິດຕາມຕົວ

[໔໖໗] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າພຣະນາມວ່າວິປັດສີ ຊຶ່ງເປັນຜູ້ນຳ
ຊຶ່ງມີພຣະເນດງາມ ຊຶ່ງເຫັນແຈ້ງທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໔໖໘] ໃນຄັ້ງນັ້ນ ທ່ານເສດຖີໄດ້ເກີດເປັນພາມ ໃນນະຄອນພັນທຸມະດີ
ເປັນທີ່ຮູ້ຈັກກັນດີວ່າ ເປັນຜູ້ມັ່ງຄັ່ງດ້ວຍຄຸນນະທຳ
ແຕ່ເປັນຄົນຈົນແສນຈົນດ້ວຍຊັບ

[໔໖໙] ແມ່ນໃນຄັ້ງນັ້ນ ຂ້ານ້ອຍກໍເປັນພາມມະນີຂອງພາມນັ້ນ
ມີຄວາມຄິດຢ່າງດຽວກັນ
ບາງເທື່ອພາມນັ້ນເຂົ້າເຝົ້າພຣະມະຫາມຸນີ

[໔໗໐] ເຊິ່ງປະທັບນັ່ງຊົງສະແດງອະມະຕະບົດຢູ່ໃນໝູ່ຊົນ
ໄດ້ຟັງທຳແລ້ວເບີກບານໃຈ ໄດ້ຖວາຍຜ້າສາດົກຜືນໜຶ່ງ

[໔໗໑] ມີຜ້ານຸ່ງຜືນດຽວກັບໄປເຮືອນ ແລ້ວໄດ້ບອກຂ້ານ້ອຍວ່າ
ນາງ ເຊີນອະນຸໂມທະນາມະຫາບຸນເທີ້ນ
ຜ້າສາດົກອ້າຍໄດ້ຖວາຍພຣະພຸດທະເຈົ້າໄປແລ້ວ

[໔໗໔] ຂະນະນັ້ນ ຂ້ານ້ອຍມີຄວາມເອີບອີ່ມປະນົມມື
ອະນຸໂມທະນາວ່າ ຂ້າແຕ່ສາມີ ຜ້າສາດົກທ່ານຖວາຍດີແລ້ວ
ແດ່ພຣະພຸດທະເຈົ້າຜູ້ປະເສີດ ຜູ້ຄົງທີ່

[໔໗໕] ພາມມີຄວາມສຸກ ປະດັບຕົກແຕ່ງແລ້ວ
ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່
ໄດ້ເປັນພຣະເຈົ້າແຜ່ນດິນໃນນະຄອນພາຣານະສີທີ່ໜ້າອອນຊອນ

[໔໗໔] ໃນຄັ້ງນັ້ນ ຂ້ານ້ອຍເປັນພຣະມະເຫສີຜູ້ປະເສີດກວ່າພວກນາງສະໜົມ
ເປັນທີ່ໂປດປານຢ່າງຍິ່ງຂອງພຣະອົງ ຍ້ອນຄວາມຮັກທີ່ມີໃນການກ່ອນ

[໔໗໕] ພຣະເຈົ້າແຜ່ນດິນພຣະອົງນັ້ນ
ທອດພຣະເນດເຫັນພຣະປັດເຈກພຸດທະເຈົ້າ ໘ ພຣະອົງ
ຜູ້ທ່ຽວບິນທະບາດ ຊົງເບີກບານພຣະທະໄທ
ໄດ້ຖວາຍອາຫານບິນທະບາດທີ່ມີຣາຄາຫຼາຍ

[໔໗໖] ນິມົນພຣະປັດເຈກພຸດທະເຈົ້າທັງຫຼາຍໄວ້
ຊົງສ້າງຣັດຕະນະມົນດົບເຊິ່ງປະດັບດ້ວຍຄຳມີຣັດສະໝີຮຸ່ງເຮືອງ
ທີ່ພວກຊ່າງຄຳໄດ້ເຮັດໄວ້ເຊິ່ງສູງປະມານ ໑໐໐ ສອກ

[໔໗໗] ພຣະອົງຊົງເຫຼື້ອມໃສ ຮັບສັ່ງໃຫ້ນິມົນ
ພຣະປັດເຈກພຸດທະເຈົ້າທັງໝົດ
ແລ້ວໄດ້ຊົງຖວາຍທານແກ່ພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ
ເຊິ່ງເຂົ້າມາໃນພຣະຣາດນິເວດດ້ວຍພຣະຫັດຂອງພຣະອົງເອງ

[໔໗໘] ແມ່ນໃນຄັ້ງນັ້ນ ຂ້ານ້ອຍກໍໄດ້ຮ່ວມຖວາຍທານນັ້ນກັບພຣະເຈົ້າກາສີ
ໄດ້ເກີດໃນກາສີກະຄາມໃນນະຄອນພາຣານະສີອີກ

[໔໗໙] ພຣະເຈົ້າກາສີກັບພຣະພາດາມີຄວາມສຸກຢູ່ໃນຕະກູນກຸດຸມພີທີ່ຈະເລີນ
ຂ້ານ້ອຍເປັນພັນລະຍາຂອງອ້າຍຄົນໃຫຍ່ ປົນນິບັດສາມີຢ່າງດີ

[໔໘໐] ນ້ອງຊາຍຂອງສາມີຂ້ານ້ອຍ ເຫັນພຣະປັດເຈກພຸດທະເຈົ້າແລ້ວ
ນຳອາຫານຂອງອ້າຍໄປຖວາຍແກ່ພຣະປັດເຈກພຸດທະເຈົ້ານັ້ນ
ເມື່ອອ້າຍຜູ້ເຊິ່ງເປັນສາມີຂອງຂ້ານ້ອຍມາເຖິງແລ້ວ
ຈຶ່ງໄດ້ບອກ (ສາມີ) ໃຫ້ຮູ້

[໔໘໑] ເຂົາບໍ່ຍິນດີທານ ຈາກນັ້ນ ຂ້ານ້ອຍກໍໄດ້ໃຫ້ອາຫານ
ທີ່ຕົນນຳມາເພື່ອພຣະປັດເຈກພຸດທະເຈົ້າທັງຫຼາຍແກ່ສາມີນັ້ນ
ສາມີນັ້ນໄດ້ຖວາຍອາຫານນັ້ນ
ແກ່ພຣະປັດເຈກພຸດທະເຈົ້ານັ້ນອີກ

[໔໘໒] ຂະນະນັ້ນ ຂ້ານ້ອຍໂກດຈຶ່ງເທອາຫານ
ທີ່ຖວາຍແກ່ພຣະປັດເຈກພຸດທະເຈົ້ານັ້ນຖິ້ມສາ

ໄດ້ຖວາຍບາດທີ່ເຕັມດ້ວຍເປືອກຕົມ
ແກ່ພຣະປັດເຈກພຸດທະເຈົ້າຜູ້ຄົງທີ່ນັ້ນ

[໘໗໓] ໃນຄັ້ງນັ້ນ ຂ້ານ້ອຍເຫັນໃບໜ້າ ມີຈິດສະຫງົບຂອງທ່ານ
ທັງໃນການໃຫ້ ການຮັບ ການເຄົາລົບ
ແລະການປະທຸດສະຮ້າຍ ຈຶ່ງສະລົດໃຈຫຼາຍ

[໘໗໔] ຂ້ານ້ອຍມີຈິດເຫຼື້ອມໃສຮັບບາດມາແລ້ວ
ໃຊ້ນ້ຳຫອມຢ່າງດີລ້າງຈົນສະອາດ
ບັນຈຸນ້ຳຕານກ້ອນກັບປຸງຈົນເຕັມບາດແລ້ວຖວາຍຄືນ

[໘໗໕] ຂ້ານ້ອຍເກີດໃນພົບໃດ ໆ ກໍມີຮູບງາມ
ຍ້ອນຖວາຍທານ ແຕ່ມີກິ່ນຕົວເໝັນ
ຍ້ອນການຍ່ຳຍີທີ່ກະທຳບໍ່ສົມຄວນແກ່ພຣະປັດເຈກພຸດທະເຈົ້າ

[໘໗໖] ເມື່ອພຣະເຈດີຂອງພຣະທີຣະເຈົ້າພຣະນາມວ່າ ກັດສະປະ
ເຊິ່ງສາມີຂ້ານ້ອຍໄດ້ໃຫ້ສ້າງສຳເລັດແລ້ວ
ຂ້ານ້ອຍມີຄວາມຍິນດີ ໄດ້ຖວາຍແຜ່ນດິນຈີ່ຄຳຢ່າງດີອີກ

[໘໗໗] ຊຸບດິນຈີ່ນັ້ນໃຫ້ຊຸ່ມດ້ວຍຂອງຫອມ ໔ ຊະນິດ
ຈຶ່ງພົ້ນຈາກໂທດທີ່ມີກິ່ນຕົວເໝັນ
ກາຍເປັນຜູ້ມີຮູບຊົງສົມສ່ວນໄປທົ່ວສັນພາງກາຍ

[໘໗໗] ໃຫ້ຊ່າງໃຊ້ຣັດຕະນະ ໗ ປະການເຮັດຖາດ ໗,໐໐໐ ຖາດ
ເຕັມໄປດ້ວຍປຸງ ແລະໄສ້ເປັນພັນ ໆ

[໘໗໘] ໃສ່ໄປແລ້ວໄຕ້ປະທີບຕັ້ງໄວ້ ໗ ແຖວ
ເພື່ອບູຊາພຣະພຸດທະເຈົ້າ ຜູ້ເປັນບ່ອນເພິ່ງຂອງສັດໂລກ ດ້ວຍຈິດທີ່ເຫຼື້ອມໃສ

[໘໘໐] ແມ່ນໃນຄັ້ງນັ້ນ ຂ້ານ້ອຍມີສ່ວນໃນບຸນນັ້ນໂດຍພິເສດ
ສາມີຂອງຂ້ານ້ອຍໄປເກີດໃນແຄວັນກາສີ
ມີນາມຜາກົດວ່າສຸມິດຕະ

[໘໘໑] ຂ້ານ້ອຍເປັນພັນລະຍາຂອງເຂົາ
ມີຄວາມສຸກອັນເຂົາປະດັບຕົກແຕ່ງແລ້ວ ເປັນທີ່ຮັກ

ໃນຄັ້ງນັ້ນ ສາມີຂອງຂ້ານ້ອຍໄດ້ຖວາຍຜ້າໂພກຫົວເນື້ອດີ
ແກ່ພຣະປັດເຈກມຸນີ

[໔໗໔] ແມ່ນຂ້ານ້ອຍກໍມີສ່ວນແຫ່ງທານນັ້ນ ອະນຸໂມທະນາທານທີ່ປະເສີດ
ສາມີໄດ້ໄປເກີດໃນກຳເນີດແຫ່ງຊາວໂກລິຍະໃນແຄວັນກາສີອີກ

[໔໗໓] ໃນຄັ້ງນັ້ນ ສາມີຂອງຂ້ານ້ອຍພ້ອມດ້ວຍບຸດ
ຂອງຊາວໂກລິຍະ ໕໐໐ ຄົນ
ໄດ້ບຳຣຸງພຣະປັດເຈກພຸດທະເຈົ້າ ໕໐໐ ອົງ

[໔໗໔] ນິມົນພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ
ໃຫ້ຢູ່ຈຳພັນສາຕະຫຼອດໄຕຣມາດແລ້ວໄດ້ຖວາຍໄຕຣຈີວອນ
ໃນຄັ້ງນັ້ນ ຂ້ານ້ອຍເປັນພັນລະຍາຂອງເຂົາ
ເປັນຜູ້ປະຕິບັດກຸສົນກຳມະບົດ

[໔໗໕] ສາມີຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ເປັນພຣະຣາຊາພຣະນາມວ່າ ນັນທະ ມີຍົດຫຼາຍ
ແມ່ນຂ້ານ້ອຍກໍໄດ້ເປັນພຣະມະເຫສີຂອງພຣະອົງ
ເປັນຜູ້ມີສົມບັດໃຫ້ສຳເລັດສິ່ງທີ່ຕ້ອງປະສົງທຸກປະການ

[໔໗໖] ພຣະເຈົ້ານັນທະນັ້ນຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ເປັນພຣະເຈົ້າແຜ່ນດິນນາມວ່າພົມມະທັດ
ໃນຄັ້ງນັ້ນ ພຣະປັດເຈກມຸນີ ໕໐໐ ອົງຖ້ວນ
ຜູ້ເປັນພຣະໂອຣົດຂອງນາງປະທຸມະວະດີ

[໔໗໗] ຂ້ານ້ອຍໄດ້ບຳຣຸງຈົນຕະຫຼອດຊີວິດ
ນິມົນໃຫ້ພັກຢູ່ໃນພຣະຣາດຊະອຸທະຍານແລ້ວ
ແລະບູຊາພຣະປັດເຈກພຸດທະເຈົ້າເຫຼົ່ານັ້ນ ຜູ້ນິບພານແລ້ວ

[໔໗໘] ຂ້ານ້ອຍທັງ ໔ ໄດ້ສ້າງເຈດີຫຼາຍອົງ
ແລ້ວກໍພາກັນອອກບວດ ຈະເລີນອັບປະມັນຍາ
ແລ້ວໄດ້ໄປເກີດເທິງພົມມະໂລກ

[໔໗໙] ຈຸຕິຈາກພົມມະໂລກແລ້ວ ສາມີຂອງຂ້ານ້ອຍ
ເກີດເປັນພາມຊື່ປິບຜະລາຍະນະ

ທີ່ປະເທດມະຫາຕິດຖະ ມານດາຊື່ສຸມະນະເທວີ
ບິດາເປັນພາມໂກສິຍະໂຄດ

[໓໐໐] ຂ້ານ້ອຍເປັນທິດາຂອງກະບິນລະພາມ
ມານດາຊື່ສຸຈິມະຕີ ໃນມັດທະຊົນນະບົດ ນະຄອນສາກະລະທີ່ປະເສີດສຸດ

[໓໐໑] ບິດາຫຼໍ່ຮູບຂອງຂ້ານ້ອຍດ້ວຍຄຳແທ່ງແລ້ວ
ຖວາຍຮູບຫຼໍ່ແກ່ພຣະກັດສະປະທິຣະເຈົ້າ ຜູ້ເວັ້ນຈາກກາມທັງຫຼາຍ

[໓໐໒] ພາມປິບຜະລາຍະນະນັ້ນເປັນໜຸ່ມ
ໄປກວດເບິ່ງງານໃນການບາງເວລາ
ເຫັນສັດທັງຫຼາຍທີ່ຖືກກາເປັນຕົ້ນຈິກກິນແລ້ວ ເກີດຄວາມສະລົດໃຈ

[໓໐໓] ໃນຄັ້ງນັ້ນ ຂ້ານ້ອຍເຫັນເມັດງາທີ່ມີຢູ່ໃນເຮືອນ
ເຊິ່ງນຳອອກຕາກແດດ ເຫັນກາຈິກກິນໜອນຢູ່ ໄດ້ຄວາມສະລົດໃຈ

[໓໐໔] ໃນຄັ້ງນັ້ນ ພາມປິບຜະລາຍະນະຜູ້ເປັນປາດອອກບວດ
ຂ້ານ້ອຍກໍອອກບວດຕາມ ຢູ່ພໍ່າເພັງສິນພົດຂອງປະຣິພາຊິກາ ໕ ປີ

[໓໐໕] ເມື່ອພຣະນາງໂຄຕະມີຜູ້ບຳຣຸງລ້ຽງພຣະຊິນນະເຈົ້າຊົງບວດແລ້ວ
ຂ້ານ້ອຍໄດ້ເຂົ້າໄປຫາພຣະນາງ ແລະເປັນຜູ້ອັນພຣະພຸດທະເຈົ້າສັ່ງສອນແລ້ວ

[໓໐໖] ໂດຍການບໍ່ດົນຫຼາຍ ຂ້ານ້ອຍກໍໄດ້ບັນລຸອະຣະຫັດຕະຜົນ
ໂອນໍ ເຮົາມີພຣະມະຫາກັດສະປະເຖຣະຜູ້ມີສິຣິ ເປັນກັນລະຍານະມິດ

[໓໐໗] ພຣະກັດສະປະເຖຣະເປັນພຸດທະບຸດ
ເປັນທາຍາດຂອງພຣະພຸດທະເຈົ້າ
ມີຈິດຕັ້ງໝັ້ນດີ ຮູ້ປຸບເພນິວາສານຸດສະຕິຍານ
ເຫັນສະຫວັນແລະອະບາຍ

[໓໐໘] ອັນໜຶ່ງ ທ່ານເຖິງຄວາມສິ້ນຊາດ ເປັນມຸນີຢູ່ຈົບອະພິນຍາ
ດ້ວຍວິດຊາ ໓ ເຫຼົ່ານີ້ ຈຶ່ງໄດ້ຊື່ວ່າເປັນພາມຜູ້ມີວິດຊາ ໓

[໓໐໙] ພັດທະກາປິລານີກໍຄືກັນ
ໄດ້ວິດຊາ ໓ ລະມັດຈຸຣາດໄດ້ແລ້ວ ຊົງຮ່າງກາຍນີ້ເປັນບ່ອນສຸດ
ຊະນະມານພ້ອມທັງເສນາມານແລ້ວ

[໓໑໐] ຂ້ານ້ອຍທັງ ໔ ເຫັນໂທດໃນໂລກແລ້ວພາກັນບວດ
ເປັນຜູ້ສິ້ນອາສະວະ ຝຶກຕົນແລ້ວ ມີຄວາມເຢັນ ດັບສະນິດແລ້ວ

[໓໑໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໓໑໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

[໓໑໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ພຣະພັດທະກາປິລານີພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ພັດທະກາປິລານີເຖຣີຍາປະທານທີ ໗ ຈົບ**

## ໘. ຍະໂສທະຣາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະຍະໂສທະຣາເຖຣີ

(ພຣະຍະໂສທະຣາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໓໑໔] ສະໄໝໜຶ່ງ ເມື່ອພຣະຜູ້ຊົງເປັນຜູ້ນຳແຫ່ງນໍຣະຊົນ
ປະທັບຢູ່ໃນ ເງື້ອມພູເຂົາທີ່ປະເສີດແຫ່ງໜຶ່ງ
ໃກ້ນະຄອນຣາດຊະຄຶ ທີ່ໜ້າອອນຊອນ ມັ່ງຄັ່ງ

[໓໑໕] ຍະໂສທະຣາພິກຂຸນີ ຜູ້ຢູ່ໃນສຳນັກຂອງພິກຂຸນີ
ໃນນະຄອນທີ່ໜ້າອອນຊອນນັ້ນ ໄດ້ມີຄວາມຮຳເພິງແນວນີ້ວ່າ

[໓໑໖] ພຣະເຈົ້າສຸດໂທທະນະມະຫາຣາດ
ແລະພຣະນາງມະຫາປະຊາບໍດີໂຄຕະມີ
ພຣະມະຫາເຖຣະຜູ້ມີຊື່ສຽງ ແລະພຣະເຖຣີຜູ້ມີລິດຫຼາຍ

[໓໑໗] ທ່ານເຫຼົ່ານັ້ນ ລ້ວນນິບພານໄປແລ້ວ
ເໝືອນແປວປະທີບໝົດເຊື້ອດັບໄປສັນນັ້ນ
ເມື່ອພຣະໂລກກະນາດຍັງຊົງພະຊົນຢູ່
ແມ່ນເຮົາກໍຈັກບັນລຸເຖິງສິວະບົດ (ນິບພານ)

[໓໑໘] ຍະໂສທະຣາພິກຂຸນີນັ້ນເມື່ອຄິດແລ້ວ
ຈຶ່ງພິຈາລະນາເບິ່ງອາຍຸຂອງຕົນ ເຫັນອາຍຸສັງຂານ
ຈະເຖິງຄວາມສິ້ນໄປໃນວັນນັ້ນເອງ

[໓໑໙] ຈຶ່ງຖືບາດແລະຈີວອນອອກຈາກບ່ອນຢູ່ຂອງຕົນ
ມີພິກຂຸນີ ໑໐໐,໐໐໐ ອົງຫ້ອມລ້ອມ

[໓໒໐] ມີລິດຫຼາຍ ມີປັນຍາຫຼາຍ
ເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ ຖວາຍອະພິວາດ
ຢູ່ລາຍລັກສະນະກົງຈັກຂອງພຣະສາດສະດາແລ້ວ
ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນຄຳນີ້ວ່າ

[໓໒໑] ຂ້ານ້ອຍມີອາຍຸໄດ້ ໗໘ ປີ ລ່ວງເຂົ້າປັດສິມະໄວແລ້ວ
ເຖິງຄວາມເປັນຜູ້ມີກາຍຄ້ອມລົງໂດຍລຳດັບ ຂໍຂາບທູນລາພຣະມະຫາມຸນີ

[໓໒໒] ຂ້ານ້ອຍມີໄວແກ່ຫງ່ອມ ຊີວິດຂອງຂ້ານ້ອຍມີຢູ່ບໍ່ຫຼາຍ
ຂ້ານ້ອຍຈັກລະພຣະອົງໄປ ບ່ອນເພິ່ງຂອງຕົນຂ້ານ້ອຍເຮັດໄວ້ແລ້ວ

[໓໒໓] ໃນການປັດສິມມະໄວນີ້ ຄວາມຕາຍເຂົ້າມາປິດລ້ອມໄວ້ແລ້ວ
ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍຈັກນິບພານໃນຄືນວັນນີ້

[໓໒໔] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍບໍ່ມີຊາດ
ຊະຣາ ພະຍາທິ ແລະມໍລະນະ
ຂ້ານ້ອຍຈັກເຂົ້າເຖິງນິບພານທີ່ບໍ່ມີປັດໄຈປຸງແຕ່ງ
ເປັນບຸຣີທີ່ບໍ່ມີຄວາມແກ່ ຄວາມຕາຍ ແລະບໍ່ມີໄພ

[໓໒໕] ບໍລິສັດທີ່ເຂົ້າເຝົ້າພຣະອົງຢູ່ ຮູ້ຈັກຄວາມຜິດ
ຈຶ່ງຂໍປະທານໂທດ ສະເພາະພຣະພັກຂອງພຣະສາດສະດາ

[໓໒໖] ຂ້າແຕ່ພຣະມະຫາວີຣະ
ເມື່ອຂ້ານ້ອຍວຽນວ່າຍຕາຍເກີດຢູ່ໃນສົງສານ

ຫາກມີຄວາມຜິດພາດໃນພຣະອົງ ຂ້ານ້ອຍຂາບທູນວ່າ
ຂໍພຣະອົງໂຜດຍົກໂທດໃຫ້ແກ່ຂ້ານ້ອຍດ້ວຍເທີ້ນ

[໓໔໗] ພຣະຈອມມຸນີຊົງສະດັບຄຳຂອງພຣະຍະໂສທະຣາພິກຂຸນີແລ້ວ
ຈຶ່ງຕັດດັ່ງນີ້ວ່າ ເມື່ອທ່ານບອກວ່າຈະລານິບພານ
ຕະຖາຄົດຈະໄປວ່າອັນໃດທ່ານໃຫ້ຫຼາຍນໍ

[໓໔໘] ທ່ານຜູ້ປະຕິບັດຕາມຄຳສັ່ງສອນຂອງເຮົາ ຈົ່ງສະແດງລິດ
ແລະຕັດຄວາມສົງໄສຂອງບໍລິສັດທັງປວງໃນສາດສະໜາເທີ້ນ

[໓໔໙] ພຣະຍະໂສທະຣາພິກຂຸນີນັ້ນ
ໄດ້ຟັງພຣະດຳຣັດຂອງພຣະມຸນີພຣະອົງນັ້ນແລ້ວ
ຈຶ່ງໄຫວ້ພຣະຣາດມຸນີນັ້ນຂາບທູນຄຳນີ້ວ່າ

[໓໕໐] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍຊື່ຍະໂສທະຣາ
ເມື່ອສະໄໝທີ່ຍັງຊົງຄອງຄະຣາວາດວິໄສ
ເປັນປະຊາບໍດີຂອງພຣະອົງ
ເກີດໃນຕະກູນສາກະຍະ ຕັ້ງຢູ່ໃນອົງສົມບັດຂອງຜູ້ຍິງ

[໓໕໑] ຂ້າແຕ່ພຣະມະຫາວີຣະ ບັນດາຍິງສາວຈຳນວນ ໑໗໖,໐໐໐ ນາງ
ຂ້ານ້ອຍເປັນປະທານ ເປັນໃຫຍ່ກວ່າຍິງສາວທັງປວງ
ໃນພຣະຣາດຊະນິເວດຂອງພຣະອົງ

[໓໕໔] ສະຕີທັງໝົດປະກອບດ້ວຍຮູບສົມບັດແລະອາຈາຣະສົມບັດ
ແມ່ນດຳຣົງຢູ່ໃນໄວສາວ ກໍຢຳເກງຂ້ານ້ອຍທຸກເມື່ອ
ເໝືອນມະນຸດທັງຫຼາຍຢຳເກງເທວະດາ

[໓໕໓] ຍິງສາວເຫຼົ່ານັ້ນມີນາງກະສັດ ໑,໐໐໐ ນາງ ເປັນປະທານ
ຮ່ວມສຸກຮ່ວມທຸກກັນຢູ່ໃນພຣະຣາດຊະນິເວດຂອງສາກະຍະບຸດ
ປານດັ່ງວ່າເທວະດາທັງຫຼາຍໃນສວນນັນທະວັນ

[໓໕໔] ເວັ້ນພຣະອົງຜູ້ຊົງເປັນຜູ້ນຳສັດໂລກແລ້ວ
ເຫຼົ່າສະຕີຜູ້ສະຫຼາດລ່ວງເລີຍກາມະພູມ ຕັ້ງຢູ່ໃນຮູບພູມ
ມີຮູບເຊັ່ນກັບຂ້ານ້ອຍບໍ່ມີ

[໓໓໕] ພຣະຍະໂສທະຣາເຖຣີ ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ສະແດງລິດຖວາຍພຣະສາດສະດາ ແລ້ວສະແດງລິດຫຼາຍຢ່າງ

[໓໓໖] ຄື ສະແດງກາຍເທົ່າພູເຂົາຈັກກະວານ ຫົວເທົ່າອຸດຕະຣະກຸຣຸດະວີບ
ທະວີບທັງ ໔ ໃຫ້ເປັນປີກທັງ ໔ ຂ້າງ
ຊົມພູທະວີບໃຫ້ເປັນລຳຕົວ

[໓໓໗] ສະແດງມະຫາສະມຸດດ້ານທິດໃຕ້ໃຫ້ເປັນກຳຫາງ
ກິ່ງໄມ້ຕ່າງ ໆ ໃຫ້ເປັນຂົນປີກ
ດວງຈັນແລະດວງອາທິດໃຫ້ເປັນໃນຕາ
ພູເຂົາພຣະສຸເມຣຸໃຫ້ເປັນຫອນ

[໓໓໘] ສະແດງພູເຂົາຈັກກະວານໃຫ້ເປັນຈະງອຍປາກ ນຳຕົ້ນຫວ້າ
ພ້ອມທັງຮາກເຂົ້າມາໃກ້ແລ້ວໄຫວ້ແລະພັດວີພຣະຜູ້ເປັນຜູ້ນຳສັດໂລກ

[໓໓໙] ສະແດງເປັນຊ້າງ ມ້າ ພູເຂົາ ທະເລ ດວງຈັນ
ດວງອາທິດ ພູເຂົາພຣະສຸເມຣຸແລະເປັນທ້າວສັກກະຈອມເທບ

[໓໔໐] ຂາບທູນວ່າ ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍຊື່ວ່າຍະໂສທະຣາ ຂໍຂາບພຣະຍຸຄົນບາດ
ແລ້ວໃຊ້ດອກບົວບານປິດ ໑,໐໐໐ ໂລກກະທາດໄວ້

[໓໔໑] ເນຣະມິດເປັນພົມສະແດງສູນຍະຕະທຳຢູ່
ຂາບທູນວ່າ ຂ້າແຕ່ພຣະວີຣະ ຜູ້ມີພຣະຈັກຂຸ
ຂ້ານ້ອຍຊື່ວ່າຍະໂສທະຣາ ຂໍຂາບພຣະຍຸຄົນບາດ

[໓໔໒] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະມີຄວາມຊຳນານໃນເຈໂຕປະຣິຍະຍານ

[໓໔໓] ຮູ້ບຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີ

[໓໔໔] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ

ແລະປະຕິພານະປະຕິສຳພິທາຍານຂອງຂ້ານ້ອຍ
ເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໓໔໕] ຄວາມພ້ອມພຽງແຫ່ງພຣະພຸດທະເຈົ້າທັງຫຼາຍ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ ພຣະອົງຊົງສະແດງແລ້ວ
ຂ້າແຕ່ພຣະມະຫາມຸນີ ອະທິການເປັນຈຳນວນຫຼາຍຂອງຂ້ານ້ອຍ
ເພື່ອປະໂຫຍດແກ່ພຣະອົງ

[໓໔໖] ຂ້າແຕ່ພຣະມະຫາວີຣະຜູ້ເປັນພຣະມຸນີ
ຂໍພຣະອົງເພິ່ງຫວນຣະລຶກເຖິງກຸສົນກຳເກົ່າຂອງຂ້ານ້ອຍເທີ້ນ
ຂ້ານ້ອຍສັ່ງສົມບຸນໄວ້ກໍເພື່ອປະໂຫຍດແກ່ພຣະອົງ

[໓໔໗] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍງົດເວັ້ນອະນາຈານໃນສະຖານທີ່ບໍ່ສົມຄວນ
ແມ່ນຊີວິດກໍຍອມສະລະໄດ້ເພື່ອປະໂຫຍດແກ່ພຣະອົງ

[໓໔໘] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍ
ເພື່ອຕ້ອງການໃຫ້ເປັນພັນລະຍາຂອງຜູ້ອື່ນຫຼາຍພັນໂກດກັບ
ກໍເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໓໔໙] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍ
ເພື່ອອຸດໜຸນຜູ້ອື່ນຫຼາຍພັນໂກດກັບ
ກໍເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໓໕໐] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍ
ເພື່ອປະໂຫຍດເປັນອາຫານຫຼາຍພັນໂກດກັບ
ກໍເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໓໕໑] ຂ້ານ້ອຍຍອມສະລະຊີວິດຫຼາຍພັນໂກດກັບ
ດ້ວຍຄິດວ່າຈັກກະທຳຄວາມພົ້ນໄພ
ຈຶ່ງຍອມສະລະຊີວິດຕົນເອງ

[໓໕໔] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍບໍ່ເຄີຍຫວງເຄື່ອງປະດັບ

ມີຜ້ານານາຊະນິດທີ່ຕິດຕົວຢູ່ແລະພັນທະຂອງຍິງ
ເພື່ອປະໂຫຍດແກ່ພຣະອົງ

[໓໘໓] ຂ້າແຕ່ພຣະມະຫາມຸນີ ຊັບ ເຂົ້າເປືອກ
ປັດໄຈເຄື່ອງບໍລິຂານ ບ້ານ ເຮືອນ ນິຄົມ ໄຮ່ ນາ
ບຸດ ທິດາ ຂ້ານ້ອຍກໍບໍລິຈາກແລ້ວ

[໓໘໔] ຊ້າງ ມ້າ ງົວ ທາສີ ນາງບຳເລີ ທັງຫຼາຍນັບບໍ່ຖ້ວນ
ຂ້ານ້ອຍກໍບໍລິຈາກແລ້ວ ເພື່ອປະໂຫຍດແກ່ພຣະອົງ

[໓໘໘] ພຣະອົງຊົງປຶກສາຂ້ານ້ອຍວ່າ
ເຮົາຈະໃຫ້ທານແກ່ພວກຍາຈົກ
ເມື່ອພຣະອົງໃຫ້ທານທີ່ປະເສີດຢູ່ ຂ້ານ້ອຍກໍບໍ່ເຄີຍເສຍໃຈ

[໓໘໒] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍຍອມຮັບທຸກທໍລະມານ
ຢ່າງຫຼວງຫຼາຍຈົນນັບບໍ່ຖ້ວນ ໃນສົງສານເປັນອະເນກ
ກໍເພື່ອປະໂຫຍດແກ່ພຣະອົງ

[໓໘໗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍໄດ້ຮັບສຸກກໍອະນຸໂມທະນາ
ແລະເວລາທີ່ໄດ້ຮັບທຸກກໍບໍ່ເສຍໃຈ ເປັນຜູ້ຍິນດີແລ້ວທຸກຢ່າງ
ເພື່ອປະໂຫຍດແກ່ພຣະອົງ

[໓໘໘] ຂ້າແຕ່ພຣະມະຫາມຸນີ ພຣະສຳມາສຳພຸດທະເຈົ້າຊົງພ່ຳເພັງທຳ
ໂດຍມັກທີ່ສົມຄວນ ສະເຫວີຍສຸກແລະທຸກແລ້ວ
ໄດ້ບັນລຸພຣະໂພທິຍານ

[໓໘໙] ການທີ່ພຣະອົງ ແລະຂ້ານ້ອຍພົບພຣະສຳພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກພຣະນາມວ່າ ພົມເທບ
ແລະພຣະນາມວ່າໂຄດົມ ແລ້ວພົບພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນບ່ອນເພິ່ງສັດໂລກເຫຼົ່າອື່ນອີກກໍຫຼາຍ

[໓໒໐] ຂ້າແຕ່ພຣະມະຫາມຸນີ ອະທິການຂອງຂ້ານ້ອຍມີຫຼາຍ
ເພື່ອປະໂຫຍດແກ່ພຣະອົງ ຂ້ານ້ອຍເມື່ອສະແຫວງຫາພຸດທະທຳຢູ່
ກໍໄດ້ເປັນບາດປະຣິຈາຣິກາຂອງພຣະອົງ

[໓໖໑] ໃນ ໔ ອະສົງໄຂແລະອີກ ໑໐໐,໐໐໐ ກັບ
ພຣະມະຫາວີຣະພຣະນາມວ່າ ທີປັງກອນ
ຊຶ່ງເປັນຜູ້ນຳສັດໂລກ ສະເດັດອຸບັດຂຶ້ນແລ້ວ

[໓໖໒] ປະຊາຊົນໃນປັດຈັນຕະປະເທດ
ຕ່າງມີໃຈຍິນດີທູນນິມົນພຣະຕະຖາຄົດເຈົ້າແລ້ວ
ຊ່ອຍກັນແຜ້ວຖາງທາງເຊິ່ງເປັນທີ່ສະເດັດພຸດທະດຳເນີນ

[໓໖໓] ໃນຄັ້ງນັ້ນ ພຣະອົງເກີດເປັນພາມນາມວ່າສຸເມທະ
ກຳລັງຕົກແຕ່ງຫົນທາງເພື່ອພຣະສຸຄົດເຈົ້າ
ຜູ້ຊົງເຫັນທຳທັງປວງກຳລັງສະເດັດມາ

[໓໖໔] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເກີດໃນຕະກູນພາມ
ເປັນຍິງສາວມີນາມວ່າສຸມິດຕາ ເຂົ້າໄປສູ່ສະມາຄົມ
[໓໖໕] ຖືດອກອຸບົນໄປ ໗ ກຳເພື່ອບູຊາພຣະສາດສະດາ
ໄດ້ເຫັນພຣະອົງຜູ້ເປັນລືສີຜູ້ປະເສີດ ໃນທ່າມກາງໝູ່ຊົນ
[໓໖໖] ໃນຄັ້ງນັ້ນ ຂ້ານ້ອຍໄດ້ເຫັນພຣະອົງຜູ້ໜ້າພໍໃຈ
ຜູ້ມີຄວາມອີດູປະທັບຢູ່ດົນນານ ດຳເນີນຜ່ານໄປ
ຈຶ່ງໄດ້ສຳຄັນວ່າຊີວິດຂອງເຮົາມີຜົນ
[໓໖໗] ໃນຄັ້ງນັ້ນ ຂ້ານ້ອຍເຫັນຄວາມພະຍາຍາມທີ່ມີຜົນ
ຂອງພຣະອົງຜູ້ເປັນພຣະລືສີ ດ້ວຍບຸບພະກຳ
ແມ່ນຈິດຂອງຂ້ານ້ອຍກໍເຫຼື້ອມໃສໃນພຣະສຳມາສຳພຸດທະເຈົ້າ
[໓໖໘] ຂ້ານ້ອຍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໃນພຣະສຳມາສຳພຸດທະເຈົ້າຜູ້ເປັນພຣະລືສີ ມີພຣະທະໄທເບີກບານ
ຂ້າແຕ່ພຣະລືສີ ຂ້ານ້ອຍບໍ່ໄດ້ເຫັນສິ່ງອື່ນທີ່ຄວນຖວາຍ
ຈຶ່ງຖວາຍດອກອຸບົນແດ່ພຣະອົງ ພ້ອມກັບກ່າວວ່າ

[໓໖໙] ຂ້າແຕ່ພຣະລືສີ ດອກອຸບົນ ໕ ກຳ ຈົ່ງເປັນຂອງທ່ານ
ດອກອຸບົນ ໓ ກຳ ຈົ່ງເປັນຂອງຂ້ານ້ອຍ
ຂ້າແຕ່ພຣະລືສີ ດອກບົວ ໓ ກຳຂອງຂ້ານ້ອຍ
ກັບດອກບົວ ໕ ກຳຂອງທ່ານນັ້ນ ຈົ່ງມີຜົນສະເໝີກັນ
ເພື່ອປະໂຫຍດແກ່ພຣະໂພທິຍານຂອງທ່ານ

**ພານະວານທີ ໔ ຈົບ**

[໓໗໐] ສຸເມທະມະຫາລືສີຮັບດອກອຸບົນແລ້ວ
ບູຊາພຣະພຸດທະເຈົ້າພຣະນາມວ່າ ທີປັງກອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ມີບໍລິວານຍົດຫຼວງຫຼາຍ
ສະເດັດດຳເນີນມາທ່າມກາງຊຸມຊົນ ເພື່ອປະໂຫຍດແກ່ພຣະໂພທິຍານ

[໓໗໑] ພຣະມະຫາມຸນີຜູ້ມີຄວາມພຽນຫຼາຍພຣະນາມວ່າ ວີຣະທີປັງກອນ
ທອດພຣະເນດເຫັນພຣະລືສີ ຜູ້ມີໃຈສູງແລ້ວ
ຈຶ່ງຕັດພະຍາກອນໃນທ່າມກາງຊຸມຊົນ

[໓໗໔] ຂ້າແຕ່ພຣະມະຫາມຸນີ ໃນກັບທີຫາປະມານບໍ່ໄດ້ນັບຈາກກັບນີ້ໄປ
ພຣະມະຫາມຸນີພຣະນາມວ່າທີປັງກອນ ຊົງພະຍາກອນກຳ
ຄືຄວາມເປັນຜູ້ຊື່ຕົງຂອງຂ້ານ້ອຍໄວ້ວ່າ

[໓໗໓] ທ່ານລືສີຜູ້ເປັນໃຫຍ່ ອຸປາສິກາຜູ້ນີ້ຈັກເປັນຜູ້ມີຈິດສະເໝີກັນ
ມີການກະທຳສະເໝີກັນ ມີປົກກະຕິເຮັດຮ່ວມກັນ
ຈັກເປັນທີ່ໜ້າຮັກຍ້ອນການກະທຳເພື່ອປະໂຫຍດແກ່ທ່ານ

[໓໗໔] ຈັກເປັນຍິງສາວມີຮູບຮ່າງໜ້າເບິ່ງ ໜ້າຊົມ ໜ້າຮັກຍິ່ງ
ໜ້າພໍໃຈ ມີວາຈາອ່ອນຫວານ ມີລິດ
ເປັນທຳທາຍາດຂອງທ່ານ

[໓໗໕] ອຸປາສິກາຜູ້ນີ້ ຈັກຮັກສາກຸສົນທຳທັງຫຼາຍ
ເໝືອນພວກເຈົ້າຂອງຮັກສາເຄື່ອງສະມຸກ

[໓໗໖] ຈະອະນຸເຄາະທ່ານ ຈັກພ່ຳເພັງປາຣະມີເພື່ອທ່ານ
ລະກິເລດໄດ້ດັ່ງພະຍາຣາດຊະສີລະກົງແລ້ວ ຈັກບັນລຸພຣະໂພທິຍານ

[໓໗໗] ໃນກັບທີຫາປະມານບໍ່ໄດ້ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຊົງພະຍາກອນດຳຣັດໃດກັບຂ້ານ້ອຍ
ຂ້ານ້ອຍເມື່ອອະນຸໂມທະນາພຣະດຳຣັດນັ້ນ ເປັນຜູ້ເຮັດແນວນີ້

[໓໗໘] ຂ້ານ້ອຍເຮັດຈິດໃຫ້ເຫຼື້ອມໃສໃນກຸສົນກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ໄດ້ບັງເກີດໃນກຳເນີດເທວະດາແລະມະນຸດຫຼາຍພົບຫຼາຍຊາດ
[໓໗໙] ໄດ້ສະເຫວີຍສຸກແລະທຸກໃນເທວະດາແລະມະນຸດທັງຫຼາຍ
ເມື່ອເຖິງພົບສຸດທ້າຍໄດ້ເກີດໃນສາກະຍະຕະກູນ

[໓໗໐] ຂ້ານ້ອຍມີຮູບສົມບັດ ມີໂພຄະສົມບັດ ມີຍົດ ມີສິນ
ສົມບູນດ້ວຍອົງສົມບັດທັງປວງ
ແຕ່ນັ້ນໄດ້ຮັບຄວາມຢຳເກງຈາກເຈົ້ານາຍໃນຕະກູນທັງຫຼາຍ

[໓໗໑] ພຽບພ້ອມດ້ວຍໂລກກະທຳ ຄື ລາບ ສັກກາຣະ ສັນເສີນ
ມີຈິດບໍ່ປະກອບດ້ວຍທຸກ ຢູ່ຢ່າງຜູ້ບໍ່ມີໄພແຕ່ທີ່ໃດ ໆ

[໓໗໒] ສົມຈິງຕາມພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ
ຂ້າແຕ່ພຣະພຣະອົງຜູ້ແກ່ກ້າ ໃນຄັ້ງນັ້ນ
ພຣະອົງຊົງສະແດງອຸປະກາຣະຂອງນາຣີທັງຫຼາຍ
ໄວ້ພາຍໃນພຣະຣາດຊະມົນທຽນແລະໃນຂັດຕິຍະບຸຣີວ່າ

[໓໗໓] ນາຣີຜູ້ມີອຸປະກາຣະ ໑ ນາຣີຜູ້ເປັນເພື່ອນຮ່ວມສຸກຮ່ວມທຸກ ໑
ນາຣີຜູ້ແນະນຳປະໂຫຍດໃຫ້ ໑ ນາຣີຜູ້ທຳຄວາມອະນຸເຄາະໃຫ້ ໑

[໓໗໔] ພຣະພຸດທະເຈົ້າມີຈຳນວນເຖິງ ໕໐໐ ໂກດ ແລະ ໙໐໐ ໂກດ
ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ

[໓໗໕] ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງສະດັບອະທິການ
ຂອງຂ້ານ້ອຍມີຫຼາຍ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳຊັ້ນເລີດຂອງຊາວໂລກ
ມີຈຳນວນເຖິງ ໑,໑໐໐ ໂກດ

[໓໗໖] ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ ຂ້າແຕ່ມະຫາຣາດ
ຂໍພຣະອົງຈົ່ງສະດັບ
ອະທິການຂອງຂ້ານ້ອຍມີຫຼາຍ

[໓໗໗] ຂ້ານ້ອຍຈັດຖວາຍມະຫາທານແກ່ພຣະພຸດທະເຈົ້າ ໒,໐໐໐ ໂກດ
ແລະແກ່ພຣະພຸດທະເຈົ້າ ໓,໐໐໐ ໂກດ ຜູ້ເປັນເທບຍິ່ງກວ່າເທບ

[໓໗໘] ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງຊົງສະດັບອະທິການ
ຂອງຂ້ານ້ອຍມີຫຼາຍ
ພຣະພຸດທະເຈົ້າມີຈຳນວນເຖິງ ໔,໐໐໐ ໂກດ ແລະ ໕,໐໐໐ ໂກດ

[໓໗໙] ຂ້ານ້ອຍຈັດຖວາຍມະຫາທານແກ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງສະດັບ
ອະທິການຂອງຂ້ານ້ອຍມີຫຼາຍ

[໓໘໐] ພຣະພຸດທະເຈົ້າມີຈຳນວນເຖິງ ໖,໐໐໐ ໂກດ ແລະ ໗,໐໐໐ ໂກດ
ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ

[໓໘໑] ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງຊົງສະດັບອະທິການ
ຂອງຂ້ານ້ອຍມີຫຼາຍ
ພຣະພຸດທະເຈົ້າມີຈຳນວນເຖິງ ໙,໐໐໐ ໂກດ ແລະ ໘,໐໐໐ ໂກດ

[໓໘໒] ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ ຂ້າແຕ່ມະຫາຣາດ
ຂໍພຣະອົງຈົ່ງຊົງສະດັບອະທິການຂອງຂ້ານ້ອຍມີຫຼາຍ

[໓໘໓] ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳຊັ້ນເລີດຂອງຊາວໂລກ
ມີຈຳນວນເຖິງ ໑໐໐,໐໐໐ ໂກດ
ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ

[໓໘໔] ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງຊົງສະດັບອະທິການ
ຂອງຂ້ານ້ອຍມີຫຼາຍ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳອື່ນ ໆ ມີຈຳນວນເຖິງ ໘,໐໐໐ ໂກດ

[໓໘໕] ຂ້ານ້ອຍຈັດຖວາຍມະຫາທານແດ່ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບ ຂ້າແຕ່ມະຫາຣາດ
ຂໍພຣະອົງຈົ່ງຊົງສະດັບອະທິການຂອງຂ້ານ້ອຍມີຫຼາຍ

[໓໘໖] ພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຈຳນວນ ໑໐໐,໐໐໐ ໂກດ
໙໕ ອົງ ໙,໕໐໐ ໂກດ ໓໐ ໂກດ

[໓໘໗] ຂ້ານ້ອຍຈັດຖວາຍມະຫາທານແດ່ ພຣະພຸດທະເຈົ້າເຫຼົ່ານັ້ນ
ຜູ້ເປັນເທບຍິ່ງກວ່າເທບຂ້າແຕ່ມະຫາຣາດ
ຂໍພຣະອົງຈົ່ງຊົງສະດັບອະທິການຂອງຂ້ານ້ອຍມີຫຼາຍ

[໓໙໗] ຂ້ານ້ອຍຈັດຖວາຍມະຫາທານແກ່ພຣະປັດເຈກພຸດທະເຈົ້າ
ຜູ້ປາສະຈາກຣາຄະຈຳນວນ ໗໗໐໐ ໂກດ
ຂ້າແຕ່ ມະຫາຣາດ ຂໍພຣະອົງຈົ່ງຊົງສະດັບອະທິການຂອງຂ້ານ້ອຍມີຫຼາຍ

[໓໙໙] ຂ້ານ້ອຍຈັດຖວາຍມະຫາທານແກ່ພຣະຂີນາສົບ
ຜູ້ປາສະຈາກມົນທິນ ເຊິ່ງເປັນພຸດທະສາວົກຫຼາຍນັບບໍ່ຖ້ວນ
ຂ້າແຕ່ມະຫາຣາດ ຂໍພຣະອົງຈົ່ງຊົງສະດັບອະທິການຂ້ານ້ອຍມີຫຼາຍ

[໔໐໐] ຂ້ານ້ອຍຈັດຖວາຍມະຫາທານແດ່ ພຣະພຸດທະເຈົ້າ
ພຣະປັດເຈກພຸດທະເຈົ້າທັງຫຼາຍ ຜູ້ສັ່ງສົມໄວ້ດີແລ້ວໃນທຳທັງຫຼາຍ
ແລະແດ່ພຣະອະຣິຍະສົງທັງຫຼາຍຜູ້ປະພຶດພຣະສັດທຳທຸກເມື່ອ
ດ້ວຍປະການດັ່ງນີ້
ບຸກຄົນຜູ້ປະພຶດທຳຍ່ອມຢູ່ເປັນສຸກທັງໃນໂລກນີ້ແລະໂລກໜ້າ

[໔໐໑] ບຸກຄົນຄວນປະພຶດທຳໃຫ້ສຸດຈະຣິດ
ບໍ່ຄວນປະພຶດທຳໃຫ້ທຸດຈະຣິດ
ຍ້ອນບຸກຄົນຜູ້ປະພຶດທຳ
ຍ່ອມຢູ່ເປັນສຸກທັງໃນໂລກນີ້ແລະໂລກໜ້າ

[໔໐໒] ຂ້າພຣະອົງເບື່ອໜ່າຍໃນສັງສາຣະວັດ
ຈຶ່ງອອກບວດເປັນບັນພະຊິດພ້ອມດ້ວຍບໍລິວານ ໑,໐໐໐
ເມື່ອບວດແລ້ວກໍໝົດກັງວົນ

[໔໐໓] ຂ້ານ້ອຍລະການຄອງເຮືອນແລ້ວບວດເປັນບັນພະຊິດ
ຍັງບໍ່ທັນເຖິງເຄິ່ງເດືອນ ກໍໄດ້ບັນລຸສັດຈະ ໔

[໔໐໔] ຄົນເປັນຈຳນວນຫຼາຍນຳຈີວອນ ບິນທະບາດ ເສນາສະນະ
ແລະປັດໄຈເຂົ້າມາຖວາຍຫຼາຍບໍ່ແມ່ນໜ້ອຍ
ເໝືອນຄື້ນໃນມະຫາສະມຸດ

[໔໐໕] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐໖] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໐໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ

[໔໐໘] ຂ້ານ້ອຍໄດ້ຮັບທຸກຫຼາຍຢ່າງ ແລະສຸກສົມບັດຫຼາຍຢ່າງ
ເຖິງຄວາມເປັນຜູ້ບໍລິສຸດ ໄດ້ສົມບັດທຸກຢ່າງດ້ວຍປະການດັ່ງນີ້

[໔໐໙] ບຸກຄົນຜູ້ຖວາຍຕົນຂອງຕົນແດ່ພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເພື່ອຕ້ອງການບຸນກໍຍ່ອມພຽບພ້ອມດ້ວຍສະຫາຍ
ບັນລຸພຣະນິບພານເຊິ່ງເປັນອະສັງຂະຕະ

[໔໑໐] ກຳທັງທີ່ເປັນອະດີດ ປັດຈຸບັນແລະອະນາຄົດສິ້ນໄປແລ້ວ
ກຳທັງປວງຂອງຂ້ານ້ອຍສິ້ນໄປແລ້ວ
ຂ້າແຕ່ ພຣະອົງຜູ້ມີພຣະຈັກຂຸ ຂ້ານ້ອຍຂໍຂາບໄຫວ້ພຣະຍຸຄົນບາດ

ໄດ້ຮູ້ວ່າ ພຣະຍະໂສທະຣາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ດ້ວຍປະການດັ່ງນີ້

**ຍະໂສທະຣາເຖຣີຍາປະທານທີ ໘ ຈົບ**

## ໙. ທະສະສະຫັດສະເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະເຖຣີ ໑໐,໐໐໐ ອົງ

(ພຣະເຖຣີ ໑໐,໐໐໐ ອົງ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໑໑] ໃນ ໔ ອະສົງໄຂ ແລະອີກ ໑໐໐,໐໐໐ ກັບ
ພຣະຊິນນະເຈົ້າພຣະນາມວ່າ ທີປັງກອນ
ຊົງເປັນຜູ້ນຳສັດໂລກສະເດັດອຸບັດຂຶ້ນແລ້ວ

[໔໖໒] ພຣະມະຫາວີຣະທະເຈົ້າພຣະນາມວ່າທີປັງກອນຊົງເປັນຜູ້ນຳວິເສດ
ຊົງພະຍາກອນວ່າ ສຸເມທະບັນດິດກັບນາງສຸມິດຕາ
ມີສຸກແລະທຸກຮ່ວມກັນ

[໔໖໓] ເມື່ອສະເດັດທ່ຽວໄປສູ່ມະນຸດໂລກ ພ້ອມທັງເທວະໂລກ
ທອດພຣະເນດເຫັນມະນຸດພ້ອມທັງເທວະດາ
ໄດ້ສະເດັດເຂົ້າມາສູ່ສະມາຄົມ
ໃນເມື່ອເຮົາກ່າວສັນເສີນສຸເມທະບັນດິດແລະນາງສຸມິດຕານັ້ນຢູ່

[໔໖໔] ສຸເມທະບັນດິດຈະເປັນສາມີຂອງຂ້ານ້ອຍທັງປວງ
ໃນການພົບກັນໃນອະນາຄົດແຫ່ງຂ້ານ້ອຍທັງຫຼາຍ
ຂ້ານ້ອຍຜູ້ເປັນພັນລະຍາທັງໝົດຂອງທ່ານ ເປັນຄົນໜ້າຮັກ ເວົ້າຈາມ່ວນ

[໔໖໕] ຂ້າແຕ່ພຣະມະຫາມຸນີ ທານະໄມ ສີລະໄມ
ພາວະນາໄມທັງປວງຂ້ານ້ອຍທັງຫຼາຍພ່ຳເພັງດີແລ້ວ
ຂ້ານ້ອຍທັງຫຼາຍເສຍສະລະວັດຖຸທານທຸກຢ່າງນີ້ຕະຫຼອດການດົນນານ

[໔໖໖] ຄື ຂອງຫອມ ລະບຽບດອກໄມ້ ເຄື່ອງລູບທາ
ແລະປະທີບທີ່ສຳເລັດດ້ວຍຣັດຕະນະ ຂ້າແຕ່ພຣະມະຫາມຸນີ
ສິ່ງທີ່ປາຖະໜາທຸກຢ່າງ ຂ້ານ້ອຍທັງຫຼາຍກໍສະລະແລ້ວ

[໔໖໗] ຂ້າແຕ່ພຣະມະຫາມຸນີ ກໍຢ່າງອື່ນ
ແລະວັດຖຸເຄື່ອງບໍຣິໂພກທີ່ເປັນຂອງມະນຸດ
ຂ້ານ້ອຍທັງຫຼາຍເຮັດໄວ້ແລ້ວທຸກຢ່າງ
ຂ້ານ້ອຍທັງຫຼາຍໄດ້ສະລະຕະຫຼອດການດົນນານ

[໔໖໘] ຍ້ອນບຸນເປັນຈຳນວນຫຼາຍ ຂ້ານ້ອຍທັງຫຼາຍໄດ້ຄວາມເປັນໃຫຍ່
ວຽນວ່າຍຕາຍເກີດໃນພົບນ້ອຍພົບໃຫຍ່
ຕະຫຼອດສົງສານເປັນອະເນກຊາດໄດ້ທຳໄວ້ແລ້ວ

[໔໖໙] ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍທັງຫຼາຍເກີດໃນຕະກູນຕ່າງ ໆ
ໃນນິເວດຂອງສາກະຍະບຸດ ມີວັນນະງົດງາມໜ້າຕ້ອງການ
ເໝືອນນາງອັບປະສອນ

[໔໗໐] ຂ້ານ້ອຍທັງຫຼາຍມີລາບຢ່າງເລີດ ໄດ້ຮັບຍົດແລ້ວ
ໄດ້ຮັບການບູຊາສັກກາຣະຈາກຊົນທັງປວງ
ໄດ້ເຂົ້າແລະນ້ຳ ໄດ້ຮັບການຍອມຮັບນັບຖືທຸກເມື່ອ

[໔໔໑] ຂ້ານ້ອຍທັງຫຼາຍລະການຄອງເຮືອນບວດເປັນບັນພະຊິດ
ຍັງບໍ່ທັນເຖິງເຄິ່ງເດືອນກໍໄດ້ບັນລຸຄວາມດັບທຸກທັງໝົດ

[໔໔໔] ຂ້ານ້ອຍທັງຫຼາຍໄດ້ເຂົ້າ ນໍ້າ ໄດ້ຮັບສັກກາຣະບູຊາດ້ວຍຜ້າ
ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ
ທີ່ເຫຼົ່າຊົນນໍາເຂົ້າມາຖວາຍ

[໔໔໓] ກິເລດທັງຫຼາຍຂ້ານ້ອຍທັງຫຼາຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍທັງຫຼາຍກໍຖອນໄດ້ແລ້ວ
ຂ້ານ້ອຍທັງຫຼາຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໔໔] ການທີ່ຂ້ານ້ອຍມາໃນສໍານັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍທັງຫຼາຍໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທໍາສໍາເລັດແລ້ວ

[໔໔໕] ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍທັງຫຼາຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ
ຂ້ານ້ອຍທັງຫຼາຍກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ

ຮູ້ວ່າ ພິກຂຸນີ ໑໐,໐໐໐ ອົງມີພຣະຍະໂສທະຣາເຖຣີເປັນປະທານໄດ້ພາສິດຄາຖາເຫຼົ່ານີ້ ສະເພາະພຣະພັກພຣະຜູ້ມີພຣະພາກ ດ້ວຍປະການດັ່ງນີ້

**ທະສະສະຫັດສະເຖຣີຍາປະທານທີ ໗ ຈົບ**

## ໑໐. ອັດຖາຣະສະເຖຣີສະຫັດສານະມະປະທານ

### ປະຫວັດໃນອະດີດຊາດຂອງພຣະເຖຣີ ໑໘,໐໐໐ ອົງ

(ພຣະເຖຣີ ໑໘,໐໐໐ ອົງ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໔໖] ພິກຂຸນີທີ່ສົມພົບໃນສາກະຍະຕະກູນ ໑໘,໐໐໐ ອົງ
ມີພຣະຍະໂສທະຣາເຖຣີເປັນປະທານ
ເຂົ້າເຝົ້າພຣະສໍາມາສໍາພຸດທະເຈົ້າ

[໔໔໗] ພິກຂຸນີທັງ ໑໘,໐໐໐ ອົງ ລ້ວນເປັນຜູ້ມີລິດຫຼາຍ
ຂາບພຣະຍຸຄົນບາດຂອງພຣະມຸນີແລ້ວ
ໄດ້ຂາບທູນຕາມກຳລັງວ່າ

[໔໔໘] ຂ້າແຕ່ພຣະມະຫາມຸນີ ຜູ້ຊົງເປັນຜູ້ນຳ
ຂ້ານ້ອຍທັງຫຼາຍມີຊາດ ຊະຣາ ພະຍາທິ ແລະມໍລະນະສິ້ນແລ້ວ
ເຖິງອະມະຕະບົດທີ່ສະງົບ ບໍ່ມີອາສະວະ

[໔໔໙] ຂ້າແຕ່ພຣະມະຫາມຸນີຜູ້ຊົງເປັນຜູ້ນຳວິເສດ
ໃນການກ່ອນຄວາມພັ້ງພາດຂອງຂ້ານ້ອຍແມ່ນທັງໝົດກໍມີຢູ່
ຊົນທັງຫຼາຍຍ່ອມຮູ້ວ່າເປັນຄວາມຜິດ
ຂໍພຣະອົງໂຜດຍົກໂທດແກ່ຂ້ານ້ອຍທັງຫຼາຍດ້ວຍເທີ້ນ

[໔໕໐] (ພຣະບໍຣົມສາດສະດາຕັດວ່າ) ທ່ານທັງຫຼາຍ
ຜູ້ປະຕິບັດຕາມຄຳສັ່ງສອນຂອງເຮົາ
ຈົ່ງສະແດງລິດແລະຕັດຄວາມສົງໄສຂອງບໍລິສັດທັງມວນເທົ່າທີ່ມີຢູ່ເທີ້ນ

[໔໕໑] ຂ້າແຕ່ພຣະມະຫາວີຣະ
ພຣະຍະໂສທະຣາເຖຣີເປັນຍິງສາວທີ່ໜ້າພໍພຣະທະໄທໜ້າຮັກໜ້າຊົມ
ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍທັງປວງເປັນປະຊາບໍດີຂອງພຣະອົງ
ເມື່ອສະໄໝທີ່ຍັງຄອງຄະຣາວາດວິໄສ

[໔໕໔] ຂ້າແຕ່ພຣະມະຫາວີຣະ ບັນດາຍິງສາວຈຳນວນ ໑໙໖,໐໐໐ ນາງ
ຂ້ານ້ອຍທັງຫຼາຍເປັນປະທານ ເປັນໃຫຍ່ກວ່າຍິງສາວທັງປວງ
ໃນພຣະຣາດຊະນິເວດຂອງພຣະອົງ

[໔໕໓] ສະຕີທັງໝົດປະກອບດ້ວຍຮູບສົມບັດ ແລະອາຈາຣະສົມບັດ
ດຳຣົງຢູ່ໃນໄວສາວ ເວົ້າຈາມ່ວນ
ຢຳເກງຕໍ່ຂ້ານ້ອຍທັງຫຼາຍ
ເໝືອນພວກມະນຸດຢຳເກງເທວະດາ

[໔໕໔] ໃນການນັ້ນ ຂ້ານ້ອຍຈຳນວນ ໑໘,໐໐໐ ນາງ
ທັງໝົດ ເປັນຜູ້ສົມພົບໃນສາກະຍະຕະກູນ
ພຣະຍະໂສທະຣາເຖຣີແລະຂ້ານ້ອຍ ໑,໐໐໐ ນາງ ເປັນປະທານ ເປັນໃຫຍ່

[໔໓໕] ຂ້າແຕ່ພຣະມະຫາມຸນີ ບັນດາຂ້ານ້ອຍ ໑,໐໐໐ ນາງ
ຂ້ານ້ອຍທັງຫຼາຍຜູ້ກ້າວລ່ວງການທາດ
ດຳຣົງຢູ່ໃນຮູບທາດ ມີຮູບ (ມີລິດ) ບໍ່ຄືກັນ

[໔໓໖] ພຣະເຖຣີເຫຼົ່ານັ້ນ ຖວາຍອະພິວາດພຣະສຳມາສຳພຸດທະເຈົ້າແລ້ວ
ສະແດງລິດຖວາຍພຣະສາດສະດາ
ສະແດງລິດຫຼາກຫຼາຍຫຼາຍຢ່າງຕ່າງ ໆ ກັນ

[໔໓໗] ຄືສະແດງກາຍເທົ່າພູເຂົາຈັກກະວານ ຫົວເທົ່າອຸດຕະຣະກຸຣຸທະວີບ
ທະວີບທັງ ໔ ໃຫ້ເປັນປີກທັງ ໔ ຂ້າງ
ຊົມພູທະວີບໃຫ້ເປັນລຳຕົວ

[໔໓໘] ສະແດງມະຫາສະມຸດດ້ານທິດໃຕ້ໃຫ້ເປັນກຳຫາງ
ກິ່ງໄມ້ຕ່າງ ໆ ໃຫ້ເປັນຂົນປີກ
ດວງຈັນແລະດວງອາທິດໃຫ້ເປັນໃນຕາ
ພູເຂົາພຣະສຸເມຣຸໃຫ້ເປັນຫອນ

[໔໓໙] ສະແດງພູເຂົາຈັກກະວານໃຫ້ເປັນຈະງອຍປາກ
ນຳຕົ້ນຫວ້າພ້ອມທັງຮາກ
ເຂົ້າມາໃກ້ແລ້ວໄຫວ້ແລະພັດວີພຣະຜູ້ຊົງເປັນຜູ້ນຳສັດໂລກ

[໔໔໐] ສະແດງເປັນຊ້າງ ມ້າ ພູເຂົາ ທະເລ ດວງຈັນ
ດວງອາທິດ ພູເຂົາພຣະສຸເມຣຸແລະເປັນທ້າວສັກກະຈອມເທບ

[໔໔໑] ຂາບທູນວ່າ ຂ້າແຕ່ພຣະວີຣະເຈົ້າ
ຜູ້ມີພຣະຈັກຂຸ ຊົງເປັນຜູ້ນຳຂອງນໍຣະຊົນ
ຂ້ານ້ອຍທັງຫຼາຍຜູ້ຊົງໄວ້ເຊິ່ງຍົດ
ເຊິ່ງສຳເລັດແລ້ວດ້ວຍກຸສົນທຳທີ່ອົບຮົມມາດົນນານເພື່ອພຣະອົງ
ຂໍຂາບພຣະຍຸຄົນບາດ

[໔໔໔] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍ
ເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະມີຄວາມຊຳນານໃນເຈໂຕປະຣິຍະຍານ

[໔໘໓] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍທັງຫຼາຍກໍຊໍາຮະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໘໔] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສໍາພິທາຍານ
ທໍາມະປະຕິສໍາພິທາຍານ ນິຣຸດຕິປະຕິສໍາພິທາຍານ
ແລະປະຕິພານະປະຕິສໍາພິທາຍານ ຂອງຂ້ານ້ອຍທັງຫຼາຍ
ເກີດຂຶ້ນແລ້ວໃນສໍານັກຂອງພຣະອົງ

[໔໘໕] ການພົບພຣະພຸດທະເຈົ້າທັງຫຼາຍ
ຜູ້ຊົງເປັນບ່ອນເພິ່ງຂອງໂລກ ພຣະອົງກໍໄດ້ສະແດງແລ້ວແກ່ຂ້ານ້ອຍທັງຫຼາຍ
ຂ້າແຕ່ພຣະມະຫາມຸນີ ອະທິການຈໍານວນຫຼາຍຂອງຂ້ານ້ອຍທັງຫຼາຍ
ຍ່ອມມີເພື່ອປະໂຫຍດແກ່ພຣະອົງ

[໔໘໖] ຂ້າແຕ່ພຣະມະຫາວີຣະ ຜູ້ເປັນພຣະມຸນີ
ຂໍພຣະອົງເພິ່ງທວນຣະລຶກເຖິງກຸສົນກໍາເກົ່າ
ຂອງຂ້ານ້ອຍທັງຫຼາຍເທີ້ນ
ຂ້ານ້ອຍທັງຫຼາຍສັ່ງສົມບຸນໄວ້ກໍເພື່ອປະໂຫຍດແກ່ພຣະອົງ

[໔໘໗] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍທັງຫຼາຍ
ງົດເວັ້ນອະນາຈານໃນສະຖານທີ່ບໍ່ສົມຄວນ
ແມ່ນຊີວິດກໍຍອມສະລະແລ້ວເພື່ອປະໂຫຍດແກ່ພຣະອົງ

[໔໘໘] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍທັງຫຼາຍ
ເພື່ອຕ້ອງການໃຫ້ເປັນພັນລະຍາຂອງຜູ້ອື່ນຫຼາຍພັນໂກດກັບ
ກໍເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍທັງຫຼາຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໔໘໙] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍທັງຫຼາຍ
ເພື່ອອຸດໜຸນຜູ້ອື່ນຫຼາຍພັນໂກດກັບ
ກໍເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍທັງຫຼາຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໔໕໐] ຂ້າແຕ່ພຣະມະຫາມຸນີ ພຣະອົງປະທານຂ້ານ້ອຍທັງຫຼາຍ
ເພື່ອປະໂຫຍດເປັນອາຫານຫຼາຍພັນໂກດກັບ
ເພື່ອປະໂຫຍດແກ່ພຣະອົງ
ຂ້ານ້ອຍທັງຫຼາຍບໍ່ເຄີຍເສຍໃຈໃນເລື້ອງນັ້ນເລີຍ

[໔໕໑] ຂ້ານ້ອຍທັງຫຼາຍຍອມສະລະຊີວິດຫຼາຍພັນໂກດກັບ
ດ້ວຍຄິດວ່າຈັກທຳຄວາມພົ້ນໄພຈຶ່ງຍອມສະລະຊີວິດ

[໔໕໒] ຂ້າແຕ່ພຣະມະຫາມຸນີ
ຂ້ານ້ອຍທັງຫຼາຍບໍ່ເຄີຍຫວງເຄື່ອງປະດັບ
ຜ້ານານາຊະນິດທີ່ຕິດຕົວຢູ່ ແລະພັນທະຂອງຍິງ
ເພື່ອປະໂຫຍດແກ່ພຣະອົງ

[໔໕໓] ຂ້າແຕ່ພຣະມະຫາມຸນີ ຊັບ ເຂົ້າເປືອກ
ປັດໄຈເຄື່ອງບໍລິຂານ ບ້ານ ເຮືອນ ນິຄົມ ໄຮ່ ນາ
ບຸດ ທິດາ ຂ້ານ້ອຍທັງຫຼາຍກໍບໍລິຈາກແລ້ວ

[໔໕໔] ຊ້າງ ມ້າ ງົວ ທາສີ ນາງບຳເລີນັບບໍ່ຖ້ວນ
ຂ້ານ້ອຍທັງຫຼາຍກໍບໍລິຈາກແລ້ວ ເພື່ອປະໂຫຍດແກ່ພຣະອົງ

[໔໕໕] ພຣະອົງຊົງປຶກສາຂ້ານ້ອຍທັງຫຼາຍວ່າ
ເຮົາທັງຫຼາຍຈະໃຫ້ທານແກ່ພວກຍາຈົກ
ເມື່ອພຣະອົງໃຫ້ທານທີປະເສີດຢູ່
ຂ້ານ້ອຍທັງຫຼາຍກໍບໍ່ເຄີຍເສຍໃຈ

[໔໕໖] ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍທັງຫຼາຍ
ຍອມຮັບທຸກທໍລະມານຫຼາຍຢ່າງຈົນນັບບໍ່ຖ້ວນ
ໃນສົງສານເປັນອະເນກ ກໍເພື່ອປະໂຫຍດແກ່ພຣະອົງ

[໔໕໗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍໄດ້ຮັບຄວາມສຸກ
ຍ່ອມອະນຸໂມທະນາ ແລະເວລາທີ່ໄດ້ຮັບທຸກກໍບໍ່ເສຍໃຈ
ເປັນຜູ້ຍິນດີແລ້ວທຸກຢ່າງ ເພື່ອປະໂຫຍດແກ່ພຣະອົງ

[໔໕໘] ຂ້າແຕ່ພຣະມະຫາມຸນີ ພຣະສຳມາສຳພຸດທະເຈົ້າຊົງພໍ່າເພັງທຳ
ໂດຍມັກທີ່ສົມຄວນ ສະເຫວີຍສຸກແລະທຸກແລ້ວ
ໄດ້ບັນລຸເຊິ່ງພຣະໂພທິຍານ

[໔໕໙] ການທີ່ພຣະອົງແລະຂ້ານ້ອຍທັງຫຼາຍພົບພຣະສຳພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກພຣະນາມວ່າ ພົມເທບ
ແລະພຣະນາມວ່າ ໂຄດົມແລ້ວພົບພຣະສຳມາສຳພຸດທະເຈົ້າ
ຜູ້ຊົງເປັນບ່ອນເພິ່ງສັດໂລກເຫຼົ່າອື່ນອີກກໍຫຼາຍ

[໔໖໐] ຂ້າແຕ່ພຣະມະຫາມຸນີ ອະທິການຂອງຂ້ານ້ອຍທັງຫຼາຍມີຫຼາຍ
ເພື່ອປະໂຫຍດແກ່ພຣະອົງ
ເມື່ອພຣະອົງຊົງສະແຫວງຫາພຸດທະທຳຢູ່
ຂ້ານ້ອຍທັງຫຼາຍກໍໄດ້ເປັນບາດປະຣິຈາຣິກາຂອງພຣະອົງ

[໔໖໑] ໃນ ໔ ອະສົງໄຂ ໑໐໐,໐໐໐ ກັບ
ພຣະມະຫາວີຣະພຣະນາມວ່າ ທີປັງກອນ
ຊົງເປັນຜູ້ນຳສັດໂລກ ສະເດັດອຸບັດຂຶ້ນແລ້ວ

[໔໖໒] ປະຊາຊົນໃນປັດຈັນຕະປະເທດຕ່າງມີໃຈຍິນດີ
ທູນນິມົນພຣະຕະຖາຄົດເຈົ້າແລ້ວ
ຊ່ອຍກັນແຜ້ວຖາງທາງເຊິ່ງເປັນທີ່ສະເດັດພຸດທະດຳເນີນ

[໔໖໓] ໃນຄັ້ງນັ້ນ ພຣະອົງເກີດເປັນພາມນາມວ່າ ສຸເມທະ
ກຳລັງຕົກແຕ່ງຫົນທາງເພື່ອພຣະສຸຄົດເຈົ້າ
ຜູ້ຊົງເຫັນທຳທັງປວງກຳລັງສະເດັດມາ

[໔໖໔] ໃນຄັ້ງນັ້ນ ຂ້ານ້ອຍທັງຫຼາຍທັງໝົດ
ໄດ້ເກີດໃນຕະກູນພາມ
ຖືດອກໄມ້ທີ່ເກີດຈາກຂໍ້ໄປສູ່ສະມາຄົມ
[໔໖໕] ສະໄໝນັ້ນ ພຣະພຸດທະເຈົ້າພຣະນາມວ່າທີປັງກອນ
ຜູ້ມີບໍລິວານຍົດຫຼາຍ ເປັນພຣະມະຫາວີຣະ
ຊົງພະຍາກອນສຸເມທະດາບົດຜູ້ມີໃຈສູງ
[໔໖໖] ພຣະພຸດທະເຈົ້າພຣະນາມວ່າທີປັງກອນກຳລັງຊົງປະກາດກຳ
ຂອງສຸເມທະດາບົດ ຍ້ອງຍໍລືສີຜູ້ມີໃຈສູງຢູ່
ແຜ່ນດິນກໍໄຫວສະເທືອນເລື່ອນລັ່ນໄປໃນໂລກພ້ອມທັງເທວະໂລກ
[໔໖໗] ເທບກັນຍາ ມະນຸດ ແລະຂ້ານ້ອຍທັງຫຼາຍ
ພ້ອມທັງເທວະດາ ພາກັນໃຊ້ສິ່ງຂອງທີ່ຄວນບູຊາຕ່າງ ໆ
ບູຊາແລ້ວປາຖະໜາ

[໔໖໘] ພຣະພຸດທະເຈົ້າຜູ້ມີພຣະນາມວ່າ ທີປັງກອນ
ຊົງພະຍາກອນເຂົາເຫຼົ່ານັ້ນວ່າ
ໃນວັນນີ້ ຊົນເຫຼົ່າໃດມີຄວາມປາຖະໜາ
ຊົນເຫຼົ່ານັ້ນຈັກສຳເລັດພ້ອມໜ້າກັນ

[໔໖໙] ໃນກັບເຊິ່ງຫາປະມານບໍ່ໄດ້ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຊົງພະຍາກອນພຣະດຳຣັດໃດແກ່ຂ້ານ້ອຍທັງຫຼາຍ
ຂ້ານ້ອຍທັງຫຼາຍເມື່ອອະນຸໂມທະນາພຣະດຳຣັດນັ້ນ
ຈຶ່ງເປັນຜູ້ເຮັດແນວນີ້

[໔໗໐] ຍິ່ງທັງຫຼາຍເຮັດຈິດໃຫ້ເຫຼື້ອມໃສໃນກຳທີ່ໄດ້ເຮັດໄວ້ດີແລ້ວນັ້ນ
ຈຶ່ງໄດ້ບັງເກີດໃນກຳເນີດເທວະດາ ແລະມະນຸດນັບຊາດບໍ່ຖ້ວນ

[໔໗໑] ເມື່ອສະເຫວີຍສຸກແລະທຸກໃນເທວະດາແລະມະນຸດແລ້ວ
ເມື່ອເຖິງພົບສຸດທ້າຍ ຈຶ່ງມາເກີດໃນສາກະຍະຕະກູນ

[໔໗໒] ມີຮູບສົມບັດ ໂພຄະສົມບັດ ຍົດ ແລະສິນ
ສົມບູນດ້ວຍອົງສົມບັດທັງປວງ
ໄດ້ຮັບສັກກາຣະຢ່າງຍິ່ງໃນຕະກູນທັງຫຼາຍ

[໔໗໓] ພຽບພ້ອມໄປດ້ວຍໂລກະທຳ ຄື ລາບ ສັນເສີນ ສັກກາຣະ
ມີຈິດບໍ່ປະກອບດ້ວຍທຸກ ຢູ່ຢ່າງຜູ້ບໍ່ມີໄພແຕ່ທີ່ໃດ ໆ

[໔໗໔] ສົມຈິງຕາມພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ
ໃນຄັ້ງນັ້ນ ພຣະອົງຊົງສະແດງອຸປະກາຣະຂອງນາຣີທັງຫຼາຍ
ໄວ້ພາຍໃນພຣະຣາດຊະມົນທຽນແລະໃນຂັດຕິຍະບຸຣີວ່າ

[໔໗໕] ນາຣີຜູ້ມີອຸປະກາຣະ ໑ ນາຣີຜູ້ເປັນເພື່ອນຮ່ວມສຸກຮ່ວມທຸກ ໑
ນາຣີຜູ້ແນະນຳປະໂຫຍດໃຫ້ ໑ ນາຣີຜູ້ກະທຳຄວາມອະນຸເຄາະໃຫ້ ໑

[໔໗໖] ບຸກຄົນຄວນປະພຶດທຳໃຫ້ສຸດຈະຣິດ
ບໍ່ຄວນປະພຶດທຳໃຫ້ທຸດຈະຣິດ
ຍ້ອນບຸກຄົນຜູ້ປະພຶດທຳ
ຍ່ອມຢູ່ເປັນສຸກທັງໃນໂລກນີ້ແລະໂລກໜ້າ

[໔໗໗] ຂ້ານ້ອຍທັງຫຼາຍລະການຄອງເຮືອນແລ້ວບວດເປັນບັນພະຊິດ
ຍັງບໍ່ທັນເຖິງເຄິ່ງເດືອນກໍໄດ້ບັນລຸສັດຈະ ໔

[໔໗໘] ຄົນເປັນຈຳນວນຫຼາຍນຳຈີວອນ ບິນທະບາດ ເສນາສະນະ
ແລະປັດໄຈຫຼວງຫຼາຍ ເຂົ້າມາຖວາຍຂ້ານ້ອຍທັງຫຼາຍ
ເໝືອນຄື້ນໃນມະຫາສະມຸດ

[໔໗໙] ກິເລດທັງຫຼາຍຂ້ານ້ອຍທັງຫຼາຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍທັງຫຼາຍກໍຖອນໄດ້ແລ້ວ
ຂ້ານ້ອຍທັງຫຼາຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໘໐] ການທີ່ຂ້ານ້ອຍທັງຫຼາຍມາໃນສຳນັກ
ຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍທັງຫຼາຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວ

[໔໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍທັງຫຼາຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວ

[໔໘໒] ຂ້ານ້ອຍທັງຫຼາຍໄດ້ຮັບທຸກຫຼາຍຢ່າງ
ແລະສຸກສົມບັດຫຼາຍຢ່າງ
ເຖິງຄວາມເປັນຜູ້ບໍລິສຸດ
ໄດ້ສົມບັດທຸກຢ່າງ ດ້ວຍປະການດັ່ງນີ້

[໔໘໓] ບຸກຄົນຜູ້ຖວາຍຕົນຂອງຕົນແດ່ພຣະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ເພື່ອຕ້ອງການບຸນກໍຍ່ອມພຽບພ້ອມດ້ວຍສະຫາຍ
ບັນລຸພຣະນິບພານເຊິ່ງເປັນອະສັງຂະຕະ

[໔໘໔] ກຳທັງທີ່ເປັນອະດີດ ປັດຈຸບັນແລະອະນາຄົດສິ້ນໄປແລ້ວ
ກຳທັງປວງຂອງຂ້ານ້ອຍທັງຫຼາຍສິ້ນແລ້ວ

ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຂ້ານ້ອຍທັງຫຼາຍຂໍຂາບໄຫວ້ພຣະຍຸຄົນບາດ

[໔໙໕] ພຣະພຸດທະເຈົ້າຕັດວ່າ ເມື່ອທ່ານທັງຫຼາຍບອກລາເພື່ອຈະນິບພານ
ເຮົາຈະກ່າວອັນໃດໃຫ້ຫຼາຍນໍ
ບຸກຄົນທີ່ເປັນທາດທີ່ນັບວ່າສັດກໍບັນລຸເຖິງອະມະຕະບົດແລ້ວ

ໄດ້ຮູ້ວ່າ ພິກຂຸນີ ໑໘,໐໐໐ ອົງມີພຣະຍະໂສທະຣາເຖຣີເປັນປະທານ ໄດ້ພາສິດຄາຖາ ເຫຼົ່ານີ້ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ດ້ວຍປະການດັ່ງນີ້

**ອັດຖາຣະສະເຖຣີສະຫັດສານະມະປະທານທີ ໑໐ ຈົບ**

**ກຸນທະລະເກສີວັກທີ ໓ ຈົບບໍລິບູນ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ກຸນທະລະເກສີເຖຣີຍາປະທານ
໒. ກີສາໂຄຕະມີເຖຣີຍາປະທານ
໓. ທຳມະທິນນາເຖຣີຍາປະທານ
໔. ສະກຸລາເຖຣີຍາປະທານ
໕. ນັນທາເຖຣີຍາປະທານ
໖. ໂສນາເຖຣີຍາປະທານ
໗. ພັດທະກາປິລານີເຖຣີຍາປະທານ
໘. ຍະໂສທະຣາເຖຣີຍາປະທານ
໙. ທະສະສະຫັດສະເຖຣີຍາປະທານ
໑໐. ອັດຖາຣະສະເຖຣີສະຫັດສານະມະປະທານ

**ໃນວັກນີ້ ບັນດິດນັບຈຳນວນຄາຖາໄດ້ ໔໗໘ ຄາຖາ**

# ໔. ຂັດຕິຍະກັນຍາວັກ

## ໝວດວ່າດ້ວຍພຣະເຖຣີຜູ້ເຄີຍເປັນຂັດຕິຍະກັນຍາເປັນຕົ້ນ

### ໑. ອັດຖາຣະສະສະຫັດສະຂັດຕິຍະກັນຍາເຖຣີນະມະປະທານ

### ປະຫວັດໃນອະດີດຊາດຂອງພຣະເຖຣີ

### ຜູ້ເຄີຍເປັນພຣະຂັດຕິຍະກັນຍາ ໑໘,໐໐໐ ອົງ

(ພຣະເຖຣີຜູ້ເຄີຍເປັນຂັດຕິຍະກັນຍາ ໑໘,໐໐໐ ອົງ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑] ຂ້າແດ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍມີພົບທັງປວງສິ້ນແລ້ວ
ປິດເປື້ອງບ່ອນຕໍ່ແຫ່ງພົບແລ້ວ
ບໍ່ມີອາສະວະທັງປວງເລີຍຂໍຂາບທູນວ່າ

[໒] ຂ້າແດ່ພຣະມະຫາມຸນີ ບໍຣິກຳທີ່ເປັນກຸສົນ
ຄວາມດີແນວໃດແນວໜຶ່ງທີ່ຕົນປາຖະໜາໄວ້
ແລະວັດຖຸທີ່ເປັນເຄື່ອງບໍຣິໂພກຂ້ານ້ອຍທັງຫຼາຍຖວາຍແລ້ວ
ເພື່ອປະໂຫຍດແກ່ພຣະອົງ

[໓] ຂ້າແດ່ພຣະມະຫາມຸນີ ຄວາມດີທີ່ປາຖະໜາແລ້ວ
ແລະວັດຖຸທີ່ເປັນເຄື່ອງບໍຣິໂພກຂ້ານ້ອຍທັງຫຼາຍຖວາຍແລ້ວແດ່ພຣະພຸດທະເຈົ້າ
ພຣະປັດເຈກພຸດທະເຈົ້າແລະພຣະສາວົກທັງຫຼາຍ
ກໍເພື່ອປະໂຫຍດແກ່ພຣະອົງ

[໔] ຂ້າແດ່ພຣະມະຫາມຸນີ ກຳທີ່ສູງແລະຕ່ຳຂ້ານ້ອຍທັງຫຼາຍກໍກະທຳແລ້ວ
ຄວາມດີຂ້ານ້ອຍທັງຫຼາຍກໍປາຖະໜາແລ້ວ
ການບໍຣິກຳໃນຕະກູນສູງຂ້ານ້ອຍທັງຫຼາຍ
ກະທຳໄວ້ແລ້ວເພື່ອພິກຂຸທັງຫຼາຍ

[໕] ຍິງສາວເຫຼົ່ານັ້ນຖືກກຸສົນມູນນັ້ນນັ້ນແລຕັກເຕືອນແລ້ວ
ເປັນຜູ້ພຽບພ້ອມໄປດ້ວຍກຸສົນກຳ
ລ່ວງສົມບັດຂອງມະນຸດແລ້ວ ມາເກີດໃນຕະກູນກະສັດ

[໖]　　ເມື່ອກໍາທີ່ຂ້ານ້ອຍທັງຫຼາຍໄດ້ຮ່ວມກັນສັ່ງສົມສ້າງໄວ້ໃນຊາດດຽວກັນ ໃນພົບສຸດທ້າຍ ຂ້ານ້ອຍທັງຫຼາຍສົມພົບໃນຕະກູນກະສັດເກີດຮ່ວມກັນ

[໗]　　ຂ້າແຕ່ພຣະມະຫາວີຣະ ຂ້ານ້ອຍທັງຫຼາຍເປັນຜູ້ມີຮູບສົມບັດ
ມີໂພຄະສົມບັດ ມີລາບສັກກາຣະ
ອັນມະຫາຊົນໃນພາຍໃນບຸຣີບູຊາແລ້ວ
ເໝືອນນັນທະນະວັນອຸທະຍານແຫ່ງໝູ່ເທບອັນມະຫາຊົນບູຊາແລ້ວ

[໘]　　ຂ້ານ້ອຍທັງຫຼາຍພາກັນເບື່ອໜ່າຍອອກຈາກເຮືອນ
ບວດເປັນບັນພະຊິດສິ້ນໄປ ໔-໕ ວັນ
ກໍບັນລຸເຖິງຄວາມດັບທຸກທັງໝົດນໍາກັນ

[໙]　　ຄົນເປັນຈໍານວນຫຼາຍນໍາຈີວອນ ບິນທະບາດ ເສນາສະນະ
ແລະຄິລານະປັດໄຈເພສັດບໍຣິຂານຫຼວງຫຼາຍ
ມາສັກກາຣະບູຊາຂ້ານ້ອຍທັງຫຼາຍຕະຫຼອດເວລາ

[໑໐]　　ກິເລດທັງຫຼາຍຂ້ານ້ອຍທັງຫຼາຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍທັງຫຼາຍກໍຖອນໄດ້ແລ້ວ
ຂ້ານ້ອຍທັງຫຼາຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໑]　　ການທີ່ຂ້ານ້ອຍທັງຫຼາຍມາໃນສໍານັກ
ຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍທັງຫຼາຍໄດ້ບັນລຸແລ້ວໂດຍລໍາດັບ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທໍາສໍາເລັດແລ້ວ

[໑໒]　　ຄຸນວິເສດເຫຼົ່ານີ້ ຄື ປະຕິສໍາພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍທັງຫຼາຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄໍາສັ່ງສອນຂອງພຣະພຸດທະເຈົ້າ
ຂ້ານ້ອຍທັງຫຼາຍກໍໄດ້ກະທໍາສໍາເລັດແລ້ວດັ່ງນີ້ແລ

ໄດ້ຮູ້ວ່າ ພິກຂຸນີທີ່ເຄີຍເປັນຂັດຕິຍະກັນຍາ ໑໘,໐໐໐ ມີພຣະຍະສະວະດີເຖຣີເປັນປະທານ ໄດ້ພາສິດຄາຖາເຫຼົ່ານີ້ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ດ້ວຍປະການດັ່ງນີ້

**ອັດຖາຣະສະສະຫັດສະຂັດຕິຍະກັນຍາເຖຣີຍາປະທານທີ ໑ ຈົບ**

## ໔. ຈະຕຸຣາສີຕິສະຫັດສະພາມມະນະກັນຍາເຖຣີນະມະປະທານ

### ປະຫວັດໃນອະດີດຊາດຂອງພຣະເຖຣີພາມມະນະກັນຍາ ໗໔,໐໐໐ ອົງ

(ພຣະເຖຣີພາມມະນະກັນຍາ ໗໔,໐໐໐ ອົງ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໑໓] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍ ໗໔,໐໐໐ ນາງ
ໄດ້ເກີດໃນຕະກູນພາມ
ມີມືແລະຕີນລະອຽດອ່ອນ ເກີດໃນນະຄອນ (ສາດສະໜາ) ຂອງພຣະອົງ

[໑໔] ເກີດໃນຕະກູນແພດແລະຕະກູນສູດ
ຂ້າແຕ່ພຣະມະຫາມຸນີ ເຫຼົ່າເທບ ນາກ ກິນນະຣະ
ແລະກັນຍາຈຳນວນຫຼາຍຢູ່ໃນທະວີບທັງ ໔
ເກີດໃນນະຄອນ (ສາດສະໜາ) ຂອງພຣະອົງ

[໑໕] ຍິງສາວບາງພວກບວດແລ້ວ ໄດ້ເຫັນທຳທັງປວງກໍມີຫຼາຍ
ເຫຼົ່າເທບ ກິນນະຣະ ນາກ ກໍຈັກຕັດສະຮູ້ໃນອະນາຄົດຕະການ

[໑໖] ຊົນທັງຫຼາຍໄດ້ສະເຫວີຍກຽດຕິຍົດທັງປວງ ໄດ້ສົມບັດທັງປວງ
ໄດ້ຄວາມເຫຼື້ອມໃສໃນພຣະອົງ ກໍຈັກຕັດສະຮູ້ໃນອະນາຄົດ

[໑໗] ຂ້າແຕ່ພຣະມະຫາວີຣະ ຜູ້ມີພຣະຈັກຂຸ
ສ່ວນຂ້ານ້ອຍທັງຫຼາຍເກີດໃນຕະກູນພາມ
ເປັນທິດາຂອງພາມ ເປັນຜູ້ມີລັກສະນະດີ
ຂໍຂາບພຣະຍຸຄົນບາດ

[໑໘] ພົບທັງປວງຂ້ານ້ອຍທັງຫຼາຍກໍຂະຈັດໄດ້ແລ້ວ
ຕັນຫາທີ່ເປັນຮາກເຫງົ້າ (ແຫ່ງອະກຸສົນ)
ຂ້ານ້ອຍທັງຫຼາຍກໍຖອນໄດ້ແລ້ວ
ອະນຸໄສຂ້ານ້ອຍທັງຫຼາຍກໍຕັດໄດ້ແລ້ວ
ປຸນຍາພິສັງຂານ ຂ້ານ້ອຍທັງຫຼາຍກໍທຳລາຍໄດ້ແລ້ວ

[໑໙] ຂ້ານ້ອຍທັງປວງມີສະມາທິເປັນອາລົມ
ຊຳນານໃນສະມາບັດເຊັ່ນກັນ ຈັກຢູ່ດ້ວຍຊານ
ແລະຄວາມຍິນດີໃນທຳທຸກເມື່ອ

[໔໐] ຂ້າແຕ່ພຣະອົງຜູ້ຊົງເປັນຜູ້ນໍາ
ຂ້ານ້ອຍທັງຫຼາຍໄດ້ເຮັດຕັນຫາທີ່ນໍາໄປສູ່ພົບ
ອະວິດຊາ ແລະແມ່ນສັງຂານໃຫ້ສິ້ນໄປແລ້ວ
ຕາມໄປຮູ້ແຈ້ງເຊິ່ງບົດທີ່ຮູ້ໄດ້ແສນຍາກ

[໔໑] (ພຣະຜູ້ມີພຣະພາກເຈົ້າຕັດວ່າ) ທ່ານທັງຫຼາຍມີອຸປະກາຣະແກ່ເຮົາ
ຜູ້ເດີນທາງໄກມາຕະຫຼອດການດົນນານ
ຈົ່ງຕັດຄວາມສົງໄສຂອງບໍລິສັດ ໔ ແລ້ວທັງໝົດຈົ່ງນິບພານເທີ້ນ

[໔໒] ພຣະເຖຣີເຫຼົ່ານັ້ນ ຂາບພຣະຍຸຄົນບາດຂອງພຣະມຸນີແລ້ວ
ສະແດງລິດຕ່າງ ໆ ບາງພວກສະແດງແສງສະຫວ່າງ
ບາງພວກສະແດງຄວາມມືດ ບາງພວກສະແດງຢ່າງອື່ນ

[໔໓] ບາງພວກສະແດງດວງຈັນ ດວງອາທິດ
ແລະທະເລພ້ອມດ້ວຍປາ ບາງພວກສະແດງພູເຂົາສິເນຣຸ
ພູເຂົາສັດຕະບັນພົດແລະຕົ້ນປາຣິສັດຕະກະ

[໔໔] ບາງພວກສະແດງພົບຕາວະຕິງສາ
ຍາມາເທວະໂລກດ້ວຍລິດ
ບາງພວກເນຣະມິດຕົນເປັນເທວະດາຊັ້ນດຸສິດ
ເປັນເທວະດາຊັ້ນນິມມານະຣະດີ
ເປັນເທວະດາຊັ້ນປະຣະນິມມິຕະວະສະວັດດີຜູ້ເປັນໃຫຍ່ຍິ່ງ

[໔໕] ບາງພວກສະແດງຕົນເປັນພົມ
ບາງພວກເນຣະມິດບ່ອນຈົງກົມມີຄ່າຫຼາຍ
ແລະເພດພຣະພົມ ສະແດງສູນຍະຕະທໍາຢູ່

[໔໖] ພຣະເຖຣີທັງປວງ ເມື່ອສະແດງອິດທິລິດມີປະການຕ່າງ ໆ
ແລ້ວກໍສະແດງພະລັງຖວາຍພຣະສາດສະດາ
ໄດ້ຂາບພຣະຍຸຄົນບາດຂອງພຣະສາດສະດາ ພ້ອມຂາບທູນວ່າ

[໔໗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍ
ເປັນຜູ້ມີຄວາມຊໍານານໃນລິດ
ໃນທິບພະໂສຕະທາດ ແລະມີຄວາມຊໍານານໃນເຈໂຕປະຣິຍະຍານ

[໔໗] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍທັງຫຼາຍກໍຊໍາຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໙] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສໍາພິທາຍານ
ທໍາມະປະຕິສໍາພິທາຍານ ນິຣຸດຕິປະຕິສໍາພິທາຍານ
ແລະປະຕິພານະປະຕິສໍາພິທາຍານຂອງຂ້ານ້ອຍທັງຫຼາຍ
ເກີດຂຶ້ນແລ້ວໃນສໍານັກຂອງພຣະອົງ

[໕໐] ຄວາມພ້ອມພຽງແຫ່ງພຣະພຸດທະເຈົ້າທັງຫຼາຍ
ຜູ້ຊົງເປັນບ່ອນເພິ່ງຂອງສັດໂລກ
ພຣະອົງຊົງສະແດງແລ້ວ
ຂ້າແຕ່ພຣະມະຫາມຸນີ ອະທິການເປັນຈໍານວນຫຼາຍຂອງຂ້ານ້ອຍທັງຫຼາຍ
ເພື່ອປະໂຫຍດແກ່ພຣະອົງ

[໕໑] ຂ້າແຕ່ພຣະມະຫາວີຣະຜູ້ເປັນພຣະມຸນີ
ຂໍພຣະອົງຊົງທວນຣະລຶກເຖິງກຸສົນກໍາເກົ່າຂອງຂ້ານ້ອຍທັງຫຼາຍເທີ້ນ
ຂ້ານ້ອຍທັງຫຼາຍສັ່ງສົມບຸນໄວ້ກໍເພື່ອປະໂຫຍດແກ່ພຣະອົງ

[໕໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ມີນະຄອນຊື່ວ່າຫົງສະວະດີ ເປັນບ່ອນຢູ່ອາໄສແຫ່ງຕະກູນ
ຂອງພຣະສໍາມາສໍາພຸດທະເຈົ້າ
ຜູ້ເປັນພຣະມະຫາມຸນີພຣະນາມວ່າ ປະທຸມຸດຕະຣະ

[໕໓] ມີແມ່ນໍ້າຄົງຄາໄຫຼຜ່ານທີ່ໜ້າປະຕູນະຄອນຫົງສະວະດີຢູ່ຕະຫຼອດເວລາ
ພິກຂຸທັງຫຼາຍເດືອດຮ້ອນໄປບໍ່ໄດ້ຍ້ອນແມ່ນໍ້າ

[໕໔] ນໍ້າເຕັມຕະຝັ່ງຢູ່ ໑ ວັນແດ່ ໒ ວັນແດ່ ໓ ວັນແດ່
໑ ອາທິດແດ່ ໑ ເດືອນແດ່ ໔ ເດືອນແດ່
ພິກຂຸເຫຼົ່ານັ້ນຈຶ່ງໄປບໍ່ໄດ້

[໕໕] ໃນຄັ້ງນັ້ນ ຊາວແວ່ນແຄວ້ນຜູ້ໜຶ່ງມີນາມວ່າຊັດຊິຍະ
ມີຊັບເປັນສາຣະເພື່ອປະໂຫຍດແກ່ຕົນ ເຫັນພິກຂຸທັງຫຼາຍ
ຈຶ່ງໄດ້ສັ່ງໃຫ້ນາຍຊ່າງຈັດສ້າງຂົວຂ້າມແມ່ນໍ້າຂຶ້ນທີ່ຝັ່ງດ້ານໜ້າເມືອງ

[໓໖]	ໃນຄັ້ງນັ້ນ ເຂົາໄດ້ສ້າງຂົວຂ້າມແມ່ນ້ຳຄົງຄາ
ດ້ວຍຊັບຫຼາຍແສນ
ແລະໄດ້ໃຫ້ສ້າງວິຫານຖວາຍສົງທີ່ຝັ່ງດ້ານກົງກັນຂ້າມ

[໓໗]	ທັງສະຕີ ບຸຣຸດ ຕະກູນສູງ ແລະຕະກູນຕ່ຳເຫຼົ່ານັ້ນ
ໄດ້ຮ່ວມກັນສ້າງຂົວແລະວິຫານເທົ່າ ໆ ກັນກັບນາຍຊັດຊິຍະນັ້ນ

[໓໘]	ຂ້ານ້ອຍທັງຫຼາຍແລະໝູ່ມະນຸດເຫຼົ່າອື່ນ
ໃນນະຄອນແລະໃນຊົນນະບົດລ້ວນມີຈິດເຫຼື້ອມໃສ
ເປັນທຳທາຍາດຂອງພຣະພຸດທະເຈົ້າພຣະອົງນັ້ນ

[໓໙]	ທັງສະຕີ ບຸຣຸດ ເດັກຊາຍ ແລະເດັກຍິງຈຳນວນຫຼາຍນຳກັນ
ຕ່າງກໍຊ່ອຍກັນເຂ່ຍຊາຍລົງທີ່ຂົວແລະທີ່ວິຫານ

[໔໐]	ປັດຖະໜົນ ແລ້ວຕັ້ງຕົ້ນກ້ວຍ
ໝໍ້ນ້ຳເຊິ່ງມີນ້ຳເຕັມແລະປັກທຸງຂຶ້ນ
ຈັດທູບ ຈຸນ ແລະດອກໄມ້ສັກກາຣະພຣະສາດສະດາ

[໔໑]	ຂ້ານ້ອຍທັງຫຼາຍເມື່ອສ້າງຂົວ ແລະວິຫານສຳເລັດແລ້ວ
ໄດ້ທູນນິມົນພຣະຜູ້ຊົງເປັນຜູ້ນຳວິເສດ
ຖວາຍມະຫາທານ ແລ້ວປາຖະໜາສຳໂພທິຍານ

[໔໒]	ຂ້າແຕ່ພຣະມະຫາມຸນີ ພຣະມະຫາວີຣະພຣະນາມວ່າ ປະທຸມຸດຕະຣະ
ຜູ້ຊົງເປັນທີ່ເຄົາລົບຂອງສັບພະສັດ
ຊົງເຮັດອະນຸໂມທະນາແລ້ວ ຕັດພະຍາກອນວ່າ

[໔໓]	ເມື່ອ ໑໐໐,໐໐໐ ກັບລ່ວງໄປແລ້ວ ຈັກມີພັດທະກັບ
ບຸຣຸດນີ້ໄດ້ຄວາມສຸກໃນພົບນ້ອຍພົບໃຫຍ່ແລ້ວ ຈັກບັນລຸພຣະໂພທິຍານ

[໔໔]	ບຸຣຸດແລະສະຕີທີ່ຊ່ອຍກັນເຮັດຫັດຖະກຳທັງໝົດ
ຈັກມີພ້ອມໜ້າກັນໃນອະນາຄົດຕະການ

[໔໕]	ດ້ວຍວິບາກແຫ່ງກຳນັ້ນ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຊົນເຫຼົ່ານັ້ນເກີດໃນເທວະໂລກແລ້ວ ຈັກເປັນຄົນຮັບໃຊ້ພຣະອົງ

[໔໖]	ວຽນວ່າຍຕາຍເກີດຢູ່ໃນພົບນ້ອຍພົບໃຫຍ່ ສະເຫວີຍສຸກເປັນທິບ
ແລະເປັນຂອງມະນຸດນັບບໍ່ຖ້ວນ ຕະຫຼອດການດົນນານ

[໔໗]   ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ກໍາສົມບັດຂ້ານ້ອຍທັງຫຼາຍກໍເຮັດໄວ້ດີແລ້ວ
ໃນໝູ່ມະນຸດສຸຂຸມາລະຊາດ ແລະໃນເທວະໂລກທີ່ປະເສີດ

[໔໘]   ຂ້ານ້ອຍທັງຫຼາຍຍ່ອມໄດ້ຮູບສົມບັດ
ໂພຄະສົມບັດ ຍົດ ຄວາມສັນເສີນ
ແລະຄວາມສຸກອັນເປັນທີ່ຮັກ ທັງໝົດເປັນກໍາສົມບັດ
ທີ່ຂ້ານ້ອຍທັງຫຼາຍກະທໍາໄວ້ດີແລ້ວ ຢ່າງຕໍ່ເນື່ອງ

[໔໙]   ເມື່ອເຖິງພົບສຸດທ້າຍ
ຂ້ານ້ອຍທັງຫຼາຍເກີດໃນຕະກູນພາມ
ໃນນິເວດຂອງເຈົ້າສາກະຍະບຸດ ເປັນຜູ້ມີມືແລະຕີນລະອຽດອ່ອນ

[໕໐]   ຂ້າແດ່ພຣະມະຫາມຸນີ ຂ້ານ້ອຍທັງຫຼາຍ
ບໍ່ເຫັນແຜ່ນດິນທີ່ເຂົາຍັງບໍ່ຕົກແຕ່ງ
ແລະບໍ່ເຫັນພາກພື້ນທີ່ເປັນທາງຢ່າງມື່ນ ໆ
ແມ່ນຕະຫຼອດການທັງປວງ

[໕໑]   ເມື່ອຂ້ານ້ອຍຍັງຄອງເຮືອນຢູ່
ຊົນທັງຫຼາຍກໍນໍາສັກກາຣະທຸກຢ່າງທີ່ເກີດຂື້ນທຸກລະດູການມາໃຫ້ທຸກເມື່ອ
ຍ້ອນຜົນແຫ່ງບຸບພະກໍາຂອງຂ້ານ້ອຍທັງຫຼາຍ

[໕໒]   ຂ້ານ້ອຍທັງຫຼາຍລະການຄອງເຮືອນແລ້ວ
ບວດເປັນບັນພະຊິດ ຂ້າມທາງສັງສາຣະອັດໄດ້ແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໕໓]   ທາຍົກທາຍິກາຫຼາຍພັນຈາກທີ່ນັ້ນ ໆ ນໍາຈີວອນ
ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ
ມາຖວາຍຂ້ານ້ອຍທັງຫຼາຍຕະຫຼອດເວລາ

[໕໔]   ກິເລດທັງຫຼາຍຂ້ານ້ອຍທັງຫຼາຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍທັງຫຼາຍກໍຖອນໄດ້ແລ້ວ
ຂ້ານ້ອຍທັງຫຼາຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໕໕] ການທີ່ຂ້ານ້ອຍທັງຫຼາຍມາໃນສຳນັກ
ຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍທັງຫຼາຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວ

[໕໖] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍທັງຫຼາຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ
ຂ້ານ້ອຍທັງຫຼາຍກໍໄດ້ກະທຳສຳເລັດແລ້ວດັ່ງນີ້ແລ

ໄດ້ຮູ້ວ່າ ພິກຂຸນີບຸດຕິພານ ໗໔,໐໐໐ ອົງໄດ້ພາສິດຄາຖາເຫຼົ່ານີ້ ສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າ ດ້ວຍປະການດັ່ງນີ້

**ຈະຕຸຣາສີຕິສະຫັດສະພານມະນະກັນຍາເຖຣີນະມະປະທານທີ ໔ ຈົບ**

## ໓. ອຸບປະລະທາຍິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອຸບປະລະທາຍິກາເຖຣີ

(ພຣະອຸບປະລະທາຍິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນຈຶ່ງກ່າວວ່າ)

[໕໗] ໃນນະຄອນອະຣຸນະວະດີ ມີກະສັດພຣະອົງໜຶ່ງພຣະນາມວ່າ ອະຣຸນ
ຂ້ານ້ອຍເປັນພຣະມະເຫສີຂອງພຣະອົງ
ຍ່ອມສົນທະນາກັນເປັນບາງເທື່ອບາງເວລາເທົ່ານັ້ນ

[໕໘] ໃນຄັ້ງນັ້ນ ຂ້ານ້ອຍນັ່ງຢູ່ໃນບ່ອນສະຫງັດ ຄິດແນວນີ້ວ່າ
ກຸສົນທີ່ຈະນຳຕິດຕົວໄປເຊິ່ງເຮົາເຮັດໄວ້ບໍ່ມີເລີຍ

[໕໙] ເຮົາຕ້ອງຕົກນະຮົກທີ່ມີຄວາມຮ້ອນຮົນຫຼາຍ
ທັງເຜັດຮ້ອນດຸຮ້າຍແສນຈະທາຣຸນຢ່າງແນ່ນອນ
ເຮົາບໍ່ມີຄວາມສົງໄສໃນຂໍ້ນີ້ເລີຍ

[໖໐] ເມື່ອຂ້ານ້ອຍຄິດແນວນີ້ແລ້ວ
ເຮັດຈິດໃຫ້ຣ່າເຣີງເຂົ້າເຝົ້າພຣະຣາຊາແລ້ວ ຂາບທູນດັ່ງນີ້ວ່າ

[໖໑] ຂ້າແຕ່ພຣະອົງຜູ້ເປັນກະສັດ
ຂ້ານ້ອຍທັງຫຼາຍຊື່ວ່າເປັນສະຕີ ຂ້ານ້ອຍທັງຫຼາຍບໍ່ແມ່ນບຸຣຸດ

ຂໍພຣະອົງຊົງພຣະຣາດຊະທານພຣະສະມະນະ
ແກ່ຂ້ານ້ອຍທັງຫຼາຍຈັກອົງໜຶ່ງເທີ້ນ
ຂ້ານ້ອຍທັງຫຼາຍຈັກນິມົນທ່ານໃຫ້ສັນ

[໖໘] ໃນຄັ້ງນັ້ນ ພຣະຣາຊາໄດ້ພຣະຣາດຊະທານພຣະສະມະນະ
ຜູ້ມີອິນຊີອັນອົບຮົມແລ້ວໃຫ້ຂ້ານ້ອຍ
ຂ້ານ້ອຍຮັບບາດຂອງທ່ານມາແລ້ວ
ໃສ່ພັດຕາຫານຢ່າງປະນີດຈົນເຕັມ

[໖໙] ແລ້ວບັນຈຸອາຫານອັນປະນີດຂອງຫອມແລະເຄື່ອງລູບທາ
ໄປພ້ອມກັນ ມີໃຈຍິນດີໄດ້ຖວາຍໃຫ້ຄອງຜ້າຜືນໃຫຍ່

[໗໐] ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໗໑] ໄດ້ເປັນພຣະມະເຫສີຂອງທ້າວເທວະຣາດ ໑,໐໐໐ ຊາດ
ໄດ້ເປັນພຣະມະເຫສີຂອງພຣະເຈົ້າຈັກກະພັດ ໑,໐໐໐ ຊາດ

[໗໒] ແລະໄດ້ເປັນພຣະມະເຫສີຂອງພຣະເຈົ້າປະເທດຣາດ
ອັນໄພບູນນັບຊາດບໍ່ຖ້ວນ
ແຕ່ນັ້ນ ຜົນອື່ນອີກຫຼາກຢ່າງ
ເປັນຜົນກຳແຫ່ງທານນັ້ນ

[໗໓] ຂ້ານ້ອຍມີຜິວພັນເໝືອນດອກອຸບົນ
ເປັນສະຕີມີຮູບງາມ ໜ້າເບິ່ງໜ້າຊົມ
ມີອົງສົມບັດທັງປວງສົມບູນ
ເປັນອະພິຊາຕະບຸດ ຊົງໄວ້ເຊິ່ງຄວາມຮຸ່ງເຮືອງ

[໗໔] ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍເກີດໃນສາກະຍະຕະກູນ
ເປັນຫົວໜ້າຂອງນາຣີ ໑,໐໐໐ ນາງ
ຂອງພຣະໂອຣົດຂອງພຣະເຈົ້າສຸດໂທທະນະ

[໗໕] ຂ້ານ້ອຍເບື່ອໜ່າຍການຄອງເຮືອນ
ຈຶ່ງອອກບວດເປັນບັນພະຊິດ ພຽງ ໗ ຣາຕີ ກໍໄດ້ບັນລຸສັດຈະ ໔

[໗໐] ຂ້ານ້ອຍບໍ່ສາມາດຈະປະມານຈີວອນ ບິນທະບາດ
ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານໄດ້
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໗໑] ຂ້າແຕ່ພຣະມະຫາວີຣະ ຜູ້ເປັນພຣະມຸນີ
ຂໍພຣະອົງເພິ່ງຫວນຣະລຶກເຖິງກຸສົນກຳເກົ່າຂອງຂ້ານ້ອຍເທີ້ນ
ຂ້ານ້ອຍໄດ້ສະລະວັດຖຸເປັນຈຳນວນຫຼາຍ ກໍເພື່ອປະໂຫຍດແກ່ພຣະອົງ

[໗໔] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ຂ້ານ້ອຍໄດ້ຖວາຍທານໄວ້ໃນຄັ້ງນັ້ນ
ຈຶ່ງບໍ່ຮູ້ຈັກທຸກຄະຕິເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໗໓] ຂ້ານ້ອຍຮູ້ຈັກພຽງ ໔ ຄະຕິ
ຄື (໑) ຄະຕິເທວະດາ (໔) ຄະຕິມະນຸດ ຄະຕິອື່ນຂ້ານ້ອຍບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໗໔] ຂ້ານ້ອຍຮູ້ຈັກແຕ່ຕະກູນສູງເຊິ່ງເປັນຕະກູນມະຫາສານມີຊັບຫຼາຍ
ຕະກູນອື່ນ ໆ ຂ້ານ້ອຍບໍ່ຮູ້ຈັກເລີຍ
ນີ້ເປັນຜົນແຫ່ງການຖວາຍບິນທະບາດ

[໗໕] ຂ້ານ້ອຍວຽນວ່າຍຕາຍເກີດໃນພົບນ້ອຍພົບໃຫຍ່
ຖືກກຸສົນມູນຕັກເຕືອນແລ້ວ ບໍ່ເຫັນສິ່ງທີ່ບໍ່ພໍໃຈເລີຍ
ນີ້ເປັນຜົນແຫ່ງໂສມະນັດ

[໗໖] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ

[໗໗] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໗໘] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ

ແລະປະຕິພານະປະຕິສຳພິທາຍານຂອງຂ້ານ້ອຍທີ່ມີຢູ່
ລ້ວນເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໗໙] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໘໐] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໘໑] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະອຸບປະລະທາຍິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອຸບປະລະທາຍິກາເຖຣີຍາປະທານທີ ໓ ຈົບ**

## ໔. ສິງຄາລະມາຕຸເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະສິງຄາລະມາຕາເຖຣີ

(ພຣະສິງຄາລະມາຕາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໒] ພຣະຊິນນະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຜູ້ເຖິງຄວາມສຳເລັດແຫ່ງທຳທັງປວງ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນແລ້ວໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ

[໘໓] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນອຳມາດ
ທີ່ຮຸ່ງເຮືອງດ້ວຍຣັດຕະນະຕ່າງ ໆ
ເປັນຕະກູນມັ່ງຄັ່ງ ຈະເລີນ ມີຊັບຫຼາຍ ໃນນະຄອນຫົງສະວະດີ

[໘໔] ຂ້ານ້ອຍມີມະຫາຊົນຫ້ອມລ້ອມໄປກັບບິດາ
ໄດ້ຟັງທຳຂອງພຣະພຸດທະເຈົ້າແລ້ວ ບວດເປັນບັນພະຊິດ

[໗໕] ເມື່ອບວດແລ້ວ ເວັ້ນບາບກຳທາງກາຍ
ລະວະຈີທຸດຈະຣິດ ຊຳຣະອາຊີວະໃຫ້ບໍລິສຸດ

[໗໖] ມີຄວາມເຫຼື້ອມໃສໃນພຣະພຸດທະເຈົ້າ ແລະພຣະທຳ
ແລະມີຄວາມເຄົາລົບຢ່າງແຮງກ້າໃນພຣະສົງ
ຂວນຂວາຍໃນການຟັງພຣະສັດທຳ
ມີການໄດ້ເຫັນພຣະພຸດທະເຈົ້າເປັນປົກກະຕິ

[໗໗] ໃນຄັ້ງນັ້ນ ຂ້ານ້ອຍໄດ້ຟັງພິກຂຸນີອົງໜຶ່ງ
ເຊິ່ງເປັນຜູ້ເລີດກວ່າພິກຂຸນີທັງຫຼາຍ ຝ່າຍສັດທາທີ່ມຸດ
ຈຶ່ງປາຖະໜາຕຳແໜ່ງນັ້ນແລ້ວພ່ຳເພັງໄຕຣສິກຂາ ໃຫ້ບໍລິບູນ
[໗໘] ໃນຄັ້ງນັ້ນ ພຣະສຸຄົດຜູ້ມີພຣະອັດທະຍາໄສ
ປະກອບດ້ວຍພຣະກະລຸນາ ຕັດກັບຂ້ານ້ອຍວ່າ
ບຸກຄົນຜູ້ມີສັດທາບໍ່ຫວັ່ນໄຫວຕັ້ງໝັ້ນດີໃນພຣະຕະຖາຄົດເຈົ້າ
ມີສີນດີງາມທີ່ພຣະອະຣິຍະເຈົ້າຕ້ອງການແລະສັນເສີນ
[໗໙] ມີຄວາມເຫຼື້ອມໃສໃນພຣະສົງ ມີຄວາມເຫັນຕົງ
ນັກປາດຮຽກຜູ້ນັ້ນວ່າ
ເປັນຜູ້ບໍ່ຂັດສົນ ຊີວິດຂອງຜູ້ນັ້ນບໍ່ເປົ່າປະໂຫຍດ

[໘໐] ຍ້ອນແນວນັ້ນ ບຸກຄົນຜູ້ມີປັນຍາ
ເມື່ອມາຣະລຶກເຖິງຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ເພິ່ງໝັ່ນປະກອບສັດທາ ສີນ ປະສາທະ (ຄວາມເຫຼື້ອມໃສ)
ແລະຄວາມເຫັນອັນຊອບທຳ

[໘໑] ຂ້ານ້ອຍໄດ້ຟັງພຣະດຳຣັດນັ້ນແລ້ວ ມີຄວາມເບີກບານໃຈ
ໄດ້ທູນຖາມເຖິງຄວາມປາຖະໜາຂອງຂ້ານ້ອຍ
ໃນຄັ້ງນັ້ນ ພຣະສຸຄົດຜູ້ຊົງເປັນຜູ້ນຳຊັ້ນວິເສດ
ຊົງມີປັນຍາບໍ່ຕ່ຳຕ້ອຍ ມີພຣະຄຸນນັບບໍ່ຖ້ວນ
ຊົງພະຍາກອນວ່າ ທ່ານເຫຼື້ອມໃສໃນພຣະພຸດທະເຈົ້າຜູ້ມີທຳອັນງາມ
ຈັກໄດ້ຕຳແໜ່ງນັ້ນທີ່ທ່ານປາຖະໜາໄວ້ແລ້ວ

[໘໒] ໃນກັບທີ ໑໐໐,໐໐໐ ນັບຈາກກັບນີ້ໄປ
ພຣະສາດສະດາພຣະນາມວ່າໂຄດົມ ຕາມພຣະໂຄດ
ຊົງສົມພົບໃນຣາດຕະກູນໂອກກາກະຣາດ ຈັກອຸບັດຂຶ້ນໃນໂລກ

[໙໓]　ສະຕີຜູ້ນີ້ຈັກມີນາມວ່າສິງຄາລະມາຕາ
ເປັນທຳທາຍາດ ເປັນໂອຣົດທີ່ທຳເນຣະມິດ
ເປັນສາວິກາຂອງພຣະສາດສະດາພຣະອົງນັ້ນ

[໙໔]　ໃນຄັ້ງນັ້ນ ຂ້ານ້ອຍໄດ້ຟັງພຸດທະພະຍາກອນນັ້ນແລ້ວ
ເປັນຜູ້ມີຄວາມຍິນດີ ມີຈິດປະກອບດ້ວຍເມດຕາ
ປົນນິບັດພຣະຊິນນະເຈົ້າ ຜູ້ຊົງເປັນຜູ້ນຳ
ດ້ວຍການປະຕິບັດທັງຫຼາຍຈົນຕະຫຼອດຊີວິດ

[໙໕]　ດ້ວຍກຳທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໙໖]　ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນຕະກູນເສດຖີ
ມີຄວາມຈະເລີນຮຸ່ງເຮືອງ ສັ່ງສົມຣັດຕະນະໄວ້ເປັນຈຳນວນຫຼາຍ
ໃນນະຄອນຣາດຊະຄື ທີ່ປະເສີດສຸດ

[໙໗]　ບຸດຂອງຂ້ານ້ອຍຊື່ສິງຄາລະມານົບ ມີຄວາມເຫັນຜິດ
ແລ່ນໄປສູ່ມິດສາທິດຖິ ມຸ້ງແຕ່ການບູຊາທິດ

[໙໘]　ນອບນ້ອມທິດຕ່າງ ໆ ພຣະພຸດທະເຈົ້າຊົງເປັນຜູ້ນຳວິເສດ
ສະເດັດເຂົ້າໄປບິນທະບາດຍັງພຣະນະຄອນ
ທອດພຣະເນດເຫັນເຂົາແລ້ວ ປະທັບຢືນໂອວາດທີ່ຫົນທາງ

[໙໙]　ເມື່ອພຣະອົງຊົງສະແດງທຳ ບຸດຂອງຂ້ານ້ອຍ
ສິ່ງສຽງຮ້ອງ ໜ້າປະຫຼາດໃຈ
ບຸຣຸດສະຕີ ໔ ໂກດໄດ້ບັນລຸທຳ

[໑໐໐]　ໃນຄັ້ງນັ້ນ ຂ້ານ້ອຍໄດ້ເຂົ້າໄປສູ່ທີ່ປະຊຸມນັ້ນ
ຟັງພາສິດຂອງພຣະສຸຄົດເຈົ້າແລ້ວ
ໄດ້ບັນລຸໂສດາປັດຕິຜົນ ອອກບວດເປັນບັນພະຊິດ

[໑໐໑]　ໄດ້ເຫັນພຣະພຸດທະເຈົ້າເປັນປົກກະຕິ
ຈະເລີນພຸດທານຸດສະຕິຢູ່ບໍ່ດົນ ກໍໄດ້ບັນລຸອະຣະຫັດຕະຜົນ

[໑໐໒] ຂ້ານ້ອຍໄປເຝົ້າພຣະພຸດທະເຈົ້າເປັນປະຈຳ
ເຫັນພຣະຮູບເຊິ່ງເປັນທີ່ເພີດເພີນຕາບໍ່ເບື່ອ

[໑໐໓] ຂ້ານ້ອຍບໍ່ເບື່ອພຣະຮູບທີ່ເກີດຈາກປາຣະມີທັງປວງ
ເປັນບ່ອນຢູ່ອາໄສແຫ່ງສິຣິທີ່ປະເສີດ
ພຽບພ້ອມດ້ວຍຄວາມງາມທຸກຢ່າງ

[໑໐໔] ພຣະຊິນນະເຈົ້າຊົງພໍພຣະທະໄທໃນຄຸນສົມບັດນັ້ນ
ຈຶ່ງຊົງຕັ້ງຂ້ານ້ອຍຜູ້ເປັນມານດາຂອງສິງຄາລະມານົບໄວ້
ໃນເອຕະທັກຄະວ່າ ເປັນຜູ້ເລີດກວ່າພິກຂຸນີທັງຫຼາຍຝ່າຍສັດທາທີ່ມຸດ

[໑໐໕] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ

[໑໐໖] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີ

[໑໐໗] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ
ແລະປະຕິພານະປະຕິສຳພິທາຍານ ຂອງຂ້ານ້ອຍທີ່ມີຢູ່
ລ້ວນເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໑໐໘] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໐໙] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໑໐] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ຮູ້ວ່າ ທ່ານພຣະພິກຂຸນີມານດາສິງຄາລະມານົບໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ສິງຄາລະມາຕາເຖຣີຍາປະທານທີ ໔ ຈົບ**

## ໕. ສຸກກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະສຸກກາເຖຣີ

(ພຣະສຸກກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໑໑] ໃນກັບທີ ໙໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳພຣະນາມວ່າ ວິປັດສີ
ມີພຣະວໍຣະກາຍງົດງາມ ຊົງເຫັນແຈ້ງທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໑໑໒] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນໜຶ່ງໃນນະຄອນພັນທຸມະດີ
ໄດ້ຟັງທຳຂອງພຣະມຸນີແລ້ວ ອອກບວດເປັນບັນພະຊິດ

[໑໑໓] ເປັນພະຫູສູດ ຊົງທຳ ມີປະຕິພານ
ກ່າວທຳມີກະຖາຢ່າງມ່ວນ
ປະຕິບັດຕາມຄຳສັ່ງສອນຂອງພຣະຊິນນະເຈົ້າ

[໑໑໔] ໃນຄັ້ງນັ້ນ ຂ້ານ້ອຍກ່າວທຳເພື່ອປະໂຫຍດແກ່ໝູ່ຊົນທຸກສະໄໝ
ຂ້ານ້ອຍຈຸຕິຈາກອັດຕະພາບນັ້ນແລ້ວ
ໄດ້ໄປເກີດເປັນເທບທິດາຜູ້ມີຍົດໃນສະຫວັນຊັ້ນດຸສິດ

[໑໑໕] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ພຣະຊິນນະເຈົ້າພຣະນາມວ່າສິຂີ ມີພຣະຣັດສະໝີປຽບດ້ວຍແປວເພີງ
ສ່ອງໂລກໃຫ້ຮຸ່ງເຮືອງດ້ວຍຍົດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໑໑໖] ແມ່ນໃນຄັ້ງນັ້ນ ຂ້ານ້ອຍບວດແລ້ວ ເປັນຜູ້ສະຫຼາດໃນພຸດທະສາດສະໜາ
ກະທຳພຣະພຸດທະພົດໃຫ້ກະຈ່າງແລ້ວໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໑໗] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳພຣະນາມວ່າເວດສະພູ

ມີພຣະປີຊາຍານຫຼາຍ  ສະເດັດອຸບັດຂຶ້ນແລ້ວ
ແມ່ນໃນຄັ້ງນັ້ນ  ຂ້ານ້ອຍກໍເປັນເໝືອນຢ່າງໃນພົບກ່ອນ

[໑໑໗]  ອອກບວດແລ້ວເປັນຜູ້ຊົງທຳ
ຊ່ອຍປະກາດຄຳສັ່ງສອນຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮື່ອງແລ້ວ
ໄປເກີດໃນເມືອງແຫ່ງເທບທີ່ໜ້າຍິນດີ  ໄດ້ສະເຫວີຍຄວາມສຸກຫຼາຍ

[໑໑໙]  ໃນພັດທະກັບນີ້  ພຣະຊິນນະເຈົ້າຜູ້ສູງສຸດພຣະນາມວ່າ  ກະກຸສັນທະ
ຊົງເປັນຜູ້ສູງສຸດແຫ່ງນະຣະ  ສະເດັດອຸບັດຂຶ້ນແລ້ວ
ແມ່ນໃນຄັ້ງນັ້ນ  ຂ້ານ້ອຍກໍເປັນເໝືອນຢ່າງໃນພົບກ່ອນ

[໑໘໐]  ອອກບວດແລ້ວ  ຊ່ອຍປະກາດຄຳສັ່ງສອນ
ຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງຢູ່ຈົນຕະຫຼອດຊີວິດ
ຈຸຕິຈາກອັດຕະພາບນັ້ນແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕຶງສາເໝືອນໄປສູ່ບ່ອນຢູ່ຂອງຕົນ

[໑໘໑]  ໃນກັບນີ້ເອງ  ພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳ
ພຣະນາມວ່າ  ໂກນາກະມະນະ  ປະເສີດກວ່າເຈົ້າລັດທິທັງຫຼາຍ
ເປັນຜູ້ສູງສຸດແຫ່ງສັບພະສັດ  ສະເດັດອຸບັດຂຶ້ນແລ້ວ

[໑໘໒]  ແມ່ນໃນຄັ້ງນັ້ນ  ຂ້ານ້ອຍກໍອອກບວດໃນສາດສະໜາຂອງພຣະອົງ
ຜູ້ຄົງທີ່  ເປັນພະຫູສູດ  ຊົງທຳ
ຊ່ອຍປະກາດຄຳສັ່ງສອນຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮື່ອງ

[໑໘໓]  ໃນກັບນີ້ເອງ  ພຣະມຸນີພຣະນາມວ່າ  ກັດສະປະ
ເປັນສາດສະດາຜູ້ປະເສີດ  ເປັນບ່ອນເພິ່ງຂອງສັດໂລກ
ບໍ່ມີຂ້າເສິກຄືກິເລດ  ເຖິງບ່ອນສຸດແຫ່ງນໍຣະນະທຳ  ສະເດັດອຸບັດຂຶ້ນແລ້ວ

[໑໘໔]  ຂ້ານ້ອຍບວດໃນສາດສະໜາຂອງພຣະພຸດທະເຈົ້າ
ຊົງເປັນນະຣະ  ຜູ້ເປັນປາດພຣະອົງນັ້ນ
ສຶກສາພຣະສັດທຳຢ່າງຄ່ອງແຄ່ວ
ມີຄວາມແກ່ກ້າໃນປະຣິປຸດສາ

[໑໘໕]  ຂ້າແຕ່ພຣະມະຫາມຸນີ  ຂ້ານ້ອຍມີສິນງາມ  ມີຄວາມລະອາຍ
ສະຫຼາດໃນໄຕຣສິກຂາ  ກ່າວທຳເປັນຈຳນວນຫຼາຍຈົນຕະຫຼອດຊີວິດ

[໑໘໖] ດ້ວຍວິບາກແຫ່ງກຳນັ້ນ ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໘໗] ບັດນີ້ ເປັນພົບສຸດທ້າຍ
ຂ້ານ້ອຍເກີດໃນຕະກູນເສດຖີທີ່ຈະເລີນມັ່ງຄັ່ງ
ສັ່ງສົມຣັດຕະນະໄວ້ຫຼາຍ ໃນນະຄອນຣາດຊະຄືທີ່ປະເສີດສຸດ

[໑໘໘] ເມື່ອພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນຜູ້ນຳ
ມີພິກຂຸ ໑,໐໐໐ ອົງຫ້ອມລ້ອມ
ທ້າວສະຫັດສະໄນສັນເສີນແລ້ວ ສະເດັດເຂົ້າໄປໃນນະຄອນຣາດຊະຄື

[໑໘໙] ພຣະຜູ້ມີພຣະພາກເຈົ້າຊົງຝຶກອິນຊີແລ້ວ
ພົ້ນຂາດຈາກສັບພະກິເລດມີວັນນະຮຸ່ງເຮືອງດັ່ງແທ່ງຄຳ
ສະເດັດເຂົ້າໄປໃນນະຄອນຣາດຊະຄື ພ້ອມທັງພຣະຊິນາສົບ
ຜູ້ເປັນປຸຣານະຊະດິນ ຜູ້ມີອິນຊີອັນອົບຮົມແລ້ວ
ພົ້ນເດັດຂາດຈາກສັບພະກິເລດ

[໑໙໐] ຂ້ານ້ອຍໄດ້ເຫັນພຸດທານຸພາບ
ແລະໄດ້ຟັງທຳເຊິ່ງເປັນທີ່ສັ່ງສົມຄຸນແລ້ວ
ເຮັດຈິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ
ບູຊາພຣະອົງຜູ້ມີພະລະທຳຫຼາຍ

[໑໙໑] ຕໍ່ມາ ຂ້ານ້ອຍໄດ້ອອກຈາກເຮືອນບວດເປັນບັນພະຊິດ
ໃນສຳນັກຂອງພຣະທຳມະທິນນາເຖຣີ

[໑໙໒] ຂ້ານ້ອຍເຜົາກິເລດທັງຫຼາຍໄດ້ໃນຂະນະທີ່ກຳລັງແຖຜົມ
ບວດແລ້ວບໍ່ດົນ ກໍສຶກສາສາສະນະທຳໄດ້ຢ່າງທົ່ວເຖິງ

[໑໙໓] ຕໍ່ຈາກນັ້ນ ໄດ້ສະແດງທຳໃນສະມາຄົມແຫ່ງມະຫາຊົນ
ເມື່ອຂ້ານ້ອຍກຳລັງສະແດງທຳຢູ່
ການບັນລຸທຳກໍໄດ້ມີແລ້ວ

[໑໙໔] ມີຍັກຕົນໜຶ່ງ ໄດ້ຮູ້ການຕັດສະຮູ້ທຳນັ້ນ
ຂອງສັດຫຼາຍພັນແລ້ວ ເກີດອັດສະຈັນໃຈ

ເຫຼື້ອມໃສຕໍ່ຂ້ານ້ອຍໄດ້ໄປສູ່ນະຄອນຣາດຊະຄຶ

[໑໓໕] ມະນຸດທັງຫຼາຍໃນນະຄອນຣາດຊະຄຶທີ່ບໍ່ໄດ້ເຂົ້າໄປນັ່ງໃກ້
ພຣະເຖຣີຊື່ວ່າສຸກກາ ຜູ້ສະແດງອະມະຕະບົດຢູ່
ຂ້ານ້ອຍຈະໃຫ້ດື່ມອະມະຕະບົດເໝືອນດື່ມນ້ຳເຜີ້ງໄດ້ແນວໃດ

[໑໓໖] ກໍແລພວກເຂົາຜູ້ມີປັນຍາ ຄົງຈະດື່ມອະມະຕະບົດນັ້ນ
ອັນມີສະພາບບໍ່ຖອຍກັບ ໃຫ້ເກີດຄວາມຊື່ນໃຈມີໂອຊາໄດ້
ເໝືອນຄົນເດີນທາງໄກສະແຫວງຫານ້ຳດື່ມ

[໑໓໗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ

[໑໓໘] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໓໙] ຂ້າແຕ່ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ
ແລະປະຕິພານະປະຕິສຳພິທາຍານ ຂອງຂ້ານ້ອຍທີ່ມີຢູ່
ລ້ວນເກີດຂື້ນແລ້ວໃນສຳນັກຂອງພຣະອົງ

[໑໔໐] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໔໑] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໔໒] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະສຸກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ດ້ວຍປະການດັ່ງນີ້

**ສຸກາເຖຣີຍາປະທານທີ ໕ ຈົບ**

**ພານະວານທີ ໕ ຈົບບໍລິບູນ**

## ໖. ອະພິຣູປະນັນທາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອະພິຣູປະນັນທາເຖຣີ

(ພຣະອະພິຣູປະນັນທາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໘໓] ໃນກັບທີ ໗໑ ນັບຈາກກັບນີ້ໄປ
ພຣະພຸດທະເຈົ້າຊົງເປັນຜູ້ນຳພຣະນາມວ່າ ວິປັດສີ
ຊົງມີພຣະວໍຣະກາຍງົດງາມ
ມີພຣະຈັກຂຸໃນທຳທັງປວງ ສະເດັດອຸບັດຂຶ້ນແລ້ວ

[໑໘໔] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນໃຫຍ່ທີ່ມັ່ງຄັ່ງ
ມີຄວາມຈະເລີນໃນນະຄອນພັນທຸມະດີ ເປັນສະຕີ ມີຮູບງາມ
ເປັນຕາແພງ ແລະໜ້າບູຊາຂອງໝູ່ຊົນ

[໑໘໕] ໄດ້ເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າ ວິປັດສີ
ຊົງເປັນຜູ້ນຳສັດໂລກ ຊົງມີຄວາມພຽນຫຼາຍ
ໄດ້ສະດັບພຣະທຳແລ້ວ
ເຖິງພຣະອົງຊົງເປັນຜູ້ນຳຂອງນໍຣະຊົນ ເປັນບ່ອນເພິ່ງບ່ອນຣະລຶກ

[໑໘໖] ຂ້ານ້ອຍສັງລວມຢູ່ໃນສິນ ເມື່ອພຣະຜູ້ມີພຣະພາກເຈົ້າ
ເປັນຜູ້ສູງສຸດແຫ່ງນະຣະ ສະເດັດດັບຂັນທະປະຣິນິບພານແລ້ວ
ໄດ້ໃຊ້ສະເວດຕະສັດຄຳບູຊາໄວ້ ໃນເບື້ອງເທິງ
ແຫ່ງພຣະສະຖູບທີ່ບັນຈຸພຣະບໍຣົມສາຣີຣິກະທາດ

[໑໘໗] ຂ້ານ້ອຍເປັນຜູ້ສະລະໄດ້ຂາດແລ້ວ
ມີສິນຈົນຕະຫຼອດຊີວິດ ຈຸຕິຈາກອັດຕະພາບນັ້ນແລ້ວ
ລະກາຍມະນຸດຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໑໔໗] ໃນຄັ້ງນັ້ນ ຂ້ານ້ອຍຄອບງຳ (ເທບທິດາ) ໄດ້ທັງໝົດ
ດ້ວຍຖານະ ໑໐ ປະການ ຄື (໑) ຮູບ
(໒) ສຽງ (໓) ກິ່ນ (໔) ຣົດ (໕) ໂຜດຖັບພະ

[໑໔໙] (໖) ອາຍຸ (໗) ວັນນະ (໘) ສຸກ (໙) ຍົດ
(໑໐) ຄວາມເປັນອະທິບໍດີ ຮຸ່ງເຮືອງຢູ່

[໑໕໐] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນນະຄອນກະບິນລະພັດ
ເປັນທິດາແຫ່ງເຈົ້າສາກະຍະພຣະນາມວ່າ ເຂມະກະ
ມີນາມຜາກົດວ່ານັນທາ

[໑໕໑] ໝູ່ຊົນກ່າວວ່າ ຂ້ານ້ອຍເປັນຜູ້ໜຶ່ງ
ເຊິ່ງມີຄວາມເຖິງພ້ອມດ້ວຍຮູບງາມ ໜ້າຊົມ
ໃນເວລາທີ່ຂ້ານ້ອຍເຕີບໃຫຍ່ເປັນສາວ (ຮູ້ຈັກ)
ມີຮູບແລະຜິວພັນງົດງາມ

[໑໕໒] ພວກເຈົ້າສາກະຍະເກີດການວິວາດກັນຂຶ້ນ
ຍ້ອນເລື້ອງຍາດເອົາຕົວຂ້ານ້ອຍນີ້
ໃນຄັ້ງນັ້ນ ພຣະບິດາຂອງຂ້ານ້ອຍດຳຣິວ່າ
ພວກເຈົ້າສາກະຍະ ຈົ່ງຢ່າພິນາດເລີຍ ຈຶ່ງໃຫ້ຂ້ານ້ອຍບວດ

[໑໕໓] ເມື່ອຂ້ານ້ອຍບວດແລ້ວ ໄດ້ຟັງວ່າ
ພຣະຕະຖາຄົດເຈົ້າເປັນຜູ້ສູງສຸດແຫ່ງນໍຣະຊົນ ຊົງຕິຕຽນຮູບ
ຈຶ່ງບໍ່ຍອມເຂົ້າເຝົ້າ ຍ້ອນຂ້ານ້ອຍມີຄວາມຫຼົງໃຫຼຮູບ
[໑໕໔] ຂ້ານ້ອຍຢ້ານຕໍ່ການເຂົ້າເຝົ້າພຣະພຸດທະເຈົ້າ ຈຶ່ງບໍ່ຍອມໄປຮັບໂອວາດ
ໃນຄັ້ງນັ້ນ ພຣະຊິນນະເຈົ້າຊົງໃຫ້ຂ້ານ້ອຍ
ເຂົ້າໄປສູ່ສຳນັກຂອງພຣະອົງດ້ວຍອຸບາຍ
[໑໕໕] ພຣະອົງຜູ້ຊົງສະຫຼາດໃນມັກ
ຊົງເນຣະມິດຍິງສາວ ໓ ຄົນ ດ້ວຍລິດ
ຄື (໑) ຍິງສາວສາວທີ່ງາມເໝືອນເທບອັບປະສອນ
(໒) ຍິງຊະຣາ (໓) ຍິງທີ່ຕາຍແລ້ວ

[໑໕໖] ຂ້ານ້ອຍເຫັນຍິງທັງ ໓ ແລ້ວເກີດຄວາມສະລົດໃຈ
ບໍ່ຍິນດີໃນຊາກສົບຂອງຍິງທີ່ຕາຍແລ້ວ

ມີຄວາມເບື່ອໜ່າຍໃນພົບ ຍືນສະລົດໃຈຢູ່
ໃນຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳ ຕັດກັບຂ້ານ້ອຍວ່າ

[໑໘໗] ນັນທາ ທ່ານຈົ່ງເບິ່ງຮູບກາຍທີ່ກະສັບກະສ່າຍ
ບໍ່ສະອາດ ເປື່ອຍເນົ່າ ໄຫຼເຂົ້າໄຫຼອອກຢູ່
ທີ່ພວກຄົນຈົ໊າພາກັນປາຖະໜາຍິ່ງ

[໑໘໘] ທ່ານຈົ່ງອົບຮົມຈິດໃຫ້ເປັນສະມາທິມີອາລົມດຽວດ້ວຍອະສຸພາຣົມເທີ້ນ
ຮູບນີ້ເປັນສັນໃດ ຮູບຂອງທ່ານນັ້ນກໍເປັນສັນນັ້ນ
ຮູບຂອງທ່ານນັ້ນເປັນສັນໃດ ຮູບນີ້ກໍເປັນສັນນັ້ນ

[໑໘໙] ເມື່ອທ່ານພິຈາລະນາເຫັນຮູບຢູ່ແນວນີ້
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ແຕ່ນັ້ນ ກໍຈະເບື່ອໜ່າຍຢູ່ດ້ວຍປັນຍາຂອງຕົນ

[໑໙໐] ເມື່ອຂ້ານ້ອຍບໍ່ຜະໝາດແລ້ວ
ພິຈາລະນາໃນກາຍນີ້ຢູ່ໂດຍແຍບຄາຍວ່າ
ກາຍນີ້ທັງພາຍໃນແລະພາຍນອກ
ເຮົາໄດ້ເຫັນແລ້ວຕາມຄວາມເປັນຈິງ

[໑໙໑] ເມື່ອເປັນເຊັ່ນນັ້ນ ຈຶ່ງເບື່ອໜ່າຍໃນກາຍ
ແລະຄາຍກຳໜັດໃນພາຍໃນ ບໍ່ຜະໝາດ
ບໍ່ເກາະກ່ຽວ ເປັນຜູ້ສະງົບເຢັນແລ້ວ

[໑໙໒] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ

[໑໙໓] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຮະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໙໔] ຂ້າແຕ່ ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ

ແລະປະຕິພານະປະຕິສຳພິທາຍານ ຂອງຂ້ານ້ອຍທີ່ມີຢູ່
ລ້ວນເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໑໙໕] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໙໖] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໙໗] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະອະພິຣູປະນັນທາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອະພິຣູປະນັນທາເຖຣີຍາປະທານທີ ໖ ຈົບ**

## ໗. ອັດທະກາສີເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອັດທະກາສີເຖຣີ

(ພຣະອັດທະກາສີເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໙໘] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພາມ
ພຣະນາມວ່າກັດສະປະ ຕາມພຣະໂຄດ ມີພຣະຍົດຍິ່ງໃຫຍ່
ຊົງເປັນຜູ້ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໑໙໙] ໃນຄັ້ງນັ້ນ ຂ້ານ້ອຍບວດໃນສາດສະໜາຂອງພຣະພຸດທະເຈົ້າພຣະອົງນັ້ນ
ສັງລວມໃນພຣະປາຕິໂມກ ແລະອິນຊີ ໕

[໑໗໐] ຂ້ານ້ອຍຮູ້ຈັກປະມານໃນອາສະນະຕ່ຳ
ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ພ່ຳເພັງພຽນຢູ່

[໑໗໑] ໃນການນັ້ນ ຂ້ານ້ອຍມີຄວາມຄິດຊົ່ວ
ໄດ້ດ່າພິກຂຸນີຜູ້ປາສະຈາກອາສະວະອົງໜຶ່ງເທື່ອດຽວວ່າ ນາງແພດສະຫຍາ
ຕ້ອງມີກາໄໝ້ຢູ່ໃນນະຣົກ ຍ້ອນບາບກຳນັ້ນນັ້ນເອງ

[໑໗໘] ຍ້ອນເສດກຳນັ້ນແລ
ຂ້ານ້ອຍເກີດໃນຕະກູນຍິງສາວແພດສະຫຍາ
ຢູ່ອາໄສຊາຍອື່ນຫຼວງຫຼາຍ ໃນຊາດສຸດທ້າຍ

[໑໗໙] ຂ້ານ້ອຍເກີດໃນຕະກູນເສດຖີໃນແຄວ້ນກາສີ
ມີຄວາມງາມ ເໝືອນນາງເທບອັບປະສອນໃນໝູ່ເທວະດາ
ດ້ວຍຜົນແຫ່ງການປະພຶດພົມມະຈັນ

[໑໗໔] ໝູ່ຊົນເຫັນຂ້ານ້ອຍມີຮູບໜ້າຊົມ
ຈຶ່ງຕັ້ງຂ້ານ້ອຍໃນຖານະເປັນຍິງສາວຄະນິກາ
ໃນນະຄອນຣາດຊະຄືທີ່ປະເສີດສຸດ
ຍ້ອນຜົນກຳທີ່ດ່າພິກຂຸນີນັ້ນຂອງຂ້ານ້ອຍ

[໑໗໕] ຂ້ານ້ອຍ ໄດ້ຟັງພຣະສັດທຳທີ່ພຣະພຸດທະເຈົ້າ
ຜູ້ປະເສີດທີ່ສຸດຕັດແລ້ວ
ຜູ້ສົມບູນດ້ວຍບຸນວາດສະໜາ (ບາບບຸນທີ່ໄດ້ອົບຮົມມາໃນການກ່ອນ)
ຈຶ່ງໄດ້ບວດເປັນບັນພະຊິດ

[໑໗໖] ແຕ່ເມື່ອເດີນທາງໄປສູ່ສຳນັກຂອງພຣະຊິນນະເຈົ້າເພື່ອຈະອຸປະສົມບົດ
ພົບພວກນັກເລງຖ້າດັກຢູ່ທີ່ຫົນທາງ ຈຶ່ງໄດ້ຮັບການອຸປະສົມບົດໂດຍທູດ

[໑໗໗] ກຳທັງໝົດສິ້ນໄປແລ້ວ ບຸນ ແລະບາບກໍສິ້ນໄປແລ້ວຄືກັນ
ຂ້ານ້ອຍຂ້າມພົ້ນສັງສາຣະວັດທັງປວງໄດ້ແລ້ວ
ແລະຄວາມເປັນຍິງຄະນິກາຂ້ານ້ອຍກໍໃຫ້ສິ້ນໄປແລ້ວ

[໑໗໘] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະໃນເຈໂຕປະຣິຍະຍານ

[໑໗໙] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຮະໃຫ້ບໍລິສຸດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໗໐] ຂ້າແຕ່ ພຣະມະຫາວີຣະ ອັດຖະປະຕິສຳພິທາຍານ
ທຳມະປະຕິສຳພິທາຍານ ນິຣຸດຕິປະຕິສຳພິທາຍານ
ແລະປະຕິພານະປະຕິສຳພິທາຍານ ຂອງຂ້ານ້ອຍທີ່ມີຢູ່
ລ້ວນເກີດຂຶ້ນແລ້ວໃນສຳນັກຂອງພຣະອົງ

[໑໗໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໑໗໔] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໑໗໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໗
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະອັດທະກາສີພິກຂຸນີໄດ້ພາສິດຄາຖາເລົ່ານີ້ ດ້ວຍປະການດັ່ງນີ້

**ອັດທະກາສີເຖຣີຍາປະທານທີ ໗ ຈົບ**

## ໗. ປຸນນິກາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະປຸນນິກາເຖຣີ

(ພຣະປຸນນິກາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໑໗໔] ພຣະຜູ້ມີພຣະພາກພຸດທະເຈົ້າ ຜູ້ເປັນພຣະມຸນີ ຜູ້ຄົງທີ່
ຊົງພຣະນາມວ່າ ພຣະວິປັດສີ ໑ ພຣະສິຂີ ໑ ພຣະເວດສະພູ ໑
ພຣະກະກຸສັນທະ ໑ ພຣະໂກນາກະມະນະ ໑ ພຣະກັດສະປະ ໑

[໑໗໕] ຂ້ານ້ອຍບວດເປັນພິກຂຸນີໃນສາດສະໜາ
ຂອງພຣະພຸດທະເຈົ້າພຣະນາມວ່າກັດສະປະ
ເປັນຜູ້ສົມບູນດ້ວຍສີນ ມີປັນຍາຮັກສາຕົນ ສັງລວມອິນຊີ

[໑໗໖] ເປັນພະຫູສູດ ຊົງທຳ ສອບຖາມເຫດແລະຜົນ
ຮ່ຳຮຽນ ສະດັບທຳ ເປັນຜູ້ນັ່ງໃກ້

[໑໗໗] ຂ້ານ້ອຍສະແດງຄຳສອນຂອງພຣະຊິນນະເຈົ້າໃນທ່າມກາງໝູ່ຊົນ
ໄດ້ເປັນຜູ້ມີສິນເປັນທີ່ຮັກ ດູໝິ່ນຍ້ອນຄວາມເປັນພະຫູສູດນັ້ນ

[໑໗໘] ບັດນີ້ ເປັນພົບສຸດທ້າຍ ຂ້ານ້ອຍເກີດໃນເຮືອນແຫ່ງນາງກຸມພະທາສີ
ຂອງອະນາຖະບິນທິກະເສດຖີໃນນະຄອນສາວັດຖີທີ່ປະເສີດສຸດ

[໑໗໙] ຂ້ານ້ອຍໄປຕັກນ້ຳ ໄດ້ເຫັນໂສດຖິຍະພາມ
ນັ່ງໜາວສັ່ນຢູ່ກາງນ້ຳ
ເມື່ອເຫັນແລ້ວໄດ້ກ່າວດັ່ງນີ້ວ່າ ເຮົາເປັນຄົນຕັກນ້ຳ

[໑໙໐] ຍ້ານໄພຕໍ່ອາດຍາຂອງເຈົ້ານາຍ
ແລະຖືກໄພຄືວາຈາທີ່ຮຸນແຮງຂອງເຈົ້ານາຍບຽດບຽນ
ຈຶ່ງຕ້ອງລົງນ້ຳເປັນປະຈຳໃນລະດູໜາວ

[໑໙໑] ພາມເອີຍ ທ່ານຢ້ານໃຜ ຈຶ່ງຕ້ອງລົງນ້ຳເປັນປະຈຳ
ມີຮ່າງກາຍສັ່ນເຊນ ຮູ້ສຶກໜາວຢ່າງຮຸນແຮງແມ່ນບໍ

[໑໙໒] (ພາມໄດ້ກ່າວວ່າ) ນາງປຸນນິກາຜູ້ຈະເລີນ
ທ່ານທັງທີ່ຮູ້ຢູ່ຍັງສອບຖາມເຮົາຜູ້ທຳກຸສົນກຳ
ເພື່ອກຳຈັດບາບກຳຢູ່

[໑໙໓] ບຸກຄົນໃດເປັນຜູ້ໃຫຍ່ກໍຕາມ ເປັນເດັກກໍຕາມ ກະທຳບາບກຳໄວ້
ບຸກຄົນນັ້ນ ໆ ຈະພົ້ນຈາກບາບກຳໄດ້ ຍ້ອນການອາບນ້ຳ

[໑໙໔] ເມື່ອພາມນັ້ນຂຶ້ນຈາກນ້ຳມາ
ຂ້ານ້ອຍໄດ້ບອກບົດທີ່ປະກອບດ້ວຍເຫດແລະຜົນ
ພາມໄດ້ຟັງບົດແຫ່ງທຳນັ້ນແລ້ວ
ມີຄວາມສະລົດໃຈ ອອກບວດແລ້ວໄດ້ເປັນພຣະອະຣະຫັນ

[໑໙໕] ຍ້ອນຂ້ານ້ອຍເກີດໃນຕະກູນທາສີ
ຄົບຈຳນວນທາສີ ໑໐໐ ຄົນພໍດີ
ເຈົ້ານາຍຈຶ່ງຕັ້ງຊື່ໃຫ້ຂ້ານ້ອຍວ່າ ປຸນນາ
ແລະປົດຂ້ານ້ອຍ (ຈາກທາດ) ໃຫ້ເປັນອິດສະຫຼະ

[໑໙໖] ແຕ່ນັ້ນຂ້ານ້ອຍອະນຸໂມທະນາເສດຖີແລ້ວ
ບວດເປັນບັນພະຊິດ ໂດຍການບໍ່ດົນຫຼາຍກໍໄດ້ບັນລຸອະຣະຫັດຕະຜົນ

[໑໙໗] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດແລະໃນເຈໂຕປະຣິຍະຍານ

[໑໙໘] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໑໙໙] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍານ
ນິຣຸດຕິປະຕິສຳພິທາຍານ ແລະປະຕິພານະປະຕິສຳພິທາຍານ
ຂອງຂ້ານ້ອຍ ບໍລິສຸດ ບໍ່ມີມົນທິນ
ຍ້ອນອຳນາດຂອງພຣະພຸດທະເຈົ້າຜູ້ປະເສີດສຸດ

[໔໐໐] ຂ້ານ້ອຍມີປັນຍາຫຼາຍຍ້ອນການຈະເລີນພາວະນາ
ມີສຸຕະຫຼາຍຍ້ອນການຮຽນຮູ້
ເກີດໃນຕະກູນຕ່ຳຍ້ອນມີມານະຈັດ
ແຕ່ກຸສົນກຳບໍ່ໄດ້ວິບັດໄປເລີຍ

[໔໐໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໐໒] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໐໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະປຸນນິກາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ປຸນນິກາເຖຣີຍາປະທານທີ ໘ ຈົບ**

## ໗. ອໍາພະປາລິເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະອໍາພະປາລິເຖຣີ

(ພຣະອໍາພະປາລິເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໔໐໔] ຂ້ານ້ອຍເກີດໃນຕະກູນກະສັດ
ເປັນພຣະພະຄິນີຂອງພຣະມະຫາມຸນີພຣະນາມວ່າ ຜຸດສະ
ຜູ້ມີພຣະຣັດສະໝີງາມ ຮຸ່ງເຮືອງເໝືອນເຊີດ

[໔໐໕] ຂ້ານ້ອຍໄດ້ຟັງທໍາຂອງພຣະອົງແລ້ວ
ມີຈິດຜ່ອງໃສ ໄດ້ຖວາຍມະຫາທານແລ້ວ ປາຖະໜາຮູບສົມບັດ

[໔໐໖] ໃນກັບທີ ໓໑ ນັບຈາກກັບນີ້ໄປ
ພຣະຊິນນະເຈົ້າພຣະນາມວ່າສິຂີ ຊົງເປັນຜູ້ນໍາຊັ້ນເລີດຂອງໂລກ
ຊົງສ່ອງໂລກໃຫ້ສະຫວ່າງສະໄຫວ ຊົງເປັນບ່ອນເພິ່ງ ທີ່ຣະລຶກໃນໄຕຣໂລກ
ສະເດັດອຸບັດຂຶ້ນແລ້ວ

[໔໐໗] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນພາມ
ໃນນະຄອນອະຣຸນທີ່ໜ້າອອນຊອນ ໂກດບໍ່ພໍໃຈແລ້ວ
ສາບແຊ່ງພິກຂຸນີອົງໜຶ່ງຜູ້ມີຈິດລຸດພົ້ນແລ້ວວ່າ

[໔໐໘] ທ່ານເປັນຍິງສາວແພດສະຫຍາ ປະພຶດອະນາຈານ
ປະທຸດສະຮ້າຍພຣະສາດສະໜາຂອງພຣະຊິນນະເຈົ້າ
ເມື່ອດ່າຢ່າງນີ້ແລ້ວ ຍ້ອນກໍາຊົ່ວທີ່ເຮັດໄວ້ນັ້ນ

[໔໐໙] ຂ້ານ້ອຍຕ້ອງຕົກນະຮົກທີ່ໂຫດຮ້າຍ
ພ້ອມດ້ວຍມະຫັນຕະທຸກ ເຄື່ອນຈາກນະຮົກນັ້ນແລ້ວ
ມາເກີດໃນໝູ່ມະນຸດ ກໍມີຄວາມເດືອດຮ້ອນເປັນປະຈໍາ

[໔໑໐] ຄອງຕໍາແໜ່ງຍິງສາວແພດສະຫຍາຢູ່ເຖິງ ໑໐,໐໐໐ ຊາດ
ກໍຍັງບໍ່ພົ້ນຈາກບາບກໍານັ້ນ
ປຽບເໝືອນຄົນທີ່ກືນກິນຢາພິດທີ່ຮ້າຍແຮງ

[໔໑໑] ຂ້ານ້ອຍໄດ້ອອກບວດເປັນພິກຂຸນີ
ມີເພດປະເສີດໃນສາດສະໜາຂອງພຣະຊິນນະເຈົ້າພຣະນາມວ່າກັດສະປະ
ໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ ຍ້ອນຜົນແຫ່ງກໍານັ້ນ

[໔໑໒] ເມື່ອເຖິງພົບສຸດທ້າຍ ຂ້ານ້ອຍເກີດເປັນໂອປະປາຕິກະ
ທີ່ລະຫວ່າງງ່າຕົ້ນໝາກມ່ວງ
ຈຶ່ງມີຊື່ວ່າອຳພະປາລີ ຕາມນິມິດໝາຍນັ້ນ

[໔໑໓] ຂ້ານ້ອຍມີປະຊາຊົນຫຼາຍໂກດ
ແຫ່ຫ້ອມລ້ອມມາບວດໃນສາດສະໜາຂອງພຣະຊິນນະເຈົ້າ
ເປັນລູກສາວຂອງພຣະພຸດທະເຈົ້າ
ບັນລຸເຖິງຖານະທີ່ບໍ່ຫວັ່ນໄຫວ

[໔໑໔] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະມີຄວາມຊຳນານໃນເຈໂຕປະຣິຍະຍານ

[໔໑໕] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸ ຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ

[໔໑໖] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍານ
ນິຣຸດຕິປະຕິສຳພິທາຍານ ແລະປະຕິພານະປະຕິສຳພິທາຍານ
ຂອງຂ້ານ້ອຍ ບໍລິສຸດ ບໍ່ມີມົນທິນ
ຍ້ອນອຳນາດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ

[໔໑໗] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ

[໔໑໘] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາທີ່ດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ

[໔໑໙] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄໍາສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທໍາສໍາເລັດແລ້ວ ດັ່ງນີ້ແລ
ໄດ້ຮູ້ວ່າ ພຣະອໍາພະປາລີພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ອໍາພະປາລີເຖຣີຍາປະທານທີ ໙ ຈົບ**

## ໑໐. ເສລາເຖຣີຍາປະທານ

### ປະຫວັດໃນອະດີດຊາດຂອງພຣະເສລາເຖຣີ

(ພຣະເສລາເຖຣີ ເມື່ອຈະປະກາດປະຫວັດໃນອະດີດຊາດຂອງຕົນ ຈຶ່ງກ່າວວ່າ)

[໘໘໐] ໃນພັດທະກັບນີ້ ພຣະພຸດທະເຈົ້າຜູ້ເປັນເຜົ່າພັນຂອງພາມ
ມີພຣະຍົດຍິ່ງໃຫຍ່ ພຣະນາມວ່າກັດສະປະ ຕາມພຣະໂຄດ
ປະເສີດກວ່າເຈົ້າລັດທິທັງຫຼາຍ ສະເດັດອຸບັດຂຶ້ນແລ້ວ

[໘໘໑] ໃນຄັ້ງນັ້ນ ຂ້ານ້ອຍເກີດໃນຕະກູນອຸປາສິກາ
ໃນນະຄອນສາວັດຖີເຊິ່ງເປັນເມືອງປະເສີດ
ເຫັນພຣະຊິນນະເຈົ້າຜູ້ປະເສີດພຣະອົງນັ້ນ
ແລະຟັງພຣະທໍາມະເທດສະໜາແລ້ວ

[໘໘໒] ເຖິງພຣະວິຣະພຣະອົງນັ້ນເປັນບ່ອນເພິ່ງບ່ອນຣະລຶກແລະສະມາທານສີນ
ເທື່ອໜຶ່ງໃນສະມາຄົມແຫ່ງມະຫາຊົນ
ພຣະມະຫາວິຣະພຣະອົງນັ້ນ

[໘໘໓] ຜູ້ອົງອາດກວ່ານໍຣະຊົນ ຊົງປະກາດອະພິສໍາໂພທິຍານຂອງພຣະອົງ
ໃນທໍາທີ່ບໍ່ເຄີຍຟັງມາໃນການກ່ອນ
ແລະໃນອະຣິຍະສັດມີທຸກເປັນຕົ້ນວ່າ

[໘໘໔] ເຮົາມີຈັກຂຸ ຍານ ປັນຍາ ວິດຊາ
ແລະແສງສະຫວ່າງ ແກ່ຂ້ານ້ອຍ
ຂ້ານ້ອຍສະດັບ ຮໍ່າຮຽນທໍານັ້ນແລ້ວ
ຈຶ່ງສອບຖາມພິກຂຸທັງຫຼາຍ

[໘໘໕] ດ້ວຍກໍາທີ່ຂ້ານ້ອຍໄດ້ເຮັດໄວ້ດີແລ້ວນັ້ນ
ແລະດ້ວຍເຈຕະນາທີ່ຕັ້ງໄວ້ໝັ້ນ
ຂ້ານ້ອຍລະກາຍມະນຸດແລ້ວ
ຈຶ່ງໄດ້ໄປເກີດໃນສະຫວັນຊັ້ນຕາວະຕິງສາ

[໔໘໖] ບັດນີ້ ພົບນີ້ເປັນພົບສຸດທ້າຍ
ຂ້ານ້ອຍເກີດໃນຕະກູນມະຫາເສດຖີ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າ ໄດ້ຟັງພຣະສັດທຳອັນປະກອບດ້ວຍມັດຈຸ
[໔໘໗] ບວດແລ້ວ ຄົ້ນຈັບອັດຖະທຳທັງປວງ
ກະທຳອາສະວະທັງປວງໃຫ້ສິ້ນໄປແລ້ວ
ໄດ້ບັນລຸອະຣະຫັດຕະຜົນໂດຍການບໍ່ດົນເລີຍ
[໔໘໘] ຂ້າແຕ່ພຣະມະຫາມຸນີ ຂ້ານ້ອຍເປັນຜູ້ມີຄວາມຊຳນານໃນລິດ
ໃນທິບພະໂສຕະທາດ ແລະມີຄວາມຊຳນານໃນເຈໂຕປະຣິຍະຍານ
[໔໘໙] ຮູ້ປຸບເພນິວາສານຸດສະຕິຍານ
ທິບພະຈັກຂຸຂ້ານ້ອຍກໍຊຳຣະໃຫ້ມົດຈົດແລ້ວ
ອາສະວະທັງປວງກໍສິ້ນໄປແລ້ວ
ບັດນີ້ ພົບໃໝ່ບໍ່ມີອີກ
[໔໙໐] ອັດຖະປະຕິສຳພິທາຍານ ທຳມະປະຕິສຳພິທາຍານ
ນິຣຸດຕິປະຕິສຳພິທາຍານ ແລະປະຕິພານະປະຕິສຳພິທາຍານ
ຂອງຂ້ານ້ອຍ ບໍລິສຸດບໍ່ມີມົນທິນ
ຍ້ອນອຳນາດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
[໔໙໑] ກິເລດທັງຫຼາຍຂ້ານ້ອຍກໍເຜົາໄດ້ແລ້ວ
ພົບທັງປວງຂ້ານ້ອຍກໍຖອນໄດ້ແລ້ວ
ຂ້ານ້ອຍຕັດກິເລດເຄື່ອງຜູກພັນໄດ້ແລ້ວຢູ່ຢ່າງຜູ້ບໍ່ມີອາສະວະ
ເໝືອນພະຍາຊ້າງຕັດເຄື່ອງພັນທະນາການໄດ້ແລ້ວຢູ່ຢ່າງອິດສະຫຼະ
[໔໙໒] ການທີ່ຂ້ານ້ອຍມາໃນສຳນັກຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ເປັນການມາດີແລ້ວໂດຍແທ້
ວິດຊາ ໓ ຂ້ານ້ອຍໄດ້ບັນລຸແລ້ວໂດຍລຳດັບ
ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ
[໔໙໓] ຄຸນວິເສດເຫຼົ່ານີ້ ຄື ປະຕິສຳພິທາ ໔ ວິໂມກ ໘
ແລະອະພິນຍາ ໖ ຂ້ານ້ອຍກໍໄດ້ເຮັດໃຫ້ແຈ້ງແລ້ວ

ຄຳສັ່ງສອນຂອງພຣະພຸດທະເຈົ້າ ຂ້ານ້ອຍກໍໄດ້ກະທຳສຳເລັດແລ້ວ ດັ່ງນີ້ແລ ໄດ້ຮູ້ວ່າ ທ່ານພຣະເສລາພິກຂຸນີໄດ້ພາສິດຄາຖາເຫຼົ່ານີ້ ດ້ວຍປະການດັ່ງນີ້

**ເສລາເຖຣິຍາປະທານທີ ໑໐ ຈົບ**

**ຂັດຕິຍະກັນຍາວັກທີ ໔ ຈົບ**

## ລວມອຸປາທານທີ່ມີໃນວັກນີ້ ຄື

໑. ອັດຖານະສະສະຫັດສະຂັດຕິຍະນະກັນຍາເຖຣີຍາປະທານ
໒. ຈະຕຸຣາສີຕິດະຫັດສະພານມະນະ
໓. ອຸບປະລະທາຍິກາເຖຣີຍາປະທານ
໔. ສິງຄາລະມາຕຸເຖຣີຍາປະທານ
໕. ສຸກກາເຖຣີຍາປະທານ
໖. ອະພິຣູປະນັນທາເຖຣີຍາປະທານ
໗. ອັດທະກາສີເຖຣີຍາປະທານ
໘. ປຸນນິກາເຖຣີຍາປະທານ
໙. ອຳພະປາລີເຖຣີຍາປະທານ
໑໐. ເສລາເຖຣີຍາປະທານ

## ລວມວັກໄດ້ ໔ ວັກ ຄື

໑. ສຸເມທາວັກ
໒. ເອກູໂປສະຖິກະວັກ
໓. ກຸນທະລະເກສີວັກ
໔. ຂັດຕິຍະກັນຍາວັກ

ໃນວັກນີ້ ບັນດິດປະມວນຄາຖາໄວ້ໄດ້ ໑,໓໔໗ ຄາຖາ
ພ້ອມທັງອຸທານຄາຖາ ນັບໄດ້ ໑,໓໕໗ ຄາຖາ

**ເຖຣີອຸປາທານ ຈົບບໍລິບູນ**

# ພຣະສຸດຕັນຕະປິດົກ

## ຂຸດທະກະນິກາຍ ພຸດທະວົງ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

### ໑. ຣະຕະນະຈັງກະມະນະກັນ

### ວ່າດ້ວຍພຣະພຸດທະເຈົ້າຊົງເນຣະມິດບ່ອນຈົງກົມແກ້ວ

[໑] ທ້າວສະຫໍາບໍດີພົມ ຜູ້ເປັນໃຫຍ່ແຫ່ງຊາວໂລກ
ໄດ້ປະນົມມືທູນອາຣາດທະນາພຣະຜູ້ມີພຣະພາກເຈົ້າ
ຜູ້ບໍ່ມີໃຜປະເສີດຍິ່ງໄປກວ່າ
ສັດທັງຫຼາຍຜູ້ມີທຸລີໃນດວງຕາໜ້ອຍມີຢູ່ໃນໂລກນີ້
ຂໍພຣະອົງໂຜດອະນຸເຄາະໝູ່ສັດນີ້ສະແດງທໍາເທີ້ນ
ພຣະຜູ້ມີພຣະພາກເຈົ້າ ຜູ້ເປັນໃຫຍ່ແຫ່ງຊາວໂລກ ເປັນຜູ້ສູງສຸດແຫ່ງນະຣະ
ອັນໝູ່ພົມປະນົມມືທູນອາຣາດທະນາວ່າ
ສັດທັງຫຼາຍຜູ້ເປັນປາດ ມີທຸລີໃນດວງຕາໜ້ອຍມີຢູ່ໃນໂລກນີ້
ຂໍພຣະອົງໂຜດອະນຸເຄາະໝູ່ສັດນີ້ສະແດງທໍາເທີ້ນ
ຂ້າແດ່ ພຣະອົງຜູ້ຊົງເປັນຜູ້ນໍາ
ຂໍພຣະສຸຄົດເຈົ້າໂຜດສະແດງທໍາ ຂໍພຣະອົງໂຜດສະແດງອະມະຕະບົດ
ຂໍພຣະສຸຄົດເຈົ້າໂຜດສະແດງທໍາເພື່ອອະນຸເຄາະຊາວໂລກເທີ້ນ

[໒] ພຣະຕະຖາຄົດເຈົ້າ ຜູ້ຫາບຸກຄົນປຽບບໍ່ໄດ້
ຊົງເຖິງພ້ອມດ້ວຍວິດຊາແລະຈະຣະນະ ຜູ້ຄົງທີ່
ຜູ້ຊົງຄວາມຮຸ່ງເຮືອງ ຊົງໄວ້ເຊິ່ງພຣະວໍຣະກາຍເທື່ອສຸດທ້າຍ
ຊົງເກີດຄວາມກະລຸນາໃນສັບພະສັດ
ພຣະຜູ້ມີພຣະພາກເຈົ້າ ຜູ້ສາດສະດາ
ຊົງສະດັບດັ່ງນັ້ນແລ້ວຈຶ່ງຕັດພຣະດໍາຣັດນີ້ວ່າ
ພົມ ສັດເຫຼົ່າໃດຜູ້ມີໂສຕະປະສາດ
ຈົ່ງສະແດງສັດທາມາເທີ້ນ
ເຮົາບໍ່ໄດ້ປິດປະຕູອະມະຕະທໍາແກ່ສັດທັງຫຼາຍເຫຼົ່ານັ້ນ

ຍ້ອນເຮົາຮູ້ສຳຄັນວ່າຈະລຳບາກ
ຈຶ່ງບໍ່ໄດ້ສະແດງທຳທີ່ປະນີດ
ຄ່ອງແຄ່ວໃນໝູ່ມະນຸດ
ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດກວ່າມຸນີ
ເມື່ອຈະຊົງອະນຸເຄາະເຫຼົ່າເວໄນຍະສັດ
ຈຶ່ງສະເດັດອອກຈາກເຫງົ້າຕົ້ນອະຊະປາລະນິໂຄດ
ສະເດັດເຖິງນະຄອນພາຣານະສີ ໂດຍການສະເດັດດຳເນີນໄປຕາມລຳດັບ
ກໍໃນຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງບັນລັງທີ່ປະເສີດນັ້ນ
ແລະຊົງປະກາດພຣະທຳມະຈັກ
ຄືທຸກຂະສັດ ສະມຸທະຍະສັດ ນິໂຣທະສັດ
ແລະມັກຄະສັດ ອັນສູງສຸດ ແກ່ປັນຈະວັກຄີ
ໃນການນັ້ນ ພຣະຜູ້ພຣະພາກເຈົ້າຊົງປະກາດພຣະທຳມະຈັກນັ້ນແລ້ວ
ລືສີປັນຈະວັກຄີເຫຼົ່ານັ້ນ ພ້ອມດ້ວຍໝູ່ພົມ
ແລະເທວະດາປະມານ ໑໘ ໂກດ
ໄດ້ບັນລຸທຳໃນການປະຊຸມເທື່ອທຳອິດ
ສະໄໝຕໍ່ມາລືສີປັນຈະວັກຄີທັງໝົດ
ຄືໂກນທັນຍະ ວັບປະ ພັດທິຍະ ມະຫານາມະ ແລະອັດສະຊິ
ພ້ອມດ້ວຍໝູ່ພົມແລະເທວະດາປະມານ ໑໘ ໂກດ
ອັນພຣະຜູ້ມີພຣະພາກເຈົ້າຊົງແນະນຳໃຫ້ວິເສດໂດຍລຳດັບ ໃນການນັ້ນ
ໂສດາປັດຕິຜົນໄດ້ມີ (ແກ່ເຫຼົ່າເທວະດາ) ໃນການປະຊຸມເທື່ອທຳອິດ
ໃນການນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຖິງນະຄອນຣາດຊະຄື
ໂດຍການສະເດັດດຳເນີນໄປຕາມລຳດັບ
ພຣະພຸດທະອົງຜູ້ປະເສີດກວ່າມຸນີ
ປະທັບຢູ່ທີ່ພຣະເວລຸວັນມະຫາວິຫານ
ຝ່າຍພຣະເຈົ້າພິມພິສານໄດ້ຊົງສະດັບຄວາມນັ້ນ
ໄດ້ສະເດັດໄປເຝົ້າພຣະຜູ້ມີພຣະພາກເຈົ້າ
ມີບໍລິວານເປັນຈຳນວນຫຼາຍເຖິງ ໑໑ ນະຫຸດ
ພຣະອົງຊົງໃຊ້ປະທີບຂອງຫອມ ທູບ
ແລະດອກໄມ້ເປັນຕົ້ນບູຊາພຣະຜູ້ມີພຣະພາກເຈົ້າ
ໃນສະມາຄົມນັ້ນ ພຣະຜູ້ມີພຣະພາກເຈົ້າ
ຊົງສະແດງກາມາທີນະວະກະຖາ (ວ່າດ້ວຍໂທດຂອງກາມ)

ໃນເວລາຈົບພຣະທຳມະເທດສະໜາໃນຄັ້ງນັ້ນ
ສັດປະມານ ໗໔,໐໐໐ ມີພຣະຣາຊາເປັນປະມຸກໄດ້ບັນລຸທຳ
ພຣະຣາດຊະບິດາໄດ້ຊົງສະດັບຄວາມນັ້ນ ຈຶ່ງຊົງສົ່ງທູດໄປ ໙ ທ່ານ
ທູດເຫຼົ່ານັ້ນພ້ອມດ້ວຍບໍລິວານ ໙,໐໐໐
ທູນຂໍບັນພະຊາກັບພຣະມຸນີ ທູດເຫຼົ່ານັ້ນ
ພ້ອມດ້ວຍບໍລິວານທັງ ໙,໐໐໐ ໄດ້ບັນລຸອະຣະຫັດຕະຜົນ
ຄັ້ງສຸດທ້າຍ ກາລຸທາຍີອຳມາດກັບບໍລິວານ ໑,໐໐໐
ຖືເພດພິກຂຸແລ້ວ ນິມົນພຣະຜູ້ມີພຣະພາກເຈົ້າ
ພຣະສາກະຍະມຸນີຜູ້ປະເສີດ ຊົງຮັບນິມົນແລ້ວ
ສະເດັດດຳເນີນໄປຕາມທາງໃຫຍ່
ສະເດັດພ້ອມດ້ວຍພິກຂຸ ໒໐,໐໐໐ ອົງ
ພຣະພຸດທະອົງສະເດັດເຖິງນະຄອນກະບິນລະພັດ
ໂດຍການສະເດັດດຳເນີນໄປຕາມລຳດັບ
ໄດ້ຊົງເຮັດປາຕິຫານຢູ່ໃກ້ຝັ່ງແມ່ນ້ຳໂຣຫິນີ
ພຣະຜູ້ມີພຣະພາກເຈົ້າຜູ້ສາກະຍະມຸນີ ຜູ້ປະເສີດ
ປະທັບນັ່ງທ່າມກາງບັນລັງນັ້ນ
ສະແດງມະຫາເວດສັນດອນຊາດົກ
ແກ່ພຣະຣາດຊະບິດາທ່າມກາງບັນລັງນັ້ນ
ສັດ ໗໔,໐໐໐ ໄດ້ບັນລຸທຳ

[໓] (ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ)
ມະນຸດພ້ອມທັງເທວະດາເຫຼົ່ານີ້ບໍ່ຮູ້ວ່າ
ພຣະພຸດທະເຈົ້າຜູ້ເປັນຜູ້ສູງສຸດແຫ່ງນໍຣະຊົນນີ້ເປັນເຊັ່ນໃດ
ພຣະພຸດທະເຈົ້າຜູ້ຊົງປະໂຫຍດເກື້ອກູນແກ່ສັດໂລກ
ຊົງມີກຳລັງລິດ ແລະກຳລັງປັນຍາເຊັ່ນໃດ ມີພຸດທະພະລັງເຊັ່ນໃດ

[໔] ມະນຸດພ້ອມທັງເທວະດາເຫຼົ່ານີ້ບໍ່ຮູ້ວ່າ
ພຣະພຸດທະເຈົ້າຜູ້ສູງສຸດແຫ່ງນໍຣະຊົນນີ້ເປັນເຊັ່ນນີ້
ພຣະພຸດທະເຈົ້າຜູ້ຊົງປະໂຫຍດເກື້ອກູນແກ່ສັດໂລກ
ຊົງມີກຳລັງລິດແລະກຳລັງປັນຍາເຊັ່ນນີ້ ມີພຸດທະພະລັງເຊັ່ນນີ້

[໕] ເອົາລະ ເຮົາຈັກສະແດງພຸດທະພະລັງອັນປະເສີດ
ຈັກເນຣະມິດບ່ອນຈົງກົມເຊິ່ງປະດັບດ້ວຍຣັດຕະນະໃນນະພາກາດ

[໖]　　ເທວະດາປະຈຳພາກພື້ນ ເທວະດາຊັ້ນຈາຕຸມະຫາຣາຊິກາ
ຊັ້ນຕາວະຕິງສາ ຊັ້ນຍາມາ ຊັ້ນດຸສິດ ຊັ້ນນິມມານະຣະດີ
ຊັ້ນປະຣະນິມມິຕະວະສະວັດດີ ແລະເທວະດາທີ່ນັບເນື່ອງໃນໝູ່ພົມ
ຕ່າງກໍຍິນດີ ໄດ້ພາກັນສົ່ງສຽງອື້ອຶງກຶກກ້ອງ

[໗]　　ພື້ນແຜ່ນດິນພ້ອມທັງເທວະໂລກສະຫວ່າງສະໄຫວ
ໂລກັນຕະນະຣົກຈຳນວນຫຼາຍທີ່ບໍ່ເຊື່ອມຕິດກັນ
ແລະຄວາມມືດອັນໜາທຶບຖືກຂະຈັດໄປໃນການນັ້ນ
ຍ້ອນເຫັນປາຕິຫານອັນໜ້າອັດສະຈັນ

[໘]　　ແສງສະຫວ່າງເຈີດຈ້າຢ່າງໂອລານ ໄດ້ເກີດແຜ່ຊ່ານໄປໃນໂລກທັງ ໘
ຄືໃນໂລກນີ້ແລະໂລກອື່ນພ້ອມດ້ວຍເທວະດາ
ຄົນທັບ ມະນຸດ ແລະຣາກສົດ
ແຜ່ໄປຕະຫຼອດພື້ນທີ່ກວ້າງຂວາງທັງເບື້ອງລຸ່ມ ເບື້ອງເທິງ ແລະເບື້ອງຂວາງ

[໙]　　ພຣະສາດສະດາຜູ້ປະເສີດກວ່າເຫຼົ່າສັດ ບໍ່ມີໃຜປະເສີດຍິ່ງໄປກວ່າ
ຊຶ່ງເປັນຜູ້ນຳວິເສດ ອັນເທວະດາແລະມະນຸດບູຊາ
ຊຶ່ງມີອານຸພາບຫຼາຍ ມີບຸນລັກສະນະນັບຮ້ອຍ
ຊຶ່ງສະແດງປາຕິຫານ ທີ່ໜ້າອັດສະຈັນ
ໃນສະມາຄົມນັ້ນ ພຣະຊິນນະເຈົ້າຜູ້ພຣະສາດສະດາ
ສະເດັດເຫາະຂຶ້ນໃນນະພາກາດແລ້ວ
ຊຶ່ງເນຣະມິດພູເຂົາສິເນຣຸຣາດໃຫ້ເປັນບ່ອນຈົງກົມທີ່ຣື່ນຣົມ
ຫວຍເທບໃນໂລກກະທາດມີໝື່ນຈັກກະວານນະມັດສະການພຣະຕະຖາຄົດເຈົ້າແລ້ວ
ກະທຳການບູຊາພຸດທະເຈົ້າໃນສຳນັກຂອງພຣະຊິນນະເຈົ້າ

[໑໐]　　ໃນຄັ້ງນັ້ນ ພຣະສາດສະດາຜູ້ມີພຣະຈັກຂຸ
ເປັນຜູ້ສູງສຸດແຫ່ງນໍຣະຊົນ ຊຶ່ງເປັນຜູ້ນຳສັດໂລກ
ອັນທ້າວສະຫຳບໍດີພົມຜູ້ປະເສີດກວ່າເທວະດາທູນອາຣາດທະນາແລ້ວ
ຊຶ່ງພິຈາລະນາເຫັນປະໂຫຍດ
ຊຶ່ງເນຣະມິດບ່ອນຈົງກົມອັນສຳເລັດດ້ວຍຣັດຕະນະທຸກຂະນິດສຳເລັດດີແລ້ວ

[໑໑]　　ພຣະຜູ້ມີພຣະພາກເຈົ້າ ຊຶ່ງເປັນຜູ້ນຳສັດໂລກ
ຊຶ່ງມີຄວາມຊຳນານໃນປາຕິຫານ ໓ ຢ່າງຄື
ອິດທິປາຕິຫານ ອາເທສະນາປາຕິຫານ

ແລະອະນຸສາສະນີປາຕິຫານ
ຊົງເນຣະມິດບ່ອນຈົງກົມອັນສຳເລັດດ້ວຍຣັດຕະນະທຸກຊະນິດສຳເລັດດີແລ້ວ

[໑໘] ຊົງສະແດງພູເຂົາສິເນຣຸເຊິ່ງສູງສຸດໃນໂລກກະທາດມີໝື່ນຈັກກະວານ
ເປັນເໝືອນເສົາລຽງກັນໄປຕາມລຳດັບໃນບ່ອນຈົງກົມເຊິ່ງເຮັດດ້ວຍຣັດຕະນະ

[໑໙] ພຣະຊິນນະເຈົ້າຊົງເນຣະມິດບ່ອນຈົງກົມເລີຍຂອບປາກໝື່ນຈັກກະວານ
ຊານທັງ ໔ ດ້ານ ບ່ອນຈົງກົມທີ່ສຳເລັດດ້ວຍຣັດຕະນະ ສຳເລັດດ້ວຍຄຳລ້ວນ

[໑໔] ຊົງເນຣະມິດໄພທີຄຳລ້ວນ ປູດ້ວຍແຜ່ນຄຳ
ອັນເໝາະສົມແກ່ຂື່ແລະເຕົ້າໄວ້ທັງ ໔ ຂ້າງ

[໑໕] ຣັດຕະນະຈົງກົມທີ່ຊົງເນຣະມິດ ເຕັມໄປດ້ວຍຊາຍແກ້ວມະນີ
ຊາຍແກ້ວມຸກດາ ສະຫວ່າງໄປທົ່ວທິດ ເໝືອນດວງອາທິດອຸໄທ

[໑໖] ພຣະຊິນະສຳມາສຳພຸດທະເຈົ້າ ຜູ້ຊົງເປັນນັກປາດ
ມີພຣະລັກສະນະອັນປະເສີດ ໑໔ ປະການ
ຊົງຮຸ່ງເຮືອງດ້ວຍພຣະຣັດສະໝີທີ່ຮຸ່ງເຮືອງ
ສະເດັດຈົງກົມຢູ່ ໃນບ່ອນຈົງກົມນັ້ນ

[໑໗] ເທບທັງປວງທີ່ມາປະຊຸມກັນ
ຕ່າງກໍໂຮຍດອກມົນທາຣົບ ດອກປະທຸມ
ແລະດອກປາຣິສັດຕະກະອັນເປັນທິບລົງເທິງບ່ອນຈົງກົມ

[໑໘] ເທບທັງຫຼາຍໃນໝື່ນຈັກກະວານ
ໄດ້ເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຈຶ່ງໄດ້ມາປະຊຸມກັນ
ຕ່າງກໍຍິນດີຣ່າເຣິງບັນເທີງໃຈ ໝອບລົງຂາບ

[໑໙] ເທວະດາທັງຫຼາຍຊັ້ນຕາວະຕິງສາ ຊັ້ນຍາມາ ຊັ້ນດຸສິດ
ຊັ້ນນິມມານະຣະດີ ແລະຊັ້ນປະຣະນິມມິຕະວະສະວັດດີ
ຕ່າງກໍມີຈິດເບີກບານ ມີໃຈດີ
ພາກັນແນມເບິ່ງພຣະອົງຜູ້ຊົງເປັນຜູ້ນຳສັດໂລກ

[໔໐] ນາກ ຄຸດ ຫຼື ແມ່ນກິນນະຣະ ພ້ອມດ້ວຍເຫຼົ່າເທວະດາ
ຄົນທັບ ມະນຸດ ແລະຣາກສົດ ຕ່າງກໍໄດ້ເຫັນພຣະສາດສະດາ

ຜູ້ຊົງເກື້ອກູນ ອະນຸເຄາະສັດໂລກ
ເໝືອນດວງຈັນລອຍເດ່ນຢູ່ໃນນະພາກາດ

[໘໑] ເຫຼົ່າອາພັດສະຣະພົມ ສຸພະກິນຫະພົມ ເວຫັບຜະລະພົມ
ແລະອະກະນິດຖະພົມ ຕ່າງອົງກໍນຸ່ງຜ້າຂາວລ້ອມຢືນປະນົມມື

[໘໘] ຕ່າງກໍໂຮຍດອກໄມ້ ໕ ສີ ແລະດອກມົນທາຣົບ
ທີ່ເຈືອດ້ວຍກະແຈະຈັນ ແລະພາກັນໂບກຜ້າຢູ່ເທິງທ້ອງຟ້າ
ໃນຄັ້ງນັ້ນ ທັງໝົດຕ່າງກໍເປ່ງສຽງວ່າ
ໜ້າອັດສະຈັນ ພຣະຊິນນະເຈົ້າຜູ້ຊົງເກື້ອກູນ ອະນຸເຄາະສັດໂລກ

[໘໙] ພຣະອົງຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຊົງເປັນພຣະສາດສະດາ ຜາກົດດັ່ງເສົາທຸງ
ເປັນຫຼັກໄຊ ເປັນບ່ອນເພິ່ງອາໄສ ແລະເປັນປະທີບຂອງປວງສັດ

[໘໔] ເທວະດາທັງຫຼາຍຜູ້ມີລິດຫຼາຍໃນໝື່ນຈັກກະວານ
ຕ່າງກໍຍິນດີຮ່າເຮີງບັນເທີງໃຈ ພາກັນແວດລ້ອມຖວາຍບັງຄົມ

[໘໕] ເທບພະບຸດແລະເທບກັນຍາ ຕ່າງກໍເຫຼື້ອມໃສ
ມີໃຈຍິນດີ ພາກັນບູຊາພຣະຜູ້ອົງອາດກວ່ານໍຣະຊົນ ດ້ວຍດອກໄມ້ ໕ ສີ

[໘໖] ເທວະດາທັງຫຼາຍ ໄດ້ເຫັນພຣະສາດສະດາພຣະອົງນັ້ນ
ຕ່າງກໍເຫຼື້ອມໃສ ມີໃຈຍິນດີ
ພາກັນບູຊາພຣະອົງຜູ້ອົງອາດກວ່ານໍຣະຊົນ
ດ້ວຍດອກໄມ້ ໕ ສີ ແລ້ວເປ່ງສຽງວ່າ

[໘໗] ໂອນໍ ໜ້າອັດສະຈັນ ຂົນພອງສະຫຍອງເກົ້າ
ບໍ່ເຄີຍຜາກົດໃນໂລກ ຄວາມອັດສະຈັນ
ຂົນພອງສະຫຍອງເກົ້າເຊັ່ນນີ້ ບໍ່ເຄີຍຜາກົດ

[໘໘] ເທວະດາເຫຼົ່ານັ້ນນັ່ງຢູ່ໃນພິບຂອງຕົນ
ໄດ້ເຫັນຄວາມອັດສະຈັນໃນນະພາກາດແລ້ວ
ພາກັນຫົວສຽງດັງ

[໘໙] ເຫຼົ່າພຸມມະເທວະດາທີ່ປະຈຳຢູ່ຕາມຕົ້ນໄມ້

ແລະອາກາສັດຖະເທວະດາທີ່ປະຈຳຢູ່ຕາມດວງດາວ
ຕ່າງກໍມີຄວາມຍິນດີຮ່າເຮີງບັນເທີງໃຈ ພາກັນປະນົມມືນະມັດສະການ

[໓໐] ແມ່ນພວກນາກທີ່ມີອາຍຸຍືນ ມີບຸນຍາທິການ ມີລິດຫຼາຍ
ຕ່າງກໍມີຄວາມບັນເທີງໃຈ ນະມັດສະການ
ບູຊາພຣະສາດສະດາເປັນຜູ້ສູງສຸດແຫ່ງນໍຣະຊົນ

[໓໑] ບັນເລງສັງຄີຕະ ຕີກອງກັນຢູ່ໃນອາກາດກາງເວຫາ
ຍ້ອນເຫັນເຫດອັດສະຈັນໃນນະພາກາດ

[໓໒] ເທວະດາຈຳນວນຫຼາຍ ເປົ່າສັງ ແກວ່ງບັນເດາະ
ເຄາະມະໂຫຣະທຶກ ບັນເລງຢູ່ໃນນະພາກາດ
ຍ້ອນເຫັນຄວາມມະຫັດສະຈັນໃນນະພາກາດ

[໓໓] ເປັນຄວາມອັດສະຈັນແທ້ນໍ ບໍ່ເຄີຍຜາກົດ
ເກີດຂົນພອງສະຫຍອງເກົ້າຂຶ້ນແລ້ວ
ເຮົາທັງຫຼາຍໄດ້ຄວາມສຳເລັດປະໂຫຍດທີ່ຍັ່ງຍືນ
ໃນຂະນະເຮົາທັງຫຼາຍໃຫ້ສຳເລັດສະເພາະແລ້ວ

[໓໔] ຍ້ອນໄດ້ສະດັບຄຳວ່າ ພຸດໂທ
ເທວະດາເຫຼົ່ານັ້ນເກີດປີຕິໃນຂະນະນັ້ນ
ຕ່າງກໍຢືນປະນົມມືກ່າວວ່າ ພຸດໂທ ພຸດໂທ

[໓໕] ສັດຕ່າງ ໆ ທີ່ຢູ່ໃນຟາກຟ້າ
ຕ່າງກໍປະນົມມືເປ່ງສຽງສາທຸການດັງກຶກກ້ອງ
ແລະສຽງໂຫ່ຮ້ອງບັນລືລັ່ນສະໜັ່ນຫວັ່ນໄຫວ

[໓໖] ນາກທັງຫຼາຍຕ່າງກໍຂັບຮ້ອງ ປະສານສຽງ
ປະໂຄມ ຕົບຂະນົດ ຟ້ອນລຳ
ແລະຕ່າງກໍໂຮຍດອກໄມ້ ໕ ສີ ແລະດອກມົນທາຣົບ
ທີ່ເຈືອດ້ວຍກະແຈະຈັນ

[໓໗] ຂາບທູນວ່າ ຂ້າແຕ່ພຣະມະຫາວິຣະ
ທີ່ພຣະຍຸຄົນບາດຂອງພຣະອົງມີຈັກກະລັກສະນະເປັນຮູບທຸງໄຊ
ຮູບທຸງປະຕາກ ຮູບວະຊິຣາວຸດ ຮູບແວ່ນແກ້ວ ແລະຮູບຂໍ

[໓໗] ບໍ່ມີໃຜທຽບກັບພຣະອົງໄດ້ຍ້ອນຮູບກາຍ
ສີນ ສະມາທິ ປັນຍາ ແລະວິມຸດຕິ
ອັນໜຶ່ງ ບໍ່ມີໃຜສະເໝີເໝືອນກັບພຣະອົງໄດ້
ຍ້ອນການປະກາດພຣະທຳມະຈັກ

[໓໙] ກຳລັງກາຍຂອງພະຍາຊ້າງ ໑໐ ເຊືອກ
ເທົ່າກັບກຳລັງກາຍຕາມປົກກະຕິຂອງພຣະອົງ
ບໍ່ມີໃຜສະເໝີກັບພຣະອົງດ້ວຍກຳລັງລິດ
ທັງບໍ່ມີໃຜສະເໝີເໝືອນກັບພຣະອົງໄດ້
ຍ້ອນການປະກາດພຣະທຳມະຈັກ

[໔໐] ທ່ານທັງຫຼາຍຈົ່ງນະມັດສະການພຣະມະຫາມຸນີ
ຜູ້ປະກອບດ້ວຍຄຸນສົມບັດທຸກປະການ
ຊົງປະກອບດ້ວຍອົງຄຸນທັງປວງ
ຊົງມີພຣະກະລຸນາ ຊົງເປັນບ່ອນເພິ່ງຂອງສັດໂລກແນວນີ້

[໔໑] ພຣະອົງຍ່ອມຄວນແກ່ການອະພິວາດ ການສະດຸດີ
ການໄຫວ້ ການສັນເສີນ ການນະມັດສະການ
ແລະການບູຊາທຸກຢ່າງ

[໔໒] ຂ້າແຕ່ພຣະມະຫາວີຣະ ບຸກຄົນຜູ້ປະເສີດທີ່ສຸດ
ໃນບັນດາບຸກຄົນຜູ້ທີ່ຕ້ອງໄຫວ້
ແລະບຸກຄົນທີ່ຄວນໄຫວ້ທັງໝົດໃນໂລກເຊັ່ນກັບພຣະອົງບໍ່ມີ

[໔໓] ພຣະສາຣີບຸດຜູ້ມີປັນຍາຫຼາຍ
ເປັນຜູ້ສະຫຼາດໃນສະມາທິແລະໃນຊານ ຢືນຢູ່ທີ່ພູເຂົາຄິດຊະກູດ
ໄດ້ເຫັນພຣະອົງ ຜູ້ຊົງເປັນຜູ້ນຳສັດໂລກ

[໔໔] ແນມເບິ່ງພຣະອົງຜູ້ອົງອາດກວ່ານໍຣະຊົນ
ຜູ້ງາມເໝືອນຕົ້ນພະຍາໄມ້ສາລະທີ່ມີດອກບານສະພັ່ງ
ເໝືອນດວງຈັນໃນທ້ອງຟ້າ
ແລະເໝືອນດວງອາທິດໃນຍາມທ່ຽງວັນ

[໔໕] ເຫັນພຣະອົງຜູ້ຊົງເປັນຜູ້ນຳສັດໂລກ ຜູ້ເປັນນັກປາດ
ເຊິ່ງມີພຣະຣັດສະໝີແວດລ້ອມຢູ່ດ້ານລະວາ

ຮຸ່ງເຮືອງເໝືອນຕົ້ນພຶກສາປະທີບ
ງາມເດ່ນເໝືອນດວງອາທິດຍາມຮຸ່ງອະຣຸນ

[໔໖] ພຣະສາຣີບຸດໄດ້ນິມົນພິກຂຸ ໕໐໐ ອົງ
ມີກິດອັນທຳແລ້ວ ຜູ້ຄົງທີ່ ຜູ້ເປັນພຣະຂີນາສົບ
ຜູ້ປາສະຈາກມົນທິນໃຫ້ມາປະຊຸມກັນໃນຂະນະນັ້ນ

[໔໗] ແລ້ວກ່າວວ່າ ພຣະຊິນນະເຈົ້າຊົງສະແດງປາຕິຫານ
ອັນເຮັດສັດໂລກທັງຜອງໃຫ້ເຫຼື້ອມໃສ
ແມ່ນເຮົາທັງຫຼາຍກໍຈັກໄປຂາບໄຫວ້ພຣະຊິນນະເຈົ້າ ໃນບ່ອນນັ້ນ

[໔໘] ມາເທີ້ນ ເຮົາທັງປວງຈັກໄປເຝົ້າພຣະຊິນນະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ຈັກທູນຖາມໃຫ້ບັນເທົາຄວາມສົງໄສ

[໔໙] ພິກຂຸຜູ້ມີປັນຍາຮັກສາຕົນ ສັງລວມອິນຊີເຫຼົ່ານັ້ນ
ຮັບຄຳວ່າ ສາທຸ ແລ້ວຕ່າງກໍຖືບາດແລະຈີວອນ
ພາກັນເຂົ້າໄປຫາ (ພຣະສາຣີບຸດ) ຢ່າງຟ້າວຟັ່ງ

[໕໐] ພຣະສາຣີບຸດຜູ້ມີປັນຍາຫຼາຍ
ພ້ອມດ້ວຍພຣະຂີນາສົບຜູ້ປາສະຈາກມົນທິນ
ຜູ້ຝຶກຕົນໃນການຝຶກອັນປະເສີດ ພາກັນໄປເຝົ້າດ້ວຍລິດ

[໕໑] ພຣະສາຣີບຸດຜູ້ເປັນເຈົ້າຄະນະໃຫຍ່ອັນພິກຂຸເຫຼົ່ານັ້ນແວດລ້ອມ
ເຂົ້າເຝົ້າດ້ວຍລິດ ດັ່ງເທວະດາລອຍມາໃນຟາກຟ້າ

[໕໒] ພິກຂຸເຫຼົ່ານັ້ນ ຜູ້ມີວັດງາມ ມີຄວາມເຄົາລົບຢຳເກງ
ບໍ່ໄອ ບໍ່ຈາມ ພາກັນເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ

[໕໓] ເມື່ອເຂົ້າເຝົ້າແລ້ວ ເຫັນພຣະສະຍຳພູວີຣະເຈົ້າຜູ້ຊົງເປັນຜູ້ນຳສັດໂລກ
ລອຍຟູເດ່ນຢູ່ໃນນະພາກາດເໝືອນດວງຈັນໃນຟາກຟ້າ

[໕໔] ເຫັນພຣະພຸດທະເຈົ້າ ຜູ້ຊົງເປັນຜູ້ນຳສັດໂລກ
ຜູ້ຮຸ່ງເຮືອງດັ່ງຕົ້ນພຶກສາປະທີບ
ເໝືອນສາຍຟ້າໃນທ້ອງຟ້າ
ແລະເໝືອນດວງອາທິດໃນຍາມທ່ຽງວັນ

[໕໕] ພິກຂຸທັງ ໕໐໐ ອົງ ເຫັນພຣະພຸດທະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກ ດັ່ງຫ້ວງນ້ຳໃສແຈ່ວ
ແລະດັ່ງປະທຸມະຊາດທີ່ກຳລັງບານ

[໕໖] ຕ່າງກໍຍິນດີຣ່າເຣິງບັນເທີງໃຈ
ປະນົມມືໝອບລົງນອບນ້ອມ
ແທບພຣະຍຸຄົນບາດທີ່ມີຈັກກະລັກສະນະຂອງພຣະສາດສະດາ

[໕໗] ພຣະສາຣີບຸດຜູ້ມີປັນຍາຫຼາຍ
ມີຜິວພັນສະເໝີເໝືອນດອກກອນໄກ່
ເປັນຜູ້ສະຫຼາດໃນສະມາທິແລະໃນຊານ
ໄຫວ້ພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກ

[໕໘] ພຣະມະຫາໂມກຄັນລານະຜູ້ມີລິດຫຼາຍ
ບໍ່ມີໃຜສະເໝີໄດ້ດ້ວຍກຳລັງລິດ
ມີຜິວພັນສະເໝີເໝືອນດອກອຸບົນຂຽວ
ໄດ້ບັນລືມາ (ດ້ວຍວິໄສແຫ່ງລິດ)
ເໝືອນເມກໃນລະດູຝົນຄຳຣົນຢູ່

[໕໙] ແມ່ນພຣະມະຫາກັດສະປະເຖຣະຜູ້ມີຜິວພັນດັ່ງຄຳທີ່ຫຼອມຢູ່ໃນເບົ້າ
ພຣະສາດສະດາຊົງສັນເສີນຕັ້ງໄວ້ວ່າ
ເປັນຜູ້ເລີດໃນຝ່າຍທຸດົງຄຸນ

[໖໐] ພຣະອະນຸຣຸດທະເຖຣະຜູ້ເປັນເຈົ້າຄະນະໃຫຍ່
ເລີດກວ່າບັນດາພິກຂຸທັງຫຼາຍຝ່າຍທິບພະຈັກຂຸ
ເປັນພຣະຍາດພີ່ນ້ອງຜູ້ປະເສີດຂອງພຣະຜູ້ມີພຣະພາກເຈົ້າ ຢືນຢູ່ໃນບ່ອນບໍ່ໄກ

[໖໑] ພຣະອຸປາລີເຖຣະຜູ້ສະຫຼາດໃນອາບັດ ອະນາບັດ ແລະສະເຕກິດສາ
ພຣະສາດສະດາຊົງສັນເສີນຕັ້ງໄວ້ວ່າ
ເປັນຜູ້ເລີດໃນຝ່າຍພຣະວິໄນ

[໖໒] ພຣະເຖຣະຜູ້ລືສີຜາກົດຊື່ວ່າປຸນນະມັນຕານີບຸດ
ຜູ້ຮູ້ແຈ້ງໃນອັດຖະອັນລະອຽດສຸຂຸມ
ປະເສີດກວ່າພິກຂຸທັງຫຼາຍຝ່າຍພຣະທຳມະກະຖຶກ ເປັນຫົວໜ້າຄະນະ

[໒໓] ພຣະມຸນີມະຫາວີຣະຜູ້ຊົງສະຫຼາດໃນອຸປະມາ ຕັດຄວາມສົງໄສ
ຊົງຮູ້ຈິດຂອງທ່ານເຫຼົ່ານັ້ນແລ້ວ
ຈຶ່ງຕັດເຖິງພຣະຄຸນຂອງພຣະອົງວ່າ

[໒໔] ສິ່ງທີ່ນັບບໍ່ໄດ້ ມີບ່ອນສຸດ
ທີ່ບຸກຄົນຮູ້ບໍ່ໄດ້ ໔ ຢ່າງ
ຄື (໑) ໝູ່ສັດ (໒) ອາກາດ (໓) ອະນັນຕະຈັກກະວານ
(໔) ພຣະພຸດທະຍານທີ່ຫາປະມານບໍ່ໄດ້
ສິ່ງເຫຼົ່ານີ້ອັນໃຜ ໆ ບໍ່ອາດຮູ້ແຈ້ງໄດ້

[໒໕] ການທີ່ເຮົາຈະສະແດງລິດນີ້ ຈະອັດສະຈັນອັນໃດໃນໂລກນໍ
ຍ້ອນຄວາມອັດສະຈັນທີ່ເຮັດໃຫ້ເກີດຂົນພອງສະຫຍອງເກົ້າຢ່າງອື່ນ
ຍັງມີຢູ່ອີກຫຼາກຫຼາຍ

[໒໖] ໃນການໃດ ເຮົາເປັນເທບຢູ່ໃນສະຫວັນຊັ້ນດຸສິດ
ໃນການນັ້ນ ເຮົາມີຊື່ວ່າສັນດຸສິດເທບພະບຸດ
ເທວະດາໃນໝື່ນຈັກກະວານ ໄດ້ມາປະຊຸມກັນແລ້ວ
ປະນົມມືກ່າວອັນເຊີນເຮົາວ່າ

[໒໗] ຂ້າແຕ່ພຣະມະຫາວີຣະ
ບັດນີ້ ເຖິງເວລາສົມຄວນຂອງພຣະອົງແລ້ວ
ຂໍເຊີນພຣະອົງສະເດັດອຸບັດໃນພຣະອຸທອນມານດາ
ຕັດສະຮູ້ອະມະຕະບົດຊ່ອຍສັດໂລກພ້ອມທັງເທວະໂລກ
ໃຫ້ຂ້າມພົ້ນ (ສັງສາຣະວັດ) ເທີ້ນ

[໒໘] ຂະນະເມື່ອເຮົາຈຸຕິຈາກສະຫວັນຊັ້ນດຸສິດລົງສູ່ຄັນນັ້ນ
ໂລກກະທາດມີໝື່ນຈັກກະວານ ແຜ່ນດິນກໍໄຫວ

[໒໙] ຂະນະເມື່ອເຮົາມີຄວາມຮູ້ສຶກຕົວ ປະສູດຈາກພຣະອຸທອນມານດານັ້ນ
ທວຍເທບກໍພາກັນສາທຸການ ໝື່ນຈັກກະວານກໍໄຫວ

[໗໐] ໃນການກ້າວລົງສູ່ພຣະອຸທອນມານດາ
ແລະໃນການປະສູດ ບໍ່ມີໃຜສະເໝີດ້ວຍເຮົາ
ເຮົາເປັນຜູ້ປະເສີດທີ່ສຸດໃນການຕັດສະຮູ້
ແລະໃນການປະກາດພຣະທຳມະຈັກ

[ກ໑] ໂອ ຄວາມອັດສະຈັນໄດ້ມີໃນໂລກ
ຍ້ອນພຣະພຸດທະເຈົ້າຊົງພຣະຄຸນຫຼາຍ
ໂລກກະທາດມີໝື່ນຈັກກະວານໄຫວ ໖ ເທື່ອ
ມີຣັດສະໝີສະຫວ່າງຈ້າ ໜ້າອັດສະຈັນຂົນພອງສະຫຍອງເກົ້າ

[ກ໔] ກໍສະໄໝນັ້ນ ພຣະຜູ້ມີພຣະພາກຊິນນະເຈົ້າ
ຜູ້ຈະເລີນທີ່ສຸດໃນໂລກ ຊົງອົງອາດກວ່ານໍຣະຊົນ
ສະເດັດຈົງກົມດ້ວຍພຣະລິດ ສະແດງໃຫ້ມະນຸດພ້ອມທັງເທວະໂລກເຫັນ

[ກ໓] ພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກ
ສະເດັດຈົງກົມຢູ່ ໃນບ່ອນຈົງກົມນັ້ນເອງ
ຕັດທຳມີກະຖາ ບໍ່ສະເດັດກັບໃນລະຫວ່າງ
ເໝືອນສະເດັດຈົງກົມຢູ່ໃນບ່ອນຈົງກົມພຽງ ໔ ສອກ

[ກ໔] ພຣະສາຣີບຸດຜູ້ມີປັນຍາຫຼາຍ
ເປັນຜູ້ສະຫຼາດໃນສະມາທິແລະຊານ
ເຖິງຄວາມບໍລິບູນດ້ວຍປັນຍາ
ໄດ້ທູນຖາມພຣະສາດສະດາຜູ້ຊົງເປັນຜູ້ນຳສັດໂລກວ່າ

[ກ໕] ຂ້າແຕ່ພຣະມະຫາວີຣະ ເປັນຜູ້ສູງສຸດແຫ່ງນໍຣະຊົນ
ອະພິນິຫານຂອງພຣະອົງເປັນເຊັ່ນໃດ
ຂ້າແຕ່ພຣະວີຣະເຈົ້າ ພຣະອົງຊົງປາຖະໜາ
ພຣະໂພທິຍານອັນສູງສຸດໃນການໃດ

[ກ໖] ທານ ສີນ ເນກຂຳມະ ປັນຍາ ວິຣິຍະ ຂັນຕິ
ສັດຈະ ແລະອະທິຖານເປັນເຊັ່ນໃດ ເມດຕາແລະອຸເປກຂາເປັນເຊັ່ນໃດ

[ກ໗] ຂ້າແຕ່ພຣະມະຫາວີຣະ ຜູ້ຊົງເປັນຜູ້ນຳສັດໂລກ
ປາຣະມີ ໑໐ ເປັນແນວໃດ ອຸປະປາຣະມີ ໑໐ ເຕັມໄດ້ແນວໃດ
ແລະປະຣະມັດຖະປາຣະມີ ໑໐ ເຕັມໄດ້ແນວໃດ
ຍ້ອນຊົງອະທິຖານກຳອັນໃດ ເປັນອະທິບໍດີໄດ້ແນວໃດ
ມີປາຣະມີໄດ້ແນວໃດ ນັກປາດເປັນເຊັ່ນໃດ ໃນໂລກ
ເມດຕາ ກະລຸນາ ມຸທິຕາ ແລະອຸເປກຂາເປັນເຊັ່ນໃດ
ພຣະອົງຊົງພໍ່າເພັງພຸດທະກາຣະກະທຳ

(ທຳທີ່ເຮັດໃຫ້ເປັນພຣະພຸດທະເຈົ້າ)
ໃຫ້ບໍລິບູນໄດ້ແນວໃດ

[໗໘] ພຣະສາດສະດາ ຜູ້ມີພຣະສຸຣະສຽງມ່ວນດັ່ງສຽງນົກກາຣະເວກ
ອັນພຣະສາຣີບຸດນັ້ນທູນຖາມແລ້ວ ຊົງພະຍາກອນໃຫ້ເຢັນໃຈ
ແລະຊົງເຮັດມະນຸດໂລກພ້ອມທັງເທວະໂລກໃຫ້ຣ່າເຣີງ

[໗໙] ພຣະສາດສະດາຊົງປະກາດປະໂຫຍດເກື້ອກູນແກ່ສັດໂລກ
ທີ່ພຣະພຸດທະຊິນນະເຈົ້າໃນອະດີດຊົງສະແດງໄວ້ ຊົງຊົມເຊີຍ
ທີ່ນຳສືບ ໆ ກັນມາຂອງພຣະພຸດທະເຈົ້າ
ດ້ວຍພຣະພຸດທະຍານທີ່ໄປຕາມປຸບເພນິວາສານຸດສະຕິຍານ
ໃນໂລກພ້ອມທັງເທວະໂລກວ່າ

[໘໐] ທ່ານທັງຫຼາຍຈົ່ງເຮັດຈິດໃຫ້ເກີດປີຕິປາໂມດ
ໃຫ້ບັນເທົາລູກສອນຄືຄວາມເສົ້າໂສກ ໃຫ້ໄດ້ສົມບັດທັງປວງແລ້ວຈົ່ງຟັງເຮົາ

[໘໑] ທ່ານທັງຫຼາຍຈົ່ງດຳເນີນໄປຕາມມັກທີ່ຍ່ຳຍີຄວາມເມົາ
ບັນເທົາຄວາມເສົ້າໂສກ ເປື້ອງຕົນຈາກສົງສານ
ເປັນບ່ອນສິ້ນທຸກທັງປວງ ໂດຍຄວາມເຄົາລົບເທີ້ນ

**ຣະຕະນະຈັງກະມະນະ ກັນ ຈົບ**

## ໔. ສຸເມທະກະຖາ

### ວ່າດ້ວຍສຸເມທະພຸດທະເຈົ້າ

[໑] ໃນ ໔ ອະສົງໄຂ ໑໐໐,໐໐໐ ກັບ
ມີນະຄອນໜຶ່ງຊື່ວ່າອະມອນເປັນນະຄອນທີ່ໜ້າຊົມ ເປັນຕາອອນຊອນ

[໔] ເປັນນະຄອນທີ່ສົມບູນດ້ວຍເຂົ້າ ນ້ຳ
ບໍ່ວ່າງເວັ້ນຈາກສຽງ ໑໐ ປະການ
ຄື ສຽງຊ້າງ ສຽງມ້າ ສຽງກອງ ສຽງສັງ
ສຽງລົດ (ສຽງຕະໂພນ ສຽງພິນ ສຽງເພງຂັບ ສຽງສິ່ງ)
ແລະສຽງເຊື້ອເຊີນດ້ວຍຂອງກິນແລະເຄື່ອງດື່ມວ່າ
ເຊີນທ່ານທຍ້ຳກິນ ເຊີນທ່ານດື່ມ

[໓]　　ເປັນນະຄອນທີ່ສົມບູນດ້ວຍອົງຄຸນທັງປວງ
ປະກອບດ້ວຍວຽກງານທຸກຢ່າງ
ສົມບູນດ້ວຍຣັດຕະນະ ໗ ປະການ
ຄັບຄັ່ງໄປດ້ວຍໝູ່ຊົນຕ່າງ ໆ
ເປັນນະຄອນທີ່ອຸດົມສົມບູນເໝືອນເທບນະຄອນ
ເປັນບ່ອນຢູ່ຂອງຜູ້ມີບຸນ

[໔]　　ເຮົາເປັນພາມນາມວ່າ ສຸເມທະ
ຢູ່ໃນນະຄອນອະມອນວະດີ ສັ່ງສົມຊັບໄວ້ຫຼາຍໂກດ
ມີຊັບສົມບັດແລະທັນຍາຫານຫຼາກຫຼາຍ

[໕]　　ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຈົບໄຕຣເພດ
ເຖິງຄວາມສຳເລັດໃນຄຳພີທຳນາຍລັກສະນະ
ແລະອິຕິຫາສະແລະໃນທຳຂອງຕົນ

[໖]　　ນັ່ງຢູ່ໃນບ່ອນສະຫງັດ ຄິດແນວນີ້ວ່າ
ການເກີດໃນພົບໃໝ່ແລະການແຕກໄປແຫ່ງສະຣີຣະເປັນທຸກ
ຄວາມຫຼົງຕາຍເປັນທຸກ ຊີວິດຖືກຊະຣາທຳລາຍ

[໗]　　ກໍໃນຄັ້ງນັ້ນ ເຮົາມີຄວາມເກີດ ຄວາມແກ່
ຄວາມເຈັບໄຂ້ເປັນທຳມະດາ
ເຮົາຈັກສະແຫວງຫາພຣະນິບພານ
ທີ່ບໍ່ແກ່ ບໍ່ຕາຍ ເປັນແດນກະເສມ

[໘]　　ເອົາເທີ້ນ ເຮົາຄວນເປັນຜູ້ບໍ່ມີຄວາມຫ່ວງໃຍ
ບໍ່ມີຄວາມຕ້ອງການ ລະຖິ້ມຮ່າງກາຍທີ່ເປື່ອຍເນົ່າ
ເຕັມໄປດ້ວຍຊາກສົບຕ່າງ ໆ ນີ້ໄປສາ

[໙]　　ມັກນັ້ນບໍ່ອາດຈະບໍ່ເປັນເຫດ ມັກນັ້ນທີ່ມີຢູ່ກໍຈັກມີ
ເຮົາຈັກສະແຫວງຫາມັກນັ້ນ ເພື່ອລຸດພົ້ນໄປຈາກພົບ

[໑໐]　　ເມື່ອຄວາມທຸກມີ ຊື່ວ່າຄວາມສຸກກໍຕ້ອງມີສັນໃດ
ເມື່ອພົບມີຢູ່ ວິພົບກໍຈຳຕ້ອງປາຖະໜາ ສັນນັ້ນ

[໑໑] ເມື່ອຄວາມຮ້ອນມີ ຄວາມເຢັນຢ່າງອື່ນກໍຕ້ອງມີສັນໃດ
ເມື່ອໄຟ ໓໔ ຢ່າງມີຢູ່
ນິບພານ (ຄວາມດັບ) ກໍຈຳຕ້ອງປາຖະໜາ ສັນນັ້ນ

[໑໔] ເມື່ອຄວາມຊົ່ວມີ ແມ່ນຄວາມດີກໍຕ້ອງມີ ສັນໃດ
ເມື່ອຄວາມເກີດມີຢູ່ ຄວາມບໍ່ເກີດກໍຈຳຕ້ອງປາຖະໜາ ສັນນັ້ນ

[໑໓] ບຸຣຸດຜູ້ຕົກໄປໃນຂຸມຄູດເຫັນສະນ້ຳເຕັມ
ບໍ່ເຂົ້າໄປສູ່ສະນ້ຳນັ້ນ ນັ້ນບໍ່ແມ່ນຄວາມຜິດຂອງສະນ້ຳ ສັນໃດ

[໑໔] ເມື່ອສະນ້ຳອຳມະຣິດມີຢູ່ ບຸກຄົນບໍ່ສະແຫວງຫາສະນ້ຳນັ້ນ
ອັນເປັນທີ່ຊຳຣະມົນທິນຄືກິເລດ
ນັ້ນກໍບໍ່ແມ່ນຄວາມຜິດຂອງສະນ້ຳອຳມະຣິດ ສັນນັ້ນ

[໑໕] ເມື່ອທາງໄປມີຢູ່ ບຸຣຸດນັ້ນຖືກຂ້າເສິກປິດລ້ອມບໍ່ຍອມໜີໄປ
ນັ້ນບໍ່ແມ່ນຄວາມຜິດຂອງຫົນທາງ ສັນໃດ

[໑໖] ເມື່ອທາງກະເສມມີຢູ່ ບຸກຄົນຖືກກິເລດປິດລ້ອມ
ບໍ່ສະແຫວງຫາທາງນັ້ນ ນັ້ນກໍບໍ່ແມ່ນຄວາມຜິດຂອງທາງອັນກະເສມ ສັນນັ້ນ

[໑໗] ຄົນເຈັບ ເມື່ອໝໍມີຢູ່ ກໍບໍ່ໃຫ້ໝໍຮັກສາ
ຄວາມເຈັບໄຂ້ນັ້ນ ນັ້ນບໍ່ແມ່ນຄວາມຜິດຂອງໝໍ ສັນໃດ

[໑໘] ຄົນມີທຸກຖືກຄວາມເຈັບໄຂ້ຄືກິເລດບຽດບຽນ
ບໍ່ສະແຫວງຫາອາຈານ ນັ້ນກໍບໍ່ແມ່ນຄວາມຜິດຂອງອາຈານຜູ້ແນະນຳ
ເອົາເຫີ້ນເຮົາຄວນເປັນຜູ້ບໍ່ມີຄວາມຫ່ວງໃຍ
ບໍ່ມີຄວາມຕ້ອງການ ລະຖິ້ມຮ່າງກາຍທີ່ເປື່ອຍເນົ່າ
ເຕັມໄປດ້ວຍຊາກສົບຕ່າງ ໆ ນີ້ໄປສາ ສັນນັ້ນ

[໑໙] ຄົນປົດຊາກສົບທີ່ໜ້າຮັງກຽດທີ່ຜູກໄວ້ຢູ່ຄໍໄດ້ແລ້ວ
ຢູ່ເປັນສຸກຢ່າງມີເສຣີຕາມລຳພັງຕົນ ສັນໃດ

[໔໐] ເຮົາບໍ່ມີຄວາມຫ່ວງໃຍ ບໍ່ມີຄວາມຕ້ອງການ
ລະຖິ້ມຮ່າງກາຍທີ່ເປື່ອຍເນົ່າເປັນທີ່ລວມຂອງຊາກສົບຕ່າງ ໆ
ນີ້ໄປສາ ສັນນັ້ນ

[໔໑] ຜູ້ຊາຍແລະຜູ້ຍິງຖ່າຍອຸດຈາຣະລົງໃນວິດ
ແລ້ວລະຖິ້ມວິດໄປບໍ່ມີຄວາມຫ່ວງໃຍ ບໍ່ມີຄວາມຕ້ອງການ ສັນໃດ

[໔໒] ເຮົາຈັກລະຖິ້ມຮ່າງກາຍທີ່ເຕັມໄປດ້ວຍຊາກສົບຕ່າງ ໆ ນີ້ໄປສາ
ເໝືອນຄົນຖ່າຍອຸດຈາຣະ (ລົງໃນວິດ) ແລ້ວລະຖິ້ມວິດນັ້ນໄປ ສັນນັ້ນ

[໔໓] ເຈົ້າຂອງເຮືອຖິ້ມເຮືອທີ່ເກົ່າຜຸ ເປ່ເພ ນ້ຳໄຫຼເຂົ້າໄດ້ໄປ
ບໍ່ມີຄວາມຫ່ວງໃຍ ບໍ່ມີຄວາມຕ້ອງການ ສັນໃດ

[໔໔] ເຮົາຈັກລະຖິ້ມຮ່າງກາຍນີ້ທີ່ມີທະວານ ໙
ມີຂອງບໍ່ສະອາດໄຫຼອອກຢູ່ເປັນນິດໄປສາ
ເໝືອນເຈົ້າຂອງເຮືອລະຖິ້ມເຮືອທີ່ເກົ່ານັ້ນໄປ ສັນນັ້ນ

[໔໕] ບຸຣຸດນຳສິ່ງຂອງມີຄ່າໄປກັບພວກໂຈນ
ເຫັນໄພຄືການຖືກປຸ້ນສິ່ງຂອງຈຶ່ງລະຖິ້ມ (ໂຈນ) ໄປສາ ສັນໃດ

[໔໖] ກາຍນີ້ກໍສັນນັ້ນຄືກັນ ປຽບສະເໝີດ້ວຍມະຫາໂຈນ
ເຮົາຈັກລະກາຍນີ້ໄປຍ້ອນຢ້ານແຕ່ການປຸ້ນກຸສົນທຳ ສັນນັ້ນ

[໔໗] ເມື່ອເຮົາຄິດແນວນີ້ແລ້ວ ໄດ້ໃຫ້ຊັບຫຼາຍຮ້ອຍໂກດ
ແກ່ຄົນມີບ່ອນເພິ່ງແລະບໍ່ມີບ່ອນເພິ່ງແລ້ວເຂົ້າໄປສູ່ພູເຂົາຫິມະພານ

[໔໘] ໃນບ່ອນບໍ່ໄກຈາກພູເຂົາຫິມະພານ ມີພູໜ່ວຍໜຶ່ງຊື່ທຳມິກະ
ເຮົາສ້າງອາສົມຢ່າງດີ ສ້າງປັນນະສາລາຢ່າງດີໄວ້

[໔໙] ໃນບ່ອນນັ້ນ ເຮົາສ້າງບ່ອນຈົງກົມເຊິ່ງເວັ້ນໂທດ ໕ ປະການ[១]
ເປັນທີ່ນຳມາເຊິ່ງອະພິນຍາພະລະປະກອບດ້ວຍຄຸນ ໘ ປະການ[໒]

[໕໐] ລະຖິ້ມຜ້າສາດົກເຊິ່ງປະກອບດ້ວຍໂທດ ໙ ປະການສາ[໓]
ແລ້ວນຸ່ງຜ້າຄາກອງ (ຜ້າເປືອກໄມ້) ເຊິ່ງປະກອບດ້ວຍຄຸນ ໑໒ ປະການ

[໕໑] ເຮົາລະຖິ້ມປັນນະສາລາທີ່ປະກອບໄປດ້ວຍໂທດ ໘ ປະການສາ
ເຂົ້າໄປອາໄສເຫງົ້າຕົ້ນໄມ້ເຊິ່ງປະກອບດ້ວຍຄຸນ ໑໐ ປະການ

[໕໒] ເຮົາລະຖິ້ມເຂົ້າເປືອກທີ່ຫວ່ານໄວ້ ປູກໄວ້ໂດຍບໍ່ເຫຼືອເລີຍ
ບໍຣິໂພກໝາກໄມ້ທີ່ຫຼົ່ນເອງເຊິ່ງປະກອບດ້ວຍຄຸນຫຼາຍຢ່າງ

[໓໓] ໃນບ່ອນນັ້ນ ເຮົາພໍ່າເພັງຄວາມພຽນຢູ່ໃນບ່ອນນັ່ງບ່ອນຢືນແລະບ່ອນຈົງກົມ
ພາຍໃນເວລາ ໗ ວັນ ກໍໄດ້ບັນລຸອະພິນຍາພະລະ

[໓໔] ເມື່ອເຮົາບັນລຸເຖິງຄວາມສຳເລັດ
ມີຄວາມຊຳນານໃນສາດສະໜາຢ່າງນີ້ແລ້ວ
ພຣະຊິນນະເຈົ້າພຣະນາມວ່າທີປັງກອນ ຊົງເປັນຜູ້ນຳສັດໂລກ
ສະເດັດອຸບັດຂຶ້ນແລ້ວ

[໓໕] ໃນຂະນະທີ່ພຣະຊິນນະເຈົ້າຊົງປະຕິສົນທິ ປະສູດ ຕັດສະຣູ້
ແລະສະແດງທຳ ເຮົາເປັນຜູ້ປ່ຽມດ້ວຍຄວາມຍິນດີໃນຊານ
ຈຶ່ງບໍ່ໄດ້ເຫັນນິມິດ ໔ ປະການ

[໓໖] ໃນແຄວ້ນປັດຈັນຕະປະເທດ ຊົນທັງຫຼາຍ
ທູນນິມົນພຣະຕະຖາຄົດເຈົ້າແລ້ວ ມີໃຈຍິນດີ
ຊ່ອຍກັນແຜ້ວຖາງທາງສຳລັບພຣະຕະຖາຄົດເຈົ້າສະເດັດດຳເນີນມາ

[໓໗] ໃນຄັ້ງນັ້ນ ເຮົາອອກຈາກອາສົມຂອງຕົນແລ້ວ
ສະລັດຜ້າຄາກອງ ເຫາະໄປໃນທ້ອງຟ້າ

[໓໘] ເຫັນໝູ່ຊົນຜູ້ມີຈິດໂສມະນັດ ຍິນດີຮ່າເຮີງບັນເທີງໃຈ
ຈຶ່ງລົງຈາກທ້ອງຟ້າມາຖາມມະນຸດທັງຫຼາຍໃນຂະນະນັ້ນວ່າ

[໓໙] ມະຫາຊົນຜູ້ມີຈິດໂສມະນັດ ຍິນດີຮ່າເຮີງບັນເທີງໃຈ
ຊ່ອຍກັນແຜ້ວຖາງທາງສຳລັບຢ່າງເພື່ອໃຜ

[໔໐] ຊົນເຫຼົ່ານັ້ນຖືກເຮົາຖາມແລ້ວບອກວ່າ
ພຣະພຸດທະຊິນນະເຈົ້າຜູ້ປະເສີດ ພຣະນາມວ່າ ທີປັງກອນ
ຊົງເປັນຜູ້ນຳສັດໂລກ ສະເດັດອຸບັດຂຶ້ນໃນໂລກແລ້ວ
ຊົນທັງຫຼາຍຊ່ອຍກັນແຜ້ວຖາງທາງສຳລັບສະເດັດດຳເນີນເພື່ອພຣະອົງ

[໔໑] ເວລານັ້ນ ປິຕິເກີດແກ່ເຮົາຍ້ອນໄດ້ຟັງຄຳວ່າ ພຸດໂທ
ເຮົາຈຶ່ງກ່າວປະກາດຄວາມໂສມະນັດວ່າ ພຸດໂທ ພຸດໂທ

[໔໒] ເຮົາທັງຍິນດີ ທັງຕື້ນຕັນໃຈ ຢືນຄິດຢູ່ ໃນບ່ອນນັ້ນວ່າ
ເຮົາຈັກປູກພືດຄືບຸນລົງໃນບ່ອນນີ້ ຂະນະຢ່າໄດ້ລ່ວງເລີຍໄປ

[໔໓] ແລ້ວກ່າວວ່າ ຖ້າທ່ານທັງຫຼາຍຊ່ອຍກັນແຜ້ວຖາງທາງເພື່ອພຣະພຸດທະເຈົ້າ
ຂໍຈົ່ງໃຫ້ໂອກາດໜຶ່ງແກ່ຂ້າພະເຈົ້າແດ່
ແມ່ນຂ້າພະເຈົ້າກໍຈະຊ່ອຍແຜ້ວຖາງທາງສຳລັບສະເດັດດຳເນີນ

[໔໔] ໃນຄັ້ງນັ້ນ ຊົນເຫຼົ່ານັ້ນໄດ້ໃຫ້ໂອກາດແກ່ເຮົາເພື່ອການແຜ້ວຖາງທາງ
ເຮົາແຜ້ວຖາງທາງໄປພ້ອມຄິດໄປພ້ອມວ່າ ພຸດໂທ ພຸດໂທ

[໔໕] ເມື່ອໂອກາດຂອງເຮົາຍັງບໍ່ທັນສຳເລັດ
ພຣະຊິນະມະຫາມຸນີພຣະນາມວ່າທີປັງກອນ
ກັບພຣະຂີນາສົບ ໔໐໐,໐໐໐ ອົງ
ຜູ້ໄດ້ອະພິນຍາ ໖ ຜູ້ຄົງທີ່ ປາສະຈາກມົນທິນກໍສະເດັດມາເຖິງທາງ

[໔໖] ການຕ້ອນຮັບຍ່ອມເປັນໄປ ຄົນເປັນຈຳນວນຫຼາຍປະໂຄມກອງເພຣີ
ເທວະດາແລະມະນຸດຕ່າງກໍມີຄວາມຊື່ນຊົມ ເປັ່ງສຽງສາທຸການ

[໔໗] ເທວະດາກໍເຫັນມະນຸດ ມະນຸດກໍເຫັນເທວະດາ
ທັງ ໒ ພວກນັ້ນ ພາກັນປະນົມມືຍ່າງຕາມພຣະຕະຖາຄົດເຈົ້າ

[໔໘] ເທວະດາທັງຫຼາຍນຳດົນຕີທິບມາປະໂຄມ
ມະນຸດທັງຫຼາຍນຳດົນຕີມະນຸດມາປະໂຄມ
ທັງ ໒ ພວກນັ້ນພາກັນປະໂຄມ

[໔໙] ເທບຜູ້ຢູ່ໃນນະພາກາດ
ຕ່າງກໍໂຮຍດອກມົນທາຣົບ ດອກປະທຸມ
ດອກປາຣິສັດຕະກະອັນເປັນທິບລົງມາຍັງທິດໜ້ອຍທິດໃຫຍ່

[໕໐] ແລະໂຮຍກະແຈະຈັນ ແລະຂອງຫອມຢ່າງດີ
ລ້ວນແຕ່ເປັນຂອງທິບລົງມາຍັງທິດໜ້ອຍທິດໃຫຍ່

[໕໑] ມະນຸດທັງຫຼາຍຜູ້ຢູ່ເທິງພື້ນດິນ ຕ່າງກໍໂຮຍດອກຈຳປາ
ດອກສົນ ກະທຸ່ມ ດອກກາກະທິງ
ດອກບຸນນາກ ດອກກາຣະເກດລົງມາຍັງທິດໜ້ອຍທິດໃຫຍ່

[໕໒] ເຮົາສະຫຍາຍຜົມແລ້ວປູຜ້າຄາກອງ
ແລະໜັງສັດລົງເທິງຂີ້ຕົມ
ແລ້ວນອນຄວ່ຳໜ້າລົງໃນບ່ອນນັ້ນ

[໕໓]	ດ້ວຍຄິດວ່າ ພຣະພຸດທະເຈົ້າພ້ອມທັງ (ສາວົກ) ຜູ້ເປັນສິດ
ຈົ່ງຢ່ຽບເຮົາສະເດັດຂ້າມໄປເທີ້ນ ຢ່າຊົ່ງຢ່ຽບຂີ້ຕົມນັ້ນເລີຍ
ຂໍ້ນັ້ນຈັກເປັນປະໂຫຍດເກື້ອກູນແກ່ເຮົາ

[໕໔]	ເມື່ອເຮົານອນຢູ່ພື້ນດິນ ມີຄວາມຄິດແນວນີ້ວ່າ
ເຮົາເມື່ອຕ້ອງການຢູ່ ກໍເພິ່ງເຜົາກິເລດເຮົາໄດ້ ໃນວັນນີ້

[໕໕]	(ແຕ່) ຈະມີປະໂຫຍດອັນໃດແກ່ເຮົາ
ທີ່ຈະຮູ້ແຈ້ງພຣະທຳໃນສາດສະໜານີ້ ໂດຍເພດທີ່ຄົນອື່ນບໍ່ຮູ້ຈັກ
ເຮົາຈັກຕ້ອງບັນລຸພຣະສັບພັນຍຸຕະຍານໃຫ້ໄດ້
ເມື່ອພົ້ນແລ້ວເພິ່ງປົດເປື້ອງມະນຸດພ້ອມທັງເທວະດາ

[໕໖]	ຈະມີປະໂຫຍດອັນໃດແກ່ເຮົາ
ທີ່ເປັນຜູ້ຊາຍເຫັນກຳລັງຄວາມສາມາດ
ຈະຂ້າມພົ້ນແຕ່ພຽງຜູ້ດຽວ
ເຮົາຈັກບັນລຸພຣະສັບພັນຍຸຕະຍານໃຫ້ໄດ້
ຊ່ອຍມະນຸດໂລກພ້ອມທັງເທວະໂລກໃຫ້ຂ້າມພົ້ນນຳ

[໕໗]	ດ້ວຍອະທິການ (ຄືກຸສົນອັນຍິ່ງໃຫຍ່) ນີ້
ທີ່ເຮົາໄດ້ເຮັດແລ້ວໃນພຣະພຸດທະເຈົ້າ ຊົ່ງເປັນຜູ້ສູງສຸດແຫ່ງບຸຣຸດ
ເຮົາຈະບັນລຸພຣະສັບພັນຍຸຕະຍານ
ຈະຊ່ອຍໝູ່ຊົນເປັນຈຳນວນຫຼາຍໃຫ້ຂ້າມພົ້ນ

[໕໘]	ເຮົາຈັກຕັດກະແສສັງສາຣະວັດ ທຳລາຍພົບທັງ ໓
ແລ້ວຂຶ້ນສູ່ທຳນາວາ (ເຮືອຄືທຳ)
ຊ່ອຍມະນຸດໂລກພ້ອມທັງເທວະໂລກໃຫ້ຂ້າມພົ້ນ

[໕໙]	ອະພິນິຫານຍ່ອມສຳເລັດໄດ້ຍ້ອນທຳ ໘ ປະການ
ປະຊຸມພ້ອມກັນ ຄື ຄວາມເປັນມະນຸດ ໑
ຄວາມສົມບູນດ້ວຍບຸຣຸດເພດ ໑
ເຫດທີ່ຈະເຮັດໃຫ້ສຳເລັດພຣະອະຣະຫັນໄດ້ໃນຊາດນັ້ນ ໑
ການໄດ້ເຫັນພຣະສາດສະດາ ໑ ການບັນພະຊາ ໑
ຄວາມເຖິງພ້ອມແຫ່ງຄຸນ (ຄືສະມາບັດ ໘ ແລະອະພິນຍາ ໕) ໑
ອະທິການຄືການເຮັດໃຫ້ຍິ່ງ ໑ ຄວາມເປັນຜູ້ມີສັນທະ ໑

[໖໐] ພຣະພຸດທະເຈົ້າພຣະນາມວ່າ ທີປັງກອນ
ຜູ້ຊົງຮູ້ແຈ້ງໂລກ ສົມຄວນຮັບເຄື່ອງບູຊາ
ປະທັບຢືນຢູ່ເໜືອຫົວເຮົາ ຕັດພຣະດຳຣັດນີ້ວ່າ

[໖໑] ທ່ານທັງຫຼາຍຈົ່ງເບິ່ງຊະດິນດາບົດນີ້ ຜູ້ມີຕະບະແກ່ກ້າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ເຂົາຈັກເປັນພຣະພຸດທະເຈົ້າໃນໂລກ

[໖໒] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນ
ຊົງເລີ່ມຕັ້ງຄວາມພຽນພ່ຳເພັງທຸກກະຣະກິຣິຍາ

[໖໓] ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ
ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ

[໖໔] ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

[໖໕] ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ເຫງົ້າຕົ້ນອັດສັດຖະພຶກ

[໖໖] ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

[໖໗] ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

[໖໘] ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ

ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ

[໖໙] ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

[໗໐] ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

[໗໑] ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

[໗໒] ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໗໓] ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍືດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

[໗໔] ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໗໕] ພຣະພຸດທະເຈົ້າພຣະນາມວ່າທີປັງກອນ ຜູ້ຊົງຮູ້ແຈ້ງໂລກ
ສົມຄວນຮັບເຄື່ອງບູຊາ
ຊົງປະກາດກຳຂອງເຮົາແລ້ວ
ຊົງຍົກພຣະບາດເບື້ອງຂວາຂຶ້ນ

[໗໖] ສາວົກຂອງພຣະຊິນນະເຈົ້າທີ່ຢູ່ໃນບ່ອນນັ້ນ
ໄດ້ກະທຳປະທັກຂິນເຮົາທຸກ ໆ ອົງ
ເທວະດາ ມະນຸດ ອະສູນ ຍັກ ອະພິວາດເຮົາແລ້ວ ພາກັນຫຼີກໄປ

[໗໗] ໃນຄັ້ງນັ້ນ ເມື່ອພຣະພຸດທະເຈົ້າພຣະນາມວ່າທີປັງກອນ
ຊົງເປັນຜູ້ນຳສັດໂລກ ພ້ອມທັງພຣະສົງລ່ວງຄອງຈັກຂຸເຮົາໄປ
ເຮົາລຸກຂຶ້ນຈາກການນອນແລ້ວ ນັ່ງຂັດສະມາທິຢູ່

[໗໘] ເຮົາສຳຣານໃຈດ້ວຍຄວາມສຸກ ບັນເທີງໃຈດ້ວຍຄວາມປາໂມດ
ແລະດື່ມດ່ຳດ້ວຍປີຕິ ນັ່ງຂັດສະມາທິຢູ່ໃນການນັ້ນ

[໗໙] ໃນຄັ້ງນັ້ນ ເຮົານັ່ງຂັດສະມາທິແລ້ວຄິດແນວນີ້ວ່າ
ເຮົາເປັນຜູ້ມີຄວາມຊຳນານໃນຊານ ເຖິງຄວາມສຳເລັດອະພິນຍາ

[໘໐] ໃນໂລກກະທາດມີໝື່ນຈັກກະວານ ບໍ່ມີລືສີຜູ້ສະເໝີກັບເຮົາ
ໃນທຳຄືລິດ ກໍບໍ່ມີໃຜສະເໝີກັບເຮົາ ເຮົາໄດ້ສຸກເຊັ່ນນີ້

[໘໑] ຂະນະທີ່ເຮົານັ່ງຂັດສະມາທິຢູ່
ເທວະດາຜູ້ສະຖິດຢູ່ໃນໂລກກະທາດມີໝື່ນຈັກກະວານ
ພາກັນເປ່ງສຽງຢ່າງກຶກກ້ອງວ່າ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໘໒] ນິມິດເຫຼົ່າໃດທີ່ເຄີຍຜາກົດ
ໃນຂະນະທີ່ພຣະໂພທິສັດທັງຫຼາຍ
ນັ່ງຂັດສະມາທິຢ່າງປະເສີດ
ນິມິດເຫຼົ່ານັ້ນກໍຜາກົດໃນວັນນີ້

[໘໓] ຄວາມໜາວກໍບໍາຣາດໄປ ແລະຄວາມຮ້ອນກໍສະງົບ
ນິມິດເຫຼົ່ານັ້ນຜາກົດໃນວັນນີ້
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໘໔] ໂລກກະທາດມີໝື່ນຈັກກະວານ ປາສະຈາກສຽງ
ໝົດຄວາມວຸ້ນວາຍ ນິມິດເຫຼົ່ານັ້ນຜາກົດໃນວັນນີ້
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໗໕] ລົມພາຍຸບໍ່ພັດ ແມ່ນໍ້າທັງຫຼາຍກໍບໍ່ໄຫຼ
ນິມິດເຫຼົ່ານັ້ນຜາກົດໃນວັນນີ້
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໗໙] ດອກໄມ້ທັງຫຼາຍ ທັງທີ່ເປັນພັນໄມ້ບົກ
ແລະພັນໄມ້ນໍ້າທຸກຊະນິດຕ່າງກໍແຕກດອກໃນຂະນະນັ້ນ
ແມ່ນໃນວັນນີ້ດອກໄມ້ເຫຼົ່ານັ້ນກໍບານໝົດທຸກດອກ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໗໗] ໄມ້ເຄືອຫຼືໄມ້ຕົ້ນຕ່າງກໍອອກຜົນແລ້ວໃນຂະນະນັ້ນ
ແມ່ນໃນວັນນີ້ ຕົ້ນໄມ້ໃຫ້ຜົນເຫຼົ່ານັ້ນກໍອອກຜົນແລ້ວທຸກຕົ້ນ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໗໘] ຣັດຕະນະທັງຫຼາຍທີ່ຢູ່ໃນອາກາດ
ແລະທີ່ຢູ່ເທິງພື້ນດິນສະຫວ່າງສະໄຫວແລ້ວໃນຂະນະນັ້ນ
ແມ່ນໃນວັນນີ້ ຣັດຕະນະເຫຼົ່ານັ້ນກໍສະຫວ່າງສະໄຫວ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໗໙] ດົນຕີທັງຫຼາຍ ທັງທີ່ເປັນຂອງມະນຸດ
ແລະເປັນຂອງທິບ ຕ່າງກໍບັນເລງຂຶ້ນແລ້ວໃນຂະນະນັ້ນ
ແມ່ນໃນວັນນີ້ ດົນຕີທັງ ໒ ຢ່າງນັ້ນກໍບັນເລງ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໘໐] ທິບພະບຸບຜະຊາດອັນວິຈິດ ຕ່າງກໍຕົກລົງຈາກທ້ອງຟ້າໃນຂະນະນັ້ນ
ແມ່ນໃນວັນນີ້ ທິບພະບຸບຜະຊາດເຫຼົ່ານັ້ນກໍຜາກົດ
ທ່ານຈັກໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໘໑] ມະຫາສະມຸດຍ່ອມກະຈາຍ
ໂລກກະທາດມີໝື່ນຈັກກະວານກໍຫວັ່ນໄຫວ
ແມ່ນໃນວັນນີ້ ທັງ ໒ ນັ້ນ (ມະຫາສະມຸດແລະໂລກກະທາດ) ກໍບັນລືລັ່ນ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໘໒] ໄຟນະຮົກນັບໝື່ນດວງກໍດັບລົງໃນຂະນະນັ້ນ
ແມ່ນໃນວັນນີ້ ໄຟນະຮົກນັ້ນກໍດັບແລ້ວ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໓] ດວງອາທິດປາສະຈາກມົນທິນ
ດາວທຸກດວງຕ່າງກໍສຸກສະກາວ
ແມ່ນໃນວັນນີ້ ດວງອາທິດແລະດວງດາວຕ່າງກໍສ່ອງແສງສຸກໃສ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໔] ທັງທີ່ຝົນບໍ່ຕົກເລີຍ (ແຕ່) ນ້ຳໃນແມ່ນ້ຳ
ກັບຍົກຕົນຂຶ້ນຈາກແຜ່ນດິນໃນຂະນະນັ້ນ
ແມ່ນໃນວັນນີ້ ນ້ຳໃນແມ່ນ້ຳນັ້ນກໍຍົກຕົນຂຶ້ນຈາກແຜ່ນດິນ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໕] ໝູ່ດາວນົບພະເຄາະ ແລະໝູ່ດາວນັກສັດ
ເປ່ງປະກາຍສະຫວ່າງທົ່ວທ້ອງຟ້າ
ດວງຈັນປະກອບດ້ວຍວິສາຂະເລີກຍາມແຈ່ມຈະຣັດ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໖] ສັດທັງຫຼາຍຈຳພວກທີ່ຢູ່ໃນຮູ
ແລະຈຳພວກທີ່ອາໄສຢູ່ຕາມຊອກ
ຕ່າງກໍພາກັນອອກຈາກບ່ອນຢູ່ຂອງຕົນ
ແມ່ນໃນວັນນີ້ ສັດເຫຼົ່ານັ້ນກໍອອກຈາບ່ອນຢູ່ອາໄສ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໗] ຄວາມບໍ່ພໍໃຈບໍ່ໄດ້ມີແກ່ສັດທັງຫຼາຍ
ສັດທັງຫຼາຍຕ່າງພາກັນຍິນດີຢູ່ທົ່ວກັນໃນຂະນະນັ້ນ
ແມ່ນໃນວັນນີ້ ສັດທັງຫຼາຍກໍຍິນດີຢູ່ນຳກັນທັງໝົດ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໘] ໂຣກທັງຫຼາຍຕ່າງກໍສະງົບຣະງັບລົງ
ແລະຄວາມຫິວໂຫຍກໍຫາຍໄປໃນຂະນະນັ້ນ
ແມ່ນໃນວັນນີ້ ພາວະທັງ ໔ ຢ່າງນັ້ນກໍຜາກົດຄືກັນ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໖໙] ຣາຄະກໍເບົາບາງລົງໄປ ໂທສະ ແລະໂມຫະ
ຕ່າງກໍຖົດຖອຍໄປໃນຂະນະນັ້ນ

ແມ່ນໃນວັນນີ້ ກິເລດເຫຼົ່ານັ້ນກໍປາສະຈາກໄປຈົນໝົດສິ້ນ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໐] ໄພບໍ່ໄດ້ມີໃນຂະນະນັ້ນ ແມ່ນໃນວັນນີ້ ກໍຜາກົດແນວນັ້ນ
ຍ້ອນເຫດນັ້ນເຮົາທັງຫຼາຍຈຶ່ງຮູ້ໄດ້ວ່າ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໑] ຂະນະນັ້ນ ທຸລີບໍ່ໄດ້ຟຸ້ງຂຶ້ນໄປໃນອາກາດ
ແມ່ນໃນວັນນີ້ ກໍຜາກົດແນວນັ້ນ
ຍ້ອນເຄື່ອງໝາຍນັ້ນ ເຮົາທັງຫຼາຍຈຶ່ງຮູ້ໄດ້ວ່າ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໒] ກິ່ນທີ່ບໍ່ໜ້າປາຖະໜາກໍຫາຍໄປໝົດສິ້ນ
ກິ່ນທິບກໍຫອມຟຸ້ງກະຈາຍໄປ (ໃນຂະນະນັ້ນ)
ແມ່ນໃນວັນນີ້ ກິ່ນຫອມກໍຟຸ້ງກະຈາຍໄປ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໓] ເທວະດາທັງປວງກໍໄດ້ພາກັນຜາກົດກາຍ (ໃນຂະນະນັ້ນ)
ເວັ້ນແຕ່ອະຣູບປະພົມ ແມ່ນໃນວັນນີ້ ກໍຜາກົດແນວນັ້ນທັງໝົດ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໔] ນະຣົກທັງຫຼາຍມີປະມານເທົ່າໃດ
ກໍໄດ້ຜາກົດທັງໝົດເທົ່ານັ້ນ ໃນຂະນະນັ້ນ
ແມ່ນໃນວັນນີ້ ກໍຜາກົດທັງໝົດ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໕] ກຳແພງ ປະຕູ ແລະພູເຂົາ
ກໍບໍ່ໄດ້ເປັນສິ່ງທີ່ປິດກັ້ນໄດ້ໃນຂະນະນັ້ນ
ແມ່ນໃນວັນນີ້ ທັງໝົດກໍເປີດໂລ່ງ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໖] ການຈຸຕິແລະການອຸບັດກໍບໍ່ໄດ້ມີໃນຂະນະນັ້ນ
ແມ່ນໃນວັນນີ້ ການຈຸຕິແລະການອຸບັດເຫຼົ່ານັ້ນກໍຜາກົດ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

ນິມິດເຫຼົ່ານີ້ຍ່ອມຜາກົດ
ເພື່ອປະໂຫຍດແກ່ການຕັດສະຮູ້ຂອງສັດທັງຫຼາຍ

[໑໐໗] ທ່ານຈິ່ງພໍ່າເພັງຄວາມພຽນໃຫ້ໝັ້ນຄົງ
ຢ່າຖອຍກັບ ຈິ່ງກ້າວໄປຂ້າງໜ້າເທີ້ນ
ແມ່ນເຮົາທັງຫຼາຍກໍຮູ້ຄວາມພຽນນັ້ນຢ່າງແຈ້ງຊັດວ່າ
ທ່ານຈັກເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໐໘] ເຮົາໄດ້ສະດັບພຣະພຸດທະດໍາຣັດແລະຄໍາ
ຂອງເທວະດາໃນໝື່ນຈັກກະວານທັງ ໒ ແລ້ວ
ກໍຍິນດີຣ່າເຣິງບັນເທິງໃຈ ໄດ້ຄິດແນວນີ້ໃນການນັ້ນວ່າ

[໑໐໙] ພຣະພຸດທະຊິນນະເຈົ້າທັງຫຼາຍ ມີພຣະດໍາຣັດບໍ່ເປັນສອງ
ມີພຣະດໍາຣັດບໍ່ເປັນໂມຄະ ພຣະພຸດທະເຈົ້າທັງຫຼາຍ
ບໍ່ມີພຣະດໍາຣັດບໍ່ຈິງ ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໐] ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຍ່ອມທ່ຽງແທ້ແນ່ນອນ ເໝືອນກ້ອນດິນທີ່ໂຍນຂຶ້ນໄປເທິງທ້ອງຟ້າ
ຍ່ອມຕົກລົງມາສູ່ພື້ນດິນເປັນແທ້
ພຣະພຸດທະເຈົ້າທັງຫຼາຍບໍ່ມີພຣະດໍາຣັດບໍ່ຈິງ
ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໑] ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຍ່ອມທ່ຽງແທ້ແນ່ນອນ ເໝືອນສັດທັງປວງ
ຕ້ອງມີຄວາມຕາຍທ່ຽງແທ້ແນ່ນອນ
ພຣະພຸດທະເຈົ້າທັງຫຼາຍບໍ່ມີພຣະດໍາຣັດບໍ່ຈິງ
ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໒] ພຣະດໍາຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຍ່ອມທ່ຽງແທ້ແນ່ນອນ
ເໝືອນສິ້ນຣາຕີແລ້ວ ອາທິດຕ້ອງອຸໄທແນ່
ພຣະພຸດທະເຈົ້າທັງຫຼາຍບໍ່ມີພຣະດໍາຣັດບໍ່ຈິງ
ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໖] ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຍ່ອມທ່ຽງແທ້ແນ່ນອນ ເໝືອນຣາດຊະສີລຸກອອກຈາກບ່ອນນອນ
ຕ້ອງມີການບັນລືສີຫະນາດແນ່
ພຣະພຸດທະເຈົ້າທັງຫຼາຍບໍ່ມີພຣະດຳຣັດບໍ່ຈິງ
ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໔] ພຣະດຳຣັດຂອງພຣະພຸດທະເຈົ້າຜູ້ປະເສີດທີ່ສຸດ
ຍ່ອມທ່ຽງແທ້ແນ່ນອນ ເໝືອນສະຕີຖືພາແກ່
ຈະຕ້ອງມີການເກີດບຸດໃນທ້ອງເປັນແນ່
ພຣະພຸດທະເຈົ້າທັງຫຼາຍບໍ່ມີພຣະດຳຣັດບໍ່ຈິງ
ເຮົາຕ້ອງໄດ້ເປັນພຣະພຸດທະເຈົ້າຢ່າງແນ່ນອນ

[໑໑໕] ເອົາເທີ້ນ ເຮົາຈັກຄົ້ນຫາພຸດທະກາຣະກະທຳຈາກສິບທິດ
ຄືຂ້າງນີ້ ໆ ເບື້ອງເທິງ ເບື້ອງລຸ່ມ ຕະຫຼອດທົ່ວທຳມະທາດ

[໑໑໖] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນທານປາຣະມີເປັນຂໍ້ທີ ໑
ເຊິ່ງເປັນທາງໃຫຍ່ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໑໗] ທ່ານຈົ່ງຍຶດທານປາຣະມີຂໍ້ທີ ໑ ນີ້ ພ່ຳເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານກໍຈົ່ງພ່ຳເພັງທານປາຣະມີເທີ້ນ

[໑໑໘] ໝໍ້ທີ່ເຕັມດ້ວຍນ້ຳເຊິ່ງຜູ້ໃດຜູ້ໜຶ່ງຈັບຄວ້ຳລົງ
ນ້ຳຍ່ອມໄຫຼອອກໝົດ ບໍ່ຂັງຢູ່ໃນໝໍ້ນັ້ນ ສັນໃດ

[໑໑໙] ທ່ານເຫັນຜູ້ຂໍທັງຊັ້ນຕ່ຳ ຊັ້ນກາງ ແລະຊັ້ນສູງແລ້ວ
ຈົ່ງໃຫ້ທານຢ່າໃຫ້ເຫຼືອ ເໝືອນໝໍ້ນ້ຳທີ່ເຂົາຄວ້ຳລົງ ສັນນັ້ນ

[໑໒໐] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໒໑] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນສີນປາຣະມີເປັນຂໍ້ທີ ໒
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໘໘] ທ່ານຈິ່ງຍຶດສີນປາຣະມີຂໍ້ທີ ໘ ນີ້ ພ່ຳເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານກໍຈິ່ງພ່ຳເພັງສີນປາຣະມີເທີ້ນ

[໑໘໙] ຈາມະຣີຍ່ອມຮັກສາຂົນຫາງ (ຂອງຕົນ) ທີ່ຕິດຂ້ອງຢູ່ໃນບ່ອນໃດ ໆ
ກໍຍອມຕາຍໃນບ່ອນນັ້ນ ບໍ່ຍອມໃຫ້ຂົນຫາງເສຍໄປ ສັນໃດ

[໑໘໔] ທ່ານຈິ່ງພ່ຳເພັງສີນໃນພູມທັງ ໔໌
ຮັກສາສີນໃຫ້ບໍລິບູນໃນການທຸກເມື່ອ
ເໝືອນຈາມະຣີຮັກສາຂົນຫາງ ສັນນັ້ນ

[໑໘໕] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໘໖] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນເນກຂຳມະປາຣະມີເປັນຂໍ້ທີ ໓
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈິ່ງເຕືອນຕົນເອງວ່າ

[໑໘໗] ທ່ານຈິ່ງຍຶດເນກຂຳມະປາຣະມີຂໍ້ທີ ໓ ນີ້ ພ່ຳເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານຈິ່ງພ່ຳເພັງເນກຂຳມະປາຣະມີເທີ້ນ

[໑໘໘] ຄົນທີ່ຖືກຂັງຢູ່ໃນຄຸກ ໄດ້ຮັບທຸກມາດົນນານ
ຍ່ອມບໍ່ເກີດຄວາມຍິນດີໃນຄຸກນັ້ນ
ມີແຕ່ຈະຫາປ່ອງທາງທີ່ຈະພົ້ນອອກໄປ ສັນໃດ

[໑໘໙] ທ່ານຈິ່ງເຫັນພົບທັງປວງເໝືອນຄຸກ
ຈິ່ງມຸ້ງໜ້າຕໍ່ເນກຂຳມະເພື່ອລຸດພົ້ນໄປຈາກພົບ ສັນນັ້ນເທີ້ນ

[໑໙໐] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໙໑] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນປັນຍາປາຣະມີເປັນຂໍ້ທີ ໔
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈິ່ງເຕືອນຕົນເອງວ່າ

[໑໓໔] ທ່ານຈົ່ງຢຶດປັນຍາປາຣະມີຂໍ້ທີ ໔ ນີ້ ພໍ່າເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານກໍຈົ່ງພ່ຳເພັງປັນຍາປາຣະມີເທີ້ນ

[໑໓໓] ພິກຂຸເມື່ອທ່ຽວບິນທະບາດ
ບໍ່ໄດ້ເວັ້ນວ່າຈະເປັນຕະກູນຊັ້ນຕ່ຳ ຊັ້ນກາງ ຫຼື ຊັ້ນສູງ
ຍ່ອມໄດ້ອາຫານພໍຍັງອັດຕະພາບໃຫ້ເປັນໄປໄດ້ ສັນໃດ

[໑໓໔] ທ່ານເມື່ອສອບຖາມຄົນມີຄວາມຮູ້ຕະຫຼອດການທັງປວງ
ພ່ຳເພັງປັນຍາປາຣະມີໄປເທີ້ນ
ແລ້ວຈັກບັນລຸສຳໂພທິຍານໄດ້ ສັນນັ້ນ

[໑໓໕] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໓໖] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນວິຣິຍະປາຣະມີເປັນຂໍ້ທີ ໕
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໓໗] ທ່ານຈົ່ງຢຶດວິຣິຍະປາຣະມີຂໍ້ທີ ໕ ນີ້ ພ່ຳເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານກໍຈົ່ງພ່ຳເພັງວິຣິຍະປາຣະມີເທີ້ນ

[໑໓໘] ຣາດຊະສີພະຍາເນື້ອມີຄວາມພຽນບໍ່ທໍ້ຖອຍ
ທັງໃນຂະນະໝອບ ຢືນ ແລະຍ່າງ ປະຄອງໃຈໄວ້ທຸກເມື່ອ ສັນໃດ

[໑໓໙] ທ່ານຈົ່ງປະຄອງຄວາມພຽນໃຫ້ໝັ້ນຄົງທຸກພົບທຸກຊາດ
ພ່ຳເພັງວິຣິຍະປາຣະມີໄປເທີ້ນ
ແລ້ວຈັກບັນລຸສຳໂພທິຍານໄດ້ ສັນນັ້ນ

[໑໔໐] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໔໑] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນຂັນຕິປາຣະມີເປັນຂໍ້ທີ ໖
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໔໔] ທ່ານຈົ່ງຍຶດຂັນຕິປາຣະມີຂໍ້ທີ ໖ ນີ້ ພໍ່າເພັງໃຫ້ໝັ້ນຄົງກ່ອນ
ທ່ານມີໃຈແນ່ວແນ່ (ບໍ່ເປັນສອງ) ໃນຂັນຕິປາຣະມີນັ້ນ
ຈັກບັນລຸສຳໂພທິຍານໄດ້

[໑໔໕] ທຳມະດາແຜ່ນດິນຍ່ອມທົນທານຕໍ່ສິ່ງທີ່ເຂົາຖິ້ມລົງທຸກຢ່າງ
ທັງທີ່ສະອາດແລະບໍ່ສະອາດ
ບໍ່ເຮັດຄວາມຍິນດີແລະຄວາມຂັດເຄືອງ ແມ່ນສັນໃດ

[໑໔໖] ເຖິງທ່ານກໍສັນນັ້ນຄືກັນ ອົດທົນຕໍ່ການຍ້ອງຍໍ
ແລະການດູໝິ່ນຂອງຄົນທັງປວງ
ພໍ່າເພັງຂັນຕິປາຣະມີແລ້ວຈັກບັນລຸສຳໂພທິຍານໄດ້

[໑໔໗] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໔໘] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນສັດຈະປາຣະມີເປັນຂໍ້ທີ ໗
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໔໗] ທ່ານຈົ່ງຍຶດສັດຈະປາຣະມີຂໍ້ທີ ໗ ນີ້ ພໍ່າເພັງໃຫ້ໝັ້ນຄົງກ່ອນ
ທ່ານມີຄຳເວົ້າທີ່ແນ່ນອນ (ບໍ່ເປັນສອງ) ໃນສັດຈະປາຣະມີນັ້ນ
ຈັກບັນລຸສຳໂພທິຍານໄດ້

[໑໔໘] ທຳມະດາວ່າດາວປະກາຍພຶກ
ເປັນດາວນົບພະເຄາະທີ່ທ່ຽງຕົງໃນໂລກພ້ອມທັງເທວະໂລກ
ຍ່ອມບໍ່ເຄື່ອນໄປຈາກວິຖີໂຄຈອນ ບໍ່ວ່າຈະເປັນລະດູຮ້ອນ
ລຶດູໜາວ ຫຼືລະດູຝົນ ແມ່ນສັນໃດ

[໑໔໙] ເຖິງທ່ານກໍສັນນັ້ນຄືກັນ
ຈົ່ງຢ່າຖອຍກັບໄປຈາກທາງ (ທີ່ຖືກຕ້ອງໝັ້ນຄົງ)
ໃນສັດຈະທັງຫຼາຍ ພໍ່າເພັງສັດຈະປາຣະມີແລ້ວ
ຈັກບັນລຸສຳໂພທິຍານໄດ້

[໑໕໐] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໕໑] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນອະທິຖານປາຣະມີເປັນຂໍ້ທີ ໗
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໕໒] ທ່ານຈົ່ງຍຶດອະທິຖານປາຣະມີຂໍ້ທີ ໗ ນີ້ ພໍ່າເພັງໃຫ້ໝັ້ນຄົງກ່ອນ
ທ່ານເປັນຜູ້ບໍ່ຫວັ່ນໄຫວໃນອະທິຖານປາຣະມີນັ້ນແລ້ວ
ຈັກບັນລຸສຳໂພທິຍານໄດ້

[໑໕໓] ພູຜາບໍ່ຫວັ່ນໄຫວ ຕັ້ງໝັ້ນບໍ່ສະເທືອນຍ້ອນລົມແຮງ
ຄົງຕັ້ງຢູ່ໃນບ່ອນເກົ່ານັ້ນເອງ ແມ່ນສັນໃດ

[໑໕໔] ທ່ານກໍສັນນັ້ນຄືກັນ
ຈົ່ງເປັນຜູ້ບໍ່ຫວັ່ນໄຫວໃນອະທິຖານປາຣະມີທຸກເມື່ອ
ພໍ່າເພັງອະທິຖານປາຣະມີແລ້ວ
ຈັກບັນລຸສຳໂພທິຍານໄດ້

[໑໕໕] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໕໖] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນເມດຕາປາຣະມີເປັນຂໍ້ທີ ໘
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຮົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໕໗] ທ່ານຈົ່ງຍຶດເມດຕາປາຣະມີຂໍ້ທີ ໘ ນີ້ ພໍ່າເພັງໃຫ້ໝັ້ນຄົງກ່ອນ
ຖ້າທ່ານປາຖະໜາຈະບັນລຸພຣະໂພທິຍານ
ທ່ານກໍຈົ່ງເປັນຜູ້ບໍ່ມີໃຜສະເໝີໃນເມດຕາປາຣະມີ

[໑໕໘] ທຳມະດານ້ຳຍ່ອມແຜ່ຄວາມເຢັນ
ຊຳຮະລ້າງມົນທິນຄືທຸລີສະເໝີກັນ
ທັງໃນຄົນດີແລະຄົນຊົ່ວ ແມ່ນສັນໃດ

[໑໕໙] ທ່ານກໍສັນນັ້ນຄືກັນ ຈົ່ງຈະເລີນເມດຕາໃຫ້ສະເໝີກັນ
ທັງໃນຄົນທີ່ເກື້ອກູນກັນແລະໃນຄົນທີ່ບໍ່ໄດ້ເກື້ອກູນກັນ
ພໍ່າເພັງເມດຕາປາຣະມີແລ້ວ
ຈັກບັນລຸສຳໂພທິຍານໄດ້

[໑໖໐] ແຕ່ພຸດທະທຳເຫຼົ່ານີ້ຈັກມີພຽງເທົ່ານີ້ກໍບໍ່ແມ່ນ
ເຮົາຈັກຄົ້ນຫາທຳທີ່ເປັນເຄື່ອງບົ່ມພຣະໂພທິຍານຢ່າງອື່ນຕໍ່ໄປ

[໑໖໑] ໃນຄັ້ງນັ້ນ ເມື່ອເຮົາຄົ້ນຫາຢູ່ ໄດ້ເຫັນອຸເປກຂາປາຣະມີເປັນຂໍ້ທີ ໑໐
ທີ່ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ທັງຫຼາຍໃນປາງກ່ອນ
ໄດ້ອົບຣົມສັ່ງສົມມາ ຈຶ່ງເຕືອນຕົນເອງວ່າ

[໑໖໒] ທ່ານຈົ່ງຢຶດອຸເປກຂາປາຣະມີຂໍ້ທີ ໑໐ ນີ້ ພ່ຳເພັງໃຫ້ໝັ້ນຄົງກ່ອນ
ທ່ານເປັນຜູ້ມີອຸເປກຂາທ່ຽງຕົງ ໝັ້ນຄົງ
ຈັກບັນລຸສຳໂພທິຍານໄດ້

[໑໖໓] ທຳມະດາແຜ່ນດິນຍ່ອມວາງເສີຍໃນສິ່ງທີ່ເຂົາຖິ້ມລົງທັງສະອາດ
ແລະບໍ່ສະອາດ ທັງ ໒ ຢ່າງ ເວັ້ນຄວາມໂກດແລະຄວາມຍິນດີ ແມ່ນສັນໃດ

[໑໖໔] ທ່ານກໍສັນນັ້ນຄືກັນ
ຈົ່ງມີໃຈທ່ຽງຕົງໃນສຸກແລະທຸກໃນການທຸກເມື່ອ
ພ່ຳເພັງອຸເປກຂາປາຣະມີແລ້ວ
ຈັກບັນລຸສຳໂພທິຍານໄດ້

[໑໖໕] ທຳທີ່ເປັນເຄື່ອງບົ່ມພຣະໂພທິຍານ
ມີຢູ່ໃນໂລກພຽງເທົ່ານີ້ ນອກຈາກນີ້ຍິ່ງກວ່ານັ້ນບໍ່ມີ
ທ່ານຈົ່ງຕັ້ງໝັ້ນຢູ່ໃນທຳນັ້ນເທີ້ນ

[໑໖໖] ເມື່ອເຮົາພິຈາລະນາເຫັນທຳເຫຼົ່ານີ້
ພ້ອມທັງກິດແລະລັກສະນະອັນເປັນພາວະຂອງຕົນ
ພື້ນພະສຸທາໂລກກະທາດມີໝື່ນຈັກກະວານ
ກໍໄຫວດ້ວຍເດດແຫ່ງທຳ

[໑໖໗] ປະຖະພີໄຫວສະເທືອນເລື່ອນລັ່ນເໝືອນຈັກທີບອ້ອຍ
ພື້ນແຜ່ນດິນສັ່ນຫວັ່ນໄຫວເໝືອນກົງລໍ້ທີ່ຮີດນ້ຳມັນ

[໑໖໘] ບໍລິສັດປະມານເທົ່າໃດ ມີຢູ່ໃນບໍລິເວນຮອບ ໆ ພຣະພຸດທະເຈົ້າ
ບໍລິສັດປະມານເທົ່ານັ້ນ ສັ່ນເຊນນອນສະຫຼົບຢູ່ເທິງພື້ນທີ່ບໍລິເວນນັ້ນ

[໑໖໙] ໝໍ້ນ້ຳຫຼາຍພັນໝໍ້ ໝໍ້ເຂົ້າຫຼາຍຮ້ອຍໝໍ້

ໝໍ້ໃສ່ກະແຈະແລະໝໍ້ທີ່ໃສ່ປຽງໃນບ່ອນນັ້ນ
ຕ່າງກໍກະທົບກັນແລະກັນ

[໑໗໐] ມະຫາຊົນຫວາດສຽວ ສະດຸ້ງຢ້ານ ຕື່ນຕະໜົກຕົກໃຈ
ມີໃຈຫວາດຫວັ່ນ ປະຊຸມກັນ
ພາກັນເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າທີປັງກອນ

[໑໗໑] ທູນຖາມວ່າ ອັນໃດຈັກມີແກ່ຊາວໂລກ
ເປັນເຫດດີຫຼືເຫດຮ້າຍ
ຊາວໂລກທັງປວງຖືກບຽດບຽນ
ຂ້າແຕ່ພຣະອົງຜູ້ມີພຣະຈັກຂຸ
ຂໍພຣະອົງໄດ້ໂຜດບັນເທົາໄພທີ່ບຽດບຽນນັ້ນດ້ວຍເທີ້ນ

[໑໗໒] ໃນຄັ້ງນັ້ນ ພຣະພຸດທະເຈົ້າພຣະນາມວ່າ ທີປັງກອນ
ຊົງເປັນພຣະມະຫາມຸນີ ຊົງຊີ້ແຈ່ງໃຫ້ມະຫາຊົນໄດ້ເຂົ້າໃຈວ່າ
ໃນການທີ່ພະສຸທາຫວັ່ນໄຫວເທື່ອນີ້ ທ່ານທັງຫຼາຍຈົ່ງເບົາໃຈເທີ້ນ
ຢ່າຕົກໃຈຢ້ານເລີຍ

[໑໗໓] ວັນນີ້ເຮົາພະຍາກອນຜູ້ໃດວ່າຈັກເປັນພຣະພຸດທະເຈົ້າໃນໂລກ
ຜູ້ນັ້ນພິຈາລະນາເຫັນທໍາທີ່ພຣະຊິນນະເຈົ້າຊົງອົບຮົມສັ່ງສົມມາກ່ອນ

[໑໗໔] ເມື່ອຜູ້ນັ້ນພິຈາລະນາທໍາເຊິ່ງເປັນພຸດທະພູມໂດຍບໍ່ມີເຫຼືອ
ຍ້ອນເຫດນັ້ນ ປະຖະພີໂລກກະທາດມີໝື່ນຈັກກະວານ
ໃນໂລກພ້ອມທັງເທວະໂລກຈຶ່ງສັ່ນຫວັນໄຫວ

[໑໗໕] ຂະນະນັ້ນ ມະຫາຊົນໄດ້ຟັງພຣະດໍາຣັດແລ້ວ
ກໍເກີດຄວາມສະບາຍໃຈຂຶ້ນ
ທຸກຄົນພາກັນມາຫາເຮົາແລ້ວອະພິວາດອີກ

[໑໗໖] ໃນຄັ້ງນັ້ນ ເຮົາຍຶດພຣະພຸດທະຄຸນ ກະທໍາໃຈໃຫ້ໝັ້ນຄົງ
ນະມັດສະການພຣະພຸດທະເຈົ້າພຣະນາມວ່າທີປັງກອນແລ້ວລຸກຈາກອາສະນະ

[໑໗໗] ຊົນ ໒ ຝ່າຍ ຄື ເທບຖືດອກໄມ້ທິບ
ໝູ່ມະນຸດຖືດອກໄມ້ທີ່ເປັນຂອງມະນຸດ
ຕ່າງໂຮຍດອກໄມ້ທັງຫຼາຍເພື່ອເຮົາຜູ້ລຸກຈາກອາສະນະ

[໑໗໘] ອັນໜຶ່ງ ເທບແລະມະນຸດທັງ ໔ ຝ່າຍເຫຼົ່ານັ້ນ
ຕ່າງກໍປະກາດຄວາມສະຫວັດດີວ່າ
ທ່ານປາຖະໜາຕຳແໜ່ງອັນໃຫຍ່ຫຼວງ
ຂໍທ່ານໄດ້ຕຳແໜ່ງນັ້ນຕາມຄວາມປາຖະໜາເທີ້ນ

[໑໗໙] ສະໜຽດຈັງໄຣທັງປວງຈົ່ງຢ່າມີ
ຄວາມໂສກແລະໂຣກຈົ່ງຢ່າມີ
ອັນຕະລາຍຈົ່ງຢ່າມີແກ່ທ່ານ
ຂໍໃຫ້ທ່ານໄດ້ບັນລຸພຣະໂພທິຍານອັນປະເສີດໂດຍທັນທີເທີ້ນ

[໑໘໐] ເມື່ອເຖິງລະດູ (ທີ່ຕົ້ນໄມ້ແຕກດອກ) ໝູ່ໄມ້ຈຳພວກທີ່ມີດອກ
ກໍແຕກດອກ ສັນໃດ
ທ່ານຜູ້ມີຄວາມພຽນອັນຍິ່ງໃຫຍ່
ຂໍທ່ານຈົ່ງບົ່ງດ້ວຍພຣະພຸດທະຍານ ສັນນັ້ນຄືກັນເທີ້ນ

[໑໘໑] ພຣະສຳມາສຳພຸດທະເຈົ້າທຸກພຣະອົງ
ກໍໄດ້ຊົງພ່ຳເພັງປາຣະມີ ໑໐ ປະການມາແລ້ວສັນໃດ
ທ່ານຜູ້ມີຄວາມພຽນອັນຍິ່ງໃຫຍ່
ຂໍທ່ານຈົ່ງພ່ຳເພັງປາຣະມີ ໑໐ ປະການ ສັນນັ້ນຄືກັນເທີ້ນ

[໑໘໔] ພຣະສຳມາສຳພຸດທະເຈົ້າທຸກພຣະອົງ
ກໍໄດ້ຕັດສະຣູ້ທີ່ໂພທິມັນ ສັນໃດ
ທ່ານຜູ້ມີຄວາມພຽນອັນຍິ່ງໃຫຍ່
ຂໍທ່ານຈົ່ງຕັດສະຣູ້ທີ່ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຊິນນະເຈົ້າ
ສັນນັ້ນຄືກັນເທີ້ນ

[໑໘໓] ພຣະສຳມາສຳພຸດທະເຈົ້າທຸກພຣະອົງ
ກໍຊົງປະກາດພຣະທຳມະຈັກແລ້ວ ສັນໃດ
ທ່ານຜູ້ມີຄວາມພຽນອັນຍິ່ງໃຫຍ່
ຂໍທ່ານຈົ່ງປະກາດພຣະທຳມະຈັກ ສັນນັ້ນຄືກັນເທີ້ນ

[໑໘໔] ດວງຈັນໃນວັນເພັງເຕັມດວງສ່ອງສະຫວ່າງ ສັນໃດ
ຂໍທ່ານຜູ້ມີໃຈປາຖະໜາທີ່ເຕັມປ່ຽມແລ້ວ
ຈົ່ງຣຸ່ງເຮືອງ (ສະຫວ່າງສະໄຫວ) ໃນໝື່ນຈັກກະວານ
ສັນນັ້ນຄືກັນເທີ້ນ

[໑໗໕] ດວງອາທິດພົ້ນຈາກຣາຫູແລ້ວ
ຍ່ອມໄພໂຣດແຈ່ມຈ້າດ້ວຍແສງສະຫວ່າງ ສັນໃດ
ຂໍທ່ານຈົ່ງພົ້ນຈາກໂລກກະທຳແລ້ວ
ແຈ່ມຈ້າດ້ວຍສິຣິ (ແຫ່ງພຣະພຸດທະເຈົ້າ) ສັນນັ້ນຄືກັນເທີ້ນ

[໑໗໖] ແມ່ນ້ຳທຸກສາຍໄຫຼໄປສູ່ທະເລຫຼວງ ສັນໃດ
ຂໍຊາວໂລກພ້ອມທັງເທວະດາທັງຫຼາຍ
ຈົ່ງພາກັນຫຼັ່ງໄຫຼໄປໃນສຳນັກຂອງທ່ານ ສັນນັ້ນຄືກັນເທີ້ນ

[໑໗໗] ໃນຄັ້ງນັ້ນ ສຸເມທະດາບົດນັ້ນ ອັນທວຍເທບແລະໝູ່ມະນຸດເຫຼົ່ານັ້ນ
ຊົມເຊີຍ ສັນເສີນແລ້ວ ສະມາທານທຳ ໑໐ ປະການ (ປາຣະມີ ໑໐)
ເມື່ອຈະພ່ຳເພັງທຳເຫຼົ່ານັ້ນໃຫ້ບໍລິບູນ ຈຶ່ງເຂົ້າໄປສູ່ປ່າໃຫຍ່

**ສຸເມທະກະຖາ ຈົບ**

## ໓. ພຸດທະວົງ

## ໑. ທີປັງກອນພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະທີປັງກອນພຸດທະເຈົ້າ

[໑] ໃນຄັ້ງນັ້ນ ຊົນເຫຼົ່ານັ້ນທູນນິມົນພຸດທະເຈົ້າພຣະນາມວ່າ ທີປັງກອນ
ຊົງເປັນຜູ້ນຳສັດໂລກພ້ອມທັງພິກຂຸສົງໃຫ້ສະເຫວີຍແລະສັນແລ້ວ
ໄດ້ເຖິງພຣະສາດສະດາພຣະນາມວ່າທີປັງກອນພຣະອົງນັ້ນເປັນສະຣະນະ

[໒] ພຣະຕະຖາຄົດເຈົ້າໃຫ້ຄົນບາງຄົນຕັ້ງຢູ່ໃນສະຣະນະຄົມ
ໃຫ້ຄົນບາງຄົນຕັ້ງຢູ່ໃນສິນ ໕ ໃຫ້ຄົນບາງຄົນຕັ້ງຢູ່ໃນສິນ ໑໐

[໓] ຊົງປະທານສາມັນຍະຜົນ ໔ ອັນສູງສຸດໃຫ້ແກ່ຄົນບາງຄົນ
ຊົງປະທານທຳທີ່ບໍ່ມີທຳຢ່າງອື່ນສະເໝີເໝືອນ
ຄືປະຕິສຳພິທາໃຫ້ແກ່ຄົນບາງຄົນ

[໔] ພຣະຕະຖາຄົດເຈົ້າຜູ້ອົງອາດກວ່ານໍຣະຊົນ
ຊົງປະທານສະມາບັດທີ່ປະເສີດ ໘ ປະການໃຫ້ແກ່ຄົນບາງຄົນ
ຊົງປະທານວິດຊາ ໓ ອະພິນຍາ ໖ ໃຫ້ແກ່ຄົນບາງຄົນ

[໔] ພຣະມະຫາມຸນີຍ່ອມຕັດສອນໝູ່ຊົນຕາມລຳດັບນັ້ນ
ຍ້ອນເຫດນັ້ນສາດສະໜາຂອງພຣະໂລກກະນາດ
ຈຶ່ງແຜ່ໄປຢ່າງກວ້າງຂວາງ

[໕] ພຣະສາດສະດາພຣະນາມວ່າ ທີປັງກອນ
ຜູ້ຊົງມີພຣະທະນຸໃຫຍ່ ແລະພຣະວໍຣະກາຍງົດງາມ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ
ຊົງປິດເບື້ອງຈາກທຸກຄະຕິ

[໖] ພຣະມະຫາມຸນີຊົງເຫັນຊົນທີ່ຄວນແນະນຳໃຫ້ຕັດສະຮູ້ໄດ້
ແມ່ນໃນທີ່ໄກເຖິງ ໑໐໐,໐໐໐ ໂຍດ
ກໍສະເດັດໄປພຽງຊົ່ວຂະນະດຽວ ຊົງຊ່ອຍຜູ້ນັ້ນໃຫ້ຕັດສະຮູ້

[໗] ໃນການບັນລຸທຳ (ການຕັດສະຮູ້ທຳ) ເທື່ອທີ ໑
ພຣະພຸດທະເຈົ້າຊົງຊ່ອຍເທວະດາແລະມະນຸດ ໑໐໐ ໂກດໃຫ້ບັນລຸທຳ
ໃນການບັນລຸທຳເທື່ອທີ ໒ ພຣະຜູ້ເປັນບ່ອນເພິ່ງ
ຊົງຊ່ອຍເທວະດາແລະມະນຸດ ໙໐ ໂກດໃຫ້ບັນລຸທຳ

[໘] ແລະໃນເວລາທີ່ພຣະພຸດທະເຈົ້າຊົງສະແດງທຳໃນເທວະໂລກ
ໄດ້ມີເທວະດາ ໙໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໓

[໑໐] ພຣະສາດສະດາພຣະນາມວ່າທີປັງກອນ
ໄດ້ມີການປະຊຸມສາວົກ ໓ ເທື່ອ
ສາວົກປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນເປັນເທື່ອທີ ໑

[໑໑] ເມື່ອພຣະຊິນນະເຈົ້າປະທັບຢູ່ໃນສະຖານທີ່ອັນສະຫງັດ ທີ່ຈອມພູນາຣະທະ
ພຣະຂີນາສົບຜູ້ປາສະຈາກມົນທິນປະມານ ໑໐໐ ໂກດ ມາປະຊຸມກັນ

[໑໒] ໃນການໃດ ພຣະມະຫາວີຣະເຈົ້າຜູ້ຊົງເປັນພຣະມະຫາມຸນີ
ຊົງປະວາຣະນາອອກພັນສາ
ພ້ອມທັງພິກຂຸສົງ ໙໐,໐໐໐ ໂກດ ທີ່ຈອມພູສຸທັດສະນະ
ສະໄໝນັ້ນ ເຮົາເປັນຊະດິນຜູ້ມີຕະບະແກ່ກ້າ
ສຳເລັດອະພິນຍາ ໕[1] ເຫາະໄປໃນອາກາດໄດ້

[๑๖] ເທວະດາແລະມະນຸດປະມານ ໒໐໐,໐໐໐ ໄດ້ບັນລຸທຳ
ການບັນລຸທຳເທື່ອລະອົງສອງອົງນັບຈຳນວນບໍ່ຖ້ວນ

[๑๔] ໃນຄັ້ງນັ້ນ ພຣະສາດສະໜາຂອງພຣະຜູ້ມີພຣະພາກເຈົ້າ
ພຣະນາມວ່າທີປັງກອນ
ແຜ່ໄພສານ ມີຄົນຮູ້ຫຼາຍ ຈະເລີນແຜ່ຫຼາຍ ສະອາດ ບໍລິສຸດ

[๑๕] ພິກຂຸປະມານ ໔໐໐,໐໐໐ ອົງ ລ້ວນໄດ້ອະພິນຍາ ໖ ມີລິດຫຼາຍ
ແວດລ້ອມພຣະຜູ້ມີພຣະພາກເຈົ້າພຣະນາມວ່າທີປັງກອນ
ຜູ້ຊົງຮູ້ແຈ້ງໂລກໃນການທັງປວງ

[๑๖] ສະໄໝນັ້ນ ຊົນເຫຼົ່າໃດເຫຼົ່າໜຶ່ງ
ບໍ່ໄດ້ບັນລຸອະຣະຫັດຕະຜົນ ເປັນພຣະເສຂະລະມະນຸດພູມໄປ
ຊົນເຫຼົ່ານັ້ນຍ່ອມຖືກຕິຕຽນ

[๑๗] ສາດສະໜາແຜ່ຫຼາຍ ງົດງາມດ້ວຍພຣະອະຣະຫັນຕະຂີນາສົບ
ຜູ້ຄົງທີ່ ປາສະຈາກມົນທິນ ໃນການທັງປວງ

[๑๘] ເມືອງຊື່ວ່າຣຳມະວະດີ ກະສັດພຣະນາມວ່າສຸເທບ ເປັນພຣະຊະນົກ
ພຣະເທວີພຣະນາມວ່າສຸເມທາເປັນພຣະຊົນນີ
ຂອງພຣະສາດສະດາພຣະນາມວ່າທີປັງກອນ

[๑๙] ພຣະຊິນນະເຈົ້າຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ຊົງມີຝູງທົງ ນົກກະຣຽນນົກຍູງຫຼວງຫຼາຍ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ

[๒๐] ມີນາງສະນົມກຳນັນ ໓໐໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ປະທຸມາ
ພຣະຣາດຊະໂອຣົດພຣະນາມວ່າ ອຸສະພະຂັນທະກຸມານ

[๒๑] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືຊ້າງອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ๑๐ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໔] ເມື່ອຊົງພ່ຳເພັງຄວາມພຽນສຳເລັດແລ້ວ
ກໍໄດ້ຕັດສະຣູ້ສຳໂພທິຍານ
ພຣະມະຫາມຸນີພຣະນາມວ່າທີປັງກອນ ຜູ້ອັນພົມທູນອາຣາດທະນາແລ້ວ

[໔໕] ພຣະມະຫາວີຣະຊິນນະເຈົ້າຊົງປະກາດພຣະທຳມະຈັກ
ແລ້ວປະທັບຢູ່ໃນນັນທາຣາມ ປະທັບນັ່ງຢູ່ທີ່ເຫງົ້າຕົ້ນສົ້ມກົບ
ຊົງປາບປາມເດຍຣະຖີ

[໔໖] ພຣະສຸມັງຄະລະເຖຣະ ແລະພຣະຕິດສະເຖຣະເປັນພຣະອັກຄະຣະສາວົກ
ພຣະສາຄະຕະເຖຣະເປັນອຸປັດຖາກຂອງພຣະສາດສະດາພຣະນາມວ່າ ທີປັງກອນ

[໔໗] ພຣະນັນທາເຖຣີແລະພຣະສຸນັນທາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນໂພໄຮ

[໔໘] ຕະປຸດສະອຸປາສົກແລະພັນລິກະອຸປາສົກເປັນອັກຄະຣະອຸປັດຖາກ
ສິຣິມາອຸປາສິກາ ແລະໂສນາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໙] ພຣະມະຫາມຸນີພຣະນາມວ່າ ທີປັງກອນ
ຊົງມີພຣະວໍຣະກາຍສູງ ໘໐ ສອກ
ຊົງງົດງາມດັ່ງຕົ້ນພຶກສາປະທີບ
ດັ່ງຕົ້ນພະຍາໄມ້ສາລະທີ່ມີດອກບານສະພັ່ງ
ພຣະອົງຊົງມີພຣະຣັດສະໝີແຜ່ຊ່ານອອກ ໑໐ ໂຍດໂດຍຮອບ

[໔໘] ພຣະອົງຊົງສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງມີພຣະຊົນມາຍຸປະມານ ໑໐໐,໐໐໐ ປີ
ຊົງດຳຣົງຢູ່ດົນນານພຽງນັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນ (ສັງສາຣະວັດ) ໄດ້ເປັນຈຳນວນຫຼາຍ

[໔໙] ພຣະອົງພ້ອມທັງສາວົກປະກາດພຣະສັດທຳໃຫ້ຮຸ່ງເຮືອງ
ຊ່ອຍມະຫາຊົນໃຫ້ຂ້າມພົ້ນໄດ້
ແລ້ວສະເດັດດັບຂັນທະປະຣິນິບພານເໝືອນກອງໄຟ
ທີ່ລຸກສະຫວ່າງແຈ້ງແລ້ວດັບໄປ

[໕໐] ພຣະອົງຊົງມີພຣະລິດ ມີພຣະຍົດ

ພ້ອມທັງຈັກກະຣັດຕະນະທີ່ພຣະຍຸຄົນບາດ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໓໑] ພຣະຊິນສາດສະດາພຣະນາມວ່າທີປັງກອນ
ສະເດັດດັບຂັນທະປະຣິນິບພານແລ້ວ
ໃນນັນທາຣາມພຣະສະຖູບອັນປະເສີດຂອງພຣະຊິນນະເຈົ້າພຣະອົງນັ້ນ
ສູງ ໓໖ ໂຍດ ໃນນັນທາຣາມນັ້ນ
ພຣະສະຖູບບັນຈຸບາດ ຈີວອນ ບໍຣິຂານ ແລະເຄື່ອງບໍຣິໂພກ
ຂອງພຣະອົງຜູ້ສາດສະດາ ທີ່ເທຫຼົ້າຕົ້ນໂພໃນການນັ້ນສູງ ໓ ໂຍດ

**ທີປັງກອນພຸດທະວົງທີ ໑ ຈົບ**

## ໒. ໂກນທັນຍະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະໂກນທັນຍະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າທີປັງກອນ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ຊົງເປັນຜູ້ນໍາ ຊົງມີພຣະເດດຫາບ່ອນສຸດບໍ່ໄດ້
ມີພຣະຍົດປະມານບໍ່ໄດ້ ມີພຣະຄຸນປະມານບໍ່ໄດ້
ແລະຍາກທີ່ຈະກະທົບກະທັ່ງໄດ້

[໒] ພຣະອົງຊົງປຽບດັ່ງແຜ່ນດິນໂດຍຂັນຕິທໍາ
ປຽບດັ່ງສາຄອນໂດຍສີນ
ປຽບດັ່ງພູເຂົາສິເນຣຸໂດຍສະມາທິ
ປຽບດັ່ງທ້ອງຟ້າໂດຍປັນຍາ

[໓] ຊົງປະກາດທໍາທີ່ຄວນປະກາດຄືອິນຊີ ພະລະ ໂພດຊົງ ມັກ
ອະຣິຍະສັດ ໃນການທຸກເມື່ອ ເພື່ອປະໂຫຍດເກື້ອກູນແກ່ສັບພະສັດ

[໔] ເມື່ອພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ຊົງເປັນຜູ້ນໍາສັດໂລກ ຊົງປະກາດພຣະທໍາມະຈັກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທໍາໃນເທື່ອທີ ໑

[໔]	ຈາກນັ້ນ ເມື່ອຊົງສະແດງພຣະທຳໃນສະມາຄົມຂອງເທວະດາ ແລະມະນຸດ
ເທວະດາ ແລະມະນຸດປະມານ ໗໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໔

[໕]	ໃນເວລາທີ່ພຣະອົງເມື່ອຊົງສະແດງທຳອົບຮົມພວກເດຍຣະຖີ
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດໄດ້ບັນລຸທຳເທື່ອທີ ໓

[ໆ]	ພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມພຣະສາວົກຜູ້ເປັນຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໗]	ພຣະຂີນາສົບຈຳນວນ ໑໐໐,໐໐໐ ໂກດ ມາປະຊຸມກັນ ເທື່ອທີ ໑
ພຣະຂີນາສົບຈຳນວນ ໑,໐໐໐ ໂກດ ມາປະຊຸມກັນ ເທື່ອທີ ໒
ພຣະຂີນາສົບຈຳນວນ ໙໐ ໂກດ ມາປະຊຸມກັນ ເທື່ອທີ ໓

[໙]	ໃນຄັ້ງນັ້ນ ເຮົາເປັນພຣະມະຫາກະສັດມີນາມວ່າວິຊິຕາວີ
ແຜ່ຄວາມເປັນໃຫຍ່ໄປໂດຍມີມະຫາສະມຸດສາຄອນເປັນຂອບເຂດ

[໑໐]	ເຮົາໄດ້ອັງຄາດພິກຂຸປະມານ ໑໐,໐໐໐ ໂກດ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຜູ້ປາສະຈາກມົນທິນ
ພ້ອມດ້ວຍພຣະຜູ້ຊົງເປັນບ່ອນເພິ່ງອັນເລີດຂອງສັດໂລກ
ໃຫ້ອີ່ມໜຳດ້ວຍອາຫານອັນປະນີດ

[໑໑]	ແມ່ນພຣະພຸດທະເຈົ້າພຣະນາມວ່າໂກນທັນຍະພຣະອົງນັ້ນ
ຊົງເປັນຜູ້ນຳສັດໂລກ ກໍຊົງພະຍາກອນເຮົາວ່າ
ໃນກັບອັນນັບປະມານບໍ່ໄດ້ນັບຈາກກັບນີ້ໄປ
ເຂົາຈັກເປັນພຸດທະເຈົ້າໃນໂລກ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິລະພັດທີ່ໜ້າອອນຊອນ

[໑໒]	ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ

ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

[໑໓] ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

[໑໔] ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

[໑໕] ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ

[໑໖] ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນ ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

[໑໗] ເທວະດາ ແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

[໑໗] ສັດທັງຫຼາຍໃນພື້ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

[໑໙] ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້ໄປ
ເຮົາທັງຫຼາຍກໍຈັກພ້ອມໜ້າທີ່ພຸດທາງກູນນີ້ໃນອະນາຄົດຕະການ

[໒໐] ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຢຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

[໒໑] ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າທີ່ພຸດທາງກູນນີ້ໃນອະນາຄົດຕະການ

[໒໒] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ ເຮົາເມື່ອຈະເຮັດປະໂຫຍດນັ້ນໃຫ້ສຳເລັດ
ຈຶ່ງໄດ້ຖວາຍຣາດຊະສົມບັດອັນໃຫຍ່ຫຼວງແກ່ພຣະຊິນນະເຈົ້າ
ເມື່ອແລ້ວກໍອອກບວດໃນສຳນັກຂອງພຣະອົງ

[໒໓] ເຮົາໄດ້ຮ່ຳຮຽນພຣະສູດແລະພຣະວິໄນ
ອັນເປັນນະວັງຄະສັດຖຸສາດທັງປວງ
ແລ້ວຊ່ອຍປະກາດສາດສະໜາຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງ

[໒໔] ເຮົາເປັນຜູ້ບໍ່ຜະໝາດຢູ່ໃນຄຳສັ່ງສອນນັ້ນທັງໃນເວລານັ່ງ
ຢືນແລະຍ່າງ ເຖິງຄວາມສຳເລັດອະພິນຍາແລ້ວ ໄດ້ໄປເກີດເທິງພົມມະໂລກ

[໒໕] ເມືອງຫຼວງຊື່ວ່າ ຣຳມະວະດີ ກະສັດພຣະນາມວ່າສຸນັນທະເປັນພຣະຊະນົກ
ພຣະເທວີພຣະນາມວ່າ ສຸຊາດາ ເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໖] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸຈິຜາສາດ ສຸຣຸຈິຜາສາດ ແລະສຸພະຜາສາດ

[໔໗] ມີນາງສະນົມກຳນັນ ໓໐໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ຣຸຈິເທວີ
ພຣະຣາດຊະໂອຣົດພຣະນາມວ່າ ວິຊິຕະເສນະ

[໔໘] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໑໐ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໙] ພຣະມະຫາວີຣະພຣະນາມວ່າໂກນທັນຍະ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກແກ່ເທວະດາ
ແລະມະນຸດທັງຫຼາຍ ໃນປ່າມະຫາວັນ

[໕໐] ພຣະພັດທະເຖຣະແລະພຣະສຸພັດທະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າ ອະນຸຣຸດທະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໑] ພຣະຕິດສາເຖຣີແລະພຣະອຸປະຕິດສາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນຂານາງເປັນຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະພຸດທະເຈົ້າ
ພຣະນາມວ່າ ໂກນທັນຍະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໒] ໂສນະອຸປາສົກແລະອຸປະໂສນະອຸປາສົກເປັນອັກຄະຣະອຸປັດຖາກ
ນັນທາອຸປາສິກາແລະສິຣິມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໕໓] ພຣະມະຫາມຸນີພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໘໘ ສອກ
ຊົງງົດງາມດັ່ງດວງຈັນໃນວັນເພັງ
ແລະດັ່ງດວງອາທິດໃນເວລາທ່ຽງວັນ
[໕໔] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະອົງກໍ່ຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໓໕] ເມທະນີງົດງາມວິຈິດດ້ວຍພຣະຂີນາສົບ ຜູ້ປາສະຈາກມົນທິນ
ເມທະນີນັ້ນງາມເໝືອນທ້ອງຟ້າທີ່ວິຈິດໄປດ້ວຍໝູ່ດາວ

[໓໖] ພຣະອະຣະຫັນຜູ້ປະເສີດແມ່ນເຫຼົ່ານັ້ນ
ມີຄຸນຫາປະມານບໍ່ໄດ້ ບໍ່ກຳເຣີບ ຫາຜູ້ກະທົບກະທັ່ງໄດ້ຍາກ
ທ່ານຜູ້ມີຍົດເຫຼົ່ານັ້ນ ສະແດງເໝືອນສາຍຟ້າຟາດ ປະຣິນິບພານແລ້ວ

[໓໗] ລິດຂອງພຣະຊິນນະເຈົ້າບໍ່ມີບ່ອນປຽບ
ສະມາທິອັນປັນຍາອົບຮົມດີແລ້ວ
ທຸກຢ່າງອັນຕະຣະທານຫາຍໄປພ້ອມກັນແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໓໘] ພຣະພຸດທະເຈົ້າພຣະນາມວ່າໂກນທັນຍະ ຜູ້ຊົງພຣະສິຣິ
ສະເດັດດັບຂັນທະປະຣິນິບພານຢູ່ນັນທາຣາມ
ພຣະເຈດີຂອງພຣະອົງສູງ ໗ ໂຍດ
ຢູ່ນັນທາຣາມນັ້ນ ດັ່ງນີ້ແລ

**ໂກນທັນຍະພຸດທະວົງທີ ໔ ຈົບ**

## ໓. ມັງຄະລະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະມັງຄະລະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ໂກນທັນຍະ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ມັງຄະລະ ຜູ້ຊົງເປັນຜູ້ນຳ
ຊົງຊູຄົບເພີງຄືພຣະທຳ ກຳຈັດຄວາມມືດໃນໂລກ

[໔] ຣັດສະມີຂອງພຣະອົງບໍ່ມີບ່ອນປຽບ
ຍິ່ງກວ່າພຣະຊິນນະເຈົ້າອົງອື່ນ ໆ
ຂົ່ມຣັດສະໝີຂອງດວງຈັນແລະດວງອາທິດ
ຮຸ່ງເຮືອງໄປທົ່ວພື້ນຈັກກະວານ

[໓] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ
ກໍຊົງປະກາດອະຣິຍະສັດ ໔ ທີ່ປະເສີດສຸດ
ເທວະດາແລະມະນຸດຕ່າງກໍໄດ້ດື່ມຣົດແຫ່ງອະຣິຍະສັດ
ແລ້ວຍ່ອມບັນເທົາຄວາມມືດມົນສາໄດ້

[໔] ເມື່ອພຣະອົງຊົງບັນລຸພຣະໂພທິຍານອັນບໍ່ມີບ່ອນປຽບແລ້ວ
ຊົງສະແດງທຳເທື່ອທຳອິດ
ເຫຼົ່າສັດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໑

[໕] ພຣະພຸດທະເຈົ້າ ຊົງສະແດງທຳ
ທີ່ພົບຂອງເທວະດາຜູ້ເປັນຈອມເທບ
ໃນຄັ້ງນັ້ນ ເທບປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໒

[໖] ໃນການເມື່ອພຣະເຈົ້າຈັກກະພັດພຣະນາມວ່າ ສຸນັນທະ
ສະເດັດເຂົ້າເຝົ້າພຣະສຳມາສຳພຸດທະເຈົ້າ
ພຣະສຳມາສຳພຸດທະເຈົ້າຊົງຕີທຳເພຣີ (ກອງຄືທຳ)
ອັນປະເສີດຍອດຢ້ຽມ

[໗] ແລະໃນຄັ້ງນັ້ນ ບໍລິວານຂອງພຣະເຈົ້າຈັກກະພັດພຣະນາມວ່າ ສຸນັນທະ
ມີປະມານ ໙໐ ໂກດ ທັງໝົດນັ້ນ ບໍ່ເຫຼືອເລີຍ
ໄດ້ບວດດ້ວຍເອຫິພິກຂຸອຸປະສຳປະທາ

[໘] ພຣະພຸດທະເຈົ້າພຣະນາມວ່າ ມັງຄະລະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ໄດ້ມີການປະຊຸມສາວົກ ໓ ເທື່ອ
ສາວົກປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໙] ສາວົກຈຳນວນ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໒
ສາວົກຈຳນວນ ໙໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໓
ການປະຊຸມໃນຄັ້ງນັ້ນ ລ້ວນແຕ່ພຣະສາວົກ
ຜູ້ພຣະຂີນາສົບປາສະຈາກມົນທິນເທົ່ານັ້ນ

[໑໐] ສະໄໝນັ້ນ ເຮົາເປັນພາມມີນາມວ່າ ສຸຣຸຈິ
ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຈົບໄຕຣເພດ

[໑໑] ເຮົາໄດ້ເຂົ້າເຝົ້າພຣະສາດສະດາພຣະອົງນັ້ນ
ໄດ້ເຖິງພຣະອົງເປັນສະຣະນະ ແລະໄດ້ບູຊາພຣະສົງ
ເຊິ່ງມີພຣະສຳມາສຳພຸດທະເຈົ້າເປັນປະທານດ້ວຍຂອງຫອມແລະດອກໄມ້
ເມື່ອແລ້ວໄດ້ອັງຄາດໃຫ້ອີ່ມໜຳດ້ວຍນ້ຳນົມງົວ

[໑໘] ແມ່ນພຣະພຸດທະເຈົ້າພຣະນາມວ່າມັງຄະລະພຣະອົງນັ້ນ
ຜູ້ສູງສຸດແຫ່ງເທວະດາແລະມະນຸດກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ພາມຊື່ສຸຣຸຈິນີ້ ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໙] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າ ໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ

ຈັກເປັນອັກຄະຣະອຸປັດຖາຍິກາ

ພຣະໂຄດົມຜູ້ມີຍົດພຣະອົງນັ້ນ

ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້

ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ

ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ

ຕ່າງກໍມີຄວາມຊື່ນຊົມກ່າວວ່າ

ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ

ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ

ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກະນາດພຣະອົງນີ້

ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ

ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ

ຖ້າພາດພຣະຊິນນະເຈົ້າພຣະອົງນີ້

ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ

ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ

ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການ ໃຫ້ຍິ່ງຂຶ້ນໄປ

[໑໕] ໃນຄັ້ງນັ້ນ ເຮົາເພີ່ມພູນປີຕິເພື່ອບັນລຸສຳໂພທິຍານອັນປະເສີດ

ຈຶ່ງຖວາຍເຮືອນຂອງເຮົາໃນພຣະພຸດທະເຈົ້າແລ້ວ

ບວດໃນສຳນັກຂອງພຣະພຸດທະອົງ

[໑໖] ເຮົາໄດ້ຮ່ຳຮຽນພຣະສູດແລະພຣະວິໄນ

ອັນເປັນນະວັງຄະສັດຖຸສາດທັງປວງ

ແລ້ວຊ່ອຍປະກາດສາດສະໜາຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງ

[໑໗] ເຮົາເປັນຜູ້ບໍ່ຜະໝາດຢູ່ໃນຄຳສັ່ງສອນນັ້ນ

ຈະເລີນພົມວິຫານພາວະນາ

ເຖິງຄວາມສຳເລັດອະພິນຍາແລ້ວ ໄດ້ໄປເກີດເທິງພົມມະໂລກ

[໑໗] ເມືອງຫຼວງຊື່ວ່າອຸດຕະຣະ ກະສັດພຣະນາມວ່າອຸດຕະຣະເປັນພຣະຊະນົກ
ພຣະເທວີນາມວ່າອຸດຕະຣາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າມັງຄະລະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໙] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຍະສະວາຜາສາດ ສຸຈິມາຜາສາດ ແລະສິຣິມາຜາສາດ

[໔໐] ມີນາງສະໜົມກຳນັນ ໓໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ຍະສະວະດີ
ພຣະຣາດຊະໂອຣົດພຣະນາມວ່າສີວະລະ

[໔໑] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືມ້າອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໔] ພຣະມະຫາວີຣະພຣະນາມວ່າມັງຄະລະຊົງເປັນຜູ້ນຳສັດໂລກ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກສະເດັດຈາຣິກໄປ

[໔໓] ພຣະສຸເທວະເຖຣະ ແລະພຣະທຳມະເສນເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າປາລິຕະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ມັງຄະລະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔] ພຣະສີລະວາເຖຣີ ແລະພຣະອະໂສກາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນກາກະທິງ

[໔໕] ນັນທະອຸປາສົກ ແລະວິສາຂະອຸປາສົກເປັນອັກຄະຣະອຸປັດຖາກ
ອະນຸລາອຸປາສິກາ ແລະສຸມະນາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໖] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໗໗ ສອກ

ມີພຣະຣັດສະໝີແຜ່ຊ່ານອອກຈາກພຣະວໍຣະກາຍ
ຂອງພຣະອົງນັ້ນໄປໄກຫຼາຍແສນຈັກກະວານ

[໔໗] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໗໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໘] ສາວົກຂອງພຣະອົງໃຜ ໆ ບໍ່ສາມາດຈະນັບໄດ້
ເໝືອນຄື້ນໃນສະມຸດສາຄອນທີ່ໃຜ ໆ ບໍ່ອາດນັບໄດ້

[໔໙] ໃນຄັ້ງນັ້ນ ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ມັງຄະລະ
ຊົງເປັນຜູ້ນຳສັດໂລກ ຊົງດຳຣົງພຣະຊົນມາຍຸຢູ່ພຽງໃດ
ໃນສາດສະໜາຂອງພຣະອົງບໍ່ມີການຕາຍຢ່າງຄົນມີກິເລດພຽງນັ້ນ

[໕໐] ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່ ຊົງຍົກຄົບເພີງຄືພຣະທຳ
ຊົງຊ່ອຍມະຫາຊົນໃຫ້ຂ້າມພົ້ນ
ຊົງຮຸ່ງເຮືອງເໝືອນແປວໄຟ ສະເດັດດັບຂັນທະປະຣິນິບພານແລ້ວ

[໕໑] ຊົງສະແດງອັດຖະແຫ່ງສະພາວະຂອງສັງຂານ
ໃນມະນຸດໂລກພ້ອມທັງເທວະໂລກ
ຊົງຮຸ່ງເຮືອງດັ່ງກອງເພີງ ສະເດັດດັບຂັນທະປະຣິນິບພານແລ້ວ
ດັ່ງດວງອາທິດອັດສະດົງ

[໕໒] ພຣະພຸດທະເຈົ້າພຣະນາມວ່າ ມັງຄະລະ
ສະເດັດດັບຂັນທະປະຣິນິບພານ ໃນພຣະຣາດຊະອຸທະຍານຊື່ ເວດສະ
ພຣະສະຖູບຂອງພຣະຊິນນະເຈົ້ານັ້ນສູງ ໕໐ ໂຍດ
ໃນພຣະຣາດຊະອຸທະຍານຊື່ເວດສະນັ້ນ ດັ່ງນີ້ແລ

**ມັງຄະລະພຸດທະວົງທີ ໓ ຈົບ**

## ໔. ສຸມະນະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະສຸມະນະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ມັງຄະລະ
ໄດ້ມີພຣະພຸດທະເຈົ້າຊົງເປັນຜູ້ນຳພຣະນາມວ່າ ສຸມະນະ

ບໍ່ມີໃຜສະເໝີໂດຍທຳທັງປວງ
ຊົງສູງສຸດແຫ່ງສັດທັງປວງ

[໔] ໃນຄັ້ງນັ້ນ ພຣະສາດສະດາຊົງລັ່ນອະມະຕະເພຣີໃນເມຂະລະບຸຣີ
ຄຳສອນຂອງພຣະຊິນນະເຈົ້າມີອົງ ໙ ປະກອບດ້ວຍທຳຝ່າຍຂາວ

[໓] ພຣະສາດສະດາພຣະອົງນັ້ນ ຊົງຊະນະກິເລດແລ້ວ
ຊົງບັນລຸສຳໂພທິຍານອັນປະເສີດສຸດ
ຊົງສ້າງນະຄອນຄືພຣະສັດທຳເຊິ່ງເປັນເມືອງປະເສີດທີ່ສຸດ

[໔] ພຣະອົງຊົງສ້າງຖະໜົນໃຫຍ່ຄືສະຕິປັດຖານ ອັນລ້ຳເລີດ
ບໍ່ມີອັນໃດຄັ່ນ ບໍ່ຄົດ ເປັນຖະໜົນຕົງ ໄພບູນ ກວ້າງຂວາງ

[໕] ຊົງແຜ່ສາມັນຍະຜົນ ໔ ປະຕິສຳພິທາ ໔ ອະພິນຍາ ໖
ແລະສະມາບັດ ໘ ໄວ້ເທິງຖະໜົນນັ້ນ

[໖] ຊົນເຫຼົ່າໃດເປັນຜູ້ບໍ່ຜະໝາດ ບໍ່ມີກິເລດພຽງດັ່ງຕະປູຕຶງໃຈ
ປະກອບດ້ວຍຫິຣິແລະຄວາມພຽນ
ຊົນເຫຼົ່ານັ້ນທັງໝົດ ຍ່ອມຖືເອົາຄຸນອັນປະເສີດນີ້ໄດ້ຢ່າງສະບາຍ

[໗] ພຣະສາດສະດາຊົງຊ່ວຍເຫຼືອມະຫາຊົນດ້ວຍຄວາມພຽນນັ້ນຢ່າງນີ້
ຊົງຊ່ວຍເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໃຫ້ບັນລຸທຳເທື່ອທີ ໑

[໘] ພຣະມະຫາວີຣະຕັດສອນໝູ່ເດຍຣະຖີໃນການໃດ
ໃນການນັ້ນຊົງຊ່ວຍເຫຼົ່າສັດ ປະມານ ໑໐໐,໐໐໐ ໂກດ
ໃຫ້ບັນລຸທຳໃນການສະແດງທຳເທື່ອທີ ໒

[໙] ໃນເວລາເມື່ອເທວະດາແລະມະນຸດຜູ້ພ້ອມພຽງກັນ
ຮ່ວມໃຈກັນມາທູນຖາມນິໂຣທບັນຫາແລະຄວາມສົງໄສທາງໃຈ

[໑໐] ໃນການຊົງສະແດງທຳເປັນເຄື່ອງສະແດງນິໂຣທ
ແມ່ນໃນຄັ້ງນັ້ນເຫຼົ່າສັດປະມານ ໙໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໓

[໑໑] ພຣະພຸດທະເຈົ້າພຣະນາມວ່າ ສຸມະນະ

ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໑໘] ເມື່ອພຣະຜູ້ມີພຣະພາກເຈົ້າຊົງຈຳພັນສາແລ້ວ
ເມື່ອສົງປະກາດປະວາຣະນາ ພຣະຕະຖາຄົດເຈົ້າຊົງປະວາຣະນາ
ພ້ອມດ້ວຍພິກຂຸປະມານ ໑໐໐,໐໐໐ ໂກດ

[໑໓] ຈາກນັ້ນ ໃນການປະຊຸມກັນທີ່ສຸວັນນະບັນພົດອັນສຸກໃສ
ພຣະຂີນາສົບປະມານ ໗໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໔

[໑໔] ໃນການເມື່ອທ້າວສັກກະເທວະຣາດສະເດັດເຂົ້າເຝົ້າພຣະພຸດທະເຈົ້າ
ພຣະຂີນາສົບຈຳນວນ ໙໐,໐໐໐ ໂກດ
ມາປະຊຸມກັນ ເປັນເທື່ອທີ ໓

[໑໕] ສະໄໝນັ້ນ ເຮົາເປັນພະຍານາກ ຜູ້ມີລິດຫຼາຍ
ມີຊື່ວ່າອະຕຸລະ ເປັນຜູ້ສ້າງກຸສົນໃຫ້ຈະເລີນຂຶ້ນ

[໑໖] ໃນຄັ້ງນັ້ນ ເຮົາພ້ອມດ້ວຍໝູ່ຍາດຕິພີ່ນ້ອງອອກຈາກນາຄະໂລກ
ບຳຣຸງພຣະຊິນນະເຈົ້າພ້ອມທັງພຣະສົງດ້ວຍດົນຕີທິບ
ຂອງພວກນາກ

[໑໗] ຈັດອັງຄາດພຣະສົງສາວົກ ປະມານ ໑໐໐,໐໐໐ ໂກດ
ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳແລ້ວ ຖວາຍຜ້າອົງລະໜຶ່ງຄູ່
ໄດ້ເຖິງພຣະຊິນນະເຈົ້າພຣະອົງນັ້ນເປັນສະຣະນະ

[໑໘] ແມ່ນພຣະພຸດທະເຈົ້າພຣະນາມວ່າສຸມະນະພຣະອົງນັ້ນ
ຊົງເປັນຜູ້ນຳສັດໂລກ ກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ອະຕຸລະພະຍານາກນີ້ ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໙] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ

ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ
ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທີ່ນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າ ໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ

ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີ ແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນບ່ອນຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ

ຕ່າງກໍເປັ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໔໐] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການ ໃຫ້ຍິ່ງຂຶ້ນໄປ

[໔໑] ເມືອງຫຼວງຊື່ວ່າເມຂະລະ ກະສັດພຣະນາມວ່າສຸທັດຕະເປັນພຣະຊະນົກ
ພຣະນາງສິຣິມາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າ ສຸມະນະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໒] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຈັນທະຜາສາດ ສຸຈັນທະຜາສາດ ແລະວະຕັງສະຜາສາດ

[໔໓] ມີນາງສະໜົມກຳນັບ ໖,໓໐໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ຕັງສະກີ
ພຣະຣາດຊະໂອຣົດພຣະນາມວ່າ ອະນູປະມະ

[໔໔] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືຊ້າງອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໑໐ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໕] ພຣະມະຫາວີຣະເຈົ້າພຣະນາມວ່າ ສຸມະນະ
ຊົງເປັນຜູ້ນຳສັດໂລກ ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກ ໃນເມຂະລະບຸຣີເຊິ່ງເປັນເມືອງປະເສີດທີ່ສຸດ

[໔໖] ພຣະສະຣະນະເຖຣະແລະພຣະພາວິຕັດຕະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອຸເທນເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ສຸມະນະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໗] ພຣະໂສນາເຖຣີແລະພຣະອຸປະໂສນາເຖຣີເປັນພຣະອັກຄະຣະສາວິກາ
ແມ່ນພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນພຣະອົງນັ້ນ
ໄດ້ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນກາກະທິງ

[໔໘] ວະຣຸນະອຸປາສົກແລະສະຣະນະອຸປາສົກເປັນອັກຄະຣະອຸປັດຖາກ
ຈາລາອຸປາສິກາ ແລະອຸປະຈາລາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໙] ພຣະພຸດທະເຈົ້າພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໙໐ ສອກ
ຊົງງົດງາມດັ່ງຄຳທີ່ລ້ຳຄ່າ
ຮຸ່ງເຮືອງໄປທົ່ວໝື່ນຈັກກະວານ

[໕໐] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໙໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ຈຳນວນຫຼາຍ

[໕໑] ພຣະສຳມາສຳພຸດທະເຈົ້າຊົງຊ່ອຍຄົນທີ່ຄວນຂ້າມໃຫ້ຂ້າມ
ຊົງຊ່ອຍຄົນທີ່ຄວນຕັດສະຣູ້ໃຫ້ຕັດສະຣູ້
ແລ້ວສະເດັດດັບຂັນທະປະຣິນິບພານ ເໝືອນດວງຈັນດັບໄປ

[໕໒] ພິກຂຸຜູ້ຂີນາສົບເຫຼົ່ານັ້ນ ຜູ້ມີຍົດຍິ່ງໃຫຍ່
ແລະພຣະພຸດທະເຈົ້າຜູ້ບໍ່ມີໃຜປຽບໄດ້ພຣະອົງນັ້ນ
ສະແດງພຣະຣັດສະໝີທີ່ບໍ່ມີອັນໃດປຽບໄດ້ສະເດັດດັບຂັນທະປະຣິນິບພານໄປ

[໕໓] ພຣະສັບພັນຍຸຕະຍານແລະພຣະຣັດຕະນະໄຕຣ
ທີ່ບໍ່ມີອັນໃດທຽບຄຽງເຫຼົ່ານັ້ນ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໕໔] ພຣະພຸດທະເຈົ້າພຣະນາມວ່າສຸມະນະ ຜູ້ຊົງພຣະຍົດ
ສະເດັດດັບຂັນທະປະຣິນິບພານທີ່ອັງຄາຣາມ

ພຣະສະຖູບຂອງພຣະຊິນນະເຈົ້ານັ້ນ
ສູງທີ່ອັງຄາຣາມນັ້ນສູງເຖິງ ໔ ໂຍດ ດັ່ງນີ້ແລ

**ສຸມະນະພຸດທະວົງທີ ໔ ຈົບ**

## ໕. ເຣວະຕະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະເຣວະຕະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າສຸມະນະ
ໄດ້ມີພຣະຊິນນະເຈົ້າຊົງເປັນຜູ້ນຳພຣະນາມວ່າ ເຣວະຕະ
ບໍ່ມີຜູ້ປຽບປານ ບໍ່ມີຜູ້ທຽມເທົ່າ ຜູ້ສູງສຸດ

[໒] ແມ່ນພຣະອົງອັນພົມທູນອາຣາດທະນາແລ້ວ
ກໍຊົງປະກາດພຣະທຳ ອັນກຳນົດດ້ວຍຂັນແລະທາດ
ບໍ່ເປັນໄປໃນພົບນ້ອຍພົບໃຫຍ່

[໓] ໃນການທີ່ພຣະອົງຊົງສະແດງທຳ
ການບັນລຸທຳມີ ໓ ເທື່ອ
ຜູ້ໄດ້ບັນລຸທຳເທື່ອທີ ໑ ຈະຄິດໄລ່ນັບບໍ່ໄດ້ເລີຍ

[໔] ໃນການເມື່ອພຣະມຸນີພຣະນາມວ່າ ເຣວະຕະ
ຊົງແນະນຳພຣະເຈົ້າອະຣິນທະມະ
ເທວະດາແລະມະນຸດຈຳນວນ ໑,໐໐໐ ໂກດ ໄດ້ບັນລຸທຳ ເທື່ອທີ ໒

[໕] ພຣະຜູ້ອົງອາດກວ່ານໍຣະຊົນສະເດັດອອກຈາກນິໂຣທະສະມາບັດໃນວັນທີ ໗
ຊົງແນະນຳເທວະດາແລະມະນຸດໃນອະຣະຫັດຕະຜົນຈຳນວນ ໑໐໐ ໂກດ

[໖] ພຣະຊິນນະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າ ເຣວະຕະ
ໄດ້ມີການປະຊຸມພຣະຂີນາສົບ
ຜູ້ປາສະຈາກມົນທິນ ລຸດພົ້ນດີ ຄັ້ງທີ່ ໓ ເທື່ອ

[໗] ເທື່ອທີ ໑ ມີພຣະຂີນາສົບມາປະຊຸມກັນຫຼາຍຈົນເກີນກວ່າທີ່ຈະນັບ
ເທື່ອທີ ໒ ມີພຣະຂີນາສົບຈຳນວນ ໑໐໐,໐໐໐ ໂກດ ມາປະຊຸມກັນ

[໘] ໃນການເມື່ອພຣະອົງບໍ່ມີໃຜສະເໝີດ້ວຍພຣະປັນຍາຂອງພຣະອົງ

ຊົງປະກາດພຣະທຳມະຈັກແລ້ວ
ຊົງພຣະປະຊວນໃກ້ຈະສະເດັດດັບຂັນທະປະຣິນິບພານ

[໗] ເທື່ອທີ ໓ ມີພຣະຊີນາສົບທີ່ມາເຂົ້າເຝົ້າພຣະມຸນີ
ເພື່ອທູນຖາມພຣະອາການປະຊວນຂອງພຣະອົງ
ໃນຄັ້ງນັ້ນມີເທວະດາແລະມະນຸດຈຳນວນ ໑໐໐,໐໐໐ ໂກດ ມາປະຊຸມກັນ

[໑໐] ສະໄໝນັ້ນ ເຮົາເປັນພາມມີນາມວ່າອະຕິເທບ
ໄດ້ເຂົ້າເຝົ້າພຣະພຸດທະເຈົ້າພຣະນາມວ່າ ເຣວະຕະ
ແລ້ວເຖິງພຣະອົງເປັນສະຣະນະ

[໑໑] ໄດ້ກ່າວສະດຸດີສີລະຄຸນ ສະມາທິຄຸນ ແລະປັນຍາຄຸນ
ອັນປະເສີດຂອງພຣະອົງ
ແລ້ວໄດ້ທູນຖວາຍຜ້າຫົ່ມແດ່ພຣະອົງຕາມກຳລັງ

[໑໒] ແມ່ນພຣະພຸດທະເຈົ້າພຣະນາມວ່າເຣວະຕະ ພຣະອົງນັ້ນ
ຊົງເປັນຜູ້ນຳສັດໂລກກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ພາມນີ້ຈັກເປັນພຣະພຸດທະເຈົ້າໃນໂລກ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໓] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພໍ່າເພັງທຸກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາ ແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໘] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ

ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການ ໃຫ້ຍິ່ງຂຶ້ນໄປ

[໑໕] ແມ່ນໃນຄັ້ງນັ້ນ ເຮົາຣະລຶກເຖິງພຸດທະກາຣະກະທຳນັ້ນແລ້ວ
ເພີ່ມພູນໃຫ້ຈະເລີນຂຶ້ນດ້ວຍຫວັງວ່າ ເຮົາຈັກນຳມາເຊິ່ງທຳນັ້ນ
ອັນເປັນທຳທີ່ເຮົາປາຖະໜາຢ່າງຍິ່ງ

[໑໖] ເມືອງຫຼວງຊື່ວ່າສຸໄທຍະກະ ກະສັດພຣະນາມວ່າວິປຸລະເປັນພຣະຊະນົກ
ພຣະເທວີພຣະນາມວ່າວິປຸລາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າເຣວະຕະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໗] ພຣະອົງຊົງຄອງຄະຣາວາດຢູ່ ໖,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸທັດສະນະຜາສາດ ຣັດຕະນັກຄິຜາສາດ ແລະອາເວລະຜາສາດ
ຕົກແຕ່ງສວຍງາມ ບັງເກີດຍ້ອນບຸນກຳ

[໑໘] ມີນາງສະໜົມກຳນັນ ໓,໓໐໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສຸທັດສະນາ
ພຣະຣາດຊະໂອຣົດພຣະນາມວ່າວະຣຸນະ

[໑໙] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໐] ພຣະມະຫາວີຣະຊິນນະເຈົ້າພຣະນາມວ່າເຣວະຕະຊົງເປັນຜູ້ນຳສັດໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ປະທັບຢູ່ທີ່ວະຣຸນາຣາມ

[໔໑] ພຣະວະຣຸນະເຖຣະແລະພຣະພົມເທບເຖຣະເປັນພຣະອັກຄະຣະສາວົກ
ພຣະສຳພະວະເຖຣະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ເຣວະຕະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໘໘] ພຣະພັດທາເຖຣີແລະພຣະສຸພັດທາເຖຣີເປັນພຣະອັກຄະຣະສາວິກາ
ແມ່ນພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນພຣະອົງນັ້ນ
ກໍໄດ້ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນກາກະທິງ

[໘໙] ວະຣຸນະອຸປາສົກ ແລະສະຣະພະອຸປາສົກເປັນອັກຄະຣະອຸປັດຖາກ
ປາລາອຸປາສິກາ ແລະອຸບປາລາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໘໔] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໘໐ ສອກ
ຊົງເປ່ງພຣະຣັດສະໝີສະຫວ່າງສະໄຫວໄປທົ່ວທິດ ດັ່ງດວງອາທິດອຸໄທ

[໘໕] ວົງພຣະຣັດສະໝີ ອັນປະເສີດ
ທີ່ເກີດໃນພຣະສະຣີຣະຂອງພຣະພຸດທະເຈົ້າພຣະອົງນັ້ນ
ແຜ່ໄປໂຍດໂດຍຮອບ ທັງກາງເວັນກາງຄືນ

[໘໖] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໖໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໘໗] ຊົງສະແດງພຸດທະພະລັງແລ້ວ
ປະກາດອະມະຕະທຳໃນໂລກ
ບໍ່ຊົງມີອຸປາທານສະເດັດດັບຂັນທະປະຣິນິບພານແລ້ວ
ຍ້ອນສິ້ນຄວາມຍຶດໝັ້ນຖືໝັ້ນວ່າເປັນຜູ້ເລີດ

[໘໘] ພຣະວໍຣະກາຍມີພຣະຣັດສະໝີດັ່ງຄຳ
ພຣະທຳກໍບໍ່ມີອັນໃດເໝືອນ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໘໙] ພຣະເຣວະຕະພຸດທະເຈົ້າພຣະອົງນັ້ນຜູ້ມີພຣະຍົດ
ຜູ້ເປັນມະຫາມຸນີສະເດັດດັບຂັນທະປະຣິນິບພານແລ້ວ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ເຣວະຕະພຸດທະວົງທີ ໕ ຈົບ**

# ໗. ໂສພິຕະພຸດທະວົງ

## ວ່າດ້ວຍພຣະປະຫວັດຂອງພຣະໂສພິຕະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າເຣວະຕະ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າໂສພິຕະຊົງເປັນຜູ້ນຳ
ມີພຣະທະໄທສະງົບໝັ້ນຄົງບໍ່ມີໃຜສະເໝີເໝືອນ ບໍ່ມີບຸກຄົນປຽບ

[໒] ພຣະຊິນນະເຈົ້າພຣະອົງນັ້ນບໍ່ຊົງຍິນດີໃນພຣະຣາດຊະວັງຂອງພຣະອົງ
ຊົງບັນລຸພຣະໂພທິຍານໂດຍໝົດສິ້ນ ປະກາດພຣະທຳມະຈັກແລ້ວ

[໓] ຈາກເບື້ອງເທິງຮອດອະເວຈີມະຫານະຣົກ ຈາກເບື້ອງລຸ່ມຮອດພະວັກຄະພົມ
ໃນລະຫວ່າງນີ້ ມີບໍລິສັດເປັນໜຶ່ງດຽວກັນ ໃນການສະແດງທຳ

[໔] ພຣະສຳມາສຳພຸດທະເຈົ້າຊົງປະກາດພຣະທຳມະຈັກແກ່ບໍລິສັດນັ້ນ
ຜູ້ໄດ້ບັນລຸທຳເທື່ອທີ ໑ ຈະຄິດໄລ່ນັບບໍ່ໄດ້ເລີຍ

[໕] ຖັດຈາກນັ້ນ ເມື່ອພຣະອົງຊົງສະແດງທຳ
ໃນສະມາຄົມຂອງເທວະດາແລະມະນຸດ
ເທວະດາແລະມະນຸດປະມານ ໙໐,໐໐໐ ໂກດ
ໄດ້ບັນລຸທຳ ເທື່ອທີ ໒

[໖] ໃນການນັ້ນ ພຣະຣາດຊະບຸດຜູ້ເປັນກະສັດພຣະນາມວ່າ ໄຊຍະເສນ
ຊົງຮັບສັ່ງໃຫ້ສ້າງພຣະອາຣາມອີກແຫ່ງໜຶ່ງນ້ອມຖວາຍພຣະພຸດທະເຈົ້າ

[໗] ພຣະພຸດທະເຈົ້າຜູ້ຊົງມີພຣະຈັກຂຸ
ຊົງສະແດງທຳປະກາດການບູຊາຂອງກະສັດພຣະອົງນີ້
ເທວະດາແລະມະນຸດປະມານ ໑,໐໐໐ ໂກດ
ໄດ້ບັນລຸທຳ ເທື່ອທີ ໓

[໘] ພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າ ໂສພິຕະ
ໄດ້ມີການປະຊຸມແຫ່ງພຣະຂີນາສົບ ຜູ້ປາສະຈາກມົນທິນ
ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໙] ພຣະຣາຊາຊົງພຣະນາມວ່າ ອຸກຄະຕະພຣະອົງນັ້ນ
ຊົງຖວາຍທານແດ່ພຣະພຸດທະເຈົ້າເປັນຜູ້ສູງສຸດແຫ່ງນໍຣະຊົນ
ໃນທານນັ້ນ ພຣະອະຣະຫັນປະມານ ໑໐໐ ໂກດ ມາປະຊຸມກັນ

[໑໐] ໃນຄັ້ງນັ້ນ ມີໝູ່ຄະນະມາຖວາຍທານແດ່ພຣະພຸດທະເຈົ້າ
ເປັນຜູ້ສູງສຸດແຫ່ງນໍຣະຊົນ
ພຣະອະຣະຫັນປະມານ ໗໐ ໂກດ ມາປະຊຸມກັນ ເທື່ອທີ ໘

[໑໑] ໃນການເມື່ອພຣະຊິນນະເຈົ້າ
ຊົງສະເດັດຈຳພັນສາໃນເທວະໂລກແລ້ວສະເດັດລົງ
ພຣະອະຣະຫັນປະມານ ໙໐ ໂກດ ມາປະຊຸມກັນ ເທື່ອທີ ໙

[໑໒] ສະໄໝນັ້ນ ເຮົາເປັນພາມມີນາມວ່າ ສຸຊາຕະ
ເຮົາໄດ້ອັງຄາດພຣະພຸດທະເຈົ້າພ້ອມທັງສາວົກໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ

[໑໙] ແມ່ນພຣະພຸດທະເຈົ້າພຣະນາມວ່າໂສພິຕະພຣະອົງນັ້ນ
ຊົງເປັນຜູ້ນຳສັດໂລກ ກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ຈາກກັບນີ້ໄປ
ສຸຊາຕະພາມນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໘] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກີຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ
ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະ ແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ

ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີ ແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາ ແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໕] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ທັງຍິນດີ ທັງຕື່ນຕັນໃຈ ໄດ້ພ່ຳເພັງຄວາມພຽນໃຫ້ຍິ່ງຂຶ້ນໄປ
ເພື່ອບັນລຸປະໂຫຍດນັ້ນ

[໑໖] ເມືອງຫຼວງຊື່ວ່າສຸທຳ ກະສັດພຣະນາມວ່າສຸທຳ ເປັນພຣະຊະນົກ
ພຣະເທວີພຣະນາມວ່າ ສຸທຳມາ ເປັນພຣະຊົນນີ
ຂອງພຣະພຸດທະເຈົ້າຊົງພຣະນາມວ່າໂສພິຕະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໗] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືກຸມຸທະຜາສາດ ນະລີນີຜາສາດ ແລະປະທຸມະຜາສາດ

[໑໘] ມີນາງສະໜົມກຳນັບ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າມະກິລາ
ພຣະຣາດຊະໂອຣົດພຣະນາມວ່າ ສີຫະ

[໑໙] ພຣະອົງຜູ້ເປັນຜູ້ສູງສຸດແຫ່ງບຸຣຸດຊົງເຫັນນິມິດ ໔ ປະການ
ຈຶ່ງສະເດັດອອກຈາກຜາສາດໄປບວດ
ຊົງພ່ຳເພັງຄວາມພຽນຢູ່ ໗ ວັນ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໒໐] ພຣະມະຫາວີຣະພຣະນາມວ່າ ໂສພິຕະ
ຊົງເປັນຜູ້ນຳສັດໂລກຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກ
ໃນພຣະອຸທະຍານສຸທຳມາອັນປະເສີດ

[໒໑] ພຣະອະສະມະເຖຣະແລະພຣະສຸເນດຕະເຖຣະເປັນພຣະອັກຄະຣະສາວົກ
ພຣະອະໂນມະເຖຣະເປັນອຸປັດຖາກຂອງພຣະພຸດທະເຈົ້າພຣະນາມວ່າໂສພິຕະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໒] ພຣະນະກຸລາເຖຣີແລະພຣະສຸຊາດາເຖຣີເປັນພຣະອັກຄະຣະສາວິກາ
ແລະພຣະພຸດທະເຈົ້າພຣະອົງນັ້ນ ເມື່ອຕັດສະຣູ້
ກໍໄດ້ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນກາກະທິງ

[໒໓] ຣຳມະອຸປາສົກແລະສຸເນດຕະອຸປາສົກເປັນອັກຄະຣະອຸປັດຖາກ
ນະກຸລາອຸປາສິກາແລະຈິດຕາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໔] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໕໘ ສອກ
ຊົງເປັ່ງພຣະຣັດສະໝີສະຫວ່າງສະໄຫວໄປທົ່ວທິດ ດັ່ງດວງອາທິດອຸໄທ

[໘໕] ຄຳສັ່ງສອນຂອງພຣະອົງອົບໄປດ້ວຍກິ່ນສິນ
ປຽບເໝືອນປ່າໄມ້ທີ່ມີດອກບານສະພັ່ງອົບໄປດ້ວຍກິ່ນຕ່າງ ໆ

[໘໖] ຄຳສອນຂອງພຣະອົງໃຜ ໆ ບໍ່ເບື່ອຈະຟັງ
ເໝືອນສາຄອນທີ່ໃຜ ໆ ບໍ່ເບື່ອທີ່ຈະເຫັນ

[໘໗] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໗໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໘໘] ພຣະອົງພ້ອມກັບສາວົກນັ້ນ
ຊົງປະທານພຣະໂອວາດແລະການພ່ຳສອນ
ຊົງສັ່ງສອນໝູ່ຊົນທີ່ເຫຼືອໃຫ້ເຜົາກິເລດແລ້ວ
ປະຣິນິບພານດັ່ງແປວໄຟໄໝ້ເຊື້ອແລ້ວດັບໄປ

[໘໙] ພຣະພຸດທະເຈົ້າຜູ້ຫາໃຜສະເໝີເໝືອນບໍ່ໄດ້
ແລະສາວົກຜູ້ບັນລຸພະລະທຳ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໙໐] ພຣະໂສພິຕະສຳມາສຳພຸດທະເຈົ້າຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ສີຫາຣາມ
ພຣະບໍຣົມມະສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ໂສພິຕະພຸດທະວົງທີ ໖ ຈົບ**

## ໗. ອະໂນມະທັດສີພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະອະໂນມະທັດສີພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າໂສພິຕະ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າອະໂນມະທັດສີ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ ມີພຣະຍົດຫາປະມານບໍ່ໄດ້
ຊົງມີພຣະເດດຍາກທີ່ຈະລ່ວງໄດ້

[໔] ພຣະອົງຊົງຕັດກິເລດເຄື່ອງຜູກໄດ້ທຸກຢ່າງ
ຊົງທໍາລາຍພົບທັງ ໓໌ ແລ້ວ
ຊົງສະແດງທາງທີ່ມີການໄປບໍ່ຫວນກັບ
ແກ່ໝູ່ເທວະດາແລະມະນຸດ

[໓] ພຣະອົງຊົງເປັນຜູ້ບໍ່ຫວັ່ນໄຫວດັ່ງມະຫາສະມຸດ
ຫາຜູ້ກະທົບກະທັ່ງໄດ້ຍາກດັ່ງພູເຂົາ
ຊົງມີພຣະຄຸນຫາບ່ອນສຸດບໍ່ໄດ້ດັ່ງອາກາດ
ຊົງງົດງາມ (ດ້ວຍມະຫາປຸຣິສະລັກສະນະແລະພຣະອະນຸພະຍັນຊະນະ)
ດັ່ງຕົ້ນພະຍາໄມ້ສາລະທີ່ມີດອກບານສະພັ່ງ

[໔] ສັດທັງຫຼາຍຍ່ອມຍິນດີແມ່ນດ້ວຍການເຫັນພຣະພຸດທະອົງ
ສັດເຫຼົ່ານັ້ນໄດ້ສະດັບພຣະດໍາຣັດທີ່ກໍາລັງຕັດແລ້ວ
ຍ່ອມບັນລຸອະມະຕະທໍາ

[໕] ໃນຄັ້ງນັ້ນ ໃນການສະແດງທໍາເທື່ອທໍາອິດຂອງພຣະອົງ
ການບັນລຸທໍາຈະເລີນຮຸ່ງເຮືອງແຜ່ໄປຢ່າງກວ້າງຂວາງ
ເທວະດາແລະມະນຸດປະມານ ໑໐໐ ໂກດ ໄດ້ບັນລຸທໍາ

[໖] ສະໄໝຕໍ່ມາ ໃນການຕັດພຣະທໍາມະເທດສະໜາເທື່ອທີ ໔ ນີ້
ເມື່ອພຣະພຸດທະເຈົ້າຍັງຝົນຄືທໍາໃຫ້ຕົກຢູ່
ເທວະດາແລະມະນຸດປະມານ ໗໐ ໂກດໄດ້ບັນລຸທໍາ

[໗] ສະໄໝຕໍ່ມາ ເມື່ອພຣະພຸດທະອົງຍັງທານນໍ້າຄືທໍາໃຫ້ຫຼັ່ງໄຫຼ
ທໍາໝູ່ສັດໃຫ້ອີ່ມໜໍາ
ເທວະດາແລະມະນຸດປະມານ ກ໗ ໂກດໄດ້ບັນລຸທໍາເທື່ອທີ ໓

[໘] ສະເພາະພຣະສໍາມາສໍາພຸດທະເຈົ້າພຣະນາມວ່າອະໂນມະທັດສີພຣະອົງນັ້ນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມພຣະພິກຂຸສົງສາວົກຜູ້ບັນລຸອະພິນຍາ
ແລະພະລະທໍາ ຜູ້ເບີກບານດ້ວຍການລຸດພົ້ນ ໓ ເທື່ອ

[໙] ໃນຄັ້ງນັ້ນພຣະຂີນາສົບຜູ້ລະຄວາມມົວເມົາແລະຄວາມຫຼົງ
ຜູ້ມີຈິດສະງົບຣະງັບ ຜູ້ຄົງທີ່ ປະມານ ໗໐໐,໐໐໐ ອົງ ມາປະຊຸມກັນ

[໑໐] ພຣະຂີນາສົບຜູ້ບໍ່ມີກິເລດເຄື່ອງຍົ່ວຍຸ ປາສະຈາກທຸລິຄືກິເລດ
ຜູ້ມີຈິດສະງົບຣະງັບ ຜູ້ຄົງທີ່ ຈຳນວນ ໆ໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໘

[໑໑] ພຣະຂີນາສົບຜູ້ບັນລຸອະພິນຍາແລະພະລະທຳ ດັບກິເລດໄດ້ແລ້ວ
ມີຕະບະ ປະມານ ໖໐໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໙

[໑໘] ສະໄໝນັ້ນ ເຮົາເກີດເປັນຍັກຜູ້ມີລິດຫຼາຍ ວາງອຳນາດ
ເປັນໃຫຍ່ກວ່າຍັກຫຼາຍໂກດ

[໑໙] ແມ່ນໃນຄັ້ງນັ້ນ ເຮົາກໍໄດ້ເຂົ້າເຝົ້າພຣະພຸດທະເຈົ້າຜູ້ປະເສີດພຣະອົງນັ້ນ
ຜູ້ຊົງສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ໄດ້ອັງຄາດພຣະອົງຜູ້ຊົງເປັນຜູ້ນຳສັດໂລກ
ພ້ອມທັງພຣະສົງໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ

[໑໔] ໃນຄັ້ງນັ້ນ ແມ່ນພຣະມຸນີຜູ້ມີດວງເນດບໍລິສຸດພຣະອົງນັ້ນ
ກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ຍັກຕົນນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໕] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພໍາເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄຕົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນ ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໖] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ

ທັງຍິນດີ ທັງຕື້ນຕັນໃຈ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໗] ເມືອງຫຼວງຊື່ວ່າຈັນທະວະດີ ກະສັດພຣະນາມວ່າຍະສະວາເປັນພຣະຊະນົກ
ພຣະເທວີພຣະນາມວ່າຍະໂສທະຣາເປັນພຣະຊົນນີ
ຂອງພຣະສາດສະດາພຣະນາມວ່າ ອະໂນມະທັດສີ

[໑໘] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສິຣິຜາສາດ ອຸປະສິຣິຜາສາດ ແລະວັດຖະຜາສາດ

[໑໙] ມີນາງສະໜົມກຳນັນ ໒໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ສິຣິມາ
ພຣະຣາດຊະໂອຣົດພຣະນາມວ່າ ອຸປະສາລະ

[໒໐] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງວໍຄຳອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໑໐ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໒໑] ພຣະມະຫາວີຣະມະຫາມຸນີພຣະນາມວ່າອະໂນມະທັດສີ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ໃນພຣະອຸທະຍານສຸທັດສະນະອັນປະເສີດ

[໒໒] ພຣະນິສະພະເຖຣະແລະພຣະອະໂນມະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າວະຣະນະເປັນພຣະອຸປັດຖາກ
ຂອງພຣະສາດສະດາພຣະນາມວ່າ ອະໂນມະທັດສີ

[໒໓] ພຣະສຸນທະຣາເຖຣີແລະພຣະສຸມະນາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າຕົ້ນຮົກຟ້າ

[໒໔] ນັນທິວັດຖະອຸປາສົກ ແລະສິຣິວັດທະອຸປາສົກເປັນອັກຄະຣະອຸປັດຖາກ
ອຸບປະລາອຸປາສິກາ ແລະປະທຸມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໕] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໕໘ ສອກ
ພຣະອົງມີພຣະຣັດສະໝີແຜ່ຊ່ານອອກສະຫວ່າງສະໄຫວ ດັ່ງດວງອາທິດອຸໄທ

[໔໖] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໗] ສາດສະໜາຂອງພຣະຊິນນະເຈົ້າບານສະພັ່ງ
ງົດງາມດ້ວຍພຣະອະຣະຫັນທັງຫຼາຍ ຜ຺ູ້ຄົງທີ່
ປາສະຈາກຣາຄະແລະບໍ່ມີມົນທິນ

[໔໘] ພຣະສາດສະດາພຣະອົງນັ້ນຜູ້ມີພຣະຍົດຫາປະມານບໍ່ໄດ້
ແລະຄູ່ພຣະອັກຄະຣະສາວົກຜູ້ບໍ່ມີບຸກຄົນສະເໝີເໝືອນ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໔໙] ພຣະຊິນະສາດສະດາພຣະນາມວ່າ ອະໂນມະທັດສີ
ສະເດັດດັບຂັນທະປະຣິນິບພານທີ່ທຳມາຣາມ
ພຣະສະຖູບຂອງພຣະຊິນນະເຈົ້ານັ້ນ
ທີ່ທຳມາຣາມນັ້ນ ສູງ ໒໕ ໂຍດ ດັ່ງນີ້ແລ

**ອະໂນມະທັດສີພຸດທະວົງທີ ໗ ຈົບ**

## ໘. ປະທຸມະພຸດທະວົງ

### ວ່າດ້ວຍພຣະປະຫວັດພຣະປະທຸມະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະສຳມາສຳພຸດທະເຈົ້າພຣະນາມວ່າອະໂນມະທັດສີ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າປະທຸມະຕາມພຣະໂຄດ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ ບໍ່ມີໃຜສະເໝີເໝືອນ
ບໍ່ມີບຸກຄົນປຽບ

[໒] ແມ່ນສີນຂອງພຣະອົງກໍບໍ່ມີສິ່ງໃດສະເໝີ ແມ່ນສະມາທິກໍບໍ່ມີບ່ອນສຸດ
ພຣະຍານອັນປະເສີດນັບບໍ່ຖ້ວນ ແລະແມ່ນວິມຸດຕິກໍບໍ່ມີອັນໃດປຽບ

[໓] ແມ່ນໃນເວລາທີ່ພຣະອົງຜູ້ມີເດດຫາອັນໃດທຽບບໍ່ໄດ້

ຊົງປະກາດພຣະທຳມະຈັກ
ການບັນລຸທຳ ກຳຈັດຄວາມມືດໃຫຍ່ໄດ້ມີ ໓ ເທື່ອ

[໔] ໃນການບັນລຸທຳ ເທື່ອທີ ໑ ພຣະພຸດທະທີຣະເຈົ້າ
ຊົງຊ່ອຍເທວະດາແລະມະນຸດ ປະມານ ໑໐໐ ໂກດ ໃຫ້ບັນລຸ
ໃນການບັນລຸທຳ ເທື່ອທີ ໒ ຊົງຊ່ອຍເທວະດາແລະມະນຸດ
ປະມານ ໙໐ ໂກດ ໃຫ້ບັນລຸ

[໕] ແລະໃນເວລາເມື່ອພຣະປະທຸມະພຸດທະເຈົ້າ
ຕັດສອນພຣະຣາດຊະໂອຣົດຂອງພຣະອົງ
ເທວະດາແລະມະນຸດປະມານ ໘໐ ໂກດ ໄດ້ບັນລຸທຳ ເທື່ອທີ ໓

[໖] ພຣະປະທຸມະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມສາວົກ ໓ ເທື່ອ
ພິກຂຸປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໗] ເມື່ອກະຖິນຈີວອນເກີດຂຶ້ນໃນສະໄໝການກະຖິນ
ພິກຂຸທັງຫຼາຍຊ່ອຍກັນຫຍິບຈີວອນເພື່ອປະໂຫຍດແກ່ພຣະທຳເສນາບໍດີ

[໘] ໃນຄັ້ງນັ້ນ ພິກຂຸເຫຼົ່ານັ້ນລ້ວນປາສະຈາກມົນທິນ
ໄດ້ອະພິນຍາ ໖ ມີລິດຫຼາຍ
ຜູ້ບໍ່ພ່າຍແພ້ ປະມານ ໓໐໐,໐໐໐ ອົງ ມາປະຊຸມກັນ

[໙] ສະໄໝຕໍ່ມາ ໃນເວລາທີ່ພຣະປະທຸມະພຸດທະເຈົ້າ
ຜູ້ອົງອາດກວ່ານໍຣະຊົນຊົງເຂົ້າຈຳພັນສາໃນປ່າໃຫຍ່
ໃນຄັ້ງນັ້ນ ພິກຂຸປະມານ ໒໐໐,໐໐໐ ອົງ ມາປະຊຸມກັນ

[໑໐] ສະໄໝນັ້ນ ຂ້າພະເຈົ້າເກີດເປັນຣາດຊະສີ
ເປັນເຈົ້າແຫ່ງຝູງເນື້ອໄດ້ເຫັນພຣະຊິນນະເຈົ້າ
ເຊິ່ງກຳລັງຈະເລີນວິເວກທຳຢູ່ໃນປ່າໃຫຍ່

[໑໑] ຂ້າພະເຈົ້າຂາບພຣະຍຸຄົນບາດດ້ວຍຫົວ
ກະທຳປະທັກຂິນພຣະອົງ ບັນລືສີຫະນາດ ໓ ເທື່ອ
ບຳຣຸງພຣະຊິນນະເຈົ້າຢູ່ຕະຫຼອດ ໗ ວັນ

[໑໔] ຄົບ ໗ ວັນແລ້ວ ພຣະຕະຖາຄົດເຈົ້າສະເດັດອອກຈາກສະມາບັດອັນປະເສີດ
ຊົງມີພະໄທດຳຣິໃຫ້ພິກຂຸຈຳນວນ ໑ ໂກດ ມາປະຊຸມກັນ

[໑໕] ແມ່ນໃນຄັ້ງນັ້ນ ພຣະມະຫາວີຣະພຣະອົງນັ້ນ
ກໍຊົງພະຍາກອນໃນທ່າມກາງພິກຂຸເຫຼົ່ານັ້ນວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ພະຍາຣາດຊະສີນີ້ ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໔] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ
ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະຂຸດຂຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນໍ້າ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນໍ້າໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໕] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໖] ເມືອງຫຼວງຊື່ວ່າຈັມປະກະ ກະສັດພຣະນາມວ່າອະຕະມະ ເປັນພຣະຊະນົກ
ພຣະເທວີພຣະນາມວ່າອະສະມາ ເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າປະທຸມະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໗] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືນັນທະຜາສາດ ວະສຸຜາສາດ ແລະຍະສຸດຕະຣະຜາສາດ

[໑໗] ມີນາງສະໜົມກຳນັນ ໓໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ອຸສະກາ
ພຣະຣາດຊະໂອຣົດພຣະນາມວ່າ ຣຳມະ

[໑໙] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໐] ພຣະມະຫາວີຣະພຣະນາມວ່າປະທຸມະ ຊົງເປັນຜູ້ນຳສັດໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ໃນພຣະອຸດະຍານທະນັນຊະອັນປະເສີດ

[໔໑] ພຣະສາລະເຖຣະແລະພຣະອຸປະສາລະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າວະຣະນະເປັນພຣະອຸປັດຖາກຂອງພຣະປະທຸມະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔] ພຣະຣາທາເຖຣີແລະພຣະສຸຣາທາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອ້ອຍຊ້າງໃຫຍ່

[໔໓] ສະພິຍະອຸປາສົກແລະອະສະມະອຸປາສົກເປັນອັກຄະຣະອຸປັດຖາກ
ຣຸຈິອຸປາສິກາແລະນັນທາມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໔] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໕໗ ສອກ
ພຣະອົງມີພຣະຣັດສະໝີທາອັນໃດສະເໝີບໍ່ໄດ້ ເຊິ່ງແຜ່ຊ່ານອອກທົ່ວທິດ

[໔໕] ແສງດວງຈັນ ແສງດວງອາທິດ ແສງຣັດຕະນະ ແສງໄຟ
ແລະແສງແກ້ວມະນີຈິນດາແມ່ນທຸກຢ່າງນັ້ນ
ເມື່ອມາເຖິງຣັດສະໝີອັນສູງສຸດຂອງພຣະຊິນນະເຈົ້າ
ແລ້ວຍ່ອມອັນຕະຣະທານຫາຍໄປ

[໔໖] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໘໗] ພຣະອົງພ້ອມກັບສາວົກນັ້ນ ຊົງຊ່ອຍເຫຼົ່າສັດ
ທີ່ມີຍານແກ່ກ້າໃຫ້ຕັດສະຣູ້ໄດ້ໂດຍບໍ່ເຫຼືອ
ຊົງພໍ່າສອນຊົນທີ່ເຫຼືອອື່ນ ໆ ແລ້ວສະເດັດດັບຂັນທະປະຣິນິບພານ

[໘໘] ພຣະອົງຊົງລະຖິ້ມສັງຂານທັງປວງເໝືອນງູລອກຄາບເກົ່າ
ດັ່ງຣຸກຂະຊາດສະລັດໃບເກົ່າ ແລ້ວສະເດັດດັບຂັນທະປະຣິນິບພານ
ເໝືອນແປວໄຟດັບໄປ

[໘໙] ພຣະປະທຸມະຊິນະສາດສະດາຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ທຳມາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ປະທຸມະພຸດທະວົງທີ ໘ ຈົບ**

## ໙. ນາຣະທະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະນາຣະທະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະສຳມາສຳພຸດທະເຈົ້າພຣະນາມວ່າ ປະທຸມະ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່ານາຣະທະ ຕາມພຣະໂຄດ
ຜູ້ສູງສຸດແຫ່ງເທວະດາແລະມະນຸດບໍ່ມີໃຜສະເໝີເໝືອນ ບໍ່ມີບຸກຄົນປຽບ

[໒] ພຣະພຸດທະເຈົ້າພຣະອົງນັ້ນ ຊົງເປັນພຣະເຊດຖະໂອຣົດ
ທີ່ຊົງໂຜດປານຂອງພຣະເຈົ້າຈັກກະພັດ
ຊົງສວມໃສ່ອາພອນແກ້ວມຸກດາ ສະເດັດເຂົ້າໄປສູ່ພຣະຣາດຊະອຸທະຍານ

[໓] ໃນພຣະຣາດຊະອຸທະຍານນັ້ນ ມີຕົ້ນໄມ້ໃຫຍ່
ແຜ່ກິ່ງກ້ານສາຂາຮົ່ມເຢັນສວຍງາມ
ພຣະອົງສະເດັດເຖິງທ່າມກາງພຣະຣາດຊະອຸທະຍານນັ້ນແລ້ວ
ປະທັບນັ່ງພາຍໃຕ້ຕົ້ນອ້ອຍຊ້າງໃຫຍ່

[໔] ໃນບ່ອນນັ້ນ ເກີດພຣະຍານອັນປະເສີດຫາບ່ອນສຸດບໍ່ໄດ້
ປຽບດ້ວຍເພັດ ຊົງພິຈາລະນາສັງຂານ
ແລະພິຈາລະນາສັງຂານວ່າເປັນສະພາວະທີ່ເປີດເຜີຍ
ແລະທີ່ປົກປິດ ດ້ວຍພຣະຍານນັ້ນ

[໕] ຊົງລອຍກິເລດທັງປວງໄດ້ໂດຍບໍ່ເຫຼືອໃນບ່ອນນັ້ນເອງ
ຊົງບັນລຸພຣະໂພທິຍານທັງໝົດແລະພຣະພຸດທະຍານ ໑໔໑

[໖] ເມື່ອຊົງບັນລຸສຳໂພທິຍານແລ້ວ
ຊົງປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໑

[໗] ໃນການນັ້ນພຣະມະຫາມຸນີຊົງກຳຣາບພະຍານາກ
ຜູ້ມີລຳຕົວເທົ່າເຮືອໂກນຂະໜາດໃຫຍ່
ໄດ້ຊົງສະແດງຍະມົກປາຕິຫານໃຫ້ມະນຸດໂລກ
ພ້ອມທັງເທວະໂລກໄດ້ເຫັນພ້ອມກັນ

[໘] ໃນການທີ່ຊົງປະກາດພຣະທຳແກ່ເທວະດາແລະມະນຸດ
ໃນຄັ້ງນັ້ນ ເທວະດາແລະມະນຸດປະມານ ໙໐,໐໐໐ ໂກດ
ຂ້າມຄວາມສົງໄສທັງປວງໄດ້

[໙] ໃນການເມື່ອພຣະມະຫາວີຣະຕັດສອນພຣະຣາດຊະໂອຣົດຂອງພຣະອົງ
ເທວະດາແລະມະນຸດປະມານ ໘໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໓

[໑໐] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ນາຣະທະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມສາວົກ ໓ ເທື່ອ
ສາວົກປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໑໑] ໃນການທີ່ພຣະພຸດທະເຈົ້າຊົງປະກາດພຣະພຸດທະຄຸນ
ພ້ອມດ້ວຍເຫດ ສາວົກຜູ້ປາສະຈາກມົນທິນ
ປະມານ ໙໐,໐໐໐ ໂກດ ມາປະຊຸມກັນ

[໑໒] ໃນການທີ່ເວໂຣຈະນະນາກະຣາດຖວາຍທານແດ່ພຣະສາດສະດາ
ສາວົກຂອງພຣະຊິນນະເຈົ້າປະມານ ໘໐ ລ້ານ ມາປະຊຸມກັນ

[໑໓] ສະໄໝນັ້ນ ເຮົາເປັນຊະດິນຜູ້ມີຕະບະແກ່ກ້າ
ສຳເລັດອະພິນຍາ ໕ ເຫາະໄປໃນອາກາດໄດ້

[໑໔] ແມ່ນໃນຄັ້ງນັ້ນ ເຮົາກໍໄດ້ອັງຄາດພຣະສາດສະດາ
ທາຜູ້ສະເໝີເໝືອນບໍ່ໄດ້ພ້ອມທັງພຣະສົງ
ແລະບໍລິວານຊົນໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳແລ້ວ
ໄດ້ບູຊາດ້ວຍໄມ້ຈັນຫອມ

[໑໕] ໃນຄັ້ງນັ້ນ ແມ່ນພຣະພຸດທະເຈົ້າພຣະນາມວ່າ ນາຣະທະ
ພຣະອົງນັ້ນ ຊົງເປັນຜູ້ນຳສັດໂລກ
ກໍຊົງພະຍາກອນເຮົາວ່າ
ໃນກັບອັນປະມານບໍ່ໄດ້ນັບຈາກກັບນີ້ໄປ
ເຂົາຈັກເປັນພຣະພຸດທະເຈົ້າໃນໂລກ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໖] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ

ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໗] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດໃຈໃຫ້ຍິນດີຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໘] ເມືອງຫຼວງຊື່ວ່າທັນຍະວະດີ ກະສັດພຣະນາມວ່າສຸເທບ ເປັນພຣະຊະນົກ
ພຣະເທວີພຣະນາມວ່າອະໂນມາ ເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່ານາຣະທະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໙] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ

ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຊິຕະຜາສາດ ວິຊິຕະຜາສາດ ແລະອະພິຣາມະຜາສາດ

[໔໐] ມີນາງສະໜົມກຳນັບ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າວິຊິຕະເສນາ
ພຣະຣາດຊະໂອຣົດພຣະນາມວ່ານັນທຸດຕະຣະ

[໔໑] ພຣະອົງຜູ້ເປັນຜູ້ສູງສຸດແຫ່ງບຸຣຸດ ຊົງເຫັນນິມິດ ໔ ປະການ
ຈຶ່ງສະເດັດອອກບວດດ້ວຍການຍ່າງ
ພ່ຳເພັງພຽນຢູ່ ໗ ວັນ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໔] ພຣະມະຫາວີຣະພຣະນາມວ່າ ນາຣະທະ ຊົງເປັນຜູ້ນຳສັດໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ໃນພຣະອຸທະຍານທະນັນຊະອັນປະເສີດ

[໔໓] ພຣະພັດທະສາລະເຖຣະແລະພຣະຊິຕະມິດຕະເຖຣະ
ເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າວາເສດຖະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ນາຣະທະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔] ພຣະອຸດຕະຣາເຖຣີ ແລະພຣະຜັກຄຸນີເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອ້ອຍຊ້າງໃຫຍ່

[໔໕] ອຸກຄະຣິນທະອຸປາສົກແລະວະສະພະອຸປາສົກເປັນອັກຄະຣະອຸປັດຖາກ
ອິນທະວະຣີອຸປາສິກາແລະຄັນທີອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໖] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໘໘ ສອກ
ຊົງງົດງາມດັ່ງຄຳທີ່ລ້ຳຄ່າ ກະທຳໝື່ນຈັກກະວານໃຫ້ສະຫວ່າງສະໄຫວ

[໔໗] ພຣະອົງຊົງມີພຣະວໍຣະກາຍມີຣັດສະໝີວາໜຶ່ງ
ພຣະຣັດສະໝີ (ນັ້ນ) ແຜ່ຊ່ານໄປທົ່ວທິດ ຕິດກັນໄປຕະຫຼອດໂຍດ
ທັງກາງເວັນແລະກາງຄືນທຸກເມື່ອ (ທີ່ຕ້ອງການ)

[໔໗] ຂະນະນັ້ນ ໃນໄລຍະໂຍດໂດຍຮອບ
ບໍ່ຕ້ອງຈຸດຄົບເພີງຫຼືປະທີບ (ຍ້ອນ) ພຣະພຸດທະຣັດສະໝີແຜ່ໄປທົ່ວ

[໔໙] ສະໄໝນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໙໐,໐໐໐ ປີ
ພຣະອົງກໍຊົງດໍາຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈໍານວນຫຼາຍ

[໕໐] ສາດສະໜາຂອງພຣະອົງງົດງາມດ້ວຍພຣະອະຣະຫັນທັງຫຼາຍ
ເໝືອນທ້ອງຟ້າງາມວິຈິດດ້ວຍໝູ່ດາວ

[໕໑] ພຣະຜູ້ອົງອາດກວ່ານໍຣະຊົນພຣະອົງນັ້ນ
ຊົງສ້າງຂົວຄືທໍາໄວ້ຢ່າງໝັ້ນຄົງ
ສໍາລັບໃຫ້ຄົນຜູ້ປະຕິບັດທີ່ເຫຼືອຢ່າງຂ້າມກະແສສັງສາຣະວັດແລ້ວ
ສະເດັດດັບຂັນທະປະຣິນິບພານ

[໕໔] ແມ່ນພຣະພຸດທະເຈົ້າທາຜູ້ສະເໝີເໝືອນບໍ່ໄດ້ພຣະອົງນັ້ນ
ແລະພຣະຂີນາສົບຜູ້ມີເດດທາອັນໃດທຽບບໍ່ໄດ້ເຫຼົ່ານັ້ນ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໕໕] ພຣະນາຣະທະຊິນນະເຈົ້າຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ສຸທັດສະນະນະຄອນ
ພຣະສະຖູບອັນປະເສີດຂອງພຣະອົງ
ຢູ່ສຸທັດສະນະນະຄອນນັ້ນສູງ ໔ ໂຍດ ດັ່ງນີ້ແລ

**ນາຣະທະພຸດທະວົງທີ ໙ ຈົບ**

## ໑໐. ປະທຸມຸດຕະຣະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະປະທຸມຸດຕະຣະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຸດທະເຈົ້າພຣະນາມວ່າ ນາຣະທະ
ໄດ້ມີພຣະຊິນະສໍາມາສໍາພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ຜູ້ສູງສຸດກວ່າເທວະດາແລະມະນຸດ
ບໍ່ຫວັ່ນໄຫວ ປຽບດ້ວຍສະມຸດສາຄອນ

[໔] ກໍກັບທີ່ພຣະພຸດທະເຈົ້າສະເດັດອຸບັດຂຶ້ນນັ້ນ
ເປັນມັນທະກັບ (ກັບທີ່ມີພຣະພຸດທະເຈົ້າສະເດັດອຸບັດ ໔ ພຣະອົງ)
ໝູ່ຊົນຜູ້ມີກຸສົນຫຼາຍໄດ້ເກີດຂຶ້ນໃນກັບນັ້ນ

[໓] ໃນເວລາທີ່ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ປະທຸມຸດຕະຣະ
ຊົງສະແດງທຳເທື່ອທຳອິດ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທຳ

[໔] ຈາກນັ້ນ ເມື່ອພຣະອົງເຮັດຝົນຄືທຳໃຫ້ຕົກ
ຊ່ອຍເຫຼົ່າສັດໃຫ້ອີ່ມໜຳ (ດ້ວຍຝົນຄືອຳມະຕະ)
ເທວະດາແລະມະນຸດປະມານ ໓໗,໐໐໐ (ໂກດ) ໄດ້ບັນລຸທຳ ເທື່ອທີ ໔

[໕] ໃນການທີ່ພຣະມະຫາວີຣະເຈົ້າ
ໄດ້ສະເດັດເຂົ້າໄປຫາພຣະເຈົ້າອານັນທະ (ຜູ້ເປັນພຣະຣາດຊະບິດາ)
ເມື່ອເຂົ້າໄປສຳນັກຂອງພຣະຣາດຊະບິດາແລ້ວ ໄດ້ຊົງລັ່ນອະມະຕະເພຣີ

[໖] ເມື່ອພຣະພຸດທະເຈົ້າຊົງລັ່ນອະມະຕະເພຣີ
ບັນດານສາຍຝົນຄືທຳໃຫ້ຕົກລົງ
ເທວະດາແລະມະນຸດປະມານ ໕,໐໐໐,໐໐໐ (ໂກດ)
ໄດ້ບັນລຸທຳເທື່ອທີ ໓

[໗] ພຣະພຸດທະເຈົ້າຜູ້ສະຫຼາດໃນເທດສະໜາ ຜູ້ຊົງປະທານໂອວາດ
ຜູ້ເຮັດເຫຼົ່າສັດໃຫ້ຮູ້ແຈ້ງຊົງຊ່ອຍສັດທັງປວງໃຫ້ຂ້າມ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໘] ພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ
ມີການປະຊຸມສາວົກ ໓ ເທື່ອ
ມີສາວົກປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໙] ໃນການທີ່ພຣະພຸດທະເຈົ້າ
ຜູ້ບໍ່ມີໃຜສະເໝີເໝືອນ ປະທັບຢູ່ທີ່ເວພາລະບັນພົດ
ສາວົກປະມານ ໙໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໔

[໑໐] ເມື່ອພຣະອົງສະເດັດຈາກຄາມນິຄົມແລະແວ່ນແຄວັ້ນຫຼີກຈາຣິກໄປ
ສາວົກປະມານ ໘໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໓

[໑໑] ສະໄໝນັ້ນ ເຮົາເປັນຊະດິນມີຊື່ວ່າ ຣັດຖິກະ
ໄດ້ຖວາຍຜ້າພ້ອມພັດຕາຫານແດ່ພຣະສົງ
ມີພຣະສຳມາສຳພຸດທະເຈົ້າເປັນປະທານ

[໑໘] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ກໍປະທັບນັ່ງທ່າມກາງພຣະສົງ
ຊົງພະຍາກອນເຮົາວ່າ
ຈາກນີ້ໄປອີກ ໑໐໐,໐໐໐ ກັບ
ຊະດິນນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໙] ຊົງເລີ່ມຕັ້ງຄວາມພຽນ ພ່ຳເພັງທຸກກະຣະກິຣິຍາ
ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະ ແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ

ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສິກາແລະຫັດຖະກະຄະຫະບໍດີອຸປາສິກາ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ບັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍອະທິຖານຂໍ້ວັດໃຫ້ຍິ່ງຂຶ້ນໄປ ເຮົາໄດ້ພ່ຳເພັງພຽນ
ຢ່າງໝັ້ນຄົງເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໕] ໃນຄັ້ງນັ້ນ ເດຍຣະຖີທັງປວງຖືກຂະຈັດໄປ ຈຶ່ງພາກັນໂທມະນັດເສຍໃຈ
ໃຜ ໆ ກໍບໍ່ບຳຣຸງເດຍຣະຖີເຫຼົ່ານັ້ນ
ຂັບໄລ່ພວກເຂົາໄປຈາກແວ່ນແຄວ້ນ

[໑໖] ພວກເດຍຣະຖີປະຊຸມກັນໃນບ່ອນນັ້ນທັງໝົດ
ເຂົ້າໄປສຳນັກຂອງພຣະພຸດທະເຈົ້າ

ຂາບທູນວ່າ ຂ້າແຕ່ພຣະມະຫາວີຣະເຈົ້າຜູ້ມີພຣະຈັກຂຸ
ຂໍພຣະອົງເປັນບ່ອນເພິ່ງບ່ອນຣະລຶກຂອງພວກຂ້າພຣະອົງເທີ້ນ

[໑໗] ພຣະອົງຜູ້ຊົງອະນຸເຄາະ ປະກອບດ້ວຍພຣະກະລຸນາ
ຊົງສະແຫວງຫາປະໂຫຍດເກື້ອກູນແກ່ສັບພະສັດ
ຊົງເຮັດເດຍຣະຖີທີ່ມາເຝົ້າທັງໝົດໃຫ້ດຳຣົງຢູ່ໃນປັນຈະສີນ

[໑໘] ເມື່ອເປັນເຊັ່ນນີ້ ພຸດທະສາດສະໜານັ້ນໝົດຄວາມອາກູນ
ວ່າງຈາກພວກເດຍຣະຖີ
ແລະງົດງາມດ້ວຍພຣະອະຣະຫັນທັງຫຼາຍຜູ້ໄດ້ວະສີ ຜູ້ຄົງທີ່

[໑໙] ເມືອງຫຼວງຊື່ວ່າຫົງສະວະດີ ກະສັດພຣະນາມວ່າອານົນເປັນພຣະຊະນົກ
ພຣະເທວີພຣະນາມວ່າສຸຊາດາເປັນພຣະຊົນນີ
ຂອງພຣະສາດສະດາພຣະນາມວ່າປະທຸມຸດຕະຣະ

[໒໐] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືນາຣີຜາສາດ ພາຫະນະຜາສາດ ແລະຍະສະວະດີຜາສາດ

[໒໑] ມີນາງສະໜົມກຳນັນ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າວະສຸນະທັດຕາ
ພຣະຣາດຊະໂອຣົດພຣະນາມວ່າອຸດຕະຣະ

[໒໒] ພຣະອົງເປັນຜູ້ສູງສຸດແຫ່ງບຸຣຸດ ຊົງເຫັນນິມິດ ໔ ປະການ
ຈຶ່ງສະເດັດອອກຈາກຜາສາດໄປບວດ
ຊົງພ່ຳເພັງພຽນຢູ່ ໗ ວັນ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໒໓] ພຣະມະຫາວີຣະພຣະນາມວ່າ ປະທຸມຸດຕະຣະຊົງເປັນຜູ້ນຳວິເສດ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ໃນພຣະອຸທະຍານມິຖິລາ ອັນປະເສີດ

[໒໔] ພຣະເທວິນເຖຣະ ແລະພຣະສຸຊາຕະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສຸມະນະເປັນພຣະອຸປັດຖາກ
ຂອງພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ

[໔໕] ພຣະອະມິຕາເຖຣີ ແລະພຣະອະສະມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນສົນ

[໔໖] ອະມິຕະອຸປາສົກ ແລະຕິດສະອຸປາສົກເປັນອັກຄະຣະອຸປັດຖາກ
ຫັດຖາອຸປາສິກາ ແລະສຸຈິດຕາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໗] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໕໘ ສອກ
ຊົງງົດງາມດັ່ງຄຳທີ່ລ້ຳຄ່າ
ຊົງມີພຣະລັກສະນະອັນປະເສີດ ໓໒ ປະການ

[໔໘] ກຳແພງ ບານປະຕູ ຝາເຮືອນ ຕົ້ນໄມ້ ແລະພູຜາສູງ
ກໍກຳບັງພຣະຣັດສະໝີຂອງພຣະອົງນັ້ນ ໃນທີ ໑໒ ໂຍດໂດຍຮອບບໍ່ໄດ້

[໔໙] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໑໐໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໕໐] ພຣະອົງພ້ອມກັບສາວົກນັ້ນ ຊົງຊ່ອຍໝູ່ຊົນ
ໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ
ຊົງຕັດຄວາມສົງໄສຂອງຊົນທັງປວງແລ້ວ
ຊົງຮຸ່ງເຮືອງ ດັບໄປເໝືອນກອງໄຟບໍ່ມີເຊື້ອດັບໄປ

[໕໑] ພຣະຊິນະພຸດທະເຈົ້າພຣະນາມວ່າປະທຸມຸດຕະຣະ
ສະເດັດດັບຂັນທະປະຣິນິບພານທີ່ນັນທາຣາມ
ພຣະສະຖູບອັນປະເສີດຂອງພຣະອົງ
ທີ່ນັນທາຣາມນັ້ນສູງ ໑໒ ໂຍດ ດັ່ງນີ້ແລ

**ປະທຸມຸດຕະຣະພຸດທະວົງທີ ໑໐ ຈົບ**

## ໑໑. ສຸເມທະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະສຸເມທະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ໄດ້ມີພຣະຊິນນະເຈົ້າພຣະນາມວ່າສຸເມທະ ຊົງເປັນຜູ້ນຳສັດໂລກ

ຫາຜູ້ກະທົບກະທັ່ງໄດ້ຍາກ ຊົງມີພຣະເດດຮຸ່ງເຮືອງ
ຊົງປະເສີດສຸດໃນບັນດາສັດໂລກທັງປວງ

[໔] ຊົງມີພຣະເນດສຸກໃສ ມີພຣະພັກຊື່ນບານ
ມີພຣະວໍຣະກາຍສູງສະງ່າ ຊົງສະແຫວງຫາປະໂຫຍດເກື້ອກູນແກ່ສັບພະສັດ
ຊົງເປືອງສັດເປັນຈຳນວນຫຼາຍໃຫ້ລຸດພົ້ນຈາກເຄື່ອງພັນທະນາການ

[໕] ພຣະພຸດທະເຈົ້າຊົງບັນລຸພຣະໂພທິຍານອັນອຸດົມ
ຊົງປະກາດພຣະທຳມະຈັກທີ່ສຸທັດສະນະນະຄອນ

[໖] ແມ່ນໃນການທີ່ພຣະອົງຊົງສະແດງທຳ
ໄດ້ມີການບັນລຸທຳ ໓ ເທື່ອ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທຳ ເທື່ອທີ ໑

[໕] ອີກເລື້ອງໜຶ່ງ ພຣະຊິນນະເຈົ້າຊົງທໍລະມານຍັກຊື່ວ່າ ກຸມພະກັນ
ເທວະດາແລະມະນຸດປະມານ ໙໐,໐໐໐ ໂກດ ໄດ້ບັນລຸທຳ ເທື່ອທີ ໒

[໖] ອີກເລື້ອງໜຶ່ງ ພຣະອົງຜູ້ມີພຣະຍົດນັບບໍ່ໄດ້
ຊົງປະກາດອະຣິຍະສັດ ໔
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດ ໄດ້ບັນລຸທຳ ເທື່ອທີ ໓

[໗] ພຣະຊິນນະເຈົ້າພຣະນາມວ່າສຸເມທະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມແຫ່ງພຣະຂີນາສົບຜູ້ປາສະຈາກມົນທິນ
ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໗] ໃນການທີ່ພຣະຊິນນະເຈົ້າສະເດັດເຂົ້າໄປສູ່ສຸທັດສະນະນະຄອນ
ພຣະຂີນາສົບຈຳນວນ ໑໐໐ ໂກດ ມາປະຊຸມກັນ

[໙] ອີກເລື້ອງໜຶ່ງ ເມື່ອພິກຂຸທັງຫຼາຍການກະຖິນ ໃນເທວະກູຕະບັນພົດ
ພຣະຂີນາສົບປະມານ ໙໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໒

[໑໐] ອີກເລື້ອງໜຶ່ງ ໃນການທີ່ພຣະທົດສະພົນສະເດັດຈາຣິກໄປ
ພຣະຂີນາສົບປະມານ ໗໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໓

[໑໑] ສະໄໝນັ້ນ ເຮົາເປັນມານົບມີຊື່ວ່າອຸດຕະຣະ
ມີຊັບທີ່ເກັບສະສົມໄວ້ໃນເຮືອນເຖິງ ໗໐ ໂກດ

[໑໔] ເຮົາໄດ້ຖວາຍຊັບສົມບັດທັງໝົດແດ່ພຣະຊິນນະເຈົ້າ
ຜູ້ຊົງເປັນຜູ້ນຳສັດໂລກພ້ອມທັງພຣະສົງ
ເຖິງພຣະອົງເປັນສະຣະນະແລ້ວ ພໍໃຈການບັນພະຊາ

[໑໕] ເມື່ອນັ້ນ ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ເມື່ອຊົງອະນຸໂມທະນາ
ກໍຊົງພະຍາກອນເຮົາວ່າ
ໃນ ໑໐,໐໐໐ ກັບ ມານັບນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໖] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະ ແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ

ຈິດຕະຄະຫະບໍດີອຸປາສິກາແລະຫັດຖະກະຄະຫະບໍດີອຸປາສິກາ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກາ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີພຣະຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີຜູ້ສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໕] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອການພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໖] ເຮົາໄດ້ຮ່ຳຮຽນພຣະສູດແລະພຣະວິໄນ
ອັນເປັນນະວັງຄະສັດຖຸສາດທັງປວງແລ້ວ
ຊ່ອຍປະກາດສາດສະໜາຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງ

[໑໗] ເຮົາເປັນຜູ້ບໍ່ພະໝາດຢູ່ໃນຄຳສັ່ງສອນນັ້ນ
ທັງໃນເວລານັ່ງ ຢືນ ແລະຍ່າງ
ເຖິງຄວາມສຳເລັດອະພິນຍາແລ້ວໄດ້ໄປເກີດເທິງພົມມະໂລກ

[໑໗] ເມືອງຫຼວງຊື່ວ່າສຸທັດສະນະ ກະສັດພຣະນາມວ່າສຸທັດຕະເປັນພຣະຊະນົກ
ພຣະເທວີພຣະນາມວ່າສຸທັດຕາເປັນພຣະຊົນນີ
ຂອງພຣະຊິນນະເຈົ້າພຣະນາມວ່າສຸເມທະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໙] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸຈັນທະຜາສາດ ກັນຈະນະຜາສາດ ແລະສິຣິວັດທະຜາສາດ

[໒໐] ມີນາງສະໜົມກຳນັນ ໔໗,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສຸມະນາ
ພຣະຣາດຊະໂອຣົດພຣະນາມວ່າປຸນັບພະ

[໒໑] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືຊ້າງອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໒໒] ພຣະມະຫາວິຣະພຣະນາມວ່າສຸເມທະ ຊົງເປັນຜູ້ນຳສັດໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ທີ່ພຣະອຸດະຍານສຸທັດສະນະອັນປະເສີດ

[໒໓] ພຣະສະຣະນະເຖຣະແລະພຣະສັບພະກາມະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສາຄະຣະເປັນພຣະອຸປັດຖາກ
ຂອງພຣະຊິນນະເຈົ້າພຣະນາມວ່າສຸເມທະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໔] ພຣະຣາມາເຖຣີແລະພຣະສຸຣາມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນກະເດົາ

[໒໕] ອຸຣຸເວລາອຸປາສົກແລະຍະສະວາອຸປາສົກເປັນອັກຄະຣະອຸປັດຖາກ
ຍະໂສທະຣາອຸປາສິກາແລະສິຣິມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໖] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໘໘ ສອກ
ຊົງເປ່ງຣັດສະໝີສະຫວ່າງສະໄຫວໄປທົ່ວທິດ ເໝືອນດວງຈັນໃນໝູ່ດາວ

[໔໗] ພຣະຣັດຕະນະຂອງພຣະອົງແຜ່ໄປຕະຫຼອດໂຍດໂດຍຮອບ
ເໝືອນແກ້ວມະນີຂອງພຣະເຈົ້າຈັກກະພັດແຜ່ໄປໂຍດໜຶ່ງ

[໔໘] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໙໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໙] ສາວົກສະໝາຂອງພຣະອົງຄັບຄັ່ງໄປດ້ວຍພຣະອະຣະຫັນທັງຫຼາຍ
ລ້ວນແຕ່ຜູ້ໄດ້ວິດຊາ ໓ ອະພິນຍາ ໖ ແລະພະລະ ຜູ້ຄົງທີ່

[໕໐] ແມ່ນທ່ານທັງໝົດນັ້ນລ້ວນມີຍົດນັບບໍ່ຖ້ວນ ລຸດພົ້ນແລ້ວ
ບໍ່ມີອຸປະທິມີພຣະຍົດອັນຍິ່ງໃຫຍ່
ສະແດງແສງສະຫວ່າງແຫ່ງຍານແລ້ວນິບພານ

[໕໑] ພຣະຊິນະພຸດທະເຈົ້າຜູ້ປະເສີດພຣະນາມວ່າສຸເມທະ
ສະເດັດດັບຂັນທະປະຣິນິບພານທີ່ເມທາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ສຸເມທະພຸດທະວົງທີ ໑໑ ຈົບ**

## ໑໘. ສຸຊາຕະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະສຸຊາຕະພຸດທະເຈົ້າ

[໑] ໃນມັນທະກັບນັ້ນແລ ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະ
ຊົງເປັນຜູ້ນຳ ມີພຣະຫະນຸດັ່ງຄາງຣາດຊະສີ
ມີລຳພຣະສໍງານເໝືອນລຳຄໍງົວອຸສະພະ
ຊົງມີພຣະຄຸນຫາປະມານບໍ່ໄດ້ ຫາຜູ້ກະທົບກະທັ່ງໄດ້ຍາກ

[໒] ພຣະອົງບໍ່ມີມົນທິນ ບໍລິສຸດເໝືອນດວງຈັນ
ມີພຣະວໍຣະກາຍງົດງາມດັ່ງດວງອາທິດ
ມີພຣະຣັດສະໝີຮຸ່ງເຮືອງງົດງາມທຸກເມື່ອແນວນີ້

[໓] ພຣະສຳມາສຳພຸດທະເຈົ້າຊົງບັນລຸພຣະໂພທິຍານ
ອັນປະເສີດຢ່າງໝົດສິ້ນແລ້ວ
ຊົງປະກາດພຣະທຳມະຈັກທີ່ສຸມັງຄະລະນະຄອນ

[໔] ເມື່ອພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະຊົງເປັນຜູ້ນໍາສັດໂລກ
ຊົງສະແດງພຣະທໍາອັນປະເສີດ ໃນການສະແດງທໍາເທື່ອທີ ໑
ເທວະດາແລະມະນຸດຈໍານວນ ໖໐ ໂກດ ໄດ້ບັນລຸທໍາ

[໕] ໃນເວລາທີ່ພຣະສຸຊາຕະພຸດທະເຈົ້າຜູ້ມີພຣະຍົດຫາປະມານບໍ່ໄດ້
ສະເດັດຈໍາພັນສາໃນເທວະໂລກ
ເທວະດາແລະມະນຸດຈໍານວນ ໓,໗໐໐,໐໐໐ ໂກດ
ໄດ້ບັນລຸທໍາ ເທື່ອທີ ໒

[໖] ໃນເວລາທີ່ພຣະສຸຊາຕະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ສະເດັດເຂົ້າໄປສູ່ສໍານັກຂອງພຸດທະບິດາ
ເທວະດາແລະມະນຸດຈໍານວນ ໖,໐໐໐,໐໐໐ ໂກດ
ໄດ້ບັນລຸທໍາ ເທື່ອທີ ໓

[໗] ພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ມີການປະຊຸມແຫ່ງພຣະຂີນາສົບ ຜູ້ປາສະຈາກມົນທິນ
ມີຈິດສະຫງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໘] ພຣະຂີນາສົບລ້ວນບັນລຸອະພິນຍາແລະພະລະທໍາ
ຜູ້ທີ່ຍັງບໍ່ບັນລຸໃນພົບນ້ອຍພົບໃຫຍ່
ປະມານ ໖,໐໐໐,໐໐໐ ອົງ ເຫຼົ່ານັ້ນມາປະຊຸມກັນ ເທື່ອທີ ໑

[໙] ໃນການປະຊຸມເທື່ອຕໍ່ມາ
ໃນການເມື່ອພຣະຊິນນະເຈົ້າສະເດັດລົງຈາກຕາວະຕິງສາເທວະໂລກ
ມີພຣະຂີນາສົບປະມານ ໕,໐໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໒

[໑໐] ພຣະອັກຄະຣະສາວົກພ້ອມດ້ວຍພຣະຂີນາສົບປະມານ ໔໐໐,໐໐໐ ອົງ
ຂອງພຣະສໍາມາສໍາພຸດທະເຈົ້າພຣະອົງນັ້ນ
ເຂົ້າເຝົ້າພຣະສໍາມາສໍາພຸດທະເຈົ້າຜູ້ອົງອາດກວ່ານໍຣະຊົນ

[໑໑] ສະໄໝນັ້ນ ເຮົາເປັນພຣະເຈົ້າຈັກກະພັດ ມີພະລານຸພາບຫຼາຍ
ເປັນໃຫຍ່ໃນທະວີບທັງ ໔ ເຫາະໄປໃນອາກາດໄດ້

[໑໔] ເຮົານັ້ນ ເຫັນຄວາມອັດສະຈັນໜ້າປະຫຼາດໃຈ
ໃຫ້ເກີດຂົນພອງສະຫຍອງເກົ້າໃນໂລກ
ຈຶ່ງເຂົ້າໄປຂາບພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະຊຶ່ງເປັນຜູ້ນຳສັດໂລກ

[໑໓] ເຮົາມອບຖວາຍຮາດຊະສົມບັດເປັນຈຳນວນຫຼາຍໃນທະວີບທັງ ໔
ແລະຣັດຕະນະ ໗ ປະການອັນອຸດົມໃນພຣະພຸດທະເຈົ້າແລ້ວ
ຈຶ່ງບວດໃນສຳນັກຂອງພຣະອົງ

[໑໔] ພວກຄົນຮັກສາອາຣາມໄດ້ລວບລວມສິ່ງທີ່ເກີດຂຶ້ນໃນຊົນນະບົດ
ນ້ອມປັດໄຈ ບ່ອນນອນ ບ່ອນນັ່ງເຂົ້າໄປຖວາຍພິກຂຸສົງ

[໑໕] ໃນຄັ້ງນັ້ນ ແມ່ນພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ເປັນໃຫຍ່ໃນໝື່ນຈັກກະວານ
ກໍຊົງພະຍາກອນເຮົາວ່າ
ໃນທີ່ສຸດ ໓໐,໐໐໐ ກັບ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໖] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ

ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປັ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນໍ້າ ພາດທ່າທີ່ຢູ່ຕໍ່ໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນໍ້າໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໗] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍທຳຄວາມຍິນດີໃຫ້ເກີດຂຶ້ນຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການ ໃຫ້ຍິ່ງຂຶ້ນໄປ

[໑໗] ເຮົາໄດ້ຮ່ຳຮຽນພຣະສູດແລະພຣະວິໄນ
ອັນເປັນນະວັງຄະສັດຖຸສາດທັງປວງແລ້ວ
ຊ່ອຍປະກາດສາດສະໜາຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງ

[໑໘] ເຮົາເປັນຜູ້ບໍ່ຜະໝາດຢູ່ໃນຄຳສັ່ງສອນນັ້ນ
ຈະເລີນພົມວິຫານພາວະນາ
ເຖິງຄວາມສຳເລັດອະພິນຍາແລ້ວ ໄດ້ໄປເກີດເທິງພົມມະໂລກ

[໔໐] ເມືອງຫຼວງຊື່ວ່າສຸມັງຄະລະ ກະສັດພຣະນາມວ່າອຸກຄະຕະເປັນພຣະຊະນົກ
ພຣະເທວີພຣະນາມວ່າປະພາວະດີເປັນພຣະຊົນນະນີ
ຂອງພຣະພຸດທະເຈົ້າພຣະນາມວ່າສຸຊາຕະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໑] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສິຣິຜາສາດ ອຸປະສິຣິຜາສາດ ແລະຈັນທະຜາສາດ

[໔໔] ມີນາງສະໜົມກຳນັນ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສິຣິນັນທາ
ພຣະຣາດຊະໂອຣົດພຣະນາມວ່າອຸປະເສນະ

[໔໓] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືມ້າອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໙ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໔] ພຣະມະຫາວີຣະພຣະນາມວ່າ ສຸຊາຕະ ຊົງເປັນຜູ້ນຳສັດໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ທີ່ພຣະອຸທະຍານສຸມັງຄະລະ ອັນປະເສີດ

[໔໕] ພຣະສຸທັດສະນະເຖຣະແລະພຣະສຸເທວະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າ ນາຣະທະເປັນອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໖] ພຣະນາຄາເຖຣີ ແລະພຣະນາຄະສະມານາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນໄຜ່ໃຫຍ່

[໔໗] ແລະຕົ້ນໄມ້ນັ້ນ ລຳຕົ້ນແຂງເປັນໄຜ່ຕັນ ມີໃບແໜ້ນໜາ
ລຳຕົ້ນຊື່ໃຫຍ່ ໜ້າເບິ່ງ ເປັນຕາອອນຊອນ

[໔໘] ຕົ້ນໜຶ່ງຈະເລີນງອກງາມແລ້ວແຕກກິ່ງກ້ານສາຂາອອກໄປ
ຕົ້ນໄມ້ນັ້ນຍ່ອມງາມເໝືອນກຳຫາງນົກຍູງທີ່ຜູກໄວ້ດີແລ້ວ

[໔໙] ໄມ້ໄຜ່ນັ້ນບໍ່ມີໜາມ ມີຮູບໍ່ໃຫຍ່
ມີງ່າຕິດກັນບໍ່ຫ່າງ ມີເງົາທຶບ ເປັນຕາອອນຊອນ

[໕໐] ສຸທັດຕະອຸປາສົກ ແລະຈິດຕະອຸປາສົກເປັນອັກຄະຣະອຸປັດຖາກ
ສຸພັດທາອຸປາສິກາ ແລະປະທຸມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໕໑] ພຣະຊິນນະເຈົ້າພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໕໐ ສອກ
ປະກອບດ້ວຍພຣະລັກສະນະອັນປະເສີດ ໓໒ ປະການ
ແລະຊົງປະກອບດ້ວຍພຣະຄຸນທັງປວງ

[໕໒] ຊົງມີພຣະຣັດສະໝີບໍ່ມີອັນໃດສະເໝີເໝືອນ
ຊ່ານອອກໄປໂດຍຮອບ ບໍ່ມີປະມານ
ບໍ່ມີອັນໃດທຽບຄຽງ ຫາອຸປະມາບໍ່ໄດ້

[໕໓] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໙໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໕໔] ໃນຄັ້ງນັ້ນ ສາດສະໜາງົດງາມໄປດ້ວຍພຣະອະຣະຫັນທັງຫຼາຍ
ເໝືອນຄື້ນໃນສາຄອນ ແລະເໝືອນດວງດາວໃນທ້ອງຟ້າ
ສາດສະໜາຂອງພຣະອົງຄັບຄັ່ງໄປດ້ວຍພຣະອະຣະຫັນທັງຫຼາຍ
ລ້ວນແຕ່ຜູ້ໄດ້ວິດຊາ ໓ ອະພິນຍາ ໖ ແລະພະລະ ຜູ້ຄົງທີ່

[໕໕] ພຣະພຸດທະເຈົ້າພຣະອົງນັ້ນ ຫາຜູ້ສະເໝີເໝືອນບໍ່ໄດ້
ແລະພຣະຄຸນເຫຼົ່ານັ້ນກໍຫາອັນໃດທຽບຄຽງບໍ່ໄດ້

ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໓໖] ພຣະຊິນະພຸດທະເຈົ້າຜູ້ປະເສີດພຣະນາມວ່າ ສຸຊາຕະ
ສະເດັດດັບຂັນທະປະຣິນິບພານທີ່ເສລາຣາມ
ພຣະເຈດີຂອງພຣະສາດສະດາ
ທີ່ເສລາຣາມນັ້ນ ສູງເຖິງ ໓ ຄາວຸດ ດັ່ງນີ້ແລ

**ສຸຊາຕະພຸດທະວົງທີ ໑໒ ຈົບ**

## ໑໓. ປິຍະທັດສີພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະປິຍະທັດສີພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະ
ໄດ້ມີພຣະສະຍໍາພູພຣະນາມວ່າປິຍະທັດສີ ຊຶ່ງເປັນຜູ້ນໍາສັດໂລກ
ຫາຜູ້ກະທົບກະທັ່ງໄດ້ຍາກ ບໍ່ມີຜູ້ສະເໝີເໝືອນ ມີພຣະຍົດຍິ່ງໃຫຍ່

[໒] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ຜູ້ມີຍົດອັນນັບບໍ່ໄດ້
ຊົງຮຸ່ງເຮືອງດັ່ງດວງອາທິດ ຊົງຂະຈັດຄວາມມືດທັງປວງແລ້ວ
ຊົງປະກາດພຣະທໍາມະຈັກ

[໓] (ສາວົກ) ຂອງພຣະພຸດທະເຈົ້າຜູ້ມີພຣະເດດບໍ່ມີອັນໃດປຽບປານ
ມີການບັນລຸທໍາ ໓ ເທື່ອ
ເທວະດາແລະມະນຸດຈໍານວນ ໑໐໐,໐໐໐ ໂກດ ໄດ້ບັນລຸທໍາເທື່ອທີ ໑

[໔] ທ້າວສຸທັດສະນະເທວະຣາດ ມາຂາບທູນເຖິງມິດສາທິດຖິ
ພຣະສາດສະດາເມື່ອຈະຊົງບັນເທົາມິດສາທິດຖິ
ຂອງທ້າວເທວະຣາດນັ້ນຈຶ່ງຊົງສະແດງທໍາ

[໕] ໃນຄັ້ງນັ້ນ ມະຫາຊົນໄດ້ມາປະຊຸມກັນຫຼວງຫຼາຍ ປະມານບໍ່ໄດ້
ເທວະດາແລະມະນຸດປະມານ ໙,໐໐໐ ໂກດ ໄດ້ບັນລຸທໍາເທື່ອທີ ໒

[໖] ໃນການທີ່ພຣະພຸດທະເຈົ້າ ຜູ້ຊົງເປັນສາຣະຖີຝຶກນໍຣະຊົນ
ຊົງຝຶກຊ້າງໂທນະມຸກ
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດ ໄດ້ບັນລຸທໍາເທື່ອທີ ໓

[໗] ແມ່ນພຣະປິຍະທັດສີພຸດທະເຈົ້າພຣະອົງນັ້ນ
ກໍມີການປະຊຸມສາວົກ ໓ ເທື່ອ
ພຣະສາວົກປະມານ ໑໐໐,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໘] ພຣະມຸນີຂີນາສົບປະມານ ໙໐ ໂກດ ມາປະຊຸມຮ່ວມກັນ
ໃນການປະຊຸມເທື່ອທີ ໓ ມີພຣະມຸນີຂີນາສົບປະມານ ໘໐ ໂກດ

[໙] ສະໄໝນັ້ນ ເຮົາເປັນມານົບມີຊື່ວ່າ ກັດສະປະ
ເປັນຜູ້ຄົງແກ່ຮຽນ ຊົງຈຳມົນ ຈົບໄຕຣເພດ

[໑໐] ເຮົາໄດ້ຟັງທຳຂອງພຣະອົງແລ້ວ ເກີດຄວາມເຫຼື້ອມໃສ
ໄດ້ບໍລິຈາກຊັບ ໑໐໐,໐໐໐ ໂກດສ້າງສັງຄາຣາມ

[໑໑] ເມື່ອຖວາຍອາຣາມແກ່ພຣະອົງແລ້ວ ຮ່າເຣີງ ຕື້ນຕັນໃຈ
ໄດ້ສະມາທານສະຣະນະຄົມ ແລະປັນຈະສີນໃຫ້ໝັ້ນຄົງ

[໑໒] ແມ່ນພຣະພຸດທະເຈົ້າພຣະອົງນັ້ນປະທັບນັ່ງ ທ່າມກາງສົງ
ຊົງພະຍາກອນເຮົາວ່າ
ໃນ ໑໑໘ ກັບ ມານົບນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໓] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາຈັກປະທັບນັ່ງເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດຢູ່ບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າ ໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາ ແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ

ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໕] ເມືອງຫຼວງຊື່ວ່າສຸທັນຍະ ກະສັດພຣະນາມວ່າສຸທັດຕະເປັນພຣະຊະນົກ
ພຣະເທວີພຣະນາມວ່າສຸຈັນທາເປັນພຣະຊົນນີ
ຂອງພຣະສາດສະດາພຣະນາມວ່າປິຍະທັດສີ

[໑໖] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸນິມມະລະຜາສາດ ວິມະລະຜາສາດ ແລະຄິຣິຄູຫາຜາສາດ

[໑໗] ມີນາງສະໜົມກຳນັບ ໓໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າວິມະລາ
ພຣະຣາດຊະໂອຣົດພຣະນາມວ່າກັນຈະນາເວລະ

[໑໘] ພຣະອົງຜູ້ສູງສຸດແຫ່ງບຸຣຸດຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໖ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໙] ພຣະມະຫາວີຣະມະຫາມຸນີພຣະນາມວ່າ ປິຍະທັດສີ
ຜູ້ອັນພົມທູນອາຣາດທະນາແລ້ວ ຊົງປະກາດພຣະທຳມະຈັກ
ທີ່ພຣະອຸທະຍານອຸສະພະວັນເປັນຕາອອນຊອນ

[໒໐] ພຣະປາລິດເຖຣະແລະພຣະສັບພະທັດສີເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າໂສພິຕະເປັນພຣະອຸປັດຖາກ
ຂອງພຣະສາດສະດາພຣະນາມວ່າປິຍະທັດສີ

[໒໑] ພຣະສຸຊາດາເຖຣີແລະພຣະທຳມະທິນນາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນກຸ່ມ

[໒໒] ສັນທະກະອຸປາສົກ ແລະທຳມິກະອຸປາສົກເປັນອັກຄະຣະອຸປັດຖາກ
ວິສາຂາອຸປາສິກາແລະທຳມະທິນນາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໓]　　ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ມີພຣະຍົດນັບບໍ່ຖ້ວນ
ຊົງພຣະລັກສະນະອັນປະເສີດ ໓໒ ປະການ
ມີພຣະວໍຣະກາຍສູງ ໗໐ ສອກ ຜາກົດດັ່ງຕົ້ນພະຍາໄມ້ສາລະ

[໔໔]　　ຣັດສະມີໄຟ ຣັດສະມີດວງຈັນ ຣັດສະມີດວງອາທິດ
ກໍບໍ່ເໝືອນກັບພຣະຣັດສະໝີພຣະພຸດທະເຈົ້າພຣະອົງນັ້ນ
ຫາຜູ້ສະເໝີບໍ່ໄດ້ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໕]　　ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ເປັນເທບຍິ່ງກວ່າເທບ
ມີພຣະຈັກຂຸ ກໍດໍາຣົງພຣະຊົນມາຢູ່ໃນໂລກປະມານ ໙໐,໐໐໐ ປີ

[໔໖]　　ແມ່ນພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນພຣະອົງນັ້ນ
ແມ່ນຄູ່ພຣະອັກຄະຣະສາວົກເຊິ່ງບໍ່ມີຜູ້ທຽບຄຽງເຫຼົ່ານັ້ນ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໔໗]　　ພຣະມຸນີຜູ້ປະເສີດພຣະນາມວ່າ ປິຍະທັດສີ
ສະເດັດດັບຂັນທະປະຣິນິບພານທີ່ອັດສັດຖາຣາມ
ພຣະສະຖູບຂອງພຣະຊິນນະເຈົ້ານັ້ນ
ທີ່ອັດສັດຖາຣາມນັ້ນ ສູງເຖິງ ໓ ໂຍດ ດັ່ງນີ້ແລ

**ປິຍະທັດສີພຸດທະວົງທີ ໑໓ ຈົບ**

## ໑໔. ອັດຖະທັດສີພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະອັດຖະທັດສີພຸດທະເຈົ້າ

[໑]　　ໃນມັນທະກັບນັ້ນແລ ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ ຊົງຂະຈັດຄວາມມືດໃຫຍ່ອອກໄປແລ້ວ
ຊົງບັນລຸສໍາໂພທິຍານອັນສູງສຸດ

[໒]　　ພຣະອົງຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທໍາມະຈັກ
ຊົງຊ່ອຍຊາວໂລກໃນພື້ນຈັກກະວານ
ພ້ອມທັງເທວະດາໃຫ້ອີ່ມໜໍາດ້ວຍອະມະຕະທໍາ

[໓] ສາວົກຂອງພຣະອົງແມ່ນນັ້ນຜູ້ຊົງເປັນບ່ອນເພິ່ງຂອງໂລກ
ມີການບັນລຸທຳ ໓ ເທື່ອ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໑

[໔] ໃນການທີ່ພຣະພຸດທະເຈົ້າພຣະນາມວ່າ
ອັດຖະທັດສີສະເດັດຈາຣິກໄປໃນເທວະໂລກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໒

[໕] ຕໍ່ມາ ໃນການທີ່ພຣະພຸດທະເຈົ້າຊົງສະແດງທຳ
ໃນຣາດຊະສຳນັກຂອງພຣະຊະນົກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໓

[໖] ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ກໍໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໗] ພຣະຂີນາສົບປະມານ ໙໘,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໑
ພຣະຂີນາສົບປະມານ ໘໘,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໒

[໘] ພຣະຂີນາສົບຜູ້ລຸດພົ້ນ ຍ້ອນບໍ່ຖືໝັ້ນ
ຜູ້ປາສະຈາກມົນທິນ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ປະມານ ໗໘,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໓

[໙] ສະໄໝນັ້ນ ເຮົາເປັນຊະດິນມີຊື່ວ່າ ສຸສີມະ ຕາມໂຄດ ມີຕະບະແກ່ກ້າ
ປະຊາຊົນຍ້ອງຍໍວ່າເປັນຜູ້ປະເສີດທີ່ສຸດໃນແຜ່ນດິນ
[໑໐] ເຮົານຳດອກມົນຖາຣົບ ດອກປະທຸມ ແລະດອກປາຣິສັດຕະກະ
ອັນເປັນທິບຈາກເທວະໂລກ ມາບູຊາພຣະສຳພຸດທະເຈົ້າ
[໑໑] ແມ່ນພຣະມະຫາມຸນີພຸດທະເຈົ້າພຣະອົງນັ້ນພຣະນາມວ່າ ອັດຖະທັດສີ
ກໍຊົງພະຍາກອນເຮົາວ່າ
ໃນ ໑໑໘ ກັບ ຊະດິນນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໘] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກີຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີ ແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີພຣະຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາ ແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ

ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນໍ້າ ພາດທ່າສະເພາະໜ້າແລ້ວ
ກໍຢຶດເອົາທ່າຖັດໄປຈຶ່ງຂ້າມແມ່ນໍ້າໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໓] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ທັງຍິນດີ ທັງຕື້ນຕັນໃຈ
ໄດ້ອະທິຖານຂໍ້ວັດເພື່ອພໍາເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໔] ເມືອງຫຼວງຊື່ວ່າໂສພະນະ ກະສັດພຣະນາມວ່າສາຄະຣະເປັນພຣະຊະນົກ
ພຣະເທວີພຣະນາມວ່າ ສຸທັດສະນາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າ ອັດຖະທັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໕] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືອະມະຣະຄິຜາສາດ ສຸຣະຄິຜາສາດ ແລະຄິຣິພາຫະນາຜາສາດ

[໑໖] ມີນາງສະໜົມກຳນັນ ໓໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າວິສາຂາ
ພຣະຣາດຊະໂອຣົດພຣະນາມວ່າເສລະ

[໑໗] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືມ້າອອກບວດແລ້ວ
ຊົງພໍາເພັງພຽນຢູ່ ໘ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໗] ພຣະມະຫາວີຣະພຣະນາມວ່າ ອັດຖະທັດສີ ຜູ້ອົງອາດກວ່ານໍຣະຊົນ
ມີພຣະຍົດຍິ່ງໃຫຍ່ ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ພຣະອຸທະຍານອະໂນມາ

[໑໙] ພຣະສັນຕະເຖຣະ ແລະພຣະອຸປະສັນຕະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອະໄພເປັນອຸປັດຖາກຂອງພຣະພຸດທະເຈົ້າ
ພຣະນາມວ່າອັດຖະທັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໘໐] ພຣະທຳມາເຖຣີແລະພຣະສຸທຳມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນຈຳປາ

[໘໑] ນະກຸລະອຸປາສົກ ແລະນິສະພະອຸປາສົກເປັນອັກຄະຣະອຸປັດຖາກ
ມະກິລາອຸປາສິກາ ແລະສຸນັນທາອຸປາສິກາເປັນອັກຄະຣະອຸປັດຖາຍິກາ
[໘໒] ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ບໍ່ມີໃຜສະເໝີເໝືອນ
ຊົງມີພຣະວໍຣະກາຍສູງ ໗໐ ສອກ ຊົງສະງ່າງາມດັ່ງຕົ້ນພະຍາໄມ້ສາລະ
ເໝືອນດວງຈັນເຕັມດວງ
[໘໓] ພຣະພຸດທະເຈົ້າພຣະອົງນັ້ນມີພຣະຣັດສະໝີຫຼາຍຮ້ອຍໂກດຕາມປົກກະຕິ
ແຜ່ໄປຕະຫຼອດໂຍດທົ່ວ ໑໐ ທິດທັງເບື້ອງເທິງ
ແລະເບື້ອງລຸ່ມຕະຫຼອດເວລາ
[໘໔] ແມ່ນພຣະພຸດທະມຸນີພຣະອົງນັ້ນ
ຜູ້ອົງອາດກວ່ານໍຣະຊົນ ຜູ້ສູງສຸດແຫ່ງສັບພະສັດ
ຜູ້ມີພຣະຈັກຂຸ ກໍດຳຣົງຢູ່ໃນໂລກຕະຫຼອດ ໑໐໐,໐໐໐ ປີ
[໘໕] ແມ່ນພຣະອົງຊົງສະແດງພຣະຣັດສະໝີທີ່ບໍ່ມີສິ່ງອື່ນທຽບທັນ
ໃຫ້ສະຫວ່າງສະໄຫວຮຸ່ງເຮືອງໃນໂລກພ້ອມທັງເທວະໂລກແລ້ວ
ກໍເຖິງສະພາວະບໍ່ທ່ຽງ (ສະເດັດດັບຂັນທະປະຣິນິບພານໄປ)
ດັ່ງໄຟສິ້ນເຊື້ອດັບໄປ ສັນນັ້ນ

[໘໖] ພຣະຊິນນະເຈົ້າຜູ້ປະເສີດພຣະນາມວ່າ ອັດຖະທັດສີ
ສະເດັດດັບຂັນທະປະຣິນິບພານທີ່ອະໂນມາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ອັດຖະທັດສີພຸດທະວົງທີ ໑໔ ຈົບ**

# ໑໘. ທຳມະທັດສີພຸດທະວົງ

## ວ່າດ້ວຍພຣະປະຫວັດຂອງພຣະທຳມະທັດສີພຸດທະເຈົ້າ

[໑] ໃນມັນທະກັບນັ້ນແລ ໄດ້ມີພຣະພຸດທະເຈົ້າພຣະນາມວ່າທຳມະທັດສີ
ຜູ້ມີພຣະຍົດຍິ່ງໃຫຍ່ຊົງຂະຈັດຄວາມມືດແລ້ວ
ຊົງຮຸ່ງເຮືອງຢ່າງຍິ່ງໃນໂລກພ້ອມທັງເທວະໂລກ

[໒] ແມ່ນໃນການທີ່ພຣະອົງຜູ້ມີພຣະເດດບໍ່ມີອັນໃດປຽບທຽບ
ຊົງປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໑

[໓] ໃນການທີ່ພຣະພຸດທະເຈົ້າພຣະນາມວ່າທຳມະທັດສີ
ຊົງແນະນຳສັນໄຊລືສີ
ເທວະດາແລະມະນຸດປະມານ ໗໐ ໂກດ ໄດ້ບັນລຸທຳເທື່ອທີ ໒

[໔] ໃນການທີ່ທ້າວສັກກະພ້ອມທັງບໍລິສັດ
ສະເດັດເຂົ້າເຝົ້າພຣະພຸດທະເຈົ້າຊົງເປັນຜູ້ນຳວິເສດ
ເທວະດາແລະມະນຸດປະມານ ໘໐ ໂກດ ໄດ້ບັນລຸທຳເທື່ອທີ ໓

[໕] ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ເປັນເທບຍິ່ງກວ່າເທບ
ກໍມີການປະຊຸມແຫ່ງພຣະຂີນາສົບຜູ້ປາສະຈາກມົນທິນ
ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໖] ໃນການທີ່ພຣະທຳມະທັດສີພຸດທະເຈົ້າ
ຊົງສະເດັດຈຳພັນສາທີ່ສະຣະນະນະຄອນ
ພຣະຂີນາສົບປະມານ ໑,໐໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໑

[໗] ຕໍ່ມາ ໃນການທີ່ພຣະພຸດທະເຈົ້າ
ສະເດັດລົງຈາກເທວະໂລກມາຍັງໂລກມະນຸດ
ພຣະຂີນາສົບປະມານ ໑໐໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໒

[໘] ຕໍ່ມາ ໃນການທີ່ພຣະພຸດທະເຈົ້າຊົງປະກາດທຸດົງຄຸນ
ພຣະຂີນາສົບຈຳນວນ ໘໐ ໂກດ ມາປະຊຸມກັນ ເປັນເທື່ອທີ ໓

[໙] ສະໄໝນັ້ນ ເຮົາເປັນທ້າວສັກກະປຸຣິນທະທະ[১]
ໄດ້ບູຊາດ້ວຍຂອງຫອມມາລາແລະດົນຕີທິບ

[໑໐] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ປະທັບນັ່ງທ່າມກາງເທວະດາ
ກໍຊົງພະຍາກອນເຮົາວ່າ
ໃນ ໑໑໙ ກັບ ທ້າວສັກກະປຸຣິນທະທະນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໑] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນ ຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຮູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າ ມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຮູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ

ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະຂຸດຂຸດຕະຣາອຸປາສິກາ

ຈັກເປັນອັກຄະຣະອຸປັດຖາຍິກາ

ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້

ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ

ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ

ຕ່າງກໍມີຄວາມຊື່ນຊົມກ່າວວ່າ

ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ

ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ

ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກະນາດພຣະອົງນີ້

ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ

ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ

ຖ້າພາດພຣະຊິນນະເຈົ້າພຣະອົງນີ້

ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ

ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ

ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໖] ເມືອງຫຼວງຊື່ວ່າສະຣະນະ ກະສັດພຣະນາມວ່າສະຣະນະເປັນພຣະຊະນົກ

ພຣະເທວີພຣະນາມວ່າສຸນັນທາເປັນພຣະຊົນນີ

ຂອງພຣະສາດສະດາພຣະນາມວ່າທຳມະທັດສີ

[໑໔] ພຣະອົງຊົງຄອງຄະຣາວາດຢູ່ ໘,໐໐໐ ປີ

ມີຜາສາດທີ່ອຸດົມຢູ່ ໓ ຫຼັງ

ຄືອະຣະຊະຜາສາດ ວິຣະຊະຜາສາດ ແລະສຸທັດສະນະຜາສາດ

[໑໕] ມີນາງສະໜົມກຳນັນ ໔໐,໐໐໐ ນາງ

ລ້ອມປະດັບປະດາສວຍງາມ
ພຣະມະເຫສີນາມວ່າວິຈິໂກສີ
ພຣະຣາດຊະໂອຣົດພຣະນາມວ່າປຸນຍະວັດຖະນະ

[໑໖] ພຣະອົງຜູ້ສູງສຸດແຫ່ງບຸຣຸດຊົງເຫັນນິມິດ ໔ ປະການ
ຈຶ່ງສະເດັດອອກຈາກຜາສາດໄປບວດ
ຊົງພ່ຳເພັງພຽນຢູ່ ໗ ວັນ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໗] ພຣະມະຫາວີຣະພຣະນາມວ່າທຳມະທັດສີ ຜູ້ອົງອາດກວ່ານໍຣະຊົນ
ເປັນຜູ້ສູງສຸດແຫ່ງນໍຣະຊົນ ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ມະຣິຄະທາຍະວັນ

[໑໘] ພຣະປະທຸມະເຖຣະ ແລະພຣະປຸດສະເທວະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສຸທັດຕະເປັນພຣະອຸປັດຖາກ
ຂອງພຣະສາດສະດານາມວ່າທຳມະທັດສີ

[໑໙] ພຣະເຂມາເຖຣີແລະພຣະສັດຈະນາມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນໝາກກ່ຳຫຼວງ

[໒໐] ສຸພັດທະອຸປາສົກແລະກະຕິດສະຫະອຸປາສົກເປັນອັກຄະຣະອຸປັດຖາກ
ສາລິສາອຸປາສິກາແລະກະລິດສາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໑] ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ບໍ່ມີໃຜສະເໝີເໝືອນ
ຊົງມີພຣະວໍຣະກາຍສູງ ໘໐ ສອກ
ຊົງຮຸ່ງເຮືອງຍິ່ງດ້ວຍພຣະເດດໃນໂລກກະທາດມີໝື່ນຈັກກະວານ

[໒໒] ພຣະອົງຊົງງາມສະງ່າດັ່ງຕົ້ນພະຍາໄມ້ສາລະທີ່ມີດອກບານສະພັ່ງ
ເໝືອນສາຍຟ້າໃນທ້ອງຟ້າ ແລະເໝືອນດວງອາທິດໃນຍາມທ່ຽງວັນ

[໒໓] ແມ່ນພຣະພຸດທະເຈົ້າຜູ້ມີພຣະຈັກຂຸ
ມີພຣະເດດບໍ່ມີອັນໃດປຽບທຽບ
ຊົງດຳຣົງຊີວິດຢູ່ໃນໂລກ ໑໐໐,໐໐໐ ປີຖ້ວນ

[໒໔] ພຣະອົງພ້ອມທັງສາວົກ ຊົງສະແດງພຣະຣັດສະໝີອັນສະຫວ່າງສະໄຫວ

ກະທຳສາດສະໜາໃຫ້ປາສະຈາກມົນທິນ ສະເດັດດັບຂັນທະປະຣິນິບພານ
ດັ່ງດວງຈັນເທິງທ້ອງຟ້າເຄື່ອນລັບໄປ

[໒໕] ພຣະມະຫາວີຣະພຣະນາມວ່າທຳມະທັດສີ
ສະເດັດດັບຂັນທະປະຣິນິບພານທີ່ເກາສາຣາມ
ພຣະສະຖູບອັນປະເສີດຂອງພຣະອົງນັ້ນ ສູງເຖິງ ໓ ໂຍດ ດັ່ງນີ້ແລ

**ທຳມະທັດສີພຸດທະວົງທີ ໑໕ ຈົບ**

**໑໖. ສິດທັດຖະພຸດທະວົງ**

**ວ່າດ້ວຍພຣະປະຫວັດຂອງພຣະສິດທັດຖະພຸດທະເຈົ້າ**

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າທຳມະທັດສີ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າສິດທັດຖະຊຶ່ງເປັນຜູ້ນຳສັດໂລກ
ຊຶ່ງກຳຈັດຄວາມມືດທັງປວງ (ພາກົດ)
ເໝືອນດວງອາທິດອຸໄທ

[໒] ແມ່ນພຣະອົງຊຶ່ງບັນລຸສຳໂພທິຍານແລ້ວ
ຊຶ່ງຊ່ອຍໝູ່ມະນຸດພ້ອມທັງເທວະດາໃຫ້ຂ້າມພົ້ນ
ຊຶ່ງບັນດານຝົນຄືທຳໃຫ້ຕົກ
ຊ່ອຍຊາວໂລກພ້ອມທັງເທວະໂລກໃຫ້ເຢັນ

[໓] ສາວົກແມ່ນຂອງພຣະອົງຜູ້ມີພຣະເດດບໍ່ມີອັນໃດປຽບທຽບ
ໄດ້ມີການບັນລຸທຳ ໓ ເທື່ອ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໑

[໔] ຕໍ່ມາ ໃນການທີ່ພຣະພຸດທະເຈົ້າພຣະອົງນັ້ນ
ຊຶ່ງຕີອະມະຕະເພຣີທີ່ພີມະຣັດຖະນະຄອນ
ເທວະດາແລະມະນຸດປະມານ ໙໐ ໂກດ ໄດ້ບັນລຸທຳເທື່ອທີ ໒

[໕] ໃນການທີ່ພຣະພຸດທະເຈົ້າພຣະອົງນັ້ນຊຶ່ງເປັນນະຣະຜູ້ສູງສຸດ
ຊຶ່ງສະແດງທຳທີ່ເວພາລະບັນພິດ
ເທວະດາແລະມະນຸດປະມານ ໙໐ ໂກດ ໄດ້ບັນລຸທຳເທື່ອທີ ໓

[໖] ພຣະພຸດທະເຈົ້າພຣະນາມວ່າສິດທັດຖະຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໗] ໄດ້ມີການປະຊຸມຂອງພຣະຂີນາສົບຜູ້ປາສະຈາກມົນທິນ ໓ ເທື່ອເຫຼົ່ານີ້
ຄືພຣະຂີນາສົບປະມານ ໑໐໐ ໂກດ ໑ ເທື່ອ
ພຣະຂີນາສົບປະມານ ໙໐ ໂກດ ໑ ເທື່ອ
ພຣະຂີນາສົບປະມານ ໘໐ ໂກດ ໑ ເທື່ອ

[໘] ສະໄໝນັ້ນ ເຮົາເປັນດາບົດມີຊື່ວ່າມຸງຄຸນ ມີເດດຮຸ່ງເຮືອງ
ຂົ່ມໄດ້ຍາກ ທັງປະກອບດ້ວຍອະພິນຍາແລະພະລະ

[໙] ເຮົາໄດ້ນຳໝາກຫວ້າມາຖວາຍພຣະສຳມາສຳພຸດທະເຈົ້າ
ພຣະນາມວ່າ ສິດທັດຖະ
ພຣະອົງຊົງຮັບແລ້ວ ໄດ້ຕັດພຣະດຳຣັດນີ້ວ່າ

[໑໐] ຈົ່ງເບິ່ງຊະດີນດາບົດຜູ້ມີຕະບະແກ່ກ້ານີ້ ໃນກັບທີ ໙໔ ນັບຈາກກັບນີ້ໄປ
ຊະດີນດາບົດນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໑] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ

ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໘] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໖] ເມືອງຫຼວງຊື່ວ່າເວພາລະ ກະສັດພຣະນາມວ່າອຸເທນເປັນພຣະຊະນົກ
ພຣະເທວີພຣະນາມວ່າສຸຜັດສາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໔] ພຣະອົງຊົງຄອງຄະຣາວາດຢູ່ ໑໐,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືໂກກາສະຜາສາດ ອຸປະລະຜາສາດ ແລະໂກກະນຸທະຜາສາດ

[໑໕] ມີນາງສະໜົມກຳນັນ ໔໗,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ສຸມະນາ
ພຣະຣາດຊະໂອຣົດພຣະນາມວ່າ ອະນຸປະມະ

[໑໖] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງວໍຄຳອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໑໐ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໗] ພຣະມະຫາວິຣະພຣະນາມວ່າສິດທັດຖະຊົງເປັນຜູ້ນຳສັດໂລກ
ຊົງເປັນຜູ້ສູງສຸດແຫ່ງນະຣະ ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ມະຣິຄະທາຍະວັນ

[໑໗] ພຣະສຳພະລະເຖຣະແລະພຣະສຸມິດຕະເຖຣະ ເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າເຣວະຕະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າສິດທັດຖະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໙] ພຣະສີວະລາເຖຣີແລະພຣະສຸຣາມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນກັນນິກາ

[໔໐] ສຸບປິຍະອຸປາສົກແລະສະມຸດທະອຸປາສົກເປັນອັກຄະຣະອຸປັດຖາກ
ຣຳມາອຸປາສິກາແລະສຸຣຳມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໑] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໖໐ ສອກ

ຊົງງົດງາມດັ່ງຄຳທີ່ລ້ຳຄ່າ
ຮຸ່ງເຮືອງໄປທົ່ວໜື່ນຈັກກະວານ

[໔໔] ແມ່ນພຣະພຸດທະເຈົ້າພຣະອົງນັ້ນຜູ້ບໍ່ມີໃຜສະເໝີເໝືອນ
ມີພຣະຄຸນນັບບໍ່ໄດ້ ບໍ່ມີບຸກຄົນປຽບ ຜູ້ມີພຣະຈັກຂຸ
ກໍດຳຣົງພຣະຊົນມາຍຸຢູ່ໃນໂລກປະມານ ໑໐໐,໐໐໐ ປີ

[໔໓] ພຣະອົງຊົງສະແດງພຣະຣັດສະໝີຢ່າງກວ້າງຂວາງ
ຊົງເຮັດສາວົກທັງຫຼາຍໃຫ້ເບີກບານ
ຊົງເຍື້ອງກາຍງົດງາມດ້ວຍສະມາບັດ
ພ້ອມທັງສາວົກສະເດັດດັບຂັນທະປະຣິນິບພານແລ້ວ

[໔໕] ພຣະພຸດທະເຈົ້າພຣະນາມວ່າສິດທັດຖະຊົງເປັນມຸນີຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ອະໂນມາຣາມ
ພຣະສະຖູບອັນປະເສີດຂອງພຣະອົງ
ທີ່ອະໂນມາຣາມນັ້ນ ສູງເຖິງ ໔ ໂຍດ ດັ່ງນີ້ແລ

**ສິດທັດຖະພຸດທະວົງທີ ໑໖ ຈົບ**

## ໑໗. ຕິດສະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະຕິດສະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ສິດທັດຖະ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ຕິດສະ
ບໍ່ມີຜູ້ສະເໝີ ບໍ່ມີບຸກຄົນປຽບ
ມີສີນທາບ່ອນສຸດບໍ່ໄດ້ ມີພຣະຍົດນັບບໍ່ໄດ້
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ

[໒] ພຣະມະຫາວີຣະຜູ້ມີພຣະຈັກຂຸ ຜູ້ຊົງອະນຸເຄາະ
ສະເດັດອຸບັດຂຶ້ນໃນໂລກ ຊົງຂະຈັດຄວາມມືດໄດ້ແລ້ວ
ສາຍພຣະຣັດສະໝີໃຫ້ມະນຸດໂລກພ້ອມທັງເທວະໂລກສະຫວ່າງສະໄຫວ

[໓] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະລິດ
ສີນແລະສະມາທິອັນຫາສິ່ງທັດທຽມບໍ່ໄດ້

ຊຶ່ງເຖິງຄວາມສຳເລັດໃນທຳທັງປວງແລ້ວ
ຊຶ່ງປະກາດພຣະທຳມະຈັກ

[໔] ພຣະພຸດທະເຈົ້າພຣະອົງນັ້ນຊົງສະແດງທຳ
ປະກາດຄວາມບໍລິສຸດໄປໃນໝື່ນຈັກກະວານ
ໃນພຣະທຳມະເທດສະໜາເທື່ອທີ ໑
ເທວະດາແລະມະນຸດ ໑໐໐ ໂກດ ໄດ້ບັນລຸທຳ

[໕] ເທວະດາແລະມະນຸດປະມານ ໙໐ ໂກດ ໄດ້ບັນລຸທຳເທື່ອທີ ໔
ໃນການສະແດງທຳເທື່ອທີ ໓
ເທວະດາແລະມະນຸດປະມານ ໖໐ ໂກດ ໄດ້ບັນລຸທຳ
ໃນຄັ້ງນັ້ນພຣະອົງຊົງເປື້ອງເທວະດາແລະມະນຸດ
ທີ່ມາປະຊຸມກັນໃຫ້ລຸດພົ້ນຈາກເຄື່ອງຜູກພັນ

[໖] ພຣະຕິດສະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໗] ພຣະຂີນາສົບປະມານ ໑໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໑
ພຣະຂີນາສົບປະມານ ໙,໐໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໔

[໘] ພຣະຂີນາສົບຜູ້ປາສະຈາກມົນທິນ
ເບີກບານແລ້ວດ້ວຍວິມຸດຕິປະມານ ໘,໐໐໐,໐໐໐ ອົງ
ມາປະຊຸມກັນເປັນເທື່ອທີ ໓

[໙] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າສຸຊາຕະ
ລະຖິ້ມໂພຄະເປັນຈຳນວນຫຼາຍແລ້ວ ບວດເປັນລືສີ

[໑໐] ເມື່ອເຮົາບວດແລ້ວ ພຣະພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກສະເດັດອຸບັດຂຶ້ນ
ຍ້ອນໄດ້ຟັງສຽງວ່າ ພຸດໂທ ປີຕິຈຶ່ງເກີດແກ່ເຮົາ

[໑໑] ເຮົາຜູ້ກຳຈັດມານະແລ້ວ ໃຊ້ມືທັງ ໔ ປະຄອງດອກມົນທາຣົບ
ດອກປະທຸມ ແລະດອກປາຣິສັດຕະກະອັນເປັນທິບເຂົ້າເຝົ້າ

[໑៨] ເຮົາຖືດອກໄມ້ນັ້ນ ກັ້ງເໜືອພຣະສຽນ
พຣະຊິນນະເຈົ້າພຣະນາມວ່າຕິດສະ
ຊຶ່ງເປັນຜູ້ນຳຊັ້ນເລີດຂອງໂລກ
ຜູ້ແວດລ້ອມດ້ວຍວັນນະທັງ ៨

[໑៩] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ
ປະທັບນັ່ງທ່າມກາງປະຊຸມຊົນ
ຊົງພະຍາກອນເຮົາວ່າ
ໃນກັບທີ ໗៨ ຈາກກັບນີ້ໄປ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑៨] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພ່ຳເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ

ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຢຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໘] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໙] ເມືອງຫຼວງຊື່ວ່າເຂມະກະ ກະສັດພຣະນາມວ່າຊະນະສັນທະເປັນພຣະຊະນົກ
ພຣະເທວີພຣະນາມວ່າປະທຸມາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າຕິດສະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໗] ພຣະອົງຊົງຄອງຄະຣາວາດຢູ່ ໗,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຄຸນະເສລາຜາສາດ ນາທິຍະຜາສາດ ແລະນິສະພະຜາສາດ

[໑໗] ມີນາງສະໜົມກຳນັນ ໓໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສຸພັດທາ
ພຣະຣາດຊະໂອຣົດພຣະນາມວ່າອານັນທະ

[໑໙] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືມ້າອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ເຄິ່ງເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໐] ພຣະມະຫາວີຣະພຣະນາມວ່າຕິດສະ ຊົງເປັນຜູ້ນຳຊັ້ນເລີດຂອງໂລກ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ຍະສະວະດີທາຍະວັນອັນປະເສີດ

[໔໑] ພຣະພົມເທບເຖຣະແລະພຣະອຸໄທເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສຸມັງຄະລະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າຕິດສະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔] ພຣະຜຸດສາເຖຣີແລະພຣະສຸທັດຕາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນດູ່

[໔໓] ສຳພະລະອຸປາສົກແລະສິຣິອຸປາສົກເປັນອັກຄະຣະອຸປັດຖາກ
ກິສາໂຄຕະມີອຸປາສິກາແລະອຸປະເສນາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໔] ພຣະຊິນະພຸດທະເຈົ້າພຣະອົງນັ້ນ
ຊົງມີພຣະວໍຣະກາຍສູງ ໖໐ ສອກ
ຜູ້ບໍ່ມີບຸກຄົນປຽບ ຜູ້ບໍ່ມີໃຜສະເໝີເໝືອນ ຊົງຜາກົດດັ່ງພູເຂົາ

[໔໕] ແມ່ນພຣະອົງຜູ້ມີເດດບໍ່ມີອັນໃດປຽບທຽບ ຜູ້ມີພຣະຈັກຂຸ
ຊົງດຳຣົງພຣະຊົນມາຍຸຢູ່ໃນໂລກປະມານ ໑໐໐,໐໐໐ ປີ
ບໍ່ຍິ່ງໄປກວ່ານັ້ນ

[໔໖] ພຣະອົງພ້ອມທັງສາວົກ ສະເຫວີຍຍົດຍິ່ງໃຫຍ່ ອຸດົມ ປະເສີດສຸດ
ຊົງຮຸ່ງເຮືອງດັ່ງກອງເພີງສະເດັດດັບຂັນທະປະຣິນິບພານ

[໔໗] ພຣະອົງພ້ອມທັງສາວົກ ສະເດັດດັບຂັນທະປະຣິນິບພານ
ດັ່ງເມກຫາຍຈາງໄປຍ້ອນສາຍລົມ
ດັ່ງນ້ຳໝອກເຫືອດແຫ້ງໄປເພາະດວງອາທິດ
ແລະດັ່ງຄວາມມືດຫາຍໄປຍ້ອນດວງໄຟ ສັນນັ້ນ

[໔໘] ພຣະຊິນະພຸດທະເຈົ້າຜູ້ປະເສີດພຣະນາມວ່າຕິດສະ
ສະເດັດດັບຂັນທະປະຣິນິບພານແລ້ວທີ່ນັນທາຣາມ
ພຣະສະຖູບຂອງພຣະຊິນນະເຈົ້ານັ້ນ
ທີ່ນັນທາຣາມນັ້ນ ສູງເຖິງ ໓ ໂຍດ ດັ່ງນີ້ແລ

**ຕິດສະພຸດທະວົງທີ ໑໗ ຈົບ**

## ໑໘. ປຸດສະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະປຸດສະພຸດທະເຈົ້າ

[໑] ໃນມັນທະກັບນັ້ນແລ ໄດ້ມີພຣະສາດສະດາຜູ້ປະເສີດພຣະນາມວ່າປຸດສະ
ບໍ່ມີບຸກຄົນປຽບ ຜູ້ບໍ່ມີໃຜສະເໝີເໝືອນ
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ

[໒] ແມ່ນພຣະອົງກໍຊົງກຳຈັດຄວາມມືດທັງປວງ
ຊົງສາງຄວາມຣົກຊັດເປັນຈຳນວນຫຼາຍແລ້ວ
ຊົງຍັງນ້ຳອຳມະຣິດໃຫ້ຕົກ ຊ່ອຍມະນຸດ
ພ້ອມທັງເທວະດາໄດ້ດື່ມຈົນສຳຣານ

[໓] ເມື່ອພຣະພຸດທະເຈົ້າພຣະນາມວ່າຜຸດສະ
ຊົງປະກາດພຣະທຳມະຈັກໃນນັກຂັດຕະມຸງຄຸນ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໑

[໔] ເທວະດາແລະມະນຸດປະມານ ໙,໐໐໐,໐໐໐
ໄດ້ບັນລຸທຳເທື່ອທີ ໒
ເທວະດາແລະມະນຸດປະມານ ໘,໐໐໐,໐໐໐ ໄດ້ບັນລຸທຳເທື່ອທີ ໓

[໕] ພຣະພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າປຸດສະ

ໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໖] ພຣະຂີນາສົບປະມານ ໖,໐໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໑
ພຣະຂີນາສົບປະມານ ໕,໐໐໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໒

[໗] ພຣະຂີນາສົບປະມານ ໔,໐໐໐,໐໐໐ ອົງ
ລ້ວນແຕ່ລຸດພົ້ນແລ້ວຍ້ອນບໍ່ຖືໝັ້ນ ຕັດບ່ອນຕໍ່ຄືກິເລດໄດ້ແລ້ວ
ມາປະຊຸມກັນ ເປັນເທື່ອທີ ໓

[໘] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າວິຊິຕະ
ສະລະຣາດຊະສົມບັດເປັນຈຳນວນຫຼາຍ
ແລ້ວອອກບວດໃນສຳນັກຂອງພຣະອົງ

[໙] ແມ່ນພຣະພຸດທະເຈົ້າພຣະນາມວ່າ ປຸດສະ
ພຣະອົງນັ້ນ ຊົງເປັນຜູ້ນຳຊັ້ນເລີດຂອງຊາວໂລກ
ຊົງພະຍາກອນເຮົາວ່າ
ໃນກັບທີ ໙໒ ຈາກກັບນີ້ໄປ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ
ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກນະຄອນກະບິນລະພັດທີ່ໜ້າອອນຊອນ

[໑໐] ພຣະຕະຖາຄົດເຈົ້າຊົງເລີ່ມຕັ້ງຄວາມພຽນ
ພໍ່າເພັງທຸກກະຣະກິຣິຍາ ຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂີນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

ພຣະໂກລິຕະເຖຣະ ແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

ພຣະເຂມາເຖຣີ ແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໑] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໘] ເຮົາໄດ້ຮ່ຳຮຽນພຣະສູດ ແລະພຣະວິໄນ
ອັນເປັນນະວັງຄະສັດຖຸສາດທັງປວງແລ້ວ
ຊ່ອຍປະກາດສາດສະໜາຂອງພຣະຊິນນະເຈົ້າໃຫ້ຮຸ່ງເຮືອງ

[໑໖] ເຮົາເປັນຜູ້ບໍ່ປະໝາດຢູ່ໃນຄໍາສັ່ງສອນນັ້ນ
ຈະເລີນພົມວິຫານພາວະນາ
ເຖິງຄວາມສໍາເລັດອະພິນຍາແລ້ວ ໄດ້ໄປເກີດເທິງພົມມະໂລກ

[໑໔] ເມືອງຫຼວງຊື່ວ່າກາສິກະ ກະສັດພຣະນາມວ່າໄຊຍະເສນເປັນພຣະຊະນົກ
ພຣະເທວີພຣະນາມວ່າ ສິຣິມາເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າປຸດສະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໕] ພຣະອົງຊົງຄອງຄະຣາວາດຢູ່ ໙,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຄະຣຸລະຜາສາດ ຫັງສະຜາສາດ ແລະສຸວັນນະດາຣາຜາສາດ

[໑໖] ມີນາງສະໜົມກໍານັນ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າກີສາໂຄຕະມີ
ພຣະຣາດຊະໂອຣົດພຣະນາມວ່າ ອະນູປະມະ

[໑໗] ພຣະອົງຜູ້ສູງສຸດແຫ່ງບຸຣຸດຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືຊ້າງອອກບວດແລ້ວ
ຊົງພໍາເພັງພຽນຢູ່ ໗ ວັນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໘] ພຣະມະຫາວີຣະພຣະນາມວ່າປຸດສະ
ຊົງເປັນຜູ້ນໍາຊັ້ນເລີດຂອງໂລກ ສູງສຸດກວ່ານໍຣະຊົນ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທໍາມະຈັກທີ່ມະຣິຄະທາຍະວັນ

[໑໙] ພຣະສຸຣັກຂິຕະເຖຣະ ແລະພຣະທໍາມະເສນເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສະພິຍະເປັນພຣະອຸປັດຖາກຂອງພຣະປຸດສະພຸດທະເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໐] ພຣະຈາລາເຖຣີແລະພຣະອຸປະຈາລາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າຕົ້ນໝາກຂາມປ້ອມ

[໒໑] ທະນັນໄຊອຸປາສົກແລະວິສາຂະອຸປາສົກ ເປັນອັກຄະຣະອຸປັດຖາກ
ປະທຸມາອຸປາສິກາແລະສິຣິນາຄາອຸປາສິກາ ເປັນອັກຄະຣະອຸປັດຖາຍິກາ

[໔໒] ພຣະມຸນີພຣະອົງນັ້ນຊົງມີພຣະວໍຣະກາຍສູງ ໕໗ ສອກ
ຊົງງົດງາມດັ່ງດວງອາທິດ ແລະເໝືອນດວງຈັນໃນວັນເພັງ

[໔໓] ຂະນະນັ້ນ ມະນຸດທັງຫຼາຍມີອາຍຸປະມານ ໙໐,໐໐໐ ປີ
ພຣະອົງກໍຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໔] ແມ່ນພຣະສາດສະດາຜູ້ມີພຣະຍົດອັນບໍ່ມີໃຜ ໆ ສະເໝີເໝືອນພຣະອົງນັ້ນ
ຕັດສອນເວໄນຍະສັດເປັນຈຳນວນຫຼາຍ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ
ພຣະອົງຜູ້ເປັນໄປກັບສາວົກສະເດັດດັບຂັນທະປະຣິນິບພານແລ້ວ

[໔໕] ພຣະຊິນະສາດສະດາຜູ້ປະເສີດພຣະນາມວ່າປຸດສະ
ສະເດັດດັບຂັນທະປະຣິນິບພານທີ່ເສນາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ປຸດສະພຸດທະວົງທີ ໑໗ ຈົບ**

## ໑໙. ວິປັດສີພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະວິປັດສີພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ປຸດສະ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າວິປັດສີ ຕາມພຣະໂຄດ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຜູ້ມີພຣະຈັກຂຸ ສະເດັດອຸບັດຂຶ້ນແລ້ວໃນໂລກ

[໒] ພຣະອົງຊົງທຳລາຍເປືອກໄຂ່ຄືອະວິດຊາແລ້ວ
ຊົງບັນລຸສຳໂພທິຍານອັນອຸດົມ ສະເດັດໄປສູ່ນະຄອນພັນທຸມະດີ
ເພື່ອຊົງປະກາດພຣະທຳມະຈັກ

[໓] ພຣະອົງຊົງເປັນຜູ້ນຳ ຊົງປະກາດພຣະທຳມະຈັກ
ໃຫ້ຣາດຊະບຸດແລະບຸດປຸໂຣຫິດທັງ ໒ ໄດ້ບັນລຸທຳ
ການບັນລຸທຳເທື່ອທີ ໑ ບອກຈຳນວນບໍ່ໄດ້

[໔] ຕໍ່ມາພຣະອົງຜູ້ມີພຣະຍົດນັບບໍ່ໄດ້
ຊົງປະກາດອະຣິຍະສັດ ໔ ໃນນະຄອນນັ້ນ
ເທວະດາແລະມະນຸດປະມານ ໗໔,໐໐໐ ໄດ້ບັນລຸທຳເທື່ອທີ ໒

[໕] ກຸນລະບຸດປະມານ ໗໔,໐໐໐ ບວດຕາມພຣະສຳມາສຳພຸດທະເຈົ້າ
ພຣະອົງຜູ້ມີພຣະຈັກຂຸຊົງສະແດງທຳແກ່ເຂົາເຫຼົ່ານັ້ນຜູ້ມາເຖິງອາຣາມ

[໖] ເມື່ອພຣະສຳມາສຳພຸດທະເຈົ້າຊົງປະທານທຳມະທານຕາມອຸປະນິໄສ
ຈຶ່ງປະທັບຍືນຕັດໂດຍອາການທັງປວງ
ແມ່ນບັນພະຊິດເຫຼົ່ານັ້ນກໍໄດ້ບັນລຸທຳອັນປະເສີດ
ຈຶ່ງຊື່ວ່າໄດ້ບັນລຸທຳເທື່ອທີ ໓

[໗] ພຣະສຳມາສຳພຸດທະເຈົ້າພຣະນາມວ່າ ວິປັດສີ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ໄດ້ມີການປະຊຸມພຣະຂີນາສົບຜູ້ປາສະຈາກມົນທິນ
ມີຈິດສະງົບຣະງັບ ຄັ້ງທີ່ ໓ ເທື່ອ

[໘] ພິກຂຸປະມານ ໖,໘໐໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໑
ພິກຂຸປະມານ ໑໐໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໒

[໙] ພິກຂຸປະມານ ໘໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໓
ພຣະສຳມາສຳພຸດທະເຈົ້າຊົງຮຸ່ງເຮືອງຍິ່ງໃນທ່າມກາງໝູ່ພິກຂຸນັ້ນ

[໑໐] ສະໄໝນັ້ນ ເຮົາເປັນພະຍານາກຜູ້ມີລິດຫຼາຍ
ມີບຸນ ມີຄວາມຮຸ່ງເຮືອງ ມີນາມວ່າ ອະຕຸລະ ຕາມໂຄດ

[໑໑] ໃນຄັ້ງນັ້ນ ເຮົາມີນາກຫຼາຍໂກດແວດລ້ອມ
ເຂົ້າເຝົ້າພຣະພຸດທະເຈົ້າຜູ້ຈະເລີນທີ່ສຸດໃນໂລກ
ບັນເລງດົນຕີທິບຖວາຍ

[໑໒] ເຮົາເມື່ອເຂົ້າເຝົ້າພຣະວິປັດສີສຳມາສຳພຸດທະເຈົ້າ
ຊົງເປັນຜູ້ນຳສັດໂລກແລ້ວ
ທູນນິມົນພຣະອົງແລ້ວ ໄດ້ຖວາຍຕັ່ງຄຳ
ອັນປະດັບດ້ວຍແກ້ວມະນີແລະແກ້ວມຸກດາ
ປະດັບດ້ວຍອາພອນທຸກຊະນິດແກ່ພຣະອົງຜູ້ເປັນພຣະທຳມະຣາຊາ

[໑໓] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ
ປະທັບນັ່ງທ່າມກາງສົງແລ້ວ
ຊົງພະຍາກອນເຮົາວ່າ
ໃນກັບທີ ໙໑ ນັບຈາກກັບນີ້ໄປ ພະຍານາກນີ້ຈັກເປັນພຣະພຸດທະເຈົ້າ

[໑໔] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນແລ້ວ
ຊົງເລີ່ມຕັ້ງຄວາມພຽນພໍ່າເພັງທຸກກະຣະກິຣິຍາ

[໑໕] ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເທງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ

[໑໖] ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເທງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

[໑໗] ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ສຳໂພທິຍານຢູ່ທີ່ເທງົ້າຕົ້ນອັດສັດຖະພຶກ

[໑໘] ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

[໑໙] ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

[໒໐] ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະຫງົບຣະງັບ
ຕັ້ງໝັ້ນດີຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ

[໔໑] ຈິດຕະຄະຫະບໍດີອຸປາສົກ ແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸສະກາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນຈັກມີພຣະຊົນມາຍຸປະມານ ໑໐໐ ປີ

[໔໔] ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມື ນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໔໕] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໔໔] ເມືອງຫຼວງຊື່ວ່າພັນທຸມະດີ ກະສັດພຣະນາມວ່າພັນທຸມະເປັນພຣະຊະນົກ
ພຣະເທວີພຣະນາມວ່າ ພັນທຸມະດີເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າວິປັດສີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໕] ພຣະອົງຊົງຄອງຄະຣາວາດຢູ່ ໗,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືນັນທະຜາສາດ ສຸນັນທະຜາສາດ ແລະສິຣິມາຜາສາດ

[໔໖] ມີນາງສະໜົມກຳນັນ ໔໓,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ສຸທັດສະນາ
ພຣະຣາດຊະໂອຣົດພຣະນາມວ່າສະມະວັດຕະຂັນ

[໔໗] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໔໗] ພຣະມະຫາວີຣະພຣະນາມວ່າ ວິປັດສີ ຊົງເປັນຜູ້ນຳສັດໂລກ
ສູງສຸດກວ່ານໍຣະຊົນ ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ມະຣຶຄະທາຍະວັນ

[໔໙] ພຣະຂັນທະເຖຣະແລະພຣະຕິດສະນາມະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອໂສກະເປັນພຣະອຸປັດຖາກ
ຂອງພຣະວິປັດສີພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໐] ພຣະຈັນທາເຖຣີແລະພຣະຈັນທະມິດຕາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນແຄຝອຍ

[໕໑] ປຸນັບພະສຸມິດຕະອຸປາສົກແລະນາຄະອຸປາສົກເປັນອັກຄະຣະອຸປັດຖາກ
ສິຣິມາອຸປາສິກາແລະອຸດຕະຣາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໕໔] ພຣະສຳມາສຳພຸດທະເຈົ້າພຣະນາມວ່າວິປັດສີ ຊົງເປັນຜູ້ນຳສັດໂລກ
ຊົງມີພຣະວໍຣະກາຍສູງ ໗໐ ສອກ
ພຣະອົງຊົງມີພຣະຣັດສະໝີຣຸ່ງເຮືອງ ແຜ່ໄປ ໆ ໂຍດໂດຍຮອບ

[໕໓] ຂະນະນັ້ນ ພຣະພຸດທະເຈົ້າມີພຣະຊົນມາຍຸປະມານ ໗໐,໐໐໐ ປີ
ພຣະອົງຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໓໔] ຊົງເປື້ອງເທວະດາແລະມະນຸດເປັນຈຳນວນຫຼາຍ
ໃຫ້ພົ້ນຈາກເຄື່ອງພັນທະນາການ
ຕັດບອກທາງແລະບໍ່ແມ່ນທາງແກ່ປຸຖຸຊົນທີ່ເຫຼືອ

[໓໕] ພຣະອົງພ້ອມທັງສາວົກ ຊົງສະແດງແສງສະຫວ່າງ ສະແດງອະມະຕະບົດ
ຊົງຮຸ່ງເຮືອງດັ່ງກອງເພີງສະເດັດດັບຂັນທະປະຣິນິບພານແລ້ວ

[໓໖] ພຣະລິດແລະບຸນອັນປະເສີດ
ພຣະລັກສະນະມີລາຍກົງຈັກທີ່ສວຍງາມ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໓໗] ພຣະວິຣະເຈົ້າພຣະນາມວ່າວິປັດສີ ຊົງເປັນນະຣະຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ສຸມິດຕາຣາມ
ພຣະສະຖູບອັນປະເສີດຂອງພຣະອົງ
ທີ່ສຸມິດຕາຣາມນັ້ນ ສູງເຖິງ ໗ ໂຍດ ດັ່ງນີ້ແລ

**ວິປັດສີພຸດທະວົງທີ ໑໙ ຈົບ**

## ໒໐. ສິຂີພຸດທະວົງ

**ວ່າດ້ວຍພຣະປະຫວັດຂອງພຣະສິຂີພຸດທະເຈົ້າ**

[໑] ສະໄໝຕໍ່ຈາກພຣະວິປັດສີສຳມາສຳພຸດທະເຈົ້າ
ໄດ້ມີພຣະຊິນະສຳມາສຳພຸດທະເຈົ້າພຣະນາມວ່າ ສິຂີ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຜູ້ບໍ່ມີບຸກຄົນສະເໝີ ບໍ່ມີບຸກຄົນປຽບທຽບ

[໒] ຊົງກຳຈັດມານແລະເສນາມານແລ້ວ
ຊົງບັນລຸສຳໂພທິຍານອັນສູງສຸດ
ຊົງປະກາດພຣະທຳມະຈັກ ເພື່ອອະນຸເຄາະສັດທັງຫຼາຍ

[໓] ເມື່ອພຣະຊິນນະເຈົ້າຜູ້ປະເສີດພຣະນາມວ່າສິຂີ
ຊົງປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໑໐໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໑

[໔] ເມື່ອພຣະອົງຜູ້ປະເສີດທີ່ສຸດໃນໝູ່ຄະນະ
ເປັນຜູ້ສູງສຸດແຫ່ງນະຣະ ຊົງສະແດງທຳແມ່ນອື່ນອີກ
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໔

[໕] ເມື່ອພຣະອົງຊົງສະແດງຍະມົກປາຕິຫານໃນມະນຸດໂລກພ້ອມເທວະໂລກ
ເທວະດາແລະມະນຸດປະມານ ໘໐,໐໐໐ ໂກດ
ໄດ້ບັນລຸທຳເທື່ອທີ ໕

[໖] ພຣະສຳມາສຳພຸດທະເຈົ້າພຣະນາມວ່າສິຂີຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ກໍໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໕ ເທື່ອ

[໗] ພຣະຂີນາສົບຈຳນວນ ໑໐໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໑
ມີພຣະຂີນາສົບຈຳນວນ ໘໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໔

[໘] ມີພຣະຂີນາສົບຈຳນວນ ໗໐,໐໐໐ ອົງ
ມາປະຊຸມກັນ ເປັນເທື່ອທີ ໕
ພິກຂຸທີ່ມາປະຊຸມກັນແມ່ນນັ້ນ ບໍ່ແປດເປື້ອນດ້ວຍໂລກກະທຳ
ເໝືອນດອກບົວທີ່ຈະເລີນໃນນ້ຳກໍບໍ່ແປດເປື້ອນດ້ວຍນ້ຳ

[໙] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າ ສັດຕູນະທະມະ
ໄດ້ອັງຄາດພຣະສົງມີພຣະສຳມາສຳພຸດທະເຈົ້າເປັນປະທານ
ໃຫ້ອີ່ມໜຳດ້ວຍເຂົ້າແລະນ້ຳ

[໑໐] ໄດ້ຖວາຍຜ້າຢ່າງດີຫຼາກຫຼາຍ ຫຼາຍໂກດຜືນ
ໄດ້ຖວາຍພາຫະນະຄືຊ້າງເຊິ່ງປະດັບແລ້ວຢ່າງດີ
ແດ່ພຣະສຳມາສຳພຸດທະເຈົ້າ

[໑໑] ເຮົາໄດ້ເຮັດຣາດຊະພາຫະນະຄືຊ້າງໃຫ້ເປັນຂອງສົມຄວນແກ່ສະມະນະ
ແລ້ວນຳໄປຖວາຍ ເຮັດຈິດຂອງເຮົາໃຫ້ຕັ້ງໝັ້ນເປັນນິດ

[໑໒] ພຣະພຸດທະເຈົ້າພຣະນາມວ່າສິຂີພຣະອົງນັ້ນ
ຊົງເປັນຜູ້ນຳຊັ້ນເລີດຂອງໂລກ

ກໍຊົງພະຍາກອນເຮົາວ່າ
ໃນກັບທີ ໕໑ ນັບຈາກກັບນີ້ໄປ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ

[໑໕] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນແລ້ວ
ຊົງເລີ່ມຕັ້ງຄວາມພຽນ ພໍ່າເພັງທຸກກະຣະກິຣິຍາ
ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນແລ້ວ ສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມໜົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າ ສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະ ແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ

ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ
ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ
ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ
ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ
ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໕] ເມືອງຫຼວງຊື່ວ່າອະຣຸນະວະດີ ກະສັດພຣະນາມວ່າອະຣຸນເປັນພຣະຊະນົກ
ພຣະເທວີພຣະນາມວ່າປະພາວະດີເປັນພຣະຊົນນີ
ຂອງພຣະພຸດທະເຈົ້າພຣະນາມວ່າສິຂີ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໖] ພຣະອົງຊົງຄອງຄະຣາວາດຢູ່ ໗,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸວັດຖະກະຜາສາດ ຄິຣິຜາສາດ ແລະວາຫະນະຜາສາດ

[໑໗] ມີນາງສະໜົມກຳນັນ ໔໔,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສັບພະກາມາ
ພຣະຣາດຊະໂອຣົດພຣະນາມວ່າອະຕຸລະ

[໑໗] ພຣະອົງເປັນຜູ້ສູງສຸດແຫ່ງບຸຣຸດ ຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືຊ້າງອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໗ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໘] ພຣະມະຫາວີຣະ ຊົງເປັນຜູ້ນໍາຊັ້ນເລີດຂອງໂລກ
ຜູ້ສູງສຸດແຫ່ງນໍຣະຊົນພຣະນາມວ່າສິຂີ
ຜູ້ອັນພົມທູນອາຣາດທະນາແລ້ວ
ທູນຊົງປະກາດພຣະທໍາມະຈັກທີ່ມະຣຶຄະທາຍະວັນ

[໒໐] ພຣະອະພິພູເຖຣະແລະພຣະສໍາພະວະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າເຂມັງກອນເປັນພຣະອຸປັດຖາກ
ຂອງພຣະສິຂີສໍາມາສໍາພຸດທະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໑] ພຣະສະຂິລາເຖຣີແລະພຣະປະທຸມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນກຸ່ມບົກ

[໒໒] ສິຣິວັດທະອຸປາສົກແລະນັນທະອຸປາສົກເປັນອັກຄະຣະອຸປັດຖາກ
ຈິດຕາອຸປາສິກາແລະສຸຈິດຕາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໓] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໗໐ ສອກ
ຊົງງົດງາມດັ່ງຄໍາທີ່ລໍ້າຄ່າ
ມີພຣະລັກສະນະອັນປະເສີດ ໓໒ ປະການ

[໒໔] ແມ່ນພຣະອົງກໍມີພຣະຣັດສະໝີປະມານວາໜຶ່ງ
ຊ່ານອອກໄປຈາກພຣະວໍຣະກາຍຕໍ່ເນື່ອງກັນໄປ
ພຣະຣັດສະໝີນັ້ນແຜ່ໄປສູ່ທິດໜ້ອຍທິດໃຫຍ່ເຖິງ ໓ ໂຍດ

[໒໕] ພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ນັ້ນ
ມີພຣະຊົນມາຍຸປະມານ ໗໐,໐໐໐ ປີ
ພຣະອົງຊົງດໍາຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈໍານວນຫຼາຍ

[໒໖] ພຣະອົງພ້ອມທັງສາວົກ
ຊົງບັນດານຝົນຄືທໍາໃຫ້ຕົກລົງ

ຊ່ອຍເທວະດາແລະມະນຸດໃຫ້ແຊ່มຊື່ນ
ໃຫ້ບັນລຸເຖິງຄວາມກະເສມແລ້ວ
ສະເດັດດັບຂັນທະປະຣິນິບພານ

[໔໗] ພຣະລັກສະນະອັນປະເສີດ ໓໒ ປະການ
ເຊິ່ງສົມບູນດ້ວຍອະນຸພະຍັນຊະນະ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໔໘] ພຣະພຸດທະເຈົ້າພຣະນາມວ່າສິຂີ ຊົງເປັນມຸນີຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ອັດສາຣາມ
ພຣະສະຖູບອັນປະເສີດຂອງພຣະອົງ
ທີ່ອັດສາຣາມນັ້ນ ສູງເຖິງ ໓ ໂຍດ ດັ່ງນີ້ແລ

**ສິຂີພຸດທະວົງທີ ໒໐ ຈົບ**

## ໒໑. ເວດສະພູພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະເວດສະພູພຸດທະເຈົ້າ

[໑] ໃນມັນທະກັບນັ້ນແລ ໄດ້ມີພຣະຊິນນະເຈົ້າພຣະນາມວ່າ ເວດສະພູ
ຕາມພຣະໂຄດ ພຣະອົງຜູ້ບໍ່ມີບຸກຄົນສະເໝີ ບໍ່ມີບຸກຄົນປຽບ
ສະເດັດອຸບັດຂຶ້ນແລ້ວໃນໂລກ

[໒] ພຣະຊິນນະເຈົ້າພຣະອົງນັ້ນ
ຊົງຮູ້ວ່າ ໄຟຄືຣາຄະນີ້ເປັນຂອງຮ້ອນ
ເປັນແວ່ນແຄວ້ນຂອງຕັນຫາ ຊົງຕັດກິເລດເຄື່ອງຜູກ
ເໝືອນຊ້າງຕັດເຄື່ອງພັນທະນາການແລ້ວ
ຊົງບັນລຸສຳໂພທິຍານອັນສູງສຸດ

[໓] ພຣະເວດສະພູພຸດທະເຈົ້າຊົງເປັນຜູ້ນຳສັດໂລກ
ຊົງປະກາດພຣະທຳມະຈັກແລ້ວ
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໑

[໔] ເມື່ອພຣະນະຣາດພຣະຜູ້ຈະເລີນທີ່ສຸດໃນໂລກ

ສະເດັດຈາຣິກໄປໃນແວ່ນແຄວ້ນ
ເທວະດາແລະມະນຸດປະມານ ໗໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໔

[໕] ເມື່ອພຣະອົງຊົງກະທຳປາຕິຫານບັນເທົາທິດຖິອັນສຳຄັນ
ເທວະດາແລະມະນຸດໃນໂລກພ້ອມທັງເທວະໂລກໃນໝື່ນຈັກກະວານ
ມາປະຊຸມກັນ

[໖] ເທວະດາແລະມະນຸດປະມານ ໖໐ ໂກດ
ໄດ້ເຫັນຄວາມມະຫັດສະຈັນທີ່ບໍ່ເຄີຍມີ
ເປັນເຫດໃຫ້ຂົນພອງສະຫຍອງເກົ້າແລ້ວບັນລຸທຳ

[໗] ພຣະຊິນນະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະນາມວ່າ ເວດສະພູ
ໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ ໓ ເທື່ອ

[໘] ພິກຂຸປະມານ ໘໐,໐໐໐ ອົງ ໄດ້ມາປະຊຸມກັນ ເປັນເທື່ອທີ ໑
ພິກຂຸປະມານ ໗໐,໐໐໐ ອົງ ໄດ້ມາປະຊຸມກັນ ເປັນເທື່ອທີ ໔

[໙] ພິກຂຸປະມານ ໖໐,໐໐໐ ອົງ ມາປະຊຸມກັນ ເປັນເທື່ອທີ ໓
ລ້ວນຢ້ານໄພມີຊະຣາເປັນຕົ້ນ ເປັນໂອຣົດຂອງພຣະມະເຫສີເຈົ້າ

[໑໐] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າ ສຸທັດສະນະ
ທູນອາຣາດທະນາພຣະມະຫາວີຣະເຈົ້າ ແລ້ວຖວາຍທານອັນມີຄ່າຫຼາຍ
ໄດ້ບູຊາພຣະຊິນນະເຈົ້າພ້ອມທັງພິກຂຸສົງດ້ວຍເຂົ້ານ້ຳແລະຜ້າ

[໑໑] ເຮົາຟັງພຣະທຳມະຈັກອັນປະນີດ
ອັນປະເສີດທີ່ພຣະພຸດທະເຈົ້າພຣະອົງນັ້ນ
ຜູ້ບໍ່ມີບຸກຄົນສະເໝີ ຊົງປະກາດແລ້ວ
ຈຶ່ງພໍໃຈການບັນພະຊາ

[໑໔] ເຮົາພ່ຳເພັງມະຫາທານໃຫ້ເປັນໄປ
ບໍ່ຂີ້ຄ້ານທັງກາງເວັນແລະກາງຄືນ
ຮູ້ວ່າການບວດເຖິງພ້ອມດ້ວຍຄຸນ
ຈຶ່ງບວດໃນສຳນັກຂອງພຣະຊິນນະເຈົ້າ

[໑໖] ເຮົາເປັນຜູ້ສົມບູນດ້ວຍອາຈາຣະຄຸນ
ຕັ້ງໝັ້ນຢູ່ໃນຂໍ້ວັດແລະສິນ ສະແຫວງຫາສັບພັນຍຸຕະຍານ
ຍິນດີໃນສາດສະໜາຂອງພຣະຊິນນະເຈົ້າ

[໑໔] ເຮົາເຮັດສັດທາແລະປີຕິໃຫ້ເກີດຂຶ້ນ
ໄຫວ້ພຣະພຸດທະເຈົ້າຜູ້ພຣະສາດສະດາ
ປີຕິເກີດຂຶ້ນແກ່ເຮົາຍ້ອນເຫດແຫ່ງພຣະໂພທິຍານນັ້ນເອງ

[໑໕] ພຣະສຳມາສຳພຸດທະເຈົ້າຊົງຮູ້ວ່າ
ເຮົາມີຈິດບໍ່ທໍ້ຖອຍ ຈຶ່ງໄດ້ຕັດດັ່ງນີ້ວ່າ
ໃນກັບທີ ໖໑ ນັບຈາກກັບນີ້ໄປ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ

[໑໖] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິລະພັດທີ່ໜ້າອອນຊອນ
ຊົງເລີ່ມຕັ້ງຄວາມພຽນ ພ່ຳເພັງທຸກກະຣະກິຣິຍາ
ພຣະຕະຖາຄົດເຈົ້າຈັກປະທັບນັ່ງ ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຮູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ
ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ
ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ

ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດ ໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າ ຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໗] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໘] ເມືອງຫຼວງຊື່ວ່າອະໂນມະ ກະສັດພຣະນາມວ່າສຸບປະຕິຕະເປັນພຣະຊະນົກ
ພຣະເທວີພຣະນາມວ່າຍະສະວະດີເປັນພຣະມານດາ
ຂອງພຣະພຸດທະເຈົ້າພຣະນາມວ່າເວດສະພູ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໙]  ພຣະອົງຊົງຄອງຄະຣາວາດຢູ່ ໖,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືຣຸຈິຜາສາດ ສຸຣະຕິຜາສາດ ແລະວັດຖະກະຜາສາດ

[໔໐]  ມີນາງສະໜົມກຳນັບ ໓໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າ ສຸຈິດຕາ
ພຣະຣາດຊະໂອຣົດພຣະນາມວ່າ ສຸບປະພຸດທະ

[໔໑]  ພຣະອົງຜູ້ສູງສຸດແຫ່ງບຸຣຸດ
ຊົງເຫັນນິມິດ ໔ ປະການ
ຈຶ່ງຊົງວໍຄຳອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໖ ເດືອນເຕັມ (ຈຶ່ງໄດ້ບັນລຸສຳໂພທິຍານ)

[໔໒]  ພຣະມະຫາວີຣະຊົງເປັນຜູ້ນຳສັດໂລກ
ເປັນຜູ້ສູງສຸດແຫ່ງນະຣະ ພຣະນາມວ່າເວດສະພູ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ອະຣຸນາຣາມ

[໔໓]  ພຣະໂສນະເຖຣະ ແລະພຣະອຸດຕະຣະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອຸປະສັນຕະເປັນພຣະອຸປັດຖາກ
ຂອງພຣະຊິນນະເຈົ້າພຣະນາມວ່າ ເວດສະພູ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໔໔]  ພຣະຣາມາເຖຣີແລະພຣະສະມາລາເຖຣີເປັນອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອ້ອຍຊ້າງໃຫຍ່

[໔໕]  ໂສດຖິກະອຸປາສົກແລະຣຳມະອຸປາສົກເປັນອັກຄະຣະອຸປັດຖາກ
ໂຄຕະມີອຸປາສິກາແລະສິຣິມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໖]  ພຣະອົງຊົງມີພຣະວໍຣະກາຍສູງ ໖໐ ສອກ
ປຽບສະເໝີດ້ວຍເສົາຄຳ ພຣະຣັດສະໝີເປ່ງອອກຈາກພຣະວໍຣະກາຍ
ດັ່ງໄຟເທິງພູເຂົາໃນເວລາກາງຄືນ

[໔໗] ພຣະຊິນນະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະອົງນັ້ນ
ມີພຣະຊົນມາຍຸປະມານ ໖໐,໐໐໐ ປີ
ພຣະອົງຊົງດໍາຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈໍານວນຫຼາຍ

[໔໘] ພຣະອົງພ້ອມທັງສາວົກ ຊົງຈໍາແນກທໍາໄວ້ຢ່າງພິດສະດານ
ປະດິດສະຖານມະຫາຊົນໄວ້ໃນທໍານາວາແລ້ວ
ກໍສະເດັດດັບຂັນທະປະຣິນິບພານ

[໔໙] ຊົນທຸກໝູ່ເຫຼົ່າ ພຣະວິຫານແລະອິລິຍາບົດທີ່ໜ້າທັດສະນາ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໕໐] ພຣະຊົນະສາດສະດາຜູ້ປະເສີດພຣະນາມວ່າເວດສະພູ
ສະເດັດດັບຂັນທະປະຣິນິບພານທີ່ເຂມາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ເວດສະພູພຸດທະວົງທີ ໔໑ ຈົບ**

## ໔໔. ກະກຸສັນທະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະກະກຸສັນທະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າເວດສະພູ
ໄດ້ມີພຣະສໍາມາສໍາພຸດທະເຈົ້າພຣະນາມວ່າກະກຸສັນທະ ຕາມພຣະໂຄດ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ມີພຣະຄຸນຫາປະມານບໍ່ໄດ້ ຫາຜູ້ກະທົບກະທັ່ງໄດ້ຍາກ

[໒] ຊົງເພີກຖອນພົບທັງປວງ ເຖິງທີ່ສຸດແຫ່ງຈະຣິຍາ
ຊົງທໍາລາຍກິເລດ ດັ່ງຣາດຊະສີທໍາລາຍກົງແລ້ວ
ຊົງບັນລຸສໍາໂພທິຍານອັນປະເສີດ

[໓] ເມື່ອພຣະກະກຸສັນທະພຸດທະເຈົ້າ ຊົງເປັນຜູ້ນໍາສັດໂລກ
ຊົງປະກາດພຣະທໍາມະຈັກ
ເທວະດາແລະມະນຸດປະມານ ໔໐,໐໐໐ ໂກດ ໄດ້ບັນລຸທໍາເທື່ອທີ ໑

[໔] ພຣະອົງສະແດງລິດສະແດງຍະມົກປາຕິຫານໃນອາກາດກາງຫາວ
ຊຶ່ງເຮັດເທວະດາແລະມະນຸດປະມານ ໒໐,໐໐໐ ໂກດ ໃຫ້ບັນລຸທຳ

[໕] ໃນເວລາປະກາດອະຣິຍະສັດ ໔ ແກ່ຍັກນະຣະເທບ
ການບັນລຸທຳຂອງຍັກນັ້ນ ບໍ່ໄດ້ຄິດໄລ່ນັບ

[໖] ພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກະກຸສັນທະ
ໄດ້ມີການປະຊຸມແຫ່ງພຣະຂີນາສົບຜູ້ປາສະຈາກມົນທິນ
ມີຈິດສະຫງົບຣະງັບ ຜູ້ຄົງທີ່ເທື່ອດຽວ

[໗] ໃນຄັ້ງນັ້ນ ພຣະຂີນາສົບຜູ້ບັນລຸເຖິງພູມທີ່ຝຶກແລ້ວ
ຍ້ອນຄວາມສິ້ນໄປແຫ່ງໝູ່ຂ້າເສິກຄືອາສະວະ
ປະມານ ໔໐,໐໐໐ ອົງ ມາປະຊຸມກັນ

[໘] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າເຂມະ
ໄດ້ຖວາຍທານບໍ່ແມ່ນໜ້ອຍໃນພຣະຕະຖາຄົດເຈົ້າແລະໃນສາວົກຜູ້ຊີນະບຸດ

[໙] ຖວາຍບາດ ຈີວອນ ຢາຢອດຕາ ຊະເອມເຄືອ
ຖວາຍສິ່ງນັ້ນ ສິ່ງນີ້ ທີ່ປະເສີດ
ທຸກຢ່າງຕາມທີ່ພິກຂຸສົງປາຖະໜາ

[໑໐] ແມ່ນພຣະພຸດທະເຈົ້າພຣະນາມວ່າກະກຸສັນທະພຣະອົງນັ້ນ
ຜູ້ຊຶ່ງເປັນຜູ້ນຳວິເສດກໍຊົງພະຍາກອນເຮົາວ່າ
ໃນພັດທະກັບນີ້ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ

[໑໑] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນ
ຊົງເລີ່ມຕັ້ງຄວາມພຽນ ພຳເພັງທຸກກະຣະກິຣິຍາ
ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ
ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມທົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ
ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່

ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້

ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ
ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໕] ເມືອງຫຼວງຊື່ວ່າເຂມະວະດີ ໃນຄັ້ງນັ້ນ ເຮົາມີຊື່ວ່າເຂມະ
ເມື່ອສະແຫວງຫາພຣະສັບພັນຍຸຕະຍານ
ຈຶ່ງອອກບວດໃນສຳນັກຂອງພຣະອົງ

[໑໔] ອັກຄີທັດຕະພາມນັ້ນເປັນພຸດທະບິດາ
ນາງພາມມະນີຊື່ວ່າວິສາຂາເປັນມານດາຂອງພຣະພຸດທະເຈົ້າ
ພຣະນາມກະກຸສັນທະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໑໕] ຕະກູນໃຫຍ່ຂອງພຣະສຳມາສຳພຸດທະເຈົ້າ
ເປັນຕະກູນທີ່ປະເສີດທີ່ສຸດຂອງຄົນທັງຫຼາຍ
ມີຊາດສູງ ມີຍົດຫຼາຍ ຢູ່ໃນເຂມະນະຄອນນັ້ນ

[໑໖] ພຣະອົງຊົງຄອງຄະຣາວາດຢູ່ ໔,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືກາມະວັດຖະຜາສາດ ກາມະສຸດທິຜາສາດ ແລະຣະຕິວັດຖະຜາສາດ

[໑໗] ມີນາງສະໜົມກຳນັນ ໓໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າໂຣຈິນີ
ພຣະຣາດຊະໂອຣົດພຣະນາມວ່າອຸດຕະຣະ

[໑໘] ພຣະຊິນນະເຈົ້າຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະພາຫະນະຄືລົດອອກບວດແລ້ວ
ຊົງພ່ຳເພັງພຽນຢູ່ ໘ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໙] ພຣະມະຫາວີຣະພຣະນາມວ່າກະກຸສັນທະ
ຊົງເປັນຜູ້ນຳສັດໂລກ ເປັນຜູ້ສູງສຸດແຫ່ງນໍຣະຊົນ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກ ໃນມະຣິຄະທາຍະວັນ

[໒໐] ພຣະວິທຸຣະເຖຣະແລະພຣະສັນຊີວະນາມະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າພຸດທິຊະເປັນພຣະອຸປັດຖາກ
ຂອງພຣະພຸດທະເຈົ້າພຣະນາມວ່າກະກຸສັນທະ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໒໑] ພຣະສາມາເຖຣີແລະພຣະຈຳປານາມາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນສົ້ມກົບ

[໒໒] ອັດຈຸກຄະຕະອຸປາສົກ ແລະສຸມະນະອຸປາສົກເປັນອັກຄະຣະອຸປັດຖາກ
ນັນທາອຸປາສິກາ ແລະສຸນັນທາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໓] ພຣະມະຫາມຸນີຊົງມີພຣະວໍຣະກາຍສູງ ໔໐ ສອກ
ພຣະຣັດສະໝີຮຸ່ງເຮືອງດັ່ງຄຳ ແຜ່ອອກໄປ ໑໐ ໂຍດໂດຍຮອບ

[໒໔] ພຣະຊິນນະເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ພຣະອົງນັ້ນ
ມີພຣະຊົນມາຍຸປະມານ ໔໐,໐໐໐ ປີ
ພຣະອົງຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໒໕] ພຣະອົງພ້ອມທັງສາວົກ ຊົງແຜ່ຂະຫຍາຍຕະຫຼາດທຳໆ
ໃຫ້ແກ່ບຸຣຸດແລະສະຕີ ໃນໂລກພ້ອມທັງເທວະໂລກ
ຊົງບັນລືສີຫະນາດແລ້ວ
ສະເດັດດັບຂັນທະປະຣິນິບພານ

[໒໖] ພຣະອົງຊົງເຖິງພ້ອມດ້ວຍພຣະດຳຣັດອັນມີອົງ ໘
ມີສີນບໍ່ດ່າງຕົກຕະຫຼອດການ ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ໌
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໒໗] ພຣະຊິນນະເຈົ້າຜູ້ປະເສີດພຣະນາມວ່າ ກະກຸສັນທະ
ສະເດັດດັບຂັນທະປະຣິນິບພານທີ່ເຂມາຣາມ

ພຣະສະຖູບອັນປະເສີດຂອງພຣະອົງ
ທີ່ເຂມາຮາມນັ້ນ ສູງເຖິງ ໑ ຄາວຸດ ດັ່ງນີ້ແລ

**ກະກຸສັນທະພຸດທະວົງທີ ໒໒ ຈົບ**

## ໒໓. ໂກນາກະມະນະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະພຸດທະເຈົ້າພຣະນາມວ່າໂກນາຄະມະນະ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າກະກຸສັນທະ
ໄດ້ມີພຣະຊິນະສຳມາສຳພຸດທະເຈົ້າພຣະນາມວ່າໂກນາກະມະນະ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ ຊົງອົງອາດກວ່ານໍຣະຊົນ
ເປັນຜູ້ຈະເລີນທີ່ສຸດໃນໂລກ

[໒] ຊົງພໍາເພັງປາຣະມີທຳ ໑໐ ປະການໃຫ້ບໍລິບູນ
ຂ້າມທາງກັນດານໄດ້ແລ້ວ ລອຍມົນທິນທັງປວງແລ້ວ
ຊົງບັນລຸສຳໂພທິຍານອັນປະເສີດ

[໓] ເມື່ອພຣະພຸດທະເຈົ້າພຣະນາມວ່າໂກນາກະມະນະ ຜູ້ຊົງເປັນຜູ້ນຳວິເສດ
ຊົງປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໓໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໑

[໔] ເມື່ອພຣະອົງຊົງເຮັດປາຕິຫານໃນການຢໍ່າຢີວາທະຂອງຜູ້ອື່ນ
ເທວະດາແລະມະນຸດປະມານ ໒໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໒

[໕] ຈາກນັ້ນ ພຣະຊິນະສຳມາສຳພຸດທະເຈົ້າ ຊົງສະແດງລິດຕ່າງ ໆ
ແລ້ວສະເດັດໄປສູ່ເທວະໂລກ
ປະທັບທີ່ບັນທຸກຳພົນສິລາອາດໃນເທວະໂລກນັ້ນ

[໖] ພຣະມຸນີນັ້ນຊົງຈຳພັນສາ ຊົງສະແດງພຣະອະພິທຳ ໗ ປະກອນ
ທວຍເທບປະມານ ໑໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໓

[໗] ແມ່ນພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບພຣະອົງນັ້ນ
ກໍໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ເທື່ອດຽວ

[໗] ໃນຄັ້ງນັ້ນ ພິກຂຸ ໓໐,໐໐໐ ອົງ ຜູ້ຂ້າມໂອຄະ
ຈະຖືກມັດຈຸຣາດທຳລາຍ ມາປະຊຸມກັນ

[໙] ສະໄໝນັ້ນ ເຮົາເປັນກະສັດມີນາມວ່າ ປັບພະຕະ
ພຽບພ້ອມດ້ວຍມິດແລະອຳມາດ ມີພົນນິກາຍແລະພາຫະນະບໍ່ແມ່ນໜ້ອຍ

[໑໐] ໄປເຝົ້າພຣະສຳມາສຳພຸດທະເຈົ້າ ໄດ້ຟັງທຳອັນປະເສີດແລ້ວ
ນິມົນພຣະສົງພ້ອມທັງພຣະຊິນນະເຈົ້າ
ໄດ້ຖວາຍທານຕາມທີ່ຕົນປາຖະໜາ

[໑໑] ໄດ້ຖວາຍຜ້າປັດຕຸນນະ ຜ້າເມືອງຈີນ ຜ້າໄໝ ຜ້າກຳພົນ
ແລະສະຫຼອງພຣະບາດຄຳແດ່ພຣະສາດສະດາແລະສາວົກ

[໑໒] ແມ່ນພຣະພຸດທະເຈົ້າພຣະອົງນັ້ນ
ປະທັບນັ່ງທ່າມກາງສົງແລ້ວຊົງພະຍາກອນເຮົາວ່າ
ໃນພັດທະກັບນີ້ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ

[໑໓] ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນ
ຊົງເລີ່ມຕັ້ງຄວາມພຽນ ພ່ຳເພັງທຸກກະຣະກິຣິຍາ
ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ

ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

ຈາກນັ້ນ ພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້
ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ

ພຣະເຖຣະນາມວ່າອານົນ ຈັກເປັນພຣະອຸປັດຖາກ
ບຳຣຸງພຣະຊິນນະເຈົ້າພຣະອົງນີ້
ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ

ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ
ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີ ຈັກເປັນອັກຄະຣະອຸປັດຖາກ

ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາ
ຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

ເທວະດາແລະມະນຸດໄດ້ຟັງພຣະດຳຣັດນີ້
ຂອງພຣະພຸດທະເຈົ້າຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ແລ້ວ
ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໑໔] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພໍ່າເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໑໔] ເຮົາເປັນຜູ້ສູງສຸດແຫ່ງນໍຣະຊົນ ເມື່ອສະແຫວງຫາພຣະສັບພັນຍຸຕະຍານ
ຈຶ່ງໃຫ້ທານ ສະລະຣາດຊະສົມບັດອັນຍິ່ງໃຫຍ່
ບວດໃນສຳນັກຂອງພຣະຊິນນະເຈົ້າ

[໑໕] ເມືອງຫຼວງຊື່ວ່າໂສພະວະດີ ກະສັດພຣະນາມວ່າໂສພະ
ຕະກູນໃຫຍ່ຂອງພຣະສຳມາສຳພຸດທະເຈົ້າກໍຢູ່ໃນນະຄອນນັ້ນ

[໑໗] ຍັນຍະທັດຕະພາມນັ້ນເປັນພຸດທະບິດາ
ນາງພາມມະນີຊື່ວ່າອຸດຕະຣາເປັນພຣະມານດາ
ຂອງພຣະສາດສະດາພຣະນາມວ່າໂກນາຄະມະນະ

[໑໘] ພຣະອົງຊົງຄອງຄະຣາວາດຢູ່ ໓,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືດຸສິດຜາສາດ ສັນດຸສິດຜາສາດ ແລະສັນຕຸດຖະຜາສາດ

[໑໙] ມີນາງສະໜົມກຳນັນ ໑໖,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າຣຸຈິຄັດຕາ
ພຣະຣາດຊະໂອຣົດພຣະນາມວ່າ ສັດຖະວາຫະ

[໒໐] ພຣະອົງເປັນຜູ້ສູງສຸດແຫ່ງບຸຣຸດ ຊົງເຫັນນິມິດ ໔ ປະການ
ຈຶ່ງຊົງຣາດຊະຍານພາຫະນະຄືຊ້າງອອກບວດແລ້ວ
ຊົງພໍ່າເພັງພຽນຢູ່ ໖ ເດືອນເຕັມ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໒໑] ພຣະມະຫາວິຣະພຣະນາມວ່າໂກນາຄະມະນະ
ຊົງເປັນຜູ້ນຳສັດໂລກ ເປັນຜູ້ສູງສຸດແຫ່ງນໍຣະຊົນ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ມະຣຶຄະທາຍະວັນ

[໒໒] ພຣະພິຍະໂຍສະເຖຣະແລະພຣະອຸດຕະຣະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າໂສດຖິຊະເປັນພຣະອຸປັດຖາກ
ຂອງພຸດທະເຈົ້າພຣະນາມວ່າໂກນາຄະມະນະ ຜູ້ມີພຣະຍົດ

[໒໓] ພຣະສະມຸດທາເຖຣີແລະພຣະອຸດຕະຣາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າຕົ້ນໝາກເດື່ອ

[໔໔] ອຸກຄະອຸປາສິກແລະໂສມະເທບອຸປາສິກເປັນອັກຄະຣະອຸປັດຖາກ
ສິວະລາອຸປາສິກາແລະສາມາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໕] ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໑໐ ສອກ
ປະດັບດ້ວຍພຣະຣັດສະໝີຮຸ່ງເຮືອງດັ່ງຄຳທີ່ປາກເບົ້າ

[໔໖] ຂະນະນັ້ນ ພຣະພຸດທະອົງມີພຣະຊົນມາຍຸປະມານ ໑໐,໐໐໐ ປີ
ພຣະອົງຊົງດຳຣົງພຣະຊົນມາຍຸຢູ່ປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໗] ພຣະອົງພ້ອມທັງສາວົກ ຊົງຍົກທຳເຈດີ
ອັນປະດັບດ້ວຍຜ້າຄືທຳແລ້ວ
ຊົງຮ້ອຍພວງດອກໄມ້ຄືທຳສຳເລັດແລ້ວ
ສະເດັດດັບຂັນທະປະຣິນິບພານ

[໔໘] ສາວົກຂອງພຣະອົງງົດງາມດ້ວຍລິດອັນຍິ່ງໃຫຍ່
ພຣະອົງຊົງປະກາດສິຣິທຳ
ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ

[໔໙] ພຣະສຳມາສຳພຸດທະເຈົ້າພຣະນາມວ່າໂກນາຄະມະນະ
ສະເດັດດັບຂັນທະປະຣິນິບພານທີ່ປັດຕາຣາມ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອາຣະຍະປະເທດ ດັ່ງນີ້ແລ

**ໂກນາຄະມະນະພຸດທະວົງທີ ໔໑ ຈົບ**

## ໔໔. ກັດສະປະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະກັດສະປະພຸດທະເຈົ້າ

[໑] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າໂກນາຄະມະນະ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າກັດສະປະ ຕາມພຣະໂຄດ
ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ຊົງເປັນທຳມະຣາຊາ ມີພຣະຣັດສະໝີ

[໔] ຊັບອັນເປັນມໍລະດົກຂອງຕະກູນ ທີ່ສັດເປັນຈຳນວນຫຼາຍບູຊາກັນ
ພຣະອົງຊົງສະລະໃຫ້ທານແກ່ພວກຍາຈົກ
ເຮັດຈິດໃຫ້ເຕັມ ທຳລາຍກິເລດດັ່ງຄອກ
ເໝືອນງົວອຸສະພະທຳລາຍຄອກ ສັນນັ້ນແລ້ວ
ຊົງບັນລຸສຳໂພທິຍານອັນປະເສີດ

[໖] ເມື່ອພຣະກັດສະປະສຳມາສຳພຸດທະເຈົ້າຊົງເປັນພຣະຜູ້ນຳສັດໂລກ
ປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໔໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໑

[໘] ໃນເວລາທີ່ພຣະພຸດທະເຈົ້າສະເດັດຈາຣິກໄປໃນໂລກຕະຫຼອດ ໔ ເດືອນ
ເທວະດາແລະມະນຸດປະມານ ໑໐,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໔

[໕] ໃນເວລາເມື່ອພຣະອົງຊົງສະແດງຍະມົກປາຕິຫານສະແດງລິດຕ່າງ ໆ
ປະກາດພຣະຍານທາດ
ເທວະດາແລະມະນຸດປະມານ ໕,໐໐໐ ໂກດ ໄດ້ບັນລຸທຳເທື່ອທີ ໖

[໖] ພຣະຊິນນະເຈົ້າຊົງສະແດງທຳທີ່ສຸທຳເທບນະຄອນ ທີ່ຣື່ນຣົມນັ້ນ
ຊົງເຮັດໃຫ້ເທວະດາປະມານ ໖,໐໐໐ ໂກດ ໄດ້ບັນລຸທຳ

[໗] ໃນເວລາທີ່ຊົງສະແດງທຳແກ່ຍັກນະຣະເທບ
ອີກເທື່ອໜຶ່ງ
ເທວະດາເຫຼົ່ານັ້ນໄດ້ບັນລຸທຳຄິດໄລ່ນັບບໍ່ໄດ້

[໘] ແມ່ນພຣະພຸດທະເຈົ້າຜູ້ເປັນເທບຍິ່ງກວ່າເທບພຣະອົງນັ້ນ
ກໍໄດ້ມີການປະຊຸມແຫ່ງພຣະຂີນາສົບ
ຜູ້ປາສະຈາກມົນທິນ ມີຈິດສະງົບຣະງັບ ຜູ້ຄົງທີ່ເທື່ອດຽວ

[໙] ໃນຄັ້ງນັ້ນ ພິກຂຸປະມານ ໔໐,໐໐໐ ອົງ
ຜູ້ລ່ວງພົບ ຜູ້ຄົງທີ່ດ້ວຍຫິຣິແລະສີນ ມາປະຊຸມກັນ

[໑໐] ໃນຄັ້ງນັ້ນ ເຮົາເປັນມານົບມີຊື່ຜາກົດວ່າໂຊຕິປາລະ
ຄົງແກ່ຮຽນ ຊົງມົນ ຈົບໄຕຣເພດ
[໑໑] ເຖິງຄວາມສຳເລັດໃນຄຳພີທຳນາຍລັກສະນະແລະຄຳພີອິຕິຫາສະ
ເປັນຜູ້ສະຫຼາດໃນວິຊາເບິ່ງພື້ນທີ່ແລະອາກາດ ເປັນຜູ້ໃຊ້ວິຊາ ບໍ່ມີທຸກ

[໑໔]	ຄະຕິກາຣະອຸປາສິກ ຜູ້ເປັນອຸປັດຖາກ
ຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ກັດສະປະ
ເປັນຜູ້ມີຄວາມເຄົາລົບຢຳເກງ ເປັນພຣະອະນາຄາມີ

[໑໕]	ຄະຕິກາຣະອຸປາສິກໄດ້ພາເຮົາເຂົ້າເຝົ້າພຣະຊິນນະເຈົ້າ
ພຣະນາມວ່າ ກັດສະປະ
ເຮົາໄດ້ຟັງທຳຂອງພຣະອົງແລ້ວຈຶ່ງບວດໃນສຳນັກຂອງພຣະອົງ

[໑໔]	ເຮົາເປັນຜູ້ຜາຣົບຄວາມພຽນ ສະຫຼາດໃນຂໍ້ວັດນ້ອຍຂໍ້ວັດໃຫຍ່
ບໍ່ເສື່ອມໃນບ່ອນໃດ ໆ ປະຕິບັດຕາມຄຳສັ່ງສອນ
ຂອງພຣະຊິນນະເຈົ້າຢ່າງສົມບູນ

[໑໕]	ຮ່ຳຮຽນນະວັງຄະສັດຖຸສາດ ເທົ່າທີ່ພຣະພຸດທະເຈົ້າຕັດແລ້ວທຸກຢ່າງ
ຊ່ອຍປະກາດພຣະສາດສະໜາຂອງພຣະຊິນນະເຈົ້າໃຫ້ງົດງາມ

[໑໖]	ແມ່ນພຣະພຸດທະເຈົ້າພຣະອົງນັ້ນ ຊົງເຫັນຄວາມອັດສະຈັນຂອງເຮົາແລ້ວ
ຈຶ່ງຊົງພະຍາກອນເຮົາວ່າ
ໃນພັດທະກັບນີ້ ຜູ້ນີ້ຈັກເປັນພຣະພຸດທະເຈົ້າ

[໑໗]	ພຣະຕະຖາຄົດເຈົ້າໄດ້ສະເດັດອອກຈາກ
ນະຄອນກະບິນລະພັດທີ່ໜ້າອອນຊອນ
ຊົງເລີ່ມຕັ້ງຄວາມພຽນ ພ່ຳເພັງທຸກກະຣະກິຣິຍາ

[໑໘]	ພຣະຕະຖາຄົດເຈົ້າຈັກປະທັບນັ່ງຢູ່ທີ່ເຫງົ້າຕົ້ນອະຊະປາລະນິໂຄດ
ຊົງຮັບເຂົ້າປາຍາດໃນບ່ອນນັ້ນ ແລ້ວສະເດັດໄປສູ່ແມ່ນ້ຳເນຣັນຊະຣາ

[໑໙]	ພຣະຊິນນະເຈົ້າພຣະອົງນັ້ນຈັກສະເຫວີຍເຂົ້າປາຍາດ
ຢູ່ແຄມຝັ່ງແມ່ນ້ຳເນຣັນຊະຣາ ແລ້ວສະເດັດໄປຢູ່ທີ່ເຫງົ້າຕົ້ນໂພ
ຕາມຫົນທາງອັນປະເສີດທີ່ຕົກແຕ່ງໄວ້ແລ້ວ

[໔໐]	ຈາກນັ້ນພຣະອົງຜູ້ມີພຣະຍົດຍິ່ງໃຫຍ່
ຈັກກະທຳປະທັກຂິນໂພທິມັນອັນປະເສີດແລ້ວ
ຕັດສະຣູ້ຢູ່ທີ່ເຫງົ້າຕົ້ນອັດສັດຖະພຶກ

[໔໑]	ພຣະມານດາຜູ້ໃຫ້ກຳເນີດພຣະຊິນນະເຈົ້າພຣະອົງນີ້

ຈັກມີພຣະນາມວ່າມາຍາ
ພຣະບິດາຈັກມີພຣະນາມວ່າສຸດໂທທະນະ
ພຣະຊິນນະເຈົ້າພຣະອົງນີ້ຈັກມີພຣະນາມວ່າໂຄດົມ

[໔໔] ພຣະໂກລິຕະເຖຣະແລະພຣະອຸປະຕິດສະເຖຣະ
ຜູ້ບໍ່ມີອາສະວະ ສິ້ນຣາຄະ ມີຈິດສະງົບ
ຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າອານົນຈັກເປັນພຣະອຸປັດຖາກ
ບໍາຣຸງພຣະຊິນນະເຈົ້າພຣະອົງນີ້

[໔໓] ພຣະເຂມາເຖຣີແລະພຣະອຸບົນວັນນາເຖຣີຜູ້ບໍ່ມີອາສະວະ
ສິ້ນຣາຄະ ມີຈິດຕັ້ງໝັ້ນດີ ຈັກເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າ ຕົ້ນອັດສັດຖະພຶກ

[໔໔] ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີຈັກເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາແລະອຸດຕະຣາອຸປາສິກາຈັກເປັນອັກຄະຣະອຸປັດຖາຍິກາ
ພຣະໂຄດົມຜູ້ມີຍົດພຣະອົງນັ້ນ
ຈັກມີພຣະຊົນມາຍຸປະມານ ໑໐໐ ປີ

[໔໕] ເທວະດາແລະມະນຸດໄດ້ຟັງພຣະດໍາຣັດນີ້
ຂອງພຣະສໍາມາສໍາພຸດທະເຈົ້າ ຜູ້ບໍ່ມີໃຜສະເໝີເໝືອນ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ຕ່າງກໍມີຄວາມຊື່ນຊົມກ່າວວ່າ
ທ່ານຜູ້ນີ້ເປັນໜໍ່ພຸດທາງກູນ

[໔໖] ສັດທັງຫຼາຍໃນໝື່ນຈັກກະວານພ້ອມທັງເທວະດາ
ຕ່າງກໍເປ່ງສຽງໂຫ່ຮ້ອງຕົບມື ດີໃຈ
ປະນົມມືນະມັດສະການວ່າ

[໔໗] ຖ້າເຮົາທັງຫຼາຍຈັກພາດສາດສະໜາຂອງພຣະໂລກະນາດພຣະອົງນີ້
ເຮົາທັງຫຼາຍກໍຈັກພ້ອມໜ້າໜໍ່ພຸດທາງກູນນີ້ໃນອະນາຄົດ
[໔໘] ມະນຸດທັງຫຼາຍເມື່ອຈະຂ້າມແມ່ນ້ຳ ພາດທ່າສະເພາະໜ້າແລ້ວ
ກໍຍຶດເອົາທ່າຖັດໄປຈຶ່ງຂ້າມແມ່ນ້ຳໃຫຍ່ໄປ ສັນໃດ

[໔໙] ເຮົາທັງໝົດກໍສັນນັ້ນຄືກັນ
ຖ້າພາດພຣະຊິນນະເຈົ້າພຣະອົງນີ້
ກໍຈັກພ້ອມໜ້າທໍ່ພຸດທາງກູນນີ້ໃນອະນາຄົດຕະການ

[໕໐] ເຮົາໄດ້ຟັງພຣະດຳຣັດຂອງພຣະພຸດທະເຈົ້າແມ່ນພຣະອົງນັ້ນແລ້ວ
ກໍເຮັດຈິດໃຫ້ເຫຼື້ອມໃສຢ່າງຍິ່ງ
ໄດ້ອະທິຖານຂໍ້ວັດເພື່ອພ່ຳເພັງປາຣະມີ ໑໐ ປະການໃຫ້ຍິ່ງຂຶ້ນໄປ

[໕໑] ເຮົາຣະລຶກເຖິງພຸດທະພະຍາກອນແນວນີ້ແລ້ວ
ງົດເວັ້ນຄວາມປະພຶດເສຍຫາຍ
ຂ້າພະເຈົ້າກະທຳກຳທີ່ເຮັດໄດ້ຍາກ
ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

[໕໔] ເມືອງຫຼວງຊື່ວ່າພາຣານະສີ ກະສັດພຣະນາມວ່າກິກິ
ຕະກູນໃຫຍ່ຂອງພຣະສຳມາສຳພຸດທະເຈົ້າກໍຢູ່ໃນນະຄອນນັ້ນ

[໕໕] ພົມມະທັດຕະພາມນັ້ນເປັນພຸດທະບິດາ
ນາງພາມມະນີຊື່ວ່າທະນະວະດີເປັນມານດາ
ຂອງພຣະພຸດທະເຈົ້າພຣະນາມວ່າກັດສະປະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໕໔] ພຣະອົງຊົງຄອງຄະຣາວາດຢູ່ ໔,໐໐໐ ປີ
ມີຜາສາດທີ່ອຸດົມຢູ່ ໕ ຫຼັງ
ຄືຫັງສະຜາສາດ ຍະສະຜາສາດ ແລະສີຣິຈັນທະຜາສາດ

[໕໕] ມີນາງສະໜົມກຳນັນ ໔໗,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີພຣະນາມວ່າສຸນັນທາ
ພຣະຣາດຊະໂອຣົດພຣະນາມວ່າວິຊິຕະເສນະ

[໕໖] ພຣະອົງເປັນຜູ້ສູງສຸດແຫ່ງບຸຣຸດ
ຊົງເຫັນນິມິດ ໔ ປະການ
ຈຶ່ງອອກຈາກຜາສາດໄປບວດ
ຊົງພ່ຳເພັງພຽນຢູ່ ໗ ວັນ (ຈຶ່ງໄດ້ບັນລຸພຣະໂພທິຍານ)

[໓໗]	ພຣະມະຫາວີຣະພຣະນາມວ່າ ກັດສະປະ
ຊົງເປັນຜູ້ນຳສັດໂລກ ຜູ້ສູງສຸດແຫ່ງນໍຣະຊົນ
ຜູ້ອັນພົມທູນອາຣາດທະນາແລ້ວ
ຊົງປະກາດພຣະທຳມະຈັກທີ່ມະຣິຄະທາຍະວັນ

[໓໘]	ພຣະຕິດສະເຖຣະແລະພຣະພາຣະທະວາຊະເຖຣະເປັນພຣະອັກຄະຣະສາວົກ
ພຣະເຖຣະນາມວ່າສັບພະມິດຕະເປັນພຣະອຸປັດຖາກ
ຂອງພຣະພຣະພຸດທະເຈົ້າພຣະນາມວ່າກັດສະປະ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່

[໓໙]	ພຣະອະນຸລາເຖຣີແລະພຣະອຸຣຸເວລາເຖຣີເປັນພຣະອັກຄະຣະສາວິກາ
ຕົ້ນໄມ້ເປັນທີ່ຕັດສະຣູ້ຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ
ຊາວໂລກຮຽກວ່າຕົ້ນໄຮ

[໔໐]	ສຸມັງຄະລະອຸປາສົກແລະຄະຕິກາຣະອຸປາສົກເປັນອັກຄະຣະອຸປັດຖາກ
ວິຊິຕະເສນາອຸປາສິກາແລະພັດທາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໔໑]	ພຣະພຸດທະເຈົ້າພຣະອົງນັ້ນ ຊົງມີພຣະວໍຣະກາຍສູງ ໒໐ ສອກ
ມີພຣະຣັດສະໝີຮຸ່ງເຮືອງດັ່ງສາຍຟ້າໃນອາກາດ
ເໝືອນດວງຈັນຊົງກົດ

[໔໒]	ພຣະອົງຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່
ຊົງມີພຣະຊົນມາຍຸປະມານ ໒໐,໐໐໐ ປີ
ພຣະອົງຊົງດຳຣົງພຣະຊົນມາຍຸປະມານເທົ່ານັ້ນ
ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໔໓]	ຊົງສ້າງສະນ້ຳຄືທຳໄວ້ ຊົງປະທານເຄື່ອງລູບທາຄືສີນ
ຊົງຈັດຜ້າຄືທຳໄວ້ເປັນເຄື່ອງນຸ່ງຫົ່ມ ຊົງແຈກພວງມາໄລຄືທຳ

[໔໔]	ຊົງຕັ້ງແວ່ນແຍງທີ່ໄຮ້ມົນທິນຄືທຳໄວ້ໃຫ້ມະຫາຊົນ
ດ້ວຍຊົງຫວັງວ່າ ຊົນບາງພວກປາຖະໜານິບພານ
ຈົ່ງເຫັນເຄື່ອງປະດັບຂອງເຮົາ

[໔໕]	ຊົງປະທານເສື້ອຄືສີນ ເກາະໜັງຄືຊານ
ຊົງຈັດໜັງຄືທຳໄວ້ຄຸມກາຍ ແລະເຄື່ອງຜູກສອດຢ່າງດີເລີດ

[໔໖]　ຊົງປະທານໂລ່ຄືສະຕິປັດຖານ ໔ ຫອກຄືຍານອັນຄົມກ້າ
ດາບຢ່າງດີ໊ຄືທຳ ແລະສາດຕາວຸດເຄື່ອງກຳຈັດສັດຕູຄືສິບໄວ້ໃຫ້

[໔໗]　ປະທານພູສາຄືວິດຊາ ໓
ພວງມາໄລສຳລັບສວມຫົວຄືຜົນ ໔
ເຄື່ອງອາພອນຄືອະພິນຍາ ໖
ແລະດອກໄມ້ເຄື່ອງປະດັບຄືພຣະທຳ

[໔໘]　ຮົ່ມຂາວ໌ຄືພຣະສັດທຳອັນເປັນເຄື່ອງປ້ອງກັນບາບ
ຊົງເນຣະມິດດອກໄມ້ຄືຄວາມບໍ່ມີເວນໄພໄວ້ໃຫ້ສຳເລັດແລ້ວ
ພຣະອົງກໍສະເດັດດັບຂັນທະປະຣິນິບພານ

[໔໙]　ແທ້ຈິງ ພຣະສຳມາສຳພຸດທະເຈົ້າຊົງມີຄຸນຫາປະມານບໍ່ໄດ້
ກະທົບກະທັ່ງໄດ້ຍາກ
ພຣະທຳຣັດຕະນະນີ້ຊົງຕັດໄວ້ດີແລ້ວ ຄວນຮຽກໃຫ້ມາເບິ່ງ
[໕໐]　ພຣະສັງຄະຣັດຕະນະຜູ້ປະຕິບັດດີແລ້ວ ບໍ່ມີຜູ້ອື່ນຍິ່ງໄປກວ່າ
ພຣະຣັດຕະນະທັງ ໓ ນີ້ ທຸກຢ່າງລ້ວນອັນຕະຣະທານຫາຍໄປໝົດແລ້ວ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ
[໕໑]　ພຣະຊິນະສາດສະດາພຣະນາມວ່າມະຫາກັດສະປະ
ສະເດັດດັບຂັນທະປະຣິນິບພານທີ່ເສຕັບພະຍາຣາມ
ພຣະສະຖູບຂອງພຣະຊິນນະເຈົ້ານັ້ນ
ທີ່ເສຕັບພະຍາຣາມນັ້ນ ສູງເຖິງ ໑ ໂຍດ ດັ່ງນີ້ແລ

**ກັດສະປະພຸດທະວົງທີ ໒໔ ຈົບ**

## ໒໕. ໂຄຕະມະພຸດທະວົງ

### ວ່າດ້ວຍພຣະປະຫວັດຂອງພຣະໂຄດົມພຸດທະເຈົ້າ

[໑]　ໃນການບັດນີ້ ຕະຖາຄົດເປັນພຣະສຳມາສຳພຸດທະເຈົ້ານາມວ່າໂຄດົມ
ຈະເລີນໃນສາກະຍະສະກຸນ ພໍ່າເພັງຄວາມພຽນແລ້ວ
ໄດ້ບັນລຸສຳໂພທິຍານອັນປະເສີດ

[໒]　ຜູ້ອັນພົມທູນອາຣາດທະນາແລ້ວ ປະກາດພຣະທຳມະຈັກ
ເທວະດາແລະມະນຸດປະມານ ໑໘ ໂກດ ໄດ້ບັນລຸທຳເທື່ອທີ ໑

[໓] ຈາກນັ້ນ ເຮົາເມື່ອສະແດງທຳໃນສະມາຄົມເທວະດາແລະມະນຸດ
ການບັນລຸທຳເທື່ອທີ ໔ ບໍ່ຕ້ອງກ່າວເຖິງຈຳນວນ

[໔] ຕໍ່ມາ ໃນເວລາທີ່ເຮົາກ່າວສອນບຸດຂອງເຮົາ ບັດນີ້ ໃນບ່ອນນີ້ແລ
ການບັນລຸທຳເທື່ອທີ ໓ ບໍ່ຕ້ອງກ່າວເຖິງຈຳນວນ

[໕] ເຮົາມີການປະຊຸມສາວົກ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ເທື່ອດຽວ
ພິກຂຸປະມານ ໑,໒໕໐ ອົງ ໄດ້ມາປະຊຸມກັນ

[໖] ເຮົາຜູ້ປາສະຈາກມົນທິນ ຮຸ່ງເຮື່ອງຢູ່ໃນທ່າມກາງພິກຂຸສົງ
ໃຫ້ສິ່ງທີ່ປາຖະໜາທຸກຢ່າງເໝືອນແກ້ວສາລະພັດນຶກ
ໃຫ້ສິ່ງທີ່ຕ້ອງການທັງປວງ ສັນນັ້ນ

[໗] ເຮົາປະກາດອະຣິຍະສັດ ໔ ເພື່ອອະນຸເຄາະສັດທັງຫຼາຍ
ຜູ້ຫວັງຜົນ ຜູ້ສະແຫວງຫາທຳເປັນເຄື່ອງລະຄວາມພໍໃຈໃນພົບ

[໘] ເທວະດາແລະມະນຸດປະມານ ໒໐໐,໐໐໐ ອົງ ໄດ້ບັນລຸທຳ
ການບັນລຸທຳເທື່ອລະອົງສອງອົງ ນັບຈຳນວນບໍ່ໄດ້ເລີຍ

[໙] ຄຳສັ່ງສອນຂອງເຮົາຜູ້ເປັນສາກະຍະມຸນີ
ກວ້າງຂວາງຮູ້ກັນຫຼວງຫຼາຍ ຈະເລີນແຜ່ຫຼາຍ
ງອກງາມດີ ບໍລິສຸດຜ່ອງແຜ້ວ ໃນໂລກນີ້

[໑໐] ພິກຂຸຫຼາຍຮ້ອຍອົງເປັນຜູ້ບໍ່ມີອາສະວະສິ້ນຣາຄະ
ມີຈິດສະງົບ ຕັ້ງໝັ້ນ ແວດລ້ອມເຮົາທຸກເມື່ອ

[໑໑] ໃນການນີ້ ບັດນີ້ ພິກຂຸເຫຼົ່າໃດ ເປັນພຣະເສຂະ
ຍັງບໍ່ບັນລຸອະຣະຫັນຕະຜົນ ລະພົບມະນຸດໄປ
ພິກຂຸເຫຼົ່ານັ້ນ ຖືກວິນຍູຊົນຕຳໜິ

[໑໒] ນໍຣະຊົນທັງຫຼາຍຊົມເຊີຍທາງພຣະອະຣິຍະ ຍິນດີໃນທຳທຸກເມື່ອ
ມີຄວາມຮຸ່ງເຮື່ອງ ເຖິງຈະທ່ອງທ່ຽວຢູ່ໃນສົງສານກໍຈັກບັນລຸໄດ້

[໑໓] ເມືອງຫຼວງຂອງເຮົາຊື່ກະບິນລະພັດ
ພຣະເຈົ້າສຸດໂທທະນະເປັນພຣະບິດາຂອງເຮົາ
ພຣະມານດາບັງເກີດເກົ້າຂອງເຮົາຊາວໂລກຮຽກພຣະນາມວ່າ ມາຍາເທວີ

[໑໔] ເຮົາຄອງຄະຣາວາດຢູ່ ໒໙ ປີ ມີຜາສາດທີ່ອຸດົມຢູ່ ໓ ຫຼັງ
ຄືສຸຈັນທະຜາສາດ ໂກກະນຸທະຜາສາດ ແລະໂກນຈະຜາສາດ

[໑໕] ມີນາງສະໜົມກຳນັນ ໔໐,໐໐໐ ນາງ
ລ້ວນປະດັບປະດາສວຍງາມ
ພຣະມະເຫສີຂອງເຮົາຊື່ວ່າຍະໂສທະຣາ
ພຣະໂອຣົດຂອງເຮົາຊື່ວ່າຣາຫຸນ

[໑໖] ເຮົາເຫັນນິມິດ ໔ ປະການ
ຈຶ່ງຂີ່ຣາດຊະພາຫະນະຄືມ້າອອກບວດແລ້ວ
ໄດ້ພ່ຳເພັງພຽນປະພຶດທຸກກະຣະກິຣິຍາຢູ່ ໖ ປີ
(ຈຶ່ງໄດ້ບັນລຸພຣະໂພທິຍານ)

[໑໗] ເຮົາເປັນພຣະຊິນນະສີປະກາດພຣະທຳມະຈັກ
ທີ່ປ່າອິສິປະຕະນະມະຣືຄະທາຍະວັນ ເຂດນະຄອນພາຣານະສີ
ເຮົາເປັນພຣະສຳມາສຳພຸດທະເຈົ້າຊື່ວ່າໂຄດົມ ເປັນບ່ອນເພິ່ງຂອງສັບພະສັດ

[໑໘] ພິກຂຸ ໒ ອົງ ຊື່ອຸປະຕິດສະແລະໂກລິຕະເປັນອັກຄະຣະສາວົກຂອງເຮົາ
ພິກຂຸຊື່ວ່າອານົນເປັນອຸປັດຖາກຢູ່ໃນສຳນັກຂອງເຮົາ
ພິກຂຸນີຊື່ເຂມາ ແລະພິກຂຸນີຊື່ອຸບົນວັນນາເປັນອັກຄະຣະສາວິກາ

[໑໙] ຈິດຕະຄະຫະບໍດີອຸປາສົກແລະຫັດຖະກະຄະຫະບໍດີອຸປາສົກ
ຊາວເມືອງອາລະວີເປັນອັກຄະຣະອຸປັດຖາກ
ນັນທະມານດາອຸປາສິກາ ແລະອຸດຕະຣາອຸປາສິກາເປັນອັກຄະຣະອຸປັດຖາຍິກາ

[໒໐] ເຮົາບັນລຸສຳໂພທິຍານຢ່າງປະເສີດ
ທີ່ເຫງົ້າຕົ້ນອັດສັດຖະພຶກ ເຮົາມີຣັດສະໝີວາໜຶ່ງ
ຟຸ້ງຂຶ້ນໄປ ໑໖ ສອກທຸກເມື່ອ

[໒໑] ບັດນີ້ ອາຍຸຂອງເຮົາມີໜ້ອຍປະມານ ໑໐໐ ປີ
ເຖິງເຮົາຈະດຳຣົງຢູ່ພຽງນັ້ນ
ກໍຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໒໒] ເຮົາຕັ້ງຄົບເພິງຄືທຳໄວ້ສຳລັບໃຫ້ຄົນລຸ້ນຫຼັງໄດ້ຕັດສະຮູ້
ອີກບໍ່ດົນເລີຍແມ່ນເຮົາກັບສົງສາວົກ
ກໍຈັກປະຣິນິບພານ ໃນບ່ອນນີ້ ເໝືອນໄຟສິ້ນເຊື້ອ (ດັບໄປ)

[໘໓]　　ຄູ່ອັກຄະຣະສາວົກເປັນຕົ້ນເຫຼົ່ານັ້ນມີເດດບໍ່ມີອັນໃດທຽບຄຽງ
ມີຍົດແລະກຳລັງ ເຮົາມີຮ່າງກາຍຊຶ່ງໄວ້ເຊິ່ງຄຸນ
ມີຮ່າງກາຍວິຈິດດ້ວຍພຣະລັກສະນະອັນປະເສີດ ໓໒ ປະການ

[໘໔]　　ເຮົາມີຣັດສະໝີ ໖ ປະການ ສະຫວ່າງສະໄຫວໄປທົ່ວທັງ ໑໐ ທິດ
ເໝືອນດວງອາທິດ ທຸກຢ່າງລ້ວນຈັກອັນຕະຣະທານຫາຍໄປໝົດສິ້ນ
ສັງຂານທັງປວງເປັນສະພາບວ່າງເປົ່ານໍ ດັ່ງນີ້ແລ

**ໂຄຕະມະພຸດທະວົງທີ ໒໕ ຈົບ**

## ໒໖. ພຸດທະປະກິນນະກະກັນ

## ວ່າດ້ວຍເລື້ອງຕ່າງ ໆ ກ່ຽວກັບພຣະພຸດທະເຈົ້າ

[໑]　　ໃນກັບອັນປະມານບໍ່ໄດ້ນັບຈາກພັດທະກັບນີ້ໄປ
ໄດ້ມີພຣະພຸດທະເຈົ້າຊຶ່ງເປັນຜູ້ນຳວິເສດ ໔ ພຣະອົງ
ຄືພຣະຕັນຫັງກອນສຳມາສຳພຸດທະເຈົ້າ ໑
ພຣະເມທັງກອນສຳມາສຳພຸດທະເຈົ້າ ໑
ພຣະສະນະນັງກອນສຳມາສຳພຸດທະເຈົ້າ ໑
ແລະພຣະທີປັງກອນສຳມາສຳພຸດທະເຈົ້າ ໑
ພຣະຊິນນະເຈົ້າເຫຼົ່ານັ້ນ ສະເດັດອຸບັດຂຶ້ນໃນກັບດຽວກັນ

[໒]　　ສະໄໝຕໍ່ຈາກພຣະທີປັງກອນສຳມາສຳພຸດທະເຈົ້າ
ໄດ້ມີພຣະສຳມາສຳພຸດທະເຈົ້າພຣະນາມວ່າໂກນທັນຍະ
ຊຶ່ງເປັນຜູ້ນຳພຣະອົງດຽວສະເດັດອຸບັດຂຶ້ນໃນກັບໜຶ່ງ
ຊຶ່ງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໓]　　ອັນຕະຣະກັບຂອງພຣະຜູ້ມີພຣະພາກທີປັງກອນ
ກັບພຣະສາດສະດາພຣະນາມວ່າໂກນທັນຍະ ຈະຄິດໄລ່ນັບບໍ່ໄດ້

[໔]　　ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າໂກນທັນຍະ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າມັງຄະລະ ຊຶ່ງເປັນຜູ້ນຳ
ແມ່ນອັນຕະຣະກັບຂອງພຣະໂກນທັນຍະກັບພຣະມັງຄະລະພຸດທະເຈົ້ານັ້ນ
ຈະຄິດໄລ່ນັບບໍ່ໄດ້

[໕] ພຣະພຸດທະເຈົ້າ ໔ ພຣະອົງ ຄື ພຣະນາມວ່າມັງຄະລະ ໑
ພຣະນາມວ່າສຸມະນະ ໑ ພຣະນາມວ່າເຣວະຕະ ໑ ພຣະນາມວ່າໂສພິຕະ ໑
ຜູ້ເປັນມຸນີ ຜູ້ມີພຣະຈັກຂຸ ມີພຣະຣັດສະໝີສະຫວ່າງສະໄຫວ
ກໍສະເດັດອຸບັດຂຶ້ນໃນກັບດຽວກັນ

[໖] ສະໄໝຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າໂສພິຕະ
ໄດ້ມີພຣະມະຫາມຸນີພຣະນາມວ່າອະໂນມະທັດສີ
ແມ່ນອັນຕະຣະກັບຂອງພຣະພຸດທະເຈົ້າພຣະນາມວ່າໂສພິຕະ
ກັບພຣະພຸດທະເຈົ້າພຣະນາມວ່າອະໂນມະທັດສີ ຈະຄິດໄລ່ນັບບໍ່ໄດ້

[໗] ພຣະພຸດທະເຈົ້າທັງຫຼາຍ ຄື ພຣະນາມວ່າອະໂນມະທັດສີ ໑
ພຣະນາມວ່າປະທຸມະ ໑ ພຣະນາມວ່ານາຣະທະ ໑ ຜູ້ຊົງເປັນຜູ້ນຳ
ຜູ້ເປັນມຸນີ ທຳທີ່ສຸດຄວາມມືດໄດ້ແມ່ນເຫຼົ່ານັ້ນ
ກໍສະເດັດອຸບັດຂຶ້ນໃນກັບດຽວກັນ

[໘] ສະໄໝຕໍ່ຈາກພຣະນາຣະທະສຳມາສຳພຸດທະເຈົ້າ
ໄດ້ມີພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ ຊົງເປັນຜູ້ນຳ
ສະເດັດອຸບັດຂຶ້ນໃນກັບໜຶ່ງ ຊົງຊ່ອຍໝູ່ຊົນໃຫ້ຂ້າມພົ້ນໄດ້ເປັນຈຳນວນຫຼາຍ

[໙] ແມ່ນອັນຕະຣະກັບຂອງພຣະຜູ້ມີພຣະພາກເຈົ້າພຣະນາມວ່າ ນາຣະທະ
ກັບພຣະສາດສະດາພຣະນາມວ່າ ປະທຸມຸດຕະຣະ ຈະຄິດໄລ່ນັບບໍ່ໄດ້

[໑໐] ໃນກັບທີ ໑໐໐,໐໐໐ (ນັບຈາກກັບນີ້ໄປ)
ມີພຣະມະຫາມຸນີພຣະອົງດຽວ
ຄືພຣະປະທຸມຸດຕະຣະ ຜູ້ຊົງຮູ້ແຈ້ງໂລກ ຜູ້ສົມຄວນຮັບເຄື່ອງບູຊາ

[໑໑] ໃນກັບທີ ໓໐,໐໐໐ (ນັບຈາກກັບນີ້ໄປ)
ຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ປະທຸມຸດຕະຣະ
ໄດ້ມີພຣະພຸດທະເຈົ້າຊົງເປັນຜູ້ນຳ ໒ ພຣະອົງ
ຄືພຣະສຸເມທະແລະພຣະສຸຊາຕະ

[໑໒] ໃນກັບທີ ໑,໘໐໐ (ນັບຈາກກັບນີ້ໄປ)
ໄດ້ມີພຣະພຸດທະເຈົ້າຊົງເປັນຜູ້ນຳ ໓ ພຣະອົງ
ຄືພຣະປິຍະທັດສີ ໑ ພຣະອັດຖະທັດສີ ໑
ພຣະທຳມະທັດສີ ໑ ລ້ວນເປັນຜູ້ນຳ

[໑໓]　　ຕໍ່ຈາກພຣະພຸດທະເຈົ້າພຣະນາມວ່າ ສຸຊາຕະ
ໄດ້ມີພຣະສຳມາສຳພຸດທະເຈົ້າ ຜູ້ສູງສຸດແຫ່ງເທວະດາແລະມະນຸດ
ພຣະສຳມາສຳພຸດທະເຈົ້າເຫຼົ່ານັ້ນຜູ້ບໍ່ມີບຸກຄົນປຽບໄດ້ໃນໂລກ
ສະເດັດອຸບັດຂຶ້ນໃນກັບດຽວກັນ

[໑໔]　　ໃນກັບທີ ໗໔ ນັບຈາກກັບນີ້ໄປ
ໄດ້ມີພຣະມະຫາມຸນີພຣະອົງດຽວຄືພຣະສິດທັດຖະ
ຜູ້ຊົງຮູ້ແຈ້ງໂລກ ຊົງເປັນດັ່ງສັນລະຍາແພດຜູ້ປະເສີດ

[໑໕]　　ໃນກັບທີ ໗໔ ນັບຈາກກັບນີ້ໄປ
ມີພຣະສຳມາສຳພຸດທະເຈົ້າຜູ້ຊົງເປັນຜູ້ນຳ ໒ ພຣະອົງ
ຄືພຣະຕິດສະ ໑ ພຣະປຸດສະ ໑
ຜູ້ບໍ່ມີບຸກຄົນສະເໝີ ບໍ່ມີບຸກຄົນປຽບ

[໑໖]　　ໃນກັບທີ ໗໑ ນັບຈາກກັບນີ້ໄປ
ມີພຣະພຸດທະເຈົ້າຊົງນາມວ່າວິປັດສີ ຊົງເປັນຜູ້ນຳສັດໂລກ
ພຣະພຸດທະເຈົ້າພຣະອົງນັ້ນຊົງມີພຣະກະລຸນາ
ຊົງເປື້ອງສັດທັງຫຼາຍຈາກເຄື່ອງພັນທະນາການ

[໑໗]　　ໃນກັບທີ ໓໑ ນັບຈາກກັບນີ້ໄປ
ໄດ້ມີພຣະພຸດທະເຈົ້າຊົງເປັນຜູ້ນຳ ໒ ພຣະອົງ
ຄືພຣະສິຂີ ໑ ພຣະເວດສະພູ ໑
ຜູ້ບໍ່ມີບຸກຄົນສະເໝີ ບໍ່ມີບຸກຄົນປຽບ

[໑໘]　　ໃນພັດທະກັບນີ້ໄດ້ມີພຣະພຸດທະເຈົ້າຜູ້ຊົງເປັນຜູ້ນຳ ໓ ພຣະອົງ
ຄືພຣະກະກຸສັນທະ ໑ ພຣະໂກນາກະມະນະ ໑
ພຣະກັດສະປະ ຜູ້ຊົງເປັນຜູ້ນຳ ໑

[໑໙]　　ບັດນີ້ ເຮົາເປັນພຣະສຳມາສຳພຸດທະເຈົ້າ
ແລະພຣະສຳມາສຳພຸດທະເຈົ້າພຣະນາມວ່າເມດໄຕຣຍະຈັກມີ (ໃນອະນາຄົດ)
ແມ່ນພຣະພຸດທະເຈົ້າ ໕ ພຣະອົງ ກໍຊົງເປັນນັກປາດອະນຸເຄາະສັດໂລກ

[໒໐]　　ບັນດາພຣະພຸດທະເຈົ້າ ຜູ້ຊົງເປັນພຣະທຳຣາຊາເຫຼົ່ານັ້ນ
ພຣະສຳມາສຳພຸດທະເຈົ້າເຫຼົ່ານັ້ນພ້ອມດ້ວຍສາວົກ

ຈັກຕັດບອກມັກນັ້ນແກ່ຜູ້ອື່ນຫຼາຍໂກດ
ແລ້ວຈັກສະເດັດດັບຂັນທະປະຣິນິບພານ ດັ່ງນີ້ແລ

**ພຸດທະປະກິນນະກະກັນທີ ໒໖ ຈົບ**

## ໒໗. ທາຕຸພາຊະນີຍະກະຖາ

### ວ່າດ້ວຍການແບ່ງພຣະບໍຣົມສາຣີຣິກະທາດ

[໑] ພຣະມະຫາໂຄດົມຊິນນະເຈົ້າຜູ້ປະເສີດ
ສະເດັດດັບຂັນທະປະຣິນິບພານທີ່ນະຄອນກຸສິນາຣາ
ພຣະບໍຣົມສາຣີຣິກະທາດຂອງພຣະອົງ
ແຜ່ໄປຢ່າງກວ້າງຂວາງໃນນານາອານາຣະຍະປະເທດ

[໒] ພຣະບໍຣົມສາຣີຣິກະທາດທະນານໜຶ່ງເປັນຂອງພຣະເຈົ້າອະຊາດສັດຕູ
ອີກທະນານໜຶ່ງຢູ່ທີ່ນະຄອນເວສາລີ
ອີກທະນານໜຶ່ງຢູ່ທີ່ນະຄອນກະບິນລະພັດ
ແລະອີກທະນານໜຶ່ງຢູ່ທີ່ນະຄອນອັນລະກັບປະ

[໓] ທະນານໜຶ່ງຢູ່ທີ່ນະຄອນຣາມະຄາມ
ທະນານໜຶ່ງຢູ່ທີ່ນະຄອນເວດຖະທີປະກະ
ທະນານໜຶ່ງຢູ່ທີ່ນະຄອນປາວາຂອງມັນລະກະສັດ
ທະນານໜຶ່ງຢູ່ທີ່ນະຄອນກຸສິນາຣາ

[໔] ໂທນະພາມໃຫ້ຊ່າງສ້າງສະຖູບບັນຈຸທະນານຄຳ
ກະສັດນະຄອນໂມຣິຍະຜູ້ມີຫົວໃຈຍິນດີ
ຮັບສັ່ງໃຫ້ສ້າງພຣະສະຖູບບັນຈຸພຣະອັງຄານ

[໕] ພຣະສະຖູບບັນຈຸພຣະບໍຣົມສາຣີຣິກະທາດ ໘ ແຫ່ງ
ຕຸມພະເຈດີເປັນແຫ່ງທີ ໙
ແລະພຣະສະຖູບບັນຈຸພຣະອັງຄານເປັນແຫ່ງທີ ໑໐
ປະດິດສະຖານຢູ່ແລ້ວໃນການນັ້ນ

[໖] ພຣະບໍຣົມສາຣີຣິກະທາດ ໗ ຢ່າງ
ຄືພຣະອຸນະຫິດ ໑ ພຣະທາຖະທາດທັງ ໔

ແລະພຣະຮາກຂວັນ ໒ ຂ້າງ ບໍ່ແຕກ
ພຣະບໍຣົມສາຣີຣິກະທາດທີ່ເຫຼືອແຕກອອກຈາກກັນ

[໗] ພຣະບໍຣົມສາຣີຣິກະທາດຂະໜາດໃຫຍ່ເທົ່າກັບເມັດຖົ່ວຂຽວ
ຂະໜາດກາງເທົ່າເມັດເຂົ້າສານຫັກ
ຂະໜາດນ້ອຍເທົ່າກັບເມັດພັນຜັກກາດ ມີສີຕ່າງ ໆ ກັນ

[໘] ພຣະບໍຣົມສາຣີຣິກະທາດຂະໜາດໃຫຍ່ມີສີເໝືອນຄຳ
ຂະໜາດກາງມີສີເໝືອນແກ້ວມຸກດາ
ແລະຂະໜາດນ້ອຍມີສີເໝືອນດອກມະລິ
ລວມທັງໝົດມີປະມານ ໑໖ ທະນານ

[໙] ພຣະບໍຣົມສາຣີຣິກະທາດເຫຼົ່ານັ້ນທຸກຂະໜາດ
ຄືຂະໜາດໃຫຍ່ມີ ໕ ທະນານ ຂະໜາດກາງມີ ໕ ທະນານ
ຂະໜາດນ້ອຍມີ ໖ ທະນານເທົ່ານັ້ນ

[໑໐] ພຣະບໍຣົມສາຣີຣິກະທາດເຫຼົ່ານີ້ແມ່ນທັງໝົດ
ປະດິດສະຖານຢູ່ໃນທີ່ຕ່າງ ໆ ກັນ
ຄືພຣະອຸນະຫິດຢູ່ທີ່ເກາະສີຫົນ
ພຣະຮາກຂວັນເບື້ອງຊ້າຍຢູ່ທີ່ພົມມະໂລກ
ແລະພຣະຮາກຂວັນເບື້ອງຂວາຢູ່ທີ່ເກາະສີຫົນ

[໑໑] ພຣະທາຖະທາດອົງໜຶ່ງຢູ່ທີ່ພິບຕາວະຕິງສາ
ອົງໜຶ່ງຢູ່ທີ່ນາຄະປຸຣະ ອົງໜຶ່ງຢູ່ທີ່ເມືອງຄັນທາຣະວິໄສ
ອົງໜຶ່ງຢູ່ທີ່ເມືອງກາລິງຄະຣາດ

[໑໒] ພຣະທັນຕະທາດທັງ ໔໐ ພຣະເກສາແລະພຣະໂລມາທັງໝົດ
ເທວະດານຳມາໄວ້ ຈັກກະວານລະໜຶ່ງຢ່າງ

[໑໓] ບາດ ໄມ້ການເທົ້າ ແລະຈີວອນຂອງພຣະຜູ້ມີພຣະພາກເຈົ້າ
ຢູ່ທີ່ວະຊີຣານະຄອນ ສະບົງຢູ່ທີ່ກຸລະຄະຣະນະຄອນ
ຜ້າປັດຈັດຖະຣະນະຢູ່ທີ່ສີລະນະຄອນ (ເມືອງຫຼວງກະບິນລະພັດ)

[໑໔] ທຳມະກົກແລະປະຄົດແອວຢູ່ທີ່ນະຄອນປາຕະລີບຸດ
ຜ້າອາບນ້ຳຢູ່ທີ່ນະຄອນຈຳປາ ພຣະອຸນນາໂລມຢູ່ທີ່ແຄວັນໂກສົນ

[໑໕] ຜ້າກາສາວະພັດຢູ່ທີ່ພົມມະໂລກ ຜ້າໂພກຢູ່ທີ່ຕາວະຕິງສາ ຮອຍພຣະບາດອັນປະເສີດຢູ່ທີ່ຫີນເໝືອນມີຢູ່ທີ່ກັດສະຕະບຸຣີ ຜ້ານິສີທະນະຢູ່ທີ່ອະວັນຕີຊົນນະບົດ ຜ້າປູຢູ່ທີ່ສະຫວັນຊັ້ນຕາວະຕິງສາ

[໑໖] ໄມ້ສີໄຟຢູ່ທີ່ນະຄອນມິຖິລາ ຜ້າກອງນ້ຳຢູ່ທີ່ວິເທຫະຣັດ ມີດແລະກ່ອງເຂັມຢູ່ທີ່ນະຄອນອິນທະປັດ ໃນການນັ້ນ

[໑໗] ບໍຣິຂານທີ່ເຫຼືອຢູ່ທີ່ອະປະຣັນຕະຊົນນະບົດ ໝູ່ມະນຸດໃນການນັ້ນຈັກບູຊາບໍຣິຂານທີ່ພຣະມຸນີຊົງໃຊ້ສອຍ

[໑໘] ພຣະບໍຣົມສາຣີຣິກະທາດຂອງພຣະໂຄດົມ ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ກະຈາຍແຜ່ກວ້າງຂວາງໄປ ເພື່ອອະນຸເຄາະສັດທັງຫຼາຍ ເປັນຂອງເກົ່າໃນການນັ້ນ ດັ່ງນີ້ແລ

**ທາຕຸພາຊະນີຍະກະຖາທີ ໔໗ ຈົບ**

**ພຸດທະວົງ ຈົບ**

# ພຣະສຸດຕັນຕະປິດົກ

## ຂຸດທະກະນິກາຍ ຈະຣິຍາປິດົກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

## ໑. ອະກິດຕິວັກ

### ໝວດວ່າດ້ວຍອະກິດຕິດາບົດເປັນຕົ້ນ

### ໑. ການພ່ຳເພັງທານປາຣະມີ

### ໑. ອະກິດຕິຈະຣິຍາ

**ວ່າດ້ວຍຈະຣິຍາຂອງອະກິດຕິດາບົດ**

[໑] ໃນ ໔ ອະສົງໄຂແສນກັບ ຄວາມປະພຶດໃດໃນລະຫວ່າງນີ້
ຄວາມປະພຶດທັງໝົດນັ້ນ ເປັນເຄື່ອງບົ່ມພຣະໂພທິຍານ

[໒] ເຮົາຈັກເວັ້ນຄວາມປະພຶດໃນພົບນ້ອຍພົບໃຫຍ່ໃນກັບທີ່ລ່ວງແລ້ວສາ
ຈັກບອກຄວາມປະພຶດໃນກັບນີ້ ທ່ານຈົ່ງຟັງເຮົາ

[໓] ເຮົາເປັນດາບົດມີນາມວ່າອະກິດຕິ
ເຂົ້າໄປອາໄສຢູ່ໃນປ່າໃຫຍ່ທີ່ວ່າງເປົ່າ
ສະຫງັດງຽບປາສະຈາກສຽງອື້ອຶງໃນການໃດ

[໔] ໃນການນັ້ນ ດ້ວຍເດດແຫ່ງຄວາມປະພຶດຕະບະຂອງເຮົາ
ທ້າວສັກກະຜູ້ເປັນໃຫຍ່ໃນຕາວະຕິງສາເທວະໂລກ ຊົງຮ້ອນພຣະຫະໄທ
ແປງຮ່າງເປັນພາມ ເຂົ້າມາຫາເຮົາເພື່ອພິກສາ

[໕] ເຮົາໄດ້ເຫັນອິນທະພາມມາຢືນຢູ່ໃກ້ປະຕູປັນນະສາລາຂອງເຮົາ
ຈຶ່ງຈັບໃບໝາກເມົ່າທີ່ເຮົານຳມາຈາກປ່າ
ເຊິ່ງບໍ່ມີນ້ຳມັນທັງບໍ່ມີຣົດເຄັມ ມອບໃຫ້ຈົນໝົດພ້ອມທັງພາຊະນະ

[໖] ເຮົາເມື່ອໃຫ້ໃບໝາກເມົ່າແກ່ອິນທະພາມນັ້ນແລ້ວ
ຈຶ່ງຄວ່ຳພາຊະນະ ລະການສະແຫວງຫາໃໝ່ ເຂົ້າໄປສູ່ປັນນະສາລາ

[໗] ແມ່ນໃນວັນທີ ໒ ທີ ໓ ອິນທະພາມກໍເຂົ້າມາຍັງສຳນັກຂອງເຮົາ
ເຮົາບໍ່ຫວັ່ນໄຫວ ບໍ່ຢຶດໝັ້ນ ໄດ້ໃຫ້ໄປເໝືອນແນວນັ້ນ

[໘] ໃນສະຣີຣະຂອງເຮົາມີຜິວພັນບໍ່ປ່ຽນແປງ
ຍ້ອນການອົດອາຫານນັ້ນເປັນປັດໄຈເລີຍ
ເຮົາຍັບຍັ້ງຢູ່ຕະຫຼອດວັນນັ້ນ ໆ ດ້ວຍປິຕິ ສຸກ ແລະຄວາມຍິນດີ

[໙] ຖ້າເຮົາເພິ່ງໄດ້ທັກຂິໄນຍະບຸກຄົນທີ່ປະເສີດ
ແມ່ນເດືອນໜຶ່ງ ສອງເດືອນ ເຮົາກໍບໍ່ຫວັ່ນໄຫວ
ບໍ່ທໍ້ໃຈ ເພິ່ງໃຫ້ທານອັນອຸດົມ

[໑໐] ເມື່ອເຮົາໃຫ້ທານແກ່ອິນທະພາມນັ້ນ
ເຮົາຈະໄດ້ປາຖະໜາຍົດແລະລາບກໍບໍ່ແມ່ນ
ແຕ່ເຮົາປາຖະໜາພຣະສັບພັນຍຸຕະຍານເທົ່ານັ້ນ
ຈຶ່ງໄດ້ປະພຶດກຳເຫຼົ່ານັ້ນ ດັ່ງນີ້ແລ

**ອະກິດຕິຈະຣິຍາທີ ໑ ຈົບ**

## ໒. ສັງຂະພາມມະນະຈະຣິຍາ

### ວ່າດ້ວຍຈະຣິຍາຂອງສັງຂະພາມ

[໑໑] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພາມນາມວ່າ ສັງຂະ
ຕ້ອງການຈະຂ້າມມະຫາສະມຸດຈຶ່ງເຂົ້າໄປສູ່ປັດຕະນະຄາມ

[໑໒] ໃນບ່ອນນັ້ນ ເຮົາໄດ້ເຫັນພຣະປັດເຈກພຸດທະເຈົ້າຜູ້ຕັດສະຣູ້ເອງ
ຜູ້ບໍ່ຊິງພ່າຍແພ້ຍ່າງສວນທາງມາຕາມທາງກັນດານ
ເທິງພື້ນທີ່ແຂງກະດ້າງອັນຮ້ອນແຮງ

[໑໓] ເຮົາເມື່ອເຫັນທ່ານຍ່າງສວນທາງມາ ຈຶ່ງຄິດເຖິງປະໂຫຍດນີ້ວ່າ
ບຸນຍະເຂດນີ້ມາເຖິງສັດຜູ້ຕ້ອງການບຸນ

[໑໔] ປຽບເໝືອນບຸຣຸດຊາວນາເຫັນນາເປັນທີ່ໜ້າຍິນດີ

(ເປັນອູ່ເຂົ້າອູ່ນໍ້າ) ແຕ່ບໍ່ປູກພືດລົງໃນນານັ້ນ
ເຂົາຊື່ວ່າເປັນຜູ້ບໍ່ຕ້ອງການເຂົ້າເປືອກສັນໃດ

[໑໘] ເຮົາຜູ້ຕ້ອງການບຸນກໍສັນນັ້ນຄືກັນ
ເຫັນບຸນຍະເຂດທີ່ປະເສີດສຸດແລ້ວ
ຖ້າບໍ່ເຮັດສັກກາຣະໃນບຸນຍະເຂດນັ້ນ
ເຮົາກໍຊື່ວ່າເປັນຜູ້ບໍ່ຕ້ອງການບຸນ

[໑໙] ອຳມາດຕ້ອງການຈະໃຫ້ຊົນຊາວເມືອງຂອງພຣະຣາຊາຍິນດີ
ແຕ່ບໍ່ຍອມໃຫ້ຊັບແລະເຂົ້າເປືອກແກ່ຊົນຊາວເມືອງເຫຼົ່ານັ້ນ
ເຂົາກໍຍ່ອມເສື່ອມຈາກຄວາມຍິນດີສັນໃດ

[໑໗] ເຮົາຜູ້ຕ້ອງການບຸນກໍສັນນັ້ນຄືກັນ
ເຫັນທັກຂີໄນຍະບຸກຄົນທີ່ໄພບູນແລ້ວ
ຖ້າບໍ່ຖວາຍທານແກ່ທັກຂີໄນຍະບຸກຄົນນັ້ນ ກໍຈັກເສື່ອມຈາກບຸນ

[໑໘] ເຮົາເມື່ອຄິດແບບນີ້ແລ້ວຈຶ່ງປິດເກີບ
ຂາບຕີນຂອງທ່ານແລ້ວ ໄດ້ຖວາຍຄັນຮົ່ມແລະເກີບ

[໑໙] ຍ້ອນເຫດນັ້ນ ເຮົາຈຶ່ງເປັນຜູ້ລະອຽດອ່ອນຈະເລີນສຸກເປັນຮ້ອຍເທົ່າ
ອັນໜຶ່ງ ເຮົາເມື່ອພໍາເພັງທານໃຫ້ບໍລິບູນ
ໄດ້ຖວາຍແກ່ທ່ານ ດັ່ງນີ້ແລ

**ສັງຂະພານມະນະຈະຣິຍາທີ ໔ ຈົບ**

## ໙. ກຸຣຸທຳຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າທະນັນໄຊກຸຣຸຣາດ

[໔໐] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພຣະຣາຊານາມວ່າ ທະນັນໄຊ
ຢູ່ໃນນະຄອນອິນທະປັດທີ່ອຸດົມ ປະກອບດ້ວຍກຸສົນກຳມະບົດ ໑໐ ປະການ

[໔໑] ໃນຄັ້ງນັ້ນ ພວກພາມຊາວແຄວ້ນກາລິງຄະໄດ້ມາຫາເຮົາ
ຂໍພະຍາຄົດຊະສານ ເຊິ່ງປະກອບດ້ວຍທັນຍະລັກສະນະ
ສົມບູນດ້ວຍມຸງຄຸນກັບເຮົາວ່າ

[໔໔] ຊົນນະບົດຝົນບໍ່ຕົກເລີຍ ເກີດທຸບພິກຂະໄພ ອຶດຢາກຫຼາຍ
ຂໍພຣະອົງໂຜດພຣະຣາດຊະທານພະຍາຄົດຊະສານ
ຕົວປະເສີດມີກາຍສີຂຽວຊື່ວ່າ ອັນຊັນດ້ວຍເຫີ້ນ

[໔໓] ເຮົາຄິດວ່າການຫ້າມຜູ້ຂໍທີ່ມາເຖິງແລ້ວ
ເປັນການບໍ່ສົມຄວນແກ່ເຮົາເລີຍ
ກຸສົນສະມາທານຂອງເຮົາຢ່າໄດ້ເສຍຫາຍເລີຍ
ເຮົາຈັກໃຫ້ຄົດຊະສານຕົວປະເສີດ

[໔໔] ເຮົາໄດ້ຈັບງວງພະຍາຄົດຊະສານວາງລົງເທິງມືພາມແລ້ວ
ຈຶ່ງຫຼັ່ງນ້ຳໃນເຕົ້າຄຳລົງເທິງມືຂອງພວກພາມ ໄດ້ໃຫ້ພະຍາຄົດຊະສານໄປ

[໔໕] ເມື່ອເຮົາໄດ້ໃຫ້ພະຍາຄົດຊະສານນັ້ນໄປ ພວກອຳມາດໄດ້ກ່າວຄຳນີ້ວ່າ
ເຫດໃດນໍ ພຣະອົງຈຶ່ງພຣະຣາດຊະທານພະຍາຄົດຊະສານຕົວປະເສີດ
ຂອງພຣະອົງແກ່ພວກຍາຈົກ

[໔໖] ເມື່ອພຣະອົງພຣະຣາດຊະທານພະຍາຄົດຊະສານ
ເຊິ່ງປະກອບດ້ວຍທັນຍະລັກສະນະ
ສົມບູນດ້ວຍມຸງຄຸນ ຊະນະສົງຄາມ
ອັນສູງສຸດນັ້ນແລ້ວ ພຣະອົງເປັນພຣະຣາຊາຈັກເຮັດຫຍັງໄດ້

[໔໗] ເຮົາໄດ້ຕອບວ່າ ແມ່ນຣາດຊະສົມບັດທັງໝົດເຮົາກໍຄວນໃຫ້
ເຖິງສະຣີຣະຂອງຕົນເຮົາກໍຄວນໃຫ້
ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ດັ່ງນັ້ນ ເຮົາຈຶ່ງໄດ້ໃຫ້ພະຍາຄົດຊະສານໄປ ດັ່ງນີ້ແລ

**ກຸຣຸທຳຈະຣິຍາທີ ໓ ຈົບ**

## ໔. ມະຫາສຸທັດສະນະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າຈັກກະພັດຊົງພຣະນາມວ່າມະຫາສຸທັດສະນະ

[໔໘] ໃນການທີ່ເຮົາເປັນພຣະເຈົ້າຈັກກະພັດນາມວ່າ ມະຫາສຸທັດສະນະ
ມີພະລານຸພາບຫຼາຍ ໄດ້ເປັນພຣະເຈົ້າແຜ່ນດິນໃນນະຄອນກຸສາວະດີ

[໔໙] ໃນຄັ້ງນັ້ນ ເຮົາໄດ້ສັ່ງໃຫ້ປະກາດທຸກ ໆ ວັນ

ວັນລະ ໓ ເທື່ອວ່າ ໃຜຢາກໄດ້ອັນໃດ
ປາຖະໜາອັນໃດ ໃຜຈະໃຫ້ຊັບອັນໃດ

[໓໐] ໃຜຫິວ ໃຜກະຫາຍ ໃຜຕ້ອງການດອກໄມ້
ໃຜຕ້ອງການເຄື່ອງລູບທາ
ໃຜເປືອຍ ຈັກນຸ່ງຫົ່ມຜ້າສີຕ່າງ ໆ

[໓໑] ໃຜຕ້ອງການຄັນຮົ່ມສຳລັບໄປໃນຫົນທາງ ກໍຈົ່ງມາຮັບເອົາໄປ
ໃຜຕ້ອງການເກີບທີ່ອ່ອນນຸ້ມສວຍງາມ ກໍຈົ່ງມາຮັບເອົາໄປ
ເຮົາໃຫ້ປະກາດດັ່ງນີ້ ທັງເວລາເຊົ້າແລະເວລາຄ່ຳທຸກ ໆ ວັນ

[໓໒] ທານນັ້ນເຮົາບໍ່ຕົກແຕ່ງໄວ້ໃນທີ່ ໑໐ ແຫ່ງ
ຫຼືໃນທີ່ ໑໐໐ ແຫ່ງ ແຕ່ເຮົາຕົກແຕ່ງຊັບໄວ້
ສຳລັບຍາຈົກໃນທີ່ຫຼາຍຮ້ອຍແຫ່ງ

[໓໓] ວະນິພົກຈະມາໃນເວລາກາງເວັນຫຼືຈະມາໃນເວລາກາງຄືນກໍຕາມ
ກໍຈະໄດ້ໂພຄະຕາມຄວາມປາຖະໜາພໍເຕັມມືກັບໄປສະເໝີ

[໓໔] ເຮົາໄດ້ໃຫ້ມະຫາທານເຫັນປານນີ້ຈົນຕະຫຼອດຊີວິດ
ເຮົາຈະໃຫ້ຊັບທີ່ໜ້າຣັງກຽດກໍບໍ່ແມ່ນ
ແລະເຮົາຈະບໍ່ມີການສັ່ງສົມກໍບໍ່ແມ່ນ

[໓໕] ເໝືອນຄົນໄຂ້ກະສັບກະສ່າຍ ເພື່ອຈະພົ້ນຈາກໂຣກ
ຕ້ອງໃຫ້ໝໍພໍໃຈດ້ວຍຊັບຈຶ່ງຈະພົ້ນຈາກໂຣກໄດ້ສັນໃດ

[໓໖] ເຮົາກໍສັນນັ້ນຄືກັນ ຮູ້ຢູ່
ເພື່ອພ່ຳເພັງທານໃຫ້ບໍລິບູນໂດຍບໍ່ມີສ່ວນເຫຼືອ
ເພື່ອເຮັດໃຈທີ່ຂາດໃຫ້ເຕັມ ຈຶ່ງໃຫ້ທານແກ່ວະນິພົກ
ເຮົາບໍ່ໄດ້ອາໄລ ບໍ່ໄດ້ຫວັງອັນໃດ ໄດ້ໃຫ້ທານ
ເພື່ອບັນລຸສຳໂພທິຍານ ດັ່ງງນີ້ແລ

**ມະຫາສຸທັດສະນະຈະຣິຍາທີ ໔ ຈົບ**

## ໕. ມະຫາໂຄວິນທະຈະຣິຍາ

### ວ່າດ້ວຍຈະຣິຍາຂອງມະຫາໂຄວິນທະພາມ

[໓໗] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພາມມີນາມວ່າມະຫາໂຄວິນທະ
ເປັນປຸໂຣຫິດຂອງພຣະຣາຊາ ໗ ພຣະອົງ
ອັນມະນຸດແລະເທວະດາບູຊາແລ້ວ

[໓໘] ໃນຄັ້ງນັ້ນ ເຄື່ອງບັນນາການອັນໃດ
ໃນຣາດຊະອານາຈັກທັງ ໗ ໄດ້ມີແລ້ວແກ່ເຮົາ
ເຮົາໄດ້ໃຫ້ມະຫາທານດ້ວຍເຄື່ອງບັນນາການນັ້ນ
ເຊິ່ງເໝືອນທະເລທີ່ບໍ່ກະເພື່ອມ

[໓໙] ຊັບແລະເຂົ້າເປືອກຈະເປັນທີ່ໜ້າຣັງກຽດສຳລັບເຮົາກໍບໍ່ແມ່ນ
ແມ່ນຕົວເຮົາເອງຈະບໍ່ມີການສັ່ງສົມກໍບໍ່ແມ່ນ
ແຕ່ພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງໃຫ້ຊັບຢ່າງປະເສີດ ດັ່ງນີ້ແລ

**ມະຫາໂຄວິນທະຈະຣິຍາທີ ໕ ຈົບ**

## ໖. ເນມິຣາຊະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າເນມິຣາດ

[໔໐] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນມະຫາຣາຊານາມວ່າເນມິ ເປັນບັນດິດ
ຕ້ອງການກຸສົນຢູ່ໃນນະຄອນມິຖິລາທີ່ອຸດົມສົມບູນ

[໔໑] ເຮົາໄດ້ສ້າງໂຮງທານຈະຕຸຣະມຸກ ໔ ແຫ່ງ
ແລ້ວໄດ້ພ່ຳເພັງທານທີສາລານັ້ນແກ່ໝູ່ເນື້ອ ນົກ ແລະຄົນເປັນຕົ້ນ

[໔໒] ພ່ຳເພັງມະຫາທານ ຄື ເຄື່ອງນຸ່ງຫົ່ມ ບ່ອນນອນ
ເຂົ້າ ນ້ຳ ແລະໂພຊະນະ ບໍ່ຂາດສາຍ

[໔໓] ເໝືອນສະເວກຮັບໃຊ້ນາຍຍ້ອນເຫດແຫ່ງຊັບ
ຍ່ອມສະແຫວງຫານາຍທີ່ຕົນເພິ່ງໃຫ້ຍິນດີໄດ້
ດ້ວຍກາຍຍະກຳ ວະຈີກຳ ແລະມະໂນກຳ ສັນໃດ

[໔໔] ເຮົາກໍສັນນັ້ນຄືກັນ
ຈັກສະແຫວງຫາພຣະສັບພັນຍຸຕະຍານໃນພົບທັງປວງ
ຈຶ່ງໃຫ້ສັດທັງຫຼາຍໄດ້ອິ່ມໜໍາດ້ວຍທານແລ້ວ
ປາຖະໜາພຣະໂພທິຍານອັນອຸດົມ ດັ່ງນີ້ແລ

**ເນມິຣາຊະຈະຣິຍາທີ ໖ ຈົບ**

## ໗. ຈັນທະກຸມາຣະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະຈັນທະກຸມານ

[໔໕] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນໂອຣົດຂອງພຣະເຈົ້າເອກກະຣາດ
ມີນາມວ່າຈັນທະກຸມານ ຢູ່ໃນນະຄອນປຸບຜະວະດີ

[໔໖] ເຮົາພົ້ນຈາກການບູຊາຍັນແລ້ວ ອອກມາຈາກທີ່ບວງສວງນັ້ນ
ຍັງຄວາມສັງເວດໃຫ້ເກີດຂຶ້ນແລ້ວ ພໍ່າເພັງມະຫາທານ

[໔໗] ເຮົາຍັງບໍ່ໄດ້ໃຫ້ທານແກ່ທັກຂິໄນຍະບຸກຄົນແລ້ວ
ກໍຈະບໍ່ດື່ມນໍ້າ ບໍ່ຫຍໍ້າ
ແລະບໍ່ບໍຣິໂພກໂພຊະນະແມ່ນ ໕-໖ ຣາຕີ

[໔໘] ທໍາມະດາພໍ່ຄ້າ ລວບລວມສິນຄ້າໄວ້ແລ້ວ
ໃນບ່ອນໃດຈະມີກໍາໄລຫຼາຍ ກໍຈະນໍາສິນຄ້າໄປຂາຍໃນບ່ອນນັ້ນ ສັນໃດ

[໔໙] ສິ່ງຂອງທີ່ເຮົາໃຫ້ແກ່ຜູ້ອື່ນ ມີຄ່າຫຼາຍກວ່າສິ່ງຂອງທີ່ຕົນໃຊ້ເອງສັນນັ້ນ
ຍ້ອນແນວນັ້ນ ຄວນໃຫ້ທານແກ່ຜູ້ອື່ນ ອັນນັ້ນຈັກມີຜົນເປັນຮ້ອຍ

[໕໐] ເຮົາຮູ້ອໍານາດປະໂຫຍດນັ້ນແລ້ວ ຈຶ່ງໃຫ້ທານໃນພົບນ້ອຍພົບໃຫຍ່
ຈັກບໍ່ຖອຍກັບ (ບໍ່ທໍ້ຖອຍ) ຈາກການໃຫ້ທານ
ເພື່ອບັນລຸສໍາໂພທິຍານ ດັ່ງນີ້ແລ

**ຈັນທະກຸມານຈະຣິຍາທີ ໗ ຈົບ**

## ໗. ສີວິຣາຊະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າສີວີ

[໕໑] ໃນການທີ່ເຮົາເປັນກະສັດນາມວ່າສີວີ
ຢູ່ໃນນະຄອນຊື່ອະຣິດຖະ ເຮົານັ່ງຢູ່ໃນຜາສາດທີ່ປະເສີດ
ໄດ້ຄິດແນວນີ້ວ່າ

[໕໘] ທານໃນມະນຸດໂລກແນວໃດແນວໜຶ່ງ
ທີ່ເຮົາບໍ່ໄດ້ໃຫ້ແລ້ວບໍ່ມີ ແມ່ນຜູ້ໃດເພິ່ງຂໍຈັກຂຸກັບເຮົາ
ເຮົາກໍເພິ່ງໃຫ້ແກ່ຜູ້ນັ້ນໄດ້ບໍ່ຫວັ່ນໄຫວ

[໕໓] ທ້າວສັກກະຜູ້ເປັນໃຫຍ່ກວ່າທວຍເທບ
ຊົງຮູ້ຄວາມດຳຣິຂອງເຮົາແລ້ວ
ປະທັບນັ່ງໃນເທບບໍລິສັດໄດ້ຕັດພຣະດຳຣັດນີ້ວ່າ

[໕໔] ພຣະເຈົ້າສີວີພຣະອົງນັ້ນຜູ້ຊົງມີລິດຫຼາຍ
ປະທັບນັ່ງໃນຜາສາດທີ່ປະເສີດ
ຊົງດຳຣິເຖິງທານຕ່າງ ໆ ບໍ່ຊົງເຫັນສິ່ງທີ່ຍັງບໍ່ໄດ້ໃຫ້

[໕໕] ຂໍ້ນັ້ນຈະເປັນຈິງຫຼືບໍ່ນໍ ຖ້າຈັ່ງຊັ້ນແລ້ວ
ເຮົາຈັກທົດລອງພຣະອົງເບິ່ງ ທ່ານທັງຫຼາຍເພິ່ງຄອຍຖ້າເຮົາບຶດໜຶ່ງກ່ອນ
ພຽງເຮົາຮູ້ຄວາມຈິງໃຈຂອງພຣະເຈົ້າສີວີເທົ່ານັ້ນ

[໕໖] ທ້າວສັກກະຈຶ່ງແປງຮ່າງເປັນຄົນຕາບອດ ມີກາຍສັ່ນ
ຫົວຫງອກ ໜັງຫ່ຽວ ກະສັບກະສ່າຍຍ້ອນຄວາມຊະຣາ
ເຂົ້າເຝົ້າພຣະຣາຊາ

[໕໗] ໃນຄັ້ງນັ້ນ ອິນທະພາມນັ້ນປະຄອງແຂນທັງຊ້າຍແລະຂວາ
ປະນົມມືຂຶ້ນເໜືອຫົວໄດ້ກ່າວຄຳນີ້ວ່າ

[໕໗] ຂ້າແຕ່ພຣະມະຫາຣາດຜູ້ຊົງທຳ ຊົງປົກຄອງແຄວ້ນໃຫ້ຈະເລີນ
ຂ້າພຣະອົງຈະຂໍຮັບບໍລິຈາກທານຈາກພຣະອົງ
ກຽດຕິຄຸນຄືຄວາມຍິນດີໃນທານຂອງພຣະອົງ
ຟຸ້ງຂະຈອນໄປໃນເທວະດາແລະມະນຸດ

[໕໙] ຕາແມ່ນທັງ ໒ ຂ້າງຂອງຂ້າພຣະອົງຖືກໂຣກກຳຈັດບອດສາແລ້ວ
ຂໍພຣະອົງຈົ່ງພຣະຣາດຊະທານພຣະເນດຂ້າງໜຶ່ງແກ່ຂ້າພຣະອົງດ້ວຍເທີ້ນ
ແມ່ນພຣະອົງກໍຊົງຍັງອັດຕະພາບໃຫ້ເປັນໄປໄດ້ດ້ວຍພຣະເນດຂ້າງໜຶ່ງ

[໖໐] ເຮົາໄດ້ຟັງຄຳຂອງພາມນັ້ນແລ້ວ ທັງຍິນດີແລະດີໃຈ
ປະນົມມື ເກີດປີຕິປາໂມດ ໄດ້ກ່າວຄຳນີ້ວ່າ

[໖໑] ເຮົາຄິດແລ້ວ ລົງຈາກຜາສາດມາດ່ຽວນີ້ເອງ
ທ່ານຮູ້ຈິດຂອງເຮົາແລ້ວມາຂໍຕາ

[໖໒] ໂອນໍ ຄວາມປາຖະໜາຂອງເຮົາສຳເລັດແລ້ວ
ຄວາມດຳຣິຂອງເຮົາບໍລິບູນແລ້ວ ວັນນີ້
ເຮົາຈັກໃຫ້ທານອັນປະເສີດ ເຊິ່ງເຮົາຍັງບໍ່ເຄີຍໃຫ້ແກ່ພວກຍາຈົກ

[໖໓] ມານີ້ທ່ານໝໍສີວິກະ ຈົ່ງຕັ້ງໃຈຢ່າຊັກຊ້າ
ຢ່າເກງກົວ ຈົ່ງຄວັກຕາທັງ ໒ ຂ້າງຂອງເຮົາອອກໃຫ້ແກ່ວະນິພົກໄປເທີ້ນ

[໖໔] ໝໍສີວິກະນັ້ນຖືກເຮົາເຕືອນແລ້ວ ເຊື່ອຟັງຄຳຂອງເຮົາ
ໄດ້ຄວັກຕາທັງ ໒ ອອກໃຫ້ແກ່ຍາຈົກ
ເໝືອນຄົນຄວັກຈາວຕານ

[໖໕] ເມື່ອເຮົາຈະໃຫ້ທານກໍດີ ກຳລັງໃຫ້ທານກໍດີ ໃຫ້ທານແລ້ວກໍດີ
ຈິດຂອງເຮົາບໍ່ເປັນຢ່າງອື່ນ ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

[໖໖] ຈັກຂຸທັງ ໒ ເປັນທີ່ໜ້າກຽດຊັງສຳລັບເຮົາກໍບໍ່ແມ່ນ
ແມ່ນຕົວເຮົາເອງຈະເປັນທີ່ກຽດຊັງກໍບໍ່ແມ່ນ
ແຕ່ພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງໄດ້ໃຫ້ຈັກຂຸ ດັ່ງນີ້ແລ

**ສີວິຣາຊະຈະຣິຍາທີ ໘ ຈົບ**

## ໗. ເວດສັນຕະຣະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເວດສັນດອນ

[໖໗]　ນາງກະສັດພຣະນາມວ່າຜຸສະດີພຣະຊົນນີຂອງເຮົາ
ເປັນພຣະມະເຫສີທີ່ຮັກຂອງທ້າວສັກກະ ໃນອະດີດຊາດ

[໖໘]　ທ້າວສັກກະຈອມເທບຊົງຮູ້ວ່າພຣະນາງຈະສິ້ນອາຍຸ
ຈຶ່ງຕັດດັ່ງນີ້ວ່າ ນາງຜູ້ຈະເລີນ ເຮົາຈະໃຫ້ພອນ ໑໐ ປະການ
ທີ່ນາງປາຖະໜາແກ່ນາງ

[໖໙]　ພໍທ້າວສັກກະຕັດແນວນັ້ນແລ້ວ
ພຣະເທວີນັ້ນໄດ້ທູນທ້າວສັກກະດັ່ງນີ້ວ່າ
ຂ້ານ້ອຍມີຄວາມຜິດອັນໃດນໍ
ຂ້ານ້ອຍເປັນທີ່ໜ້າຣັງກຽດສຳລັບພຣະອົງບໍ
ພຣະອົງຈຶ່ງຈະໃຫ້ຂ້ານ້ອຍເຄື່ອນຈາກສະຖານອັນໜ້າຣື່ນຣົມ
ເໝືອນລົມພັດຕົ້ນໄມ້ໃຫ້ຫວັ່ນໄຫວ

[໗໐]　ທ້າວສັກກະນັ້ນເມື່ອພຣະນາງຜຸສະດີຕັດແນວນີ້
ກໍໄດ້ຕັດກັບພຣະນາງດັ່ງນີ້ອີກວ່າ
ນາງບໍ່ໄດ້ທຳຄວາມຊົ່ວເລີຍ
ແລະນາງຈະບໍ່ເປັນທີ່ຮັກຂອງເຮົາກໍບໍ່ແມ່ນ

[໗໑]　ແຕ່ອາຍຸຂອງນາງມີປະມານເທົ່ານີ້ເອງ
ເວລານີ້ຈັກເປັນເວລາທີ່ນາງຕ້ອງຈຸຕິ
ນາງຈົ່ງຮັບພອນ ໑໐ ປະການອັນປະເສີດສຸດທີ່ເຮົາຈະໃຫ້

[໗໘]　ພຣະນາງຜຸສະດີນັ້ນ ຮັບພອນທີ່ທ້າວສັກກະປະທານແລ້ວ
ຮ່າເຣີງຍິນດີປາໂມດເລືອກພອນ ໑໐ ປະການ ລວມເຮົາໄວ້ດ້ວຍ

[໗໙]　ພຣະນາງຜຸສະດີນັ້ນ ຈຸຕິຈາກສະຫວັນຊັ້ນຕາວະຕິງສານັ້ນແລ້ວ
ມາບັງເກີດໃນຕະກູນກະສັດ
ໄດ້ສະມາຄົມກັບພຣະເຈົ້ານະຄອນສັນໄຊ
(ເປັນມະເຫສີຂອງພຣະເຈົ້ານະຄອນສັນໄຊ)
ໃນນະຄອນເຊຕຸດອນ

[໗໔] ໃນການທີ່ເຮົາລົງສູ່ພຣະອຸທອນຂອງພຣະນາງຜຸສະດີພຣະມານດາທີ່ຮັກ
ດ້ວຍເດດຂອງເຮົາ ພຣະມານດາຂອງເຮົາເປັນຜູ້ຍິນດີໃນທານທຸກເມື່ອ

[໗໕] ຄົນບໍ່ມີຊັບ ຄົນເຈັບໄຂ້ (ກະສັບກະສ່າຍ)
ຄົນແກ່ ຍາຈົກ ຄົນເດີນທາງ
ສະມະນະ ພາມ ຄົນສິ້ນເນື້ອປະດາຕົວ
ຄົນບໍ່ມີອັນໃດເລີຍ ພຣະນາງກໍໃຫ້ທານ

[໗໖] ພຣະນາງຜຸສະດີຊົງພຣະອຸທອນຄົບ ໑໐ ເດືອນ
ເມື່ອພຣະເຈົ້າສັນໄຊຊົງກະທຳປະທັກຂິນພຣະນະຄອນ
ພຣະນາງກໍປະສູດເຮົາຢູ່ທ່າມກາງຖະໜົນຂອງຄົນຄ້າຂາຍ

[໗໗] ຊື່ຂອງເຮົາຈຶ່ງບໍ່ເນື່ອງຂ້າງຝ່າຍພຣະມານດາ
ແລະບໍ່ເນື່ອງຂ້າງຝ່າຍພຣະບິດາ
ຍ້ອນເຮົາເກີດຢູ່ຖະໜົນຂອງຄົນຄ້າຂາຍນີ້
ຍ້ອນແນວນັ້ນ ເຮົາຈຶ່ງມີນາມວ່າພຣະເວດສັນດອນ

[໗໘] ໃນການທີ່ເຮົາເປັນເດັກນ້ອຍອາຍຸໄດ້ ໘ ປີແຕ່ກຳເນີດ
ນັ່ງຢູ່ໃນຜາສາດຄິດຈະໃຫ້ທານວ່າ

[໗໙] ເຮົາເພິ່ງປະກາດໃຫ້ຫົວໃຈ ດວງຕາ ແມ່ນຊີ້ນແລະເລືອດ
ເພິ່ງໃຫ້ທັງກາຍ ຖ້າໃຜຈະເພິ່ງຂໍກັບເຮົາ

[໘໐] ເມື່ອເຮົາຄິດເຖິງຄວາມເປັນຈິງ ຈິດຂອງເຮົາກໍຕັ້ງໝັ້ນບໍ່ຫວັ່ນໄຫວ
ໃນຂະນະນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ
ແລະປ່າກໍໄຫວ

[໘໑] ໃນເດືອນເຕັມວັນອຸໂປສົດທີ ໑໕ ທຸກເຄິ່ງເດືອນ
ເຮົາຂຶ້ນຄໍມຸງຄຸນຫັດຖີປັດໄຈຍະນາກ ເຂົ້າໄປສູ່ສາລາເພື່ອຈະໃຫ້ທານ

[໘໔] ພາມທັງຫຼາຍຊາວແຄວ້ນກາລິງຄະໄດ້ເຂົ້າມາຫາເຮົາ
ໄດ້ຂໍພະຍາຄົດຊະສານເຊິ່ງປະກອບດ້ວຍທັນຍະລັກສະນະ
ສົມບູນດ້ວຍມຸງຄຸນກັບເຮົາວ່າ

[໘໖] ຊົນນະບົດຝົນບໍ່ຕົກເລີຍ ເກີດທຸບພິກຂະໄພອຶດຢາກຫຼາຍ

ຂໍພຣະອົງໂຜດພຣະຣາດຊະທານພະຍາຄົດຊະສານ
ຕົວປະເສີດເຜືອກຜ່ອງ ເຊິ່ງເປັນຊ້າງອຸດົມມຸງຄຸນດ້ວຍເທີ້ນ

[໗໔] ພາມທັງຫຼາຍຂໍສິ່ງໃດກັບເຮົາ
ເຮົາຈະໃຫ້ສິ່ງນັ້ນບໍ່ຫວັ່ນໄຫວເລີຍ
ເຮົາບໍ່ຊຸກເຊື່ອງຂອງທີ່ມີຢູ່
ໃຈຂອງເຮົາຍິນດີໃນທານ

[໗໕] ເມື່ອຍາຈົກມາເຖິງແລ້ວ ການຫ້າມ (ການບໍ່ໃຫ້) ບໍ່ສົມຄວນແກ່ເຮົາ
ກຸສົນສະມາທານຂອງເຮົາຢ່າໄດ້ເສຍຫາຍເລີຍ
ເຮົາຈັກໃຫ້ຄົດຊະສານຕົວປະເສີດ

[໗໖] ເຮົາໄດ້ຈັບງວງພະຍາຄົດຊະສານວາງໄວ້ເທິງມືພາມແລ້ວ
ຈຶ່ງຫຼັ່ງນໍ້າໃນເຕົ້າຄຳລົງເທິງມື ໄດ້ໃຫ້ພະຍາຄົດຊະສານແກ່ພວກພາມ

[໗໗] ອີກເລື້ອງໜຶ່ງ ເມື່ອເຮົາໃຫ້ພະຍາຄົດຊະສານທີ່ອຸດົມເຜືອກຜ່ອງ
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ
ແລະປ່າກໍໄຫວອີກ

[໗໘] ຍ້ອນເຮົາໃຫ້ພະຍາຄົດຊະສານນັ້ນ ຊາວນະຄອນສີພີຈຶ່ງພາກັນຄຽດ
ມາປະຊຸມກັນແລ້ວ ຂັບໄລ່ເຮົາຈາກແວ່ນແຄວ້ນຂອງຕົນວ່າ
ຈົ່ງໄປສູ່ພູເຂົາວົງກົດ

[໗໙] ເມື່ອຊາວນະຄອນເຫຼົ່ານັ້ນກັບໄປ ຈິດຂອງເຮົາຕັ້ງໝັ້ນບໍ່ຫວັ່ນໄຫວ
ເຮົາໄດ້ຂໍພອນຢ່າງໜຶ່ງເພື່ອຈະພ່ຳເພັງມະຫາທານ

[໘໐] ເຮົາຂໍແລ້ວ ຊາວນະຄອນສີພີທັງໝົດໄດ້ໃຫ້ພອນຢ່າງໜຶ່ງແກ່ເຮົາ
ເຮົາຈຶ່ງໃຫ້ນຳກອງຄູ່ໜຶ່ງໄປຕີປະກາດວ່າ ເຮົາຈະບໍລິຈາກມະຫາທານ

[໘໑] ສຽງດັງກຶກກ້ອງອຶກກະທຶກເປັນຕາຢ້ານຍ່ອມເປັນໄປໃນໂຮງທານນັ້ນວ່າ
ຊາວນະຄອນສີພີຂັບໄລ່ພຣະເວດສັນດອນນີ້ຍ້ອນທານ
ເຮົາຍັງຈະໃຫ້ທານອີກບໍ

[໘໒] ເຮົາໄດ້ໃຫ້ຊ້າງ ມ້າ ລົດ ທາສີ ທາສາ ແມ່ງົວ ຊັບ
ເມື່ອໃຫ້ມະຫາທານແລ້ວ ກໍອອກຈາກນະຄອນໄປໃນການນັ້ນ

[໙໓]	ເມື່ອເຮົາເມື່ອອອກຈາກນະຄອນແລ້ວ ຫຼຽວກັບມາເບິ່ງ
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ
ແລະປ່າກໍໄຫວແລ້ວ

[໙໔]	ເຮົາໃຫ້ມ້າສິນທົບ ໔ ຕົວແລະລົດແລ້ວຢືນຢູ່ທີ່ທາງໃຫຍ່ ໔ ແຍກ
ຜູ້ດຽວບໍ່ມີເພື່ອນ ໄດ້ກ່າວກັບພຣະນາງມັດທີເທວີດັ່ງນີ້ວ່າ

[໙໕]	ແມ່ມັດທີ ນາງຈົ່ງອຸ້ມກັນຫາກຸມາຣີເທີ້ນ
ຍ້ອນນາງເປັນນ້ອງຄົງເບົາກວ່າ ອ້າຍຈະອຸ້ມທ້າວຊາລີ
ຍ້ອນເຂົາເປັນອ້າຍຄົງຈະໜັກ

[໙໖]	ພຣະນາງມັດທີຊົງອຸ້ມນາງກັນຫາຜູ້ອ່ອນນຸ້ມດັ່ງດອກປະທຸມແລະບົວຂາວ
ເຮົາໄດ້ອຸ້ມທ້າວຊາລີໜໍ່ກະສັດ ປຽບດັ່ງແທ່ງຄໍາ

[໙໗]	ຂົນທັງ ໔ ເປັນກະສັດສຸຂຸມາລະຊາດ ຜູ້ອະພິຊາຕະບຸດ
ໄດ້ສະເດັດດໍາເນີນໄປຕາມທາງທີ່ສູງໂນນແລະຮາບພຽງໄປສູ່ພູເຂົາວົງກົດ

[໙໘]	ມະນຸດເຫຼົ່າໃດເຫຼົ່າໜຶ່ງ ຍ່າງມາຕາມຫົນທາງກໍດີ
ສວນທາງກໍດີ ເຮົາທັງຫຼາຍໄດ້ໄຕ່ຖາມເຂົາເຖິງຫົນທາງວ່າ
ເຂົາວົງກົດຢູ່ບ່ອນໃດ

[໙໙]	ເຂົາເຫັນເຮົາທັງຫຼາຍ ໃນບ່ອນນັ້ນແລ້ວ
ໄດ້ເປ່ງສຽງອັນປະກອບດ້ວຍກະລຸນາ
ກະສັດເຫຼົ່ານີ້ຄົງຈະຕ້ອງສະເຫວີຍທຸກຢ່າງແຮງ ຍ້ອນພູເຂົາວົງກົດໄກ

[໑໐໐]	ຖ້າພຣະກຸມານແລະກຸມາຣີເຫັນຕົ້ນໄມ້ທີ່ມີໝາກໃນປ່າໃຫຍ່
ພຣະກຸມານກຸມາຣີກໍຈະຊົງກັນແສງ ຍ້ອນເຫດແຫ່ງໝາກໄມ້ເຫຼົ່ານັ້ນ

[໑໐໑]	ຕົ້ນໄມ້ທັງຫຼາຍອັນສູງໃຫຍ່ໄພສານ
ເຫັນພຣະກຸມານແລະກຸມາຣີຊົງກັນແສງ
ກໍຈະນ້ອມປາຍລົງມາຫາພຣະກຸມານແລະກຸມາຣີເອງ

[໑໐໒]	ພຣະນາງມັດທີຜູ້ຊົງຄວາມງາມທົ່ວສັບພາງກາຍ
ຊົງເຫັນຄວາມອັດສະຈັນນີ້ເຊິ່ງບໍ່ເຄີຍມີມາ
ໜ້າຂົນພອງສະຫຍອງເກົ້າ ຈຶ່ງໃຫ້ສາທຸການໄປວ່າ

[໑໐໓] ຄວາມອັດສະຈັນບໍ່ເຄີຍມີໃນໂລກ ບັງເກີດຂຶ້ນຊູຊັນຕັ້ງຢູ່ນໍ
ໝູ່ໄມ້ນ້ອມປາຍລົງມາເອງດ້ວຍເດດແຫ່ງພຣະເວດສັນດອນ

[໑໐໔] ຍັກ (ເທວະດາ) ທັງຫຼາຍໄດ້ຫຍໍ້ໄລຍະທາງໃຫ້
ດ້ວຍຄວາມອີດູພຣະກຸມານແລະກຸມາຣີ
ໃນວັນທີສະເດັດອອກຈາກນະຄອນສີພີນັ້ນເອງ
ເຮົາທັງ ໔ ໄດ້ໄປເຖິງເຈຕະຣາດ

[໑໐໕] ໃນຄັ້ງນັ້ນ ພວກເຈົ້າ ໑໖,໐໐໐ ອົງຢູ່ໃນນະຄອນມາຕຸລະ
ທັງໝົດກໍປະນົມມືຮ້ອງໄຫ້ມາຫາ

[໑໐໖] ເຮົາເຈຣະຈາປາໄສກັບໂອຣົດຂອງພຣະເຈົ້າເຈຕະຣາດເຫຼົ່ານີ້ຢູ່ ໃນບ່ອນນັ້ນ
ໃຫ້ພຣະໂອຣົດຂອງພຣະເຈົ້າເຈຕະຣາດເຫຼົ່ານັ້ນຢູ່ທີ່ປະຕູນັ້ນແລ້ວ
ໄດ້ໄປສູ່ພູເຂົາວົງກົດ

[໑໐໗] ທ້າວສັກກະຈອມເທບ ຕັດຮຽກວິດສຸກໍາເທບພະບຸດຜູ້ມີລິດຫຼາຍ
ແລ້ວຮັບສັ່ງໃຫ້ເນຣະມິດປັນນະສາລາຢ່າງສວຍງາມ
ໜ້າຮື່ນຣົມສໍາລັບເປັນອາສົມຢ່າງດີ

[໑໐໘] ວິດສຸກໍາເທບພະບຸດຜູ້ມີລິດຫຼາຍ
ຮັບພຣະບັນຊາຂອງທ້າວສັກກະແລ້ວ
ເນຣະມິດປັນນະສາລາຢ່າງສວຍງາມ
ໜ້າຮື່ນຣົມສໍາລັບເປັນອາສົມຢ່າງດີ

[໑໐໙] ເຮົາທັງ ໔ ຄົນ ມາເຖິງປ່າໃຫຍ່ອັນສະຫງັດງຽບບໍ່ນອງນັນ
ຢູ່ໃນປັນນະສາລານັ້ນ ໃນລະຫວ່າງພູເຂົາ

[໑໑໐] ໃນຄັ້ງນັ້ນ ເຮົາ ພຣະນາງມັດທີເທວີ
ແລະໂອຣົດທັງ ໒ ຄື ຊາລີແລະກັນຫາຊິນາ
ບັນເທົາຄວາມເສົ້າໂສກຂອງກັນແລະກັນຢູ່ໃນອາສົມ

[໑໑໑] ເຮົາຮັກສາສອງກຸມານເປັນຜູ້ບໍ່ວ່າງຢູ່ໃນອາສົມ
ພຣະນາງມັດທີນໍາໝາກໄມ້ມາລ້ຽງຄົນທັງ ໓

[໑໑໘] ເມື່ອເຮົາຢູ່ໃນປ່າໃຫຍ່ ພາມ (ຊູຊົກ)
ຜູ້ມີຄວາມຕ້ອງການ ຍ່າງເຂົ້າມາຫາເຮົາ
ໄດ້ຂໍພຣະໂອຣົດທັງ ໒ ຂອງເຮົາ ຄື ຊາລີແລະກັນຫາຊິນາ

[໑໑໙] ຍ້ອນໄດ້ເຫັນຜູ້ຂໍເຂົ້າມາຫາ ຄວາມຣ່າເຣີງຈຶ່ງເກີດຂຶ້ນແກ່ເຮົາ
ໃນຄັ້ງນັ້ນ ເຮົາໄດ້ພາບຸດແລະທິດາທັງ ໒ ມາໃຫ້ພາມ

[໑໑໔] ເມື່ອເຮົາສະລະບຸດແລະທິດາທັງ ໒ ຂອງຕົນ
ໃຫ້ພາມຊູຊົກໄປ ໃນການໃດ
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ ແລະປ່າກໍໄຫວແລ້ວ

[໑໑໕] ທ້າວສັກກະຊິງແປງຮ່າງເປັນພາມສະເດັດລົງຈາກເທວະໂລກ
ມາຂໍພຣະນາງມັດທີເທວີຜູ້ມີສີນຈະຣິຍາວັດງົດງາມກັບເຮົາອີກ

[໑໑໖] ເຮົາມີຄວາມດຳຣິແຫ່ງໃຈຜ່ອງໃສ
ຈັບພຣະຫັດພຣະນາງມັດທີແລ້ວມອບໃຫ້ດ້ວຍການຫຼັ່ງນ້ຳ (ທັກຂິໂນທົກ)
ໄດ້ໃຫ້ພຣະນາງມັດທີແກ່ພາມນັ້ນ

[໑໑໗] ເມື່ອເຮົາໃຫ້ພຣະນາງມັດທີ
ໝູ່ເທວະດາໃນທ້ອງຟ້າພາກັນເບີກບານ (ພອຍຍິນດີ)
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ ແລະປ່າກໍໄຫວແລ້ວ

[໑໑໘] ເຮົາສະລະທ້າວຊາລີແລະນາງກັນຫາຊິນາຜູ້ເປັນບຸດທິດາ
ແລະພຣະນາງມັດທີເທວີ ຜູ້ມີຈະຣິຍາວັດງົດງາມ
ບໍ່ຄິດເຖິງເລີຍຍ້ອນເຫດແຫ່ງພຣະໂພທິຍານນັ້ນເອງ

[໑໑໙] ບຸດທັງ ໒ ຈະເປັນທີ່ໜ້າຮັງກຽດສຳລັບເຮົາກໍບໍ່ແມ່ນ
ພຣະເທວີມັດທີເປັນທີ່ໜ້າຮັງກຽດກໍບໍ່ແມ່ນ
ແຕ່ພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງໃຫ້ບຸດທິດາແລະພັນລະຍາຜູ້ເປັນທີ່ຮັກ

[໑໒໐] ອີກເລື້ອງໜຶ່ງ ເມື່ອພຣະມານດາແລະພຣະບິດາສະເດັດມາພ້ອມກັນ
ໃນປ່າໃຫຍ່ ຊິງກັນແສງສະອຶກສະອື້ນໜ້າເວທະນາ
ຕັດຖາມເຖິງສຸກທຸກກັນຢູ່

[໑໘໑] ເຮົາໄດ້ເຂົ້າເຝົ້າພຣະມານດາ ແລະພຣະບິດາທັງ ໒
ດ້ວຍທິຣິແລະໂອດຕັບປະດ້ວຍຄວາມເຄົາລົບ
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ ແລະປ່າກໍຫວັ່ນໄຫວ

[໑໘໒] ອີກເລື້ອງໜຶ່ງ ເຮົາກັບບັນດາພຣະຍາດຕິພີ່ນ້ອງຂອງເຮົາອອກຈາກປ່າໃຫຍ່
ເຂົ້າສູ່ນະຄອນເຊຕຸດອນ ເຊິ່ງເປັນນະຄອນທີ່ໜ້າອອນຊອນ

[໑໘໓] ແກ້ວ ໆ ປະການຕົກລົງມາ ມະຫາເມກເຮັດຝົນໃຫ້ຕົກ
ແມ່ນໃນການນັ້ນ ແຜ່ນດິນ ພູເຂົາສິເນຣຸຣາດ ແລະປ່າກໍໄຫວແລ້ວ

[໑໘໔] ແມ່ນແຜ່ນດິນນີ້ບໍ່ມີຈິດໃຈ ບໍ່ຮູ້ສຸກແລະທຸກ ກໍໄຫວເຖິງ ໆ ເທື່ອ
ຍ້ອນກຳລັງແຫ່ງທານຂອງເຮົາ ດັ່ງນີ້ແລ

**ເວດສັນຕະຣະຈະຣິຍາທີ ໙ ຈົບ**

## ໑໐. ສະສະປັນດິຕະຈະຣິຍາ

### ວ່າດ້ວຍຈະຣິຍາຂອງສະສະບັນດິດ

[໑໘໕] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນກະຕ່າຍ ທ່ຽວຢູ່ໃນປ່າ
ມີຫຍ້າ ໃບໄມ້ ຜັກ ແລະໝາກໄມ້ເປັນພັກສາ ເວັ້ນການບຽດບຽນຜູ້ອື່ນ

[໑໘໖] ໃນຄັ້ງນັ້ນ ລິງ ໝາຈອກ ລູກນາກ ແລະເຮົາ
ຢູ່ຮ່ວມສາມັກຄີກັນ ມາພົບກັນທັງເວລາເຊົ້າແລະເວລາຄ່ຳ

[໑໘໗] ເຮົາສັ່ງສອນສະຫາຍເຫຼົ່ານັ້ນ ໃນການທຳຄວາມດີແລະຄວາມຊົ່ວວ່າ
ທ່ານທັງຫຼາຍ ຈົ່ງເວັ້ນຄວາມຊົ່ວ ຈົ່ງຕັ້ງຢູ່ໃນຄວາມດີ

[໑໘໘] ເຮົາເຫັນດວງຈັນເຕັມດວງໃນວັນອຸໂປສົດ
ຈຶ່ງບອກແກ່ສະຫາຍເຫຼົ່ານັ້ນວ່າ ວັນນີ້ເປັນວັນອຸໂປສົດ

[໑໘໙] ທ່ານທັງຫຼາຍຈົ່ງກະກຽມທານເພື່ອໃຫ້ແກ່ທັກຂິໄນຍະບຸກຄົນ
ໃຫ້ທານແກ່ທັກຂິໄນຍະບຸກຄົນແລ້ວ ຈົ່ງຢູ່ຈຳອຸໂປສົດ

[໑໙໐] ສະຫາຍເຫຼົ່ານັ້ນຮັບຄຳຂອງເຮົາວ່າ ສາທຸ
ແລ້ວໄດ້ກະກຽມທານຕ່າງ ໆ ຕາມຄວາມສາມາດ
ຕາມກຳລັງ ແລ້ວສະແຫວງຫາທັກຂິໄນຍະບຸກຄົນ

[໑໓໑] ເຮົານອນຄິດເຖິງທານອັນສົມຄວນແກ່ທັກຂິໄນຍະບຸກຄົນວ່າ
ຖ້າເຮົາເພິ່ງໄດ້ທັກຂິໄນຍະບຸກຄົນ ເຮົາຈັກໃຫ້ອັນໃດເປັນທານ

[໑໓໒] ງາ ຖົ່ວຂຽວ ຂອງເຮົາກໍບໍ່ມີ ຖົ່ວຣາດຊະມາດ
ເຂົ້າສານ ນ້ຳມັນຂອງເຮົາກໍບໍ່ມີ
ເຮົາລ້ຽງຊີວິດດ້ວຍຫຍ້າ ເຮົາບໍ່ອາດທີ່ຈະໃຫ້ຫຍ້າ

[໑໓໓] ຖ້າທັກຂິໄນຍະບຸກຄົນຈັກທ່ານໜຶ່ງມາເພື່ອຂໍໃນສຳນັກຂອງເຮົາ
ເຮົາເພິ່ງໃຫ້ຮ່າງກາຍຂອງຕົນ ທັກຂິໄນຍະບຸກຄົນຈັກບໍ່ກັບໄປມືເປົ່າ

[໑໓໔] ທ້າວສັກກະຊົງຮູ້ຄວາມດຳຣິຂອງເຮົາແລ້ວ
ຈຶ່ງແປງຮ່າງເປັນພາມ ເຂົ້າມາຍັງທີ່ຢູ່ຂອງເຮົາ
ເພື່ອຊົງທົດລອງທານຂອງເຮົາ

[໑໓໕] ເຮົາເຫັນພາມນັ້ນແລ້ວກໍຍິນດີ ໄດ້ກ່າວຄຳນີ້ວ່າ
ທ່ານມາເຖິງບ່ອນຢູ່ຂອງເຮົາແລ້ວ ຍ້ອນເຫດແຫ່ງອາຫານເປັນການດີແລ

[໑໓໖] ວັນນີ້ເຮົາຈັກໃຫ້ທານອັນປະເສີດທີ່ໃຜ ໆ
ບໍ່ເຄີຍໃຫ້ແກ່ທ່ານ ທ່ານຜູ້ປະກອບດ້ວຍສີນຄຸນ
ການບຽດບຽນຜູ້ອື່ນບໍ່ຄວນແກ່ທ່ານ

[໑໓໗] ທ່ານຈົ່ງໄປນຳໄມ້ຕ່າງ ໆ ມາດັງໄຟໃຫ້ລຸກຮຸ່ງຂຶ້ນ
ເຮົາຈັກປີ້ງຕົວຂອງເຮົາ ທ່ານຈັກໄດ້ກິນເນື້ອທີ່ສຸກ

[໑໓໘] ພາມຮັບຄຳວ່າ ສາທຸ ແລ້ວມີໃຈຮ່າເຣີງ
ໄດ້ນຳໄມ້ຕ່າງ ໆ ມາ ເຮັດເປັນກອງຟອນໃຫຍ່
ເຮັດເປັນທ້ອງເຊິ່ງເຕັມດ້ວຍຖ່ານໄຟ

[໑໓໙] ດັງໄຟລຸກຮຸ່ງຂຶ້ນ ໃນບ່ອນນັ້ນທັນທີ
ເໝືອນໄຟນັ້ນເປັນກອງໃຫຍ່
ຍ້ອນແນວນັ້ນ ເຮົາສະລັດຕົວອັນມີທຸລີແລ້ວ ເຂົ້າໄປນັ່ງຢູ່ຂ້າງໜຶ່ງ

[໑໔໐] ໃນເມື່ອກອງໄມ້ທີ່ໄຟຕິດທົ່ວແລ້ວເປັນຄວັນລຸກຢູ່
ໃນຂະນະນັ້ນ ເຮົາໂດດລົງໄປໃນທ່າມກາງລະຫວ່າງແປວໄຟ

[໑໔໑] ນ້ຳເຢັນອັນຜູ້ໃດຜູ້ໜຶ່ງດຳລົງແລ້ວ

ຍ່ອມຣະງັບຄວາມກະວົນກະວາຍແລະຄວາມຮ້ອນໄດ້
ຍ່ອມໃຫ້ຄວາມຍິນດີ ແລະປີຕິໄດ້ ສັນໃດ

[໑໔໘] ໃນຂະນະທີ່ເຮົາເຂົ້າໄປສູ່ໄຟທີ່ລຸກຮຸ່ງຢູ່ ກໍສັນນັ້ນຄືກັນ
ເໝືອນດຳລົງໄປໃນນ້ຳເຢັນ
ຄວາມກະວົນກະວາຍທັງປວງຣະງັບໄປ

[໑໔໙] ເຮົາໄດ້ໃຫ້ຮ່າງກາຍທັງໝົດໂດຍບໍ່ເຫຼືອ
ຄືຜິວ ໜັງ ຊີ້ນ ເອັນ ກະດູກ
ແລະຕ່ອນຊີ້ນຫົວໃຈແກ່ພາມ ດັ່ງນີ້ແລ

**ສະສະປັນດິຕະຈະຣິຍາທີ ໑໐ ຈົບ**

**ອະກິດຕິວັກທີ ໑ ຈົບ**

## ລວມຈະຣິຍາທີ່ມີໃນວັກນີ້ຄື

ອະກິດຕິດາບົດ ສັງຂະພາມ ພຣະເຈົ້າທະນັນໄຊກຸຣຸຣາດ
ພຣະເຈົ້າມະຫາສຸທັດນະຈັກກະພັດຣາດ
ມະຫາໂຄວິນທະພາມ

ພຣະເຈົ້າເນມິຣາດ ຈັນທະກຸມານ ພຣະເຈົ້າສີວິຣາດ
ພຣະເວດສັນດອນ ແລະສະສະບັນດິດ
ຜູ້ໃຫ້ທານອັນປະເສີດໃນການນັ້ນ ເປັນເຮົານີ້ເອງ

ການບໍລິຈາກເຫຼົ່ານີ້ເປັນບໍຣິຂານແຫ່ງທານ ເປັນທານປາຣະມີ
ເຮົາໄດ້ໃຫ້ຊີວິດເປັນທານແກ່ຍາຈົກ ຈຶ່ງພ່ຳເພັງປາຣະມີນີ້ໄດ້

ເຮົາເຫັນຍາຈົກເຂົ້າມາເພື່ອຂໍແລ້ວ ໄດ້ສະລະຮ່າງກາຍຂອງຕົນໃຫ້
ຄວາມສະເໝີດ້ວຍທານຂອງເຮົາບໍ່ມີ
ນີ້ເປັນທານປາຣະມີຂອງເຮົາ ເປັນດັ່ງນີ້ແລ

**ການພ່ຳເພັງທານປາຣະມີ ຈົບ**

# ໔. ທັດຖິນາຄະວັກ

## ໝວດວ່າດ້ວຍພະຍາຊ້າງເປັນຕົ້ນ

## ໔. ການພໍ່າເພັງສິນປາຣະມີ

### ໑. ມາຕຸໂປສະກະຈະຣິຍາ

#### ວ່າດ້ວຍຈະຣິຍາຂອງພະຍາຊ້າງຕົວລ້ຽງມານດາ

[໑] ໃນການທີ່ເຮົາເປັນຊ້າງກຸນຊອນລ້ຽງມານດາຢູ່ໃນປ່າໃຫຍ່
ໃນຄັ້ງນັ້ນ ໃນແຜ່ນດິນນີ້ບໍ່ມີອັນໃດທີ່ຈະສະເໝີດ້ວຍຄຸນ (ສິນ) ຂອງເຮົາ

[໒] ພານປ່າພົບເຮົາໃນປ່າໃຫຍ່ແລ້ວ ໄດ້ຂາບທູນແດ່ ພຣະຣາຊາວ່າ
ຂ້າແຕ່ມະຫາຣາດ ຊ້າງມຸງຄຸນເຊິ່ງສົມຄວນແກ່ພຣະອົງຢູ່ໃນປ່າໃຫຍ່

[໓] ອັນການຈັບຊ້າງນັ້ນບໍ່ຕ້ອງຂຸດຄູ
ແມ່ນການປັກເສົາຕະລຸງ (ເສົາສຳລັບຜູກຊ້າງ)
ແລະການຂຸດຂຸມພາງກໍບໍ່ຕ້ອງ
ໃນຂະນະທີ່ຈັບໃຫ້ຈັບງວງເທົ່ານັ້ນ ຊ້າງນັ້ນກໍຈະມາ ໃນບ່ອນນີ້ເອງ ຂ້ານ້ອຍ

[໔] ຝ່າຍພຣະຣາຊາໄດ້ສະດັບຄຳຂອງພານປ່ານັ້ນແລ້ວ
ກໍຊົງດີພຣະທະໄທ ຊົງສົ່ງຄວານຊ້າງເຊິ່ງເປັນອາຈານຜູ້ສະຫຼາດສຶກສາດີແລ້ວໄປ

[໕] ຄວານຊ້າງນັ້ນໄປແລ້ວ ໄດ້ພົບຊ້າງກຳລັງລົກເຫງົ້າບົວຢູ່
ໃນສະບົວຫຼວງ ເພື່ອລ້ຽງມານດາ

[໖] ຄວານຊ້າງຮູ້ຄຸນຄືສິນຂອງເຮົາ ພິຈາລະນາເບິ່ງລັກສະນະແລ້ວກ່າວວ່າ
ມານີ້ລູກ ແລ້ວໄດ້ຈັບທີ່ງວງຂອງເຮົາ

[໗] ໃນຄັ້ງນັ້ນ ກຳລັງຂອງເຮົາທີ່ມີຢູ່ໃນກາຍຕາມປົກກະຕິອັນໃດ
ວັນນີ້ ກຳລັງຂອງເຮົານັ້ນສະເໝີເໝືອນດ້ວຍກຳລັງຂອງຊ້າງຫຼາຍພັນເຊືອກ

[໘] ຖ້າເຮົາໂກດຄວານຊ້າງເຫຼົ່ານັ້ນ ຜູ້ເຂົ້າມາໃກ້ເພື່ອຈັບເຮົາ
ເຮົາກໍສາມາດຢຽບເຂົາເຫຼົ່ານັ້ນ (ໃຫ້ແຫຼກລະອຽດ) ໄດ້
ແມ່ນຈົນເຖິງຣາດຊະສົມບັດຂອງມະນຸດ

[໙] ອີກຢ່າງໜຶ່ງ ແມ່ນເຂົາຈະຜູກເຮົາຕິດໄວ້ກັບເສົາຕະລຸງ
ເຮົາກໍບໍ່ມີຄວາມເສຍໃຈ ຍ້ອນຮັກສາສິນ
ເພື່ອພໍ່າເພັງສິນປາຣະມີໃຫ້ບໍລິບູນ

[໑໐] ຖ້າເຂົາເຫຼົ່ານັ້ນເພິ່ງທຳລາຍເຮົາທີ່ເສົາຕະລຸງນີ້ດ້ວຍຂວານແລະຫອກຊັດ
ເຮົາກໍຈະບໍ່ໂກດເຂົາເຫຼົ່ານັ້ນເລີຍ
ຍ້ອນເຮົາຢ້ານສິນຂາດ ດັ່ງນີ້ແລ

**ມາຕຸໂປສະກະຈະຣິຍາທີ ໑ ຈົບ**

## ໘. ພູຣິທັດຕະຈະຣິຍາ

### ວ່າດ້ວຍຈະຣິຍາຂອງພູຣິທັດຕະນາຄະຣາດ

[໑໑] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພະຍານາກຊື່ວ່າ ພູຣິທັດຕະ
ມີລິດຫຼາຍ ໄດ້ໄປສູ່ເທວະໂລກພ້ອມກັບທ້າວວິຣູປັກມະຫາຣາດ

[໑໒] ໃນເທວະໂລກນັ້ນ ເຮົາໄດ້ເຫັນທວຍເທບ
ຜູ້ພຽບພ້ອມດ້ວຍຄວາມສຸກໂດຍສ່ວນດຽວ
ຈຶ່ງສະມາທານສິນຂໍ້ວັດ ເພື່ອຕ້ອງການຈະໄປສູ່ສະຫວັນນັ້ນ

[໑໓] ເຮົາຊຳຣະຮ່າງກາຍ ບໍຣິໂພກອາຫານພໍເປັນເຄື່ອງລ້ຽງຊີບແລ້ວ
ນອນເທິງໂພນປວກ ອະທິຖານອົງ ໔ ປະການວ່າ

[໑໔] ຜູ້ໃດເພິ່ງເຮັດກິດດ້ວຍຜິວກໍດີ ໜັງກໍດີ ຊີ້ນກໍດີ ເອັນກໍດີ
ກະດູກກໍດີ ຜູ້ນັ້ນຈົ່ງນຳອະໄວຍະວະທີ່ເຮົາໃຫ້ນີ້ໄປເທີ້ນ

[໑໕] ພາມອາລຳພານະຜູ້ທີ່ຄົນອະກະຕັນຍູບອກແລ້ວ
ໄດ້ຈັບເຮົາໃສ່ໄວ້ໃນກະຕ່າ ໃຫ້ຫຼິ້ນໃນບ່ອນນັ້ນ ໆ

[໑໖] ແມ່ນເມື່ອພາມອາລຳພານະໃສ່ເຮົາໄວ້ໃນກະຕ່າແດ່
ບີບເຮົາດ້ວຍຝາມືແດ່ເຮົາກໍບໍ່ໂກດພາມອາລຳພານະນັ້ນ
ຍ້ອນເຮົາຢ້ານສິນຂາດ

[໑໗] ການທີ່ເຮົາສະລະຊີວິດຂອງຕົນເປັນຂອງເບົາແມ່ນກວ່າຫຍ້າ
ການລ່ວງສິນຂອງເຮົາເປັນເໝືອນດັ່ງວ່າປີ້ນແຜ່ນດິນຂຶ້ນ

[໑໗] ເຮົາເພິ່ງສະລະຊີວິດຂອງເຮົາສິ້ນ ໑໐໐ ຊາດເນືອງ ໆ
ເຮົາບໍ່ເພິ່ງທຳລາຍສີນແມ່ນຍ້ອນເຫດແຫ່ງທະວີບທັງ ໔

[໑໘] ອີກຢ່າງໜຶ່ງ ແມ່ນເຂົາຈະໃສ່ເຮົາໄວ້ໃນກະຕ່າ
ເຮົາກໍບໍ່ທຳຄວາມເສຍໃຈ
ຍ້ອນຮັກສາສີນ ເພື່ອພ່ຳເພັງສີນປາຣະມີໃຫ້ເຕັມ ດັ່ງນີ້ແລ

**ພູຣິທັດຕະຈະຣິຍາທີ ໔ ຈົບ**

## ໓. ຈຳເປີຍຍະຈະຣິຍາ

### ວ່າດ້ວຍຈະຣິຍາຂອງຈຳເປີຍຍະກະນາຄະຣາດ

[໔໐] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພະຍານາກ
ຊື່ວ່າຈຳເປີຍຍະກະ ມີລິດຫຼາຍ
ແມ່ນໃນການນັ້ນ ເຮົາເປັນຜູ້ປະພຶດທຳ ພຽບພ້ອມດ້ວຍສີນວັດ

[໔໑] ໝໍງູໄດ້ຈັບເຮົາຜູ້ປະພຶດທຳ ຮັກສາອຸໂປສົດ
ແລ້ວໃຫ້ເຕັ້ນລຳຢູ່ໃກ້ປະຕູພຣະຣາດຊະວັງ

[໔໒] ໝໍງູນັ້ນສັ່ງສີໃດ ຄື ສີຂຽວ ສີເຫຼືອງ ຫຼືສີແດງ
ເຮົາກໍປ່ຽນໄປຕາມຄວາມຄິດຂອງເຂົາ
ແປງກາຍໃຫ້ເໝືອນທີ່ເຂົາຄິດ

[໔໓] ເຮົາໄດ້ເນຣະມິດບົກ (ຄືແຜ່ນດິນ) ໃຫ້ເປັນນ້ຳແດ່
ເນຣະມິດນ້ຳໃຫ້ເປັນບົກແດ່ ຖ້າເຮົາຄຽດໃຫ້ໝໍງູນັ້ນ
ກໍເພິ່ງເຮັດເຂົາໃຫ້ກາຍເປັນຂີ້ເທົ່າໄດ້ພາຍໃນພິບຕາ

[໔໔] ຖ້າເຮົາຈັກເປັນໄປຕາມອຳນາດຈິດ ເຮົາກໍຈັກເສື່ອມຈາກສີນ
ເມື່ອເຮົາເສື່ອມຈາກສີນ ປະໂຫຍດສູງສຸດກໍຈະບໍ່ສຳເລັດ

[໔໕] ກາຍຂອງເຮົານີ້ຈົ່ງແຕກໄປ ຈົ່ງກະຈັດກະຈາຍຢູ່ ໃນບ່ອນນີ້
ເໝືອນແກບກະຈັດກະຈາຍຢູ່ກໍຕາມເທີ້ນ
ເຮົາບໍ່ຄວນທຳລາຍສີນ ເປັນດັ່ງນີ້ແລ

**ຈຳເປີຍຍະຈະຣິຍາທີ ໓ ຈົບ**

# ໔. ຈູລະໂພທິຈະຣິຍາ

## ວ່າດ້ວຍຈະຣິຍາຂອງຈູລະໂພທິປະຣິພາຊົກ

[໔໖] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນປະຣິພາຊົກຊື່ວ່າ ຈູລະໂພທິ
ມີສີນງາມ ເຮົາເຫັນພົບໂດຍຄວາມເປັນຂອງເປັນຕາຢ້ານ ຈຶ່ງອອກບວດ

[໔໗] ນາງພາມມະນີ ຜູ້ມີຜິວພັນດັ່ງຄຳ
ເຊິ່ງເປັນພັນລະຍາເກົ່າຂອງເຮົາ
ແມ່ນນາງບໍ່ໄດ້ອາໄລໃນວັດຕະ ອອກບວດແລ້ວ

[໔໘] ເຮົາທັງ ໒ ບໍ່ມີຄວາມອາໄລ ຕັດຂາດພວກພ້ອງ
ບໍ່ຫ່ວງໃຍໃນຕະກູນແລະໝູ່ຍາດຕິພີ່ນ້ອງ
ທ່ຽວໄປສູ່ບ້ານແລະນິຄົມ ມາເຖິງນະຄອນພາຣານະສີ

[໔໙] ເຮົາທັງ ໒ ຢູ່ ໃນບ່ອນນັ້ນ ມີປັນຍາຮັກສາຕົນ
ບໍ່ຄຸກຄີກັບສະກຸນກັບຄະນະ
ເຮົາທັງ ໒ ຢູ່ໃນພຣະຣາດຊະອຸທະຍານອັນສະຫງັດງຽບ ບໍ່ມີຄົນສັນຈອນ

[໕໐] ພຣະຣາຊາສະເດັດທອດພຣະເນດພຣະຣາດຊະອຸທະຍານ
ໄດ້ທອດພຣະເນດເຫັນນາງພາມມະນີ
ຈຶ່ງສະເດັດເຂົ້າມາຫາເຮົາແລ້ວຕັດຖາມວ່າ
ນາງພາມມະນີຄົນນີ້ເປັນອັນໃດກັບທ່ານ ເປັນເມຍຂອງໃຜ

[໕໑] ເມື່ອພຣະຣາຊາຕັດຖາມແນວນີ້ ເຮົາໄດ້ທູນພຣະອົງດັ່ງນີ້ວ່າ
ນາງພາມມະນີນີ້ບໍ່ແມ່ນເມຍຂອງອາຕະມາພາບ
ແຕ່ເປັນຜູ້ປະພຶດທຳຮ່ວມກັນ ມີສາດສະໜາດຽວກັນ

[໕໒] ພຣະຣາຊາຊົງກຳໜັດໜັກໃນນາງພາມມະນີນັ້ນ
ຈຶ່ງຮັບສັ່ງໃຫ້ພວກຣາດບຸຣຸດຈັບ ຊົງບີບຄັ້ນດ້ວຍກຳລັງ
ສັ່ງໃຫ້ນຳເຂົ້າໄປພາຍໃນນະຄອນ

[໕໓] ເມື່ອພັນລະຍາເກົ່າຂອງເຮົາເຊິ່ງເກີດຮ່ວມກັນ
ມີສາດສະໜາດຽວກັນ ຖືກດຶງລາກໄປ ຄວາມໂກດເກີດຂຶ້ນແກ່ເຮົາ

[໕໔] ເຮົາຣະລຶກເຖິງສີນຂໍ້ວັດໄດ້ພ້ອມກັບຄວາມໂກດທີ່ເກີດຂຶ້ນ
ເຮົາຂົ່ມຄວາມໂກດໄດ້ ໃນບ່ອນນັ້ນເອງ ບໍ່ໃຫ້ມັນຈະເລີນຂຶ້ນໄປອີກ

[໓໔] ຖ້າຜູ້ໃດ ເພິ່ງເອົາຫອກອັນຄົມແທງນາງພາມມະນີນັ້ນ
ເຮົາກໍບໍ່ເພິ່ງທຳລາຍສີນຂອງເຮົາເລີຍ ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

[໓໖] ນາງພາມມະນີນັ້ນຈະເປັນທີ່ຮັງກຽດຂອງເຮົາກໍບໍ່ແມ່ນ
ແລະເຮົາຈະບໍ່ມີກຳລັງກໍບໍ່ແມ່ນ
ແຕ່ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງຕາມຮັກສາສີນໄວ້ ດັ່ງນີ້ແລ

**ຈູລະໂພທິຈະຣິຍາທີ ໔ ຈົບ**

## ໕. ມະຫິສະຣາດຈະຣິຍາ

### ວ່າດ້ວຍຈະຣິຍາຂອງພະຍາຄວາຍ

[໓໗] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນຄວາຍ ທ່ຽວຢູ່ໃນປ່າໃຫຍ່
ມີກາຍອ້ວນພີ ມີກຳລັງຫຼາຍ ໂຕໃຫຍ່ ເບິ່ງເປັນຕາຢ້ານ

[໓໘] ພື້ນທີ່ແຫ່ງໃດແຫ່ງໜຶ່ງໃນປ່ານີ້ ອັນເປັນບ່ອນຢູ່ຂອງຝູງຄວາຍ
ມີຢູ່ທີ່ເງື້ອມພູເຂົາກໍດີ ຢູ່ຮ່ອມພູກໍດີ ທີ່ເຫງົ້າຕົ້ນໄມ້ກໍດີ ທີ່ໃກ້ບຶງກໍດີ

[໓໙] ເຮົາທ່ຽວໄປໃນບ່ອນນັ້ນ ໆ ເມື່ອເຮົາທ່ຽວໄປໃນປ່າໃຫຍ່
ໄດ້ເຫັນສະຖານທີ່ອັນຈະເລີນ ເຮົາຈຶ່ງເຂົ້າໄປສູ່ບ່ອນນັ້ນ
ແລ້ວຢືນພັກຢູ່ແລະນອນຢູ່

[໔໐] ໃນຄັ້ງນັ້ນ ລິງປ່າຕົວຊົ່ວຮ້າຍ ບໍ່ຈະເລີນ ລັອກແລັກ
ມາບ່ອນນັ້ນ ຖ່າຍປັດສາວອຸດຈາຣະຣາດໃສ່ຄໍ ໜ້າຜາກ ຄິ້ວ

[໔໑] ບຽດບຽນເຮົາໃນວັນທຳອິດເທື່ອໜຶ່ງ
ຕໍ່ມາອີກວັນທີ ໒ ວັນທີ ໓ ວັນທີ ໔ ວັນລະເທື່ອ
ເຮົາຈຶ່ງຖືກລິງນັ້ນບຽດບຽນຕະຫຼອດການທັງປວງ

[໔໒] ຍັກ (ເທວະດາ) ເຫັນເຮົາຖືກລິງບຽດບຽນໄດ້ກ່າວກັບເຮົາດັ່ງນີ້ວ່າ
ທ່ານຈົ່ງເຮັດລິງຊົ່ວຊ້າລາມົກຕົວນີ້ໃຫ້ຈິບຫາຍ
ດ້ວຍເຂົາແລະກີບຕີນຂອງທ່ານສາເທີ້ນ

[໔໓] ເມື່ອຍັກກ່າວແນວນີ້ໃນຄັ້ງນັ້ນແລ້ວ ເຮົາໄດ້ຕອບຍັກນັ້ນວ່າ
ເຫດໃດ ທ່ານຈະໃຫ້ເຮົາເປື້ອນຊາກສົບອັນລາມົກບໍ່ຈະເລີນນີ້ນໍ

[໔໔] ຖ້າເຮົາເພິ່ງໂກດເຄືອງຕໍ່ລົງນັ້ນ ເຮົາກໍຈະເພິ່ງຊົ່ວກວ່າມັນ
ສິນຂອງເຮົາຈະເພິ່ງຂາດ ແລະວິນຍູຊົນທັງຫຼາຍກໍຈະເພິ່ງຕິຕຽນເຮົາ

[໔໕] ເຮົາເປັນຜູ້ບໍລິສຸດ ຕາຍສາຍັງປະເສີດກວ່າຄວາມເປັນຢູ່ທີ່ໜ້າຕິຕຽນ
ເຮົາຈັກບຽດບຽນຜູ້ອື່ນ ແມ່ນຍ້ອນເຫດແຫ່ງຊີວິດໄດ້ແນວໃດ

[໔໖] ລົງນີ້ດູໝິ່ນເຮົາໄດ້ແນວນີ້ ກໍຈັກເຮັດແມ່ນແກ່ຜູ້ອື່ນແນວນີ້
ເຂົາກໍຈັກຂ້າມັນສາ ເຮົາກໍຈັກລອດຕົວໄປ

[໔໗] ບຸກຄົນຜູ້ມີປັນຍາ ອົດກັ້ນຄຳດູໝິ່ນຍ້ອນຄຳຂອງຄົນຊົ່ວ
ຄົນປານກາງ ແລະຄົນຊັ້ນສູງ
ຍ່ອມໄດ້ສິ່ງໃຈປາຖະໜາເປັນດັ່ງນີ້ແລ

**ມະຫິສະຣາດຈະຣິຍາທີ ໕ ຈົບ**

## ໖. ຣຸຣຸຣາຊະຈະຣິຍາ

### ວ່າດ້ວຍຈະຣິຍາຂອງພະຍາເນື້ອຊື່ຣຸຣຸ

[໔໘] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພະຍາເນື້ອຊື່ຣຸຣຸ
ມີຂົນສີເຫຼືອງຄ້າຍຄຳທີ່ຫຼອມດີແລ້ວ
ປະກອບດ້ວຍສິນອັນບໍລິສຸດຍິ່ງ

[໔໙] ເຮົາເຂົ້າໄປອາໄສຢູ່ໃນ ປະເທດທີ່ເປັນຕາອອນຊອນ
ເປັນຣຳມະນີຍະສະຖານ ສະຫງັດງຽບປາສະຈາກມະນຸດ
ເປັນທີ່ຍິນດີແຫ່ງໃຈໃກ້ຝັ່ງແມ່ນ້ຳ

[໕໐] ໃນຄັ້ງນັ້ນ ບຸຣຸດຖືກເຈົ້າໜີ້ບຽດບຽນ
ຈຶ່ງໂດດລົງໃນແມ່ນ້ຳ ໃນກະແສນ້ຳທາງເໜືອ
ດ້ວຍຄິດວ່າ ເຮົາຈະເປັນຫຼືຕາຍກໍຕາມ

[໕໑] ເຂົາຖືກກະແສນ້ຳພັດໄປໃນແມ່ນ້ຳໃຫຍ່
ຕະຫຼອດຄືນຕະຫຼອດວັນ ຮ້ອງໄຫ້ຄ່ຳຄວນຢ່າງໜ້າເວທະນາ
ລອຍຟູໄປທ່າມກາງແມ່ນ້ຳຄົງຄາ

[໕໒] ເຮົາໄດ້ຍິນສຽງຂອງເຂົາຜູ້ຮ້ອງໄຫ້ຄ່ຳຄວນຢ່າງໜ້າເວທະນາແລ້ວ
ໄປຢືນຢູ່ທີ່ຝັ່ງແມ່ນ້ຳຖາມວ່າ ທ່ານເປັນຄົນແນວໃດ

[໕໓] ເຂົາຖືກເຮົາຖາມແລ້ວ ໄດ້ແຈ້ງເຫດຂອງຕົນໃນການນັ້ນວ່າ
ຂ້າພະເຈົ້າຢ້ານ ສະດຸ້ງຕໍ່ພວກເຈົ້າໜີ້ແລ້ວ ຈຶ່ງໂດດລົງຍັງມະຫານະທີ

[໕໔] ເຮົາກະທຳຄວາມກະລຸນາແກ່ເຂົາ
ສະລະຊີວິດຂອງຕົນລອຍໄປນຳເຂົາມາໃນເວລາກາງຄືນຂ້າງແຮມ

[໕໕] ເຮົາຮູ້ການທີ່ເຂົາສະບາຍໃຈແລ້ວ
ໄດ້ກ່າວແກ່ເຂົາດັ່ງນີ້ວ່າ ຂ້າພະເຈົ້າຈະຂໍພອນກັບທ່ານຈັກຂໍ້ໜຶ່ງ
ຄືທ່ານຢ່າບອກໃຜວ່າ ຂ້າພະເຈົ້າຢູ່ໃນບ່ອນນີ້

[໕໖] ເຂົາເຂົ້າໄປສູ່ນະຄອນແລ້ວ ພຣະຣາຊາຕັດຖາມ
ເຂົາມີຄວາມຕ້ອງການຊັບຈຶ່ງຂາບທູນໄປຕາມຄວາມຈິງແລ້ວ
ເຂົາໄດ້ພາພຣະຣາຊາມາສູ່ບ່ອນຢູ່ຂອງເຮົາ

[໕໗] ເຮົາຂາບທູນເຫດການທຸກຢ່າງແກ່ພຣະຣາຊາ
ພຣະຣາຊາຊົງສະດັບຄຳຂອງເຮົາແລ້ວ
ຊົງຂຶ້ນລູກສອນຈະຍິງບຸຣຸດນັ້ນ ຕັດວ່າ
ເຮົາຈັກຂ້າອະນາຣະຍະຊົນ ຜູ້ປະທຸດສະຮ້າຍມິດສາໃນບ່ອນນີ້

[໕໘] ເຮົາຕາມຮັກສາຄົນຜູ້ປະທຸດສະຮ້າຍມິດນັ້ນ
ດ້ວຍໄດ້ມອບຕົວຂອງເຮົາຖວາຍວ່າ
ຂ້າແຕ່ມະຫາຣາດ ຂໍໄດ້ຊົງໂພດຢຸດກ່ອນເທີ້ນ
ຂ້າແຕ່ພຣະອົງ ຂ້າພຣະອົງຈະເຮັດຕາມພຣະຣາດປະສົງຂອງພຣະອົງ

[໕໙] ເຮົາຕາມຮັກສາສີນຂອງເຮົາ ບໍ່ແມ່ນຕາມຮັກສາຊີວິດຂອງເຮົາ
ຍ້ອນໃນການນັ້ນ ເຮົາເປັນຜູ້ຮັກສາສີນ
ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

**ຣຸຣຸຣາຊະຈະຣິຍາທີ ໖ ຈົບ**

## ໗. ມາຕັງຄະ ຈະຣິຍາ

### ວ່າດ້ວຍຈະຣິຍາຂອງຊະດົນຊື່ມາຕັງຄະ

[໖໐] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນຊະດົນມີນາມວ່າ ມາຕັງຄະ ຕາມໂຄດ
ມີຄວາມພຽນທຳລາຍກິເລດທີ່ແຮງກ້າ ມີສີນ ມີຈິດໝັ້ນຄົງດີ

[໖໑] ເຮົາທັງ ໔ ຄື ເຮົາແລະພານຄົນໜຶ່ງ
ຢູ່ໃກ້ຝັ່ງແມ່ນ້ຳຄົງຄາ ເຮົາຢູ່ຂ້າງເໜືອ ພານຢູ່ຂ້າງໃຕ້

[໖໔] ພານທ່ຽວໄປຕາມແຄມຝັ່ງນ້ຳ ເຫັນອາສົມຂອງເຮົາຂ້າງເໜືອນ້ຳ
ບໍຣິພາດເຮົາໃນບ່ອນນັ້ນ ແລ້ວແກ້ງໃຫ້ເຮົາຫິວແຕກ

[໖໓] ຖ້າເຮົາເພິ່ງໂກດຕໍ່ພານນັ້ນ ຖ້າເຮົາບໍ່ຄຸ້ມຄອງສິນ
ພຽງແຕ່ເຮົາແນມເບິ່ງພານນັ້ນແລ້ວ ກໍເຮັດໃຫ້ເປັນຂີ້ເທົ່າໄດ້

[໖໔] ໃນຄັ້ງນັ້ນ ພານນັ້ນໂກດ ມີຈິດຄິດປະທຸດສະຮ້າຍ
ຈຶ່ງປ້ອຍເຮົາ ແຕ່ຄຳປ້ອຍນັ້ນຕົກລົງເທິງຫົວຂອງເຂົາເອງ
ເຮົາໄດ້ຊ່ອຍປົດເຂົາໃຫ້ພົ້ນໂດຍຄວາມພະຍາຍາມ

[໖໕] ເຮົາຕາມຮັກສາສິນຂອງເຮົາ ບໍ່ແມ່ນຮັກສາຊີວິດຂອງເຮົາ
ຍ້ອນໃນການນັ້ນ ເຮົາເປັນຜູ້ຮັກສາສິນ
ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ ດັ່ງນີ້ແລ

**ມາຕັງຄະ ຈະຣິຍາທີ ໗ ຈົບ**

## ໙. ທຳມະເທວະປຸດຕະຈະຣິຍາ

### ວ່າດ້ວຍຈະຣິຍາຂອງທຳມະເທບພະບຸດ

[໖໖] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນເທບພະບຸດນາມວ່າ ທຳມະ
ມີສັກໃຫຍ່ ມີລິດຫຼາຍ ມີບໍລິວານຫຼາຍ ເປັນຜູ້ອະນຸເຄາະໂລກທັງປວງ

[໖໗] ເຮົາຊັກຊວນມະຫາຊົນໃຫ້ສະມາທານກຸສົນກຳມະບົດ ໑໐ ປະການ
ພ້ອມທັງມິດສະຫາຍ ພ້ອມທັງບໍລິວານຊົນທ່ຽວໄປສູ່ບ້ານແລະນິຄົມ

[໖໙] ໃນຄັ້ງນັ້ນ ເທບພະບຸດຜູ້ລາມົກ ເປັນຜູ້ຂີ້ຖີ່
ສະແດງອະກຸສົນກຳມະບົດ ໑໐ ປະການ
ແມ່ນເທບພະບຸດນັ້ນ ພ້ອມທັງມິດສະຫາຍ
ພ້ອມທັງບໍລິວານຊົນກໍທ່ຽວໄປເທິງແຜ່ນດິນນີ້

[໖໙] ເຮົາທັງ ໔ ຄື ທຳວາທີເທບພະບຸດ ແລະອະທຳວາທີເທບພະບຸດ
ເປັນສັດຕູຕໍ່ກັນ ເຮົາທັງ ໔ ນັ່ງລົດສວນທາງກັນມາ
ຈຶ່ງເຮັດແອກລົດໃຫ້ກະທົບກັນ

[໗໐] ການຜິດຖຽງອັນເປັນຕາຢ້ານຍ່ອມເກີດຂຶ້ນແກ່ເທບພະບຸດທັງ ໔ ຜູ້ປະກອບດ້ວຍກັນລະຍານະທຳແລະປາປະທຳ ມະຫາສົງຄາມຜາກົດແລ້ວ ເພື່ອຕ້ອງການຈະໃຫ້ກັນແລະກັນຫຼີກທາງ

[໗໑] ຖ້າເຮົາເພິ່ງຄຽດອະທຳວາທີເທບພະບຸດນັ້ນ ຖ້າເຮົາເພິ່ງທຳລາຍຕະບະຄຸນ ເຮົາເພິ່ງເຮັດອະທຳວາທີເທບພະບຸດນັ້ນ ພ້ອມທັງບໍລິວານໃຫ້ເປັນເໝືອນທຸລີ

[໗໔] ອີກເລື້ອງໜຶ່ງ ເພື່ອຮັກສາສິນໄວ້ ເຮົາຈຶ່ງຣະງັບຈິດໄດ້ແລ້ວ ພ້ອມທັງບໍລິວານ ໄດ້ຫຼີກທາງໃຫ້ແກ່ອະທຳວາທີເທບພະບຸດຜູ້ຊົ່ວຊ້າ

[໗໓] ຍ້ອນເຮັດຈິດໃຫ້ສະງົບພ້ອມກັບຫຼີກທາງໃຫ້ ແຜ່ນດິນໄດ້ແຍກຊ່ອງແກ່ເທບພະບຸດຜູ້ຊົ່ວຊ້າໃນຂະນະນັ້ນ ດັ່ງນີ້ແລ

**ທຳມະເທວະປຸດຕະຈະຣິຍາທີ ໘ ຈົບ**

## ໙. ຊະຍະທິສະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າໄຊຍະທິດ

[໗໔] ໃນນະຄອນທີ່ປະເສີດຊື່ກັບປິລາ ເປັນນະຄອນທີ່ອຸດົມໃນແຄວ້ນປັນຈາລະ ໄດ້ມີພຣະຣາຊາພຣະນາມວ່າໄຊຍະທິດ ປະກອບດ້ວຍຄຸນຄືສິນ

[໗໕] ເຮົາເປັນໂອຣົດຂອງພຣະຣາຊາພຣະອົງນັ້ນ ມີທຳອັນສະດັບແລ້ວ ມີສິນດີງາມ ມີນາມວ່າອະລີນະສັດຕະກຸມານ ມີຄຸນສົງເຄາະບໍລິວານຊົນທຸກເມື່ອ

[໗໖] ພຣະຣາດຊະບິດາຂອງເຮົາສະເດັດລ່າເນື້ອ ໄດ້ເຂົ້າໃກ້ພຣະຍາໂປຣິສາດ ພຣະຍາໂປຣິສາດນັ້ນໄດ້ຈັບພຣະຣາດຊະບິດາຂອງເຮົາແລ້ວກ່າວວ່າ ທ່ານເປັນອາຫານຂອງເຮົາ ຢ່າດີ້ນຣົນໄປເລີຍ

[໗໗] ພຣະຣາດຊະບິດາຂອງເຮົາຊົງສະດັບຄຳຂອງພຣະຍາໂປຣິສາດນັ້ນ ຕົກພຣະຫະໄທ ສະດຸ້ງຫວາດຫວັ່ນ ມີພຣະໄທແຂງ ຍ້ອນທອດພຣະເນດເຫັນພຣະຍາໂປຣິສາດ

[໗໘] ພຣະຍາໂປຣິສາດຮັບເອົາຊີ້ນແລ້ວປ່ອຍໄປໂດຍບັງຄັບໃຫ້ກັບມາອີກ ພຣະຣາດຊະບິດາພຣະຣາດຊະທານຊັບແກ່ພາມແລ້ວຕັດຮຽກເຮົາມາວ່າ

[໒໙] ລູກເອີຍ ຈົ່ງປົກຄອງຣາດຊະສົມບັດ ຢ່າພະໝາດປົກຄອງນະຄອນນີ້
ພຣະຍາໂປຣິສາດບັງຄັບພໍ່ໃຫ້ກັບໄປຫາອີກ

[໓໐] ເຮົາໄຫວ້ພຣະຣາດຊະມານດາແລະພຣະຣາດຊະບິດາແລ້ວ
ຕົກແຕ່ງຮ່າງກາຍ ພາຍທະນູ ເນັບພຣະແສງຂັນ
ອອກໄປຫາພຣະຍາໂປຣິສາດ (ເຮົາຄິດວ່າ)

[໓໑] ພຣະຍາໂປຣິສາດເຫັນເຮົາມີອາວຸດຖືຢູ່ໃນມື ບາງທີຈັກສະດຸ້ງຢ້ານ
ແຕ່ຍ້ອນເມື່ອເຮົາທຳຄວາມສະດຸ້ງຢ້ານຕໍ່ພຣະຍາໂປຣິສາດ
ສິນຂອງເຮົາຈະຂາດ

[໓໒] ຍ້ອນເຮົາຢ້ານສິນຈະຂາດ ຈຶ່ງບໍ່ກ່າວວາຈາໜ້າຮັງກຽດ
ແກ່ພຣະຍາໂປຣິສາດນັ້ນ
ເຮົາມີເມດຕາຈິດກ່າວຄຳທີ່ເປັນປະໂຫຍດວ່າ

[໓໓] ທ່ານຈົ່ງດັງໄຟກອງໃຫຍ່ຂຶ້ນ ເຮົາຈັກໂດດຈາກຕົ້ນໄມ້ເຂົ້າກອງໄຟ
ທ່ານປູ່ ທ່ານຮູ້ເວລາວ່າ ເຮົາສຸກດີແລ້ວຈຶ່ງກິນເທີ້ນ

[໓໔] ເຮົາບໍ່ໄດ້ຮັກສາຊີວິດຂອງເຮົາຍ້ອນເຫດແຫ່ງພຣະຣາດຊະບິດາຜູ້ຊົງສິນ
ແລະເຮົາໄດ້ໃຫ້ພຣະຍາໂປຣິສາດຜູ້ຂ້າສັດເປັນປົກກະຕິທຸກເມື່ອນັ້ນ
ບວດແລ້ວ ດັ່ງນີ້ແລ

**ຊະຍະທິສະຈະຣິຍາທີ ໗ ຈົບ**

## ໑໐. ສັງຂະປາລະຈະຣິຍາ

### ວ່າດ້ວຍຈະຣິຍາຂອງສັງຂະປາລະນາຄະຣາດ

[໓໕] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພະຍານາກນາມວ່າ ສັງຂະປາລະ
ມີລິດຫຼາຍ ມີແຂ້ວເປັນອາວຸດ ມີພິດແຮງກ້າ
ມີລີ້ນ ໒ ແສກ

[໓໖] ເຮົາຢູ່ທີ່ທົນທາງໃຫຍ່ ໔ ແຍກ ຄັບຄັ່ງໄປດ້ວຍຊົນຕ່າງ ໆ
ອະທິຖານອົງ ໔ ວ່າ

[໓໗] ຜູ້ໃດເຮັດກິດທີ່ຄວນເຮັດດ້ວຍອະໄວຍະວະນີ້
ຄືຜິວ ໜັງ ຊີ້ນ ເອັນ ຫຼື ກະດູກ
ຜູ້ນັ້ນຈົ່ງນຳອະໄວຍະວະທີ່ເຮົາໃຫ້ແລ້ວເທົ່ານັ້ນໄປເທີ້ນ

[໘໘] ພວກບຸດຂອງນາຍພານເປັນຄົນດຸຮ້າຍ ຫຍາບຊ້າ
ບໍ່ມີຄວາມກະລຸນາ ໄດ້ເຫັນເຮົາແລ້ວ
ຖືໄມ້ຄ້ອນກະບອງສັ້ນແຫ່ກັນເຂົ້າມາຫາເຮົາ ໃນບ່ອນນັ້ນ

[໘໙] ພວກບຸດຂອງນາຍພານໄດ້ແທງດັງ
ຫາງແລະກະດູກສັນຫຼັງ ຍົກໃສ່ຫາບແລ້ວ ນຳເຮົາໄປ

[໙໐] ຖ້າເຮົາປາຖະໜາ ກໍເພິ່ງເຜົາມະຫາປະຖະພີ
ເຊິ່ງມີສະມຸດສາຄອນເປັນບ່ອນສຸດ
ພ້ອມທັງປ່າທັງພູເຂົາໄດ້ດ້ວຍລົມຈາກດັງໃນບ່ອນນັ້ນ

[໙໑] ແຕ່ເຮົາບໍ່ຄຽດພວກບຸດນາຍພານ
ແມ່ນຈະແທງເຮົາດ້ວຍຫຼາວ ແມ່ນຈະທຸບຕີເຮົາດ້ວຍຫອກ
ນີ້ເປັນສີນປາຣະມີຂອງເຮົາ ດັ່ງນີ້ແລ

**ສັງຂະປາລະຈະຣິຍາທີ ໑໐ ຈົບ**

**ຫັດຖີນາຄະວັກທີ ໔ ຈົບ**

## ລວມຈະຣິຍາທີ່ມີໃນວັກນີ້ຄື

໑. ມາຕຸໂປສະກະຈະຣິຍາ
໒. ຈຳເປັຍຍະຈະຣິຍາ
໓. ມະຫິສະຣາຊະຈະຣິຍາ
໔. ມາຕັງຄະຈະຣິຍາ
໕. ຊະຍະທິສະຈະຣິຍາ
໖. ພູຣິທັດຕະຈະຣິຍາ
໗. ຈູລະໂພທິຈະຣິຍາ
໘. ຣຸຣຸຣາຊະຈະຣິຍາ
໙. ທຳມະເທວະປຸດຕະຈະຣິຍາ
໑໐. ສັງຂະປາລະຈະຣິຍາ

ຈະຣິຍາທັງໝົດນີ້ເປັນກຳລັງຂອງສີນ ເປັນບໍຣິຂານເປັນຂໍ້ອ້າງຂອງສີນ
ເຮົາຕາມຮັກສາສີນຍ້ອນຍັງຫ່ວງໃຍຊີວິດ

ເຮົາຜູ້ເປັນສັງຂະປາລະນາຄະຣາດໄດ້ມອບຊີວິດໃຫ້
ແກ່ຄົນໃດຄົນໜຶ່ງແມ່ນຕະຫຼອດການທຸກເມື່ອ
ຍ້ອນເຫດນັ້ນ ຈະຣິຍານັ້ນຈຶ່ງເປັນສີນປາຣະມີ ດັ່ງນີ້ແລ

**ນິດເທດແຫ່ງສີນປາຣະມີ ຈົບ**

# ໓. ຍຸທັນຊະຍະວັກ

## ໝວດວ່າດ້ວຍກຸມານນາມວ່າຍຸທັນໄຊເປັນຕົ້ນ

## ໓. ການພໍ່າເພັງປາຣະມີມີເນກຂໍາມະເປັນຕົ້ນ

### ໑. ຍຸທັນຊະຍະຈະຣິຍາ

**ວ່າດ້ວຍພຣະຈະຣິຍາຂອງພຣະຍຸທັນໄຊກຸມານ**

[໑] ໃນການທີ່ເຮົາເປັນພຣະຣາດຊະໂອຣົດ
ນາມວ່າຍຸທັນໄຊ ມີບໍລິວານຍົດຫາປະມານບໍ່ໄດ້
ສະລົດໃຈຍ້ອນໄດ້ເຫັນຢາດນໍ້າໝອກທີ່ເຫືອດແຫ້ງໄປຍ້ອນແສງດວງອາທິດ

[໒] ເຮົາກະທໍາຄວາມເປັນອະນິດຈັງ (ຄວາມບໍ່ທ່ຽງ) ນັ້ນແລ
ໃຫ້ເປັນສິ່ງທີ່ສໍາຄັນ ພອກພູນຄວາມສັງເວດ
ໄຫວ້ພຣະມານດາແລະພຣະບິດາແລ້ວທູນຂໍບັນພະຊາ

[໓] ພຣະມານດາແລະພຣະບິດາພ້ອມທັງຊາວນິຄົມທັງຊາວແວ່ນແຄວ້ນ
ປະນົມມືອ້ອນວອນເຮົາວ່າ
ວັນນີ້ ເຈົ້າຈົ່ງປົກຄອງແຜ່ນດິນອັນກວ້າງໃຫຍ່ໄພສານເຖີ້ນລູກ

[໔] ເມື່ອມະຫາຊົນພ້ອມທັງພຣະບິດາ ນາງສະໜົມ ຊາວນິຄົມ
ແລະຊາວແວ່ນແຄວ້ນ ຮ້ອງໄຫ້ຮໍ່າໄຮໜ້າເວທະນາຍິ່ງ
ເຮົາບໍ່ຫ່ວງໃຍ ໄດ້ສະລະໄປແລ້ວ

[໕] ເຮົາສະລະຣາດຊະສົມບັດໃນແຜ່ນດິນ ໝູ່ຍາດຕິພີ່ນ້ອງ ບໍລິວານຊົນ
ແລະຍົດສັກທັງໝົດ ບໍ່ຄິດເຖິງເລີຍ ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

[໖] ພຣະມານດາແລະພຣະບິດາຈະເປັນທີ່ຣັງກຽດຂອງເຮົາກໍບໍ່ແມ່ນ
ຍົດອັນຍິ່ງໃຫຍ່ ຈະເປັນທີ່ຣັງກຽດຂອງເຮົາກໍບໍ່ແມ່ນ
ແຕ່ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງສະລະຣາດຊະສົມບັດ ດັ່ງນີ້ແລ

**ຍຸທັນຊະຍະຈະຣິຍາທີ ໑ ຈົບ**

# ๘. ໂສມະນັດສະຈະຣິຍາ

## ວ່າດ້ວຍພຣະຈະຣິຍາຂອງພຣະໂສມະນັດສະກຸມານ

[໗]	ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນບຸດສຸດທີ່ຮັກ
ພຣະມານດາແລະພຣະບິດາຮັກແພງ ອີດູ ຜາກົດນາມວ່າໂສມະນັດ
ຢູ່ໃນນະຄອນອິນທະປັດທີ່ອຸດົມສົມບູນ

[໘]	ເປັນຜູ້ມີສີນ ສົມບູນດ້ວຍຄຸນນະທຳ
ມີກັນລະຍານະທຳ ມີປະຕິພານ ເຄົາລົບນົບນອບຕໍ່ບຸກຄົນຜູ້ຈະເລີນ
ມີຫີຣິ ແລະສະຫຼາດໃນສັງຄະຫະທຳ

[໙]	ໃນຄັ້ງນັ້ນ ມີດາບົດໂກງຜູ້ໜຶ່ງ
ເປັນທີ່ໂປດປານຂອງພຣະຣາຊາພຣະອົງນັ້ນ
ດາບົດນັ້ນເຮັດສວນແລະປູກຕົ້ນໄມ້ໃຫ້ໝາກ ໄມ້ດອກ ໄມ້ປະດັບລ້ຽງຊີວິດ

[໑໐]	ເຮົາໄດ້ເຫັນດາບົດໂກງນັ້ນ ເໝືອນກອງແກບທີ່ບໍ່ມີເຂົ້າສານ
ເໝືອນໄມ້ເປັນໂກນຂ້າງໃນ ເໝືອນຕົ້ນກ້ວຍຫາແກ່ນບໍ່ໄດ້

[໑໑]	ດາບົດໂກງຜູ້ນີ້ ບໍ່ມີທຳຂອງສັດຕະບຸຣຸດ
ປາສະຈາກຄວາມເປັນສະມະນະ ລະຫີຣິແລະທຳຝ່າຍຂາວ
ຍ້ອນເຫດແຫ່ງການລ້ຽງຊີວິດ

[໑໒]	ປັດຈັນຕະຊົນນະບົດກຳເຣີບຂຶ້ນ ຍ້ອນໂຈນທ່ຽວຢູ່ໃນດົງ
ພຣະບິດາຂອງເຮົາ ເມື່ອຈະສະເດັດໄປຜາບຄວາມກຳເຣີບນັ້ນ ຕັດສັ່ງເຮົາວ່າ

[໑໓]	ເຈົ້າຢ່າຜະໝາດໃນຊະດິນ ຜູ້ມີຕະບະແກ່ກ້າເດີ້ ລູກ
ລູກຈົ່ງອະນຸວັດຕາມຄວາມປາຖະໜາ ດ້ວຍວ່າຊະດິນນັ້ນ
ເປັນຜູ້ໃຫ້ຄວາມສຳເລັດ ຄວາມປາຖະໜາທັງປວງ

[໑໔]	ເຮົາໄປສູ່ທີ່ບຳຣຸງຊະດິນນັ້ນແລ້ວ ໄດ້ກ່າວຄຳນີ້ວ່າ
ຄະຫະບໍດີ ທ່ານສະບາຍດີບໍ ຫຼື ວ່າທ່ານຈະໃຫ້ນຳອັນໃດມາ

[໑໕]	ເຫດນັ້ນ ດາບົດໂກງນັ້ນອາໄສມານະຈຶ່ງໂກດເຮົາວ່າ
ເຮົາຈະໃຫ້ພຣະຣາຊາປະຫານທ່ານສາໃນວັນນີ້
ຫຼືຈະໃຫ້ເນຣະເທດຈາກແວ່ນແຄວັ້ນສາ

[໑໖] ພຣະຣາຊາຊົງຜາບປາມປັດຈັນຕະຊົນນະບົດສະງົບຣາບຄາບແລ້ວ
ໄດ້ຕັດຖາມຊະດົນໂກງວ່າ ພຣະຜູ້ເປັນເຈົ້າສະບາຍດີບໍ
ສັກກາຣະສຳມານະຍັງເປັນໄປແກ່ພຣະຜູ້ເປັນເຈົ້າຢູ່ບໍ

[໑໗] ຊະດົນຊົ່ວນັ້ນຂາບທູນພຣະຣາຊາ
ໂດຍປະການທີ່ກຸມານນັ້ນຈະເພິ່ງຖືກເຮັດໃຫ້ພິນາດ
ພຣະເຈົ້າແຜ່ນດິນຊົງສະດັບຄຳຂອງຊະດົນໂກງນັ້ນ ແລ້ວຊົງບັງຄັບວ່າ

[໑໘] ຈົ່ງຕັດຫົວສາໃນບ່ອນນັ້ນ ໆ
ຈົ່ງຕັດອອກເປັນ ໔ ທ່ອນ ປະຈານໄວ້ທີ່ຖະໜົນ
ນັ້ນເປັນຕົວຢ່າງທີ່ບຽດບຽນຊະດົນ

[໑໙] ພວກໂຈນຄາດ (ຜູ້ຂ້າໂຈນ) ຜູ້ມີໃຈດຸຮ້າຍຫຍາບຄາຍ
ບໍ່ມີຄວາມກະລຸນາເຫຼົ່ານັ້ນ ຜູ້ໄດ້ຮັບພຣະຣາດຊະໂອງການໄປບ່ອນນັ້ນ
ເມື່ອເຮົານັ່ງຢູ່ເທິງພຣະເພົາຂອງພຣະມານດາ ກໍດຶງລາກນຳເຮົາໄປ

[໒໐] ເຮົາໄດ້ກ່າວແກ່ເຂົາເຫຼົ່ານັ້ນ
ເຊິ່ງກຳລັງຜູກມັດຢ່າງໝັ້ນຄົງນີ້ວ່າ
ທ່ານທັງຫຼາຍຈົ່ງພາເຮົາໄປເຝົ້າພຣະຣາຊາໂດຍໄວ ຣາດຊະກິດຂອງເຮົາມີຢູ່

[໒໑] ເຂົາເຫຼົ່ານັ້ນ ພາເຮົາໄປເຝົ້າພຣະຣາຊາຜູ້ຊົ່ວ ຄົບແຕ່ຄົນຊົ່ວ
ເຮົາໄປເຝົ້າພຣະຣາຊາແລ້ວ
ທູນໃຫ້ຊົງເຂົ້າພຣະຫະໄທແລະນຳມາສູ່ອຳນາດຂອງເຮົາ

[໒໒] ພຣະບິດາຂໍໃຫ້ເຮົາອົດໂທດ ໃນບ່ອນນັ້ນ
ໄດ້ພຣະຣາດຊະທານສົມບັດອັນຍິ່ງໃຫຍ່ແກ່ເຮົາ
ເຮົານັ້ນທຳລາຍຄວາມມືດມົນແລ້ວ ອອກບວດເປັນບັນພະຊິດ

[໒໓] ຣາດຊະສົມບັດຈະເປັນທີ່ໜ້າຮັງກຽດຂອງເຮົາກໍບໍ່ແມ່ນ
ການໂພຄະຈະເປັນສິ່ງທີ່ເຮົາເພິ່ງຮັງກຽດກໍບໍ່ແມ່ນ
ແຕ່ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງສະລະຣາດຊະສົມບັດ ດັ່ງນີ້ແລ

**ໂສມະນັດສະຈະຣິຍາທີ ໔ ຈົບ**

## ໑. ອະໂຍຄະຣະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະອະໂຍຄະຣະຣາດຊະກຸມານ

[໘໔] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພຣະໂອຣົດຂອງພຣະເຈົ້າກາສີ
ຈະເລີນໄວໃນເຮືອນເຫຼັກ ຈຶ່ງມີນາມວ່າ ອະໂຍຄະຣະ

[໘໕] ພຣະບິດາຕັດວ່າ ເຈົ້າໄດ້ຊີວິດມາຢ່າງລຳບາກ
ຖືກເຈົ້ານາຍລ້ຽງໄວ້ໃນທີ່ແຄບ ລູກເອີຍ ວັນນີ້ຈົ່ງປົກຄອງແຜ່ນດິນທັງໝົດ

[໘໖] ເຮົາປະນົມມືໄຫວ້ກະສັດພ້ອມທັງຊາວແວ່ນແຄວ້ນ
ພ້ອມທັງຊາວນິຄົມ ແລະບໍລິວານຊົນແລ້ວໄດ້ຂາບທູນດັ່ງນີ້ວ່າ

[໘໗] ບັນດາສັດໃນແຜ່ນດິນ ທັງຊັ້ນຕ່ຳ ທັງຊັ້ນສູງ
ແລະປານກາງ ສັດທັງໝົດນັ້ນບໍ່ມີອາຣັກຂາ ຈະເລີນຢູ່
ໃນເຮືອນຂອງຕົນພ້ອມດ້ວຍໝູ່ຍາດຕິພີ່ນ້ອງຂອງຕົນ

[໘໘] ການລ້ຽງດູຂ້າພຣະອົງໃນບ່ອນຄັບແຄບ
ນີ້ເປັນຄວາມປະເສີດໃນໂລກ ຂ້າພຣະອົງເຕີບໂຕຢູ່ໃນເຮືອນເຫຼັກ
ເໝືອນດວງຈັນດວງອາທິດທີ່ບໍ່ມີແສງສະຫວ່າງ

[໘໙] ຂ້າພຣະອົງປະສູດຈາກອຸທອນພຣະມານດາ
ອັນເຕັມດ້ວຍຊາກສົບທີ່ເນົ່າແລ້ວ ຍັງຖືກຂັງໄວ້ໃນເຮືອນເຫຼັກ
ເຊິ່ງມີທຸກຮ້າຍກວ່ານັ້ນສາອີກ

[໑໐] ຂ້າພຣະອົງໄດ້ຮັບຄວາມທຸກຮ້າຍຢ່າງຍິ່ງເຊັ່ນນັ້ນແລ້ວ
ຖ້າຍັງຍິນດີໃນຣາດຊະສົມບັດ ກໍຈະເປັນຜູ້ຊົ່ວຊາມທີ່ສຸດ
ແຫ່ງຄົນທີ່ຊົ່ວຊາມທັງຫຼາຍສາອີກ

[໑໑] ຂ້າພຣະອົງເປັນຜູ້ເບື່ອໜ່າຍທາງກາຍ
ບໍ່ຕ້ອງການຣາດຊະສົມບັດ
ຂ້າພຣະອົງຈະສະແຫວງຫາທຳເຄື່ອງດັບທຸກ
ທີ່ມັດຈຸຣາດຍ່ຳຍີຂ້າພຣະອົງບໍ່ໄດ້

[໑໘] ເຮົາຄິດແນວນີ້ແລ້ວ ເມື່ອມະຫາຊົນບໍ່ໜ່ຽວຮັ້ງໄວ້
ໄດ້ຕັດເຄື່ອງຜູກແລ້ວ ເຂົ້າໄປສູ່ປ່າໃຫຍ່
ເໝືອນຊ້າງທຳລາຍປອກໜີເຂົ້າສູ່ປ່າໃຫຍ່

[໖໓] ພຣະມານດາແລະພຣະບິດາຈະເປັນທີ່ໜ້າຮັງກຽດສຳລັບເຮົາກໍບໍ່ແມ່ນ
ຍົດສັກອັນຍິ່ງໃຫຍ່ຈະເປັນທີ່ໜ້າຮັງກຽດສຳລັບເຮົາກໍບໍ່ແມ່ນ
ແຕ່ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງສະລະຣາດຊະສົມບັດ ດັ່ງນີ້ແລ

**ອະໂຍຄະຣະຈະຣິຍາທີ ໓ ຈົບ**

## ໔. ພິງສະຈະຣິຍາ

### ວ່າດ້ວຍຈະຣິຍາຂອງພິງສະພານ

[໖໔] ອີກເລື້ອງໜຶ່ງ ໃນການທີ່ເຮົາຢູ່ໃນນະຄອນກາສີ
ເຊິ່ງປະເສີດສຸດ ມີນ້ອງຍິງຊາຍ ໗ ຄົນ
ເກີດໃນຕະກູນໂສດຖິຍະພານ

[໖໕] ເຮົາເປັນອ້າຍຂອງນ້ອງຍິງຊາຍເຫຼົ່ານັ້ນ
ປະກອບດ້ວຍຫິຣິແລະທຳຝ່າຍຂາວ
ເຮົາເຫັນພົບໂດຍຄວາມເປັນໄພ
ຈຶ່ງຍິນດີຢ່າງຍິ່ງໃນການອອກບວດ

[໖໖] ພວກສະຫາຍຮ່ວມໃຈຂອງເຮົາ ທີ່ມານດາແລະບິດາສົ່ງມາແລ້ວ
ເຊື້ອເຊີນເຮົາດ້ວຍກາມທັງຫຼາຍວ່າ ເຊີນທ່ານດຳຣົງສະກຸນເທີ້ນ

[໖໗] ຄຳໃດທີ່ສະຫາຍເຫຼົ່ານັ້ນກ່າວແລ້ວ
ເປັນເຄື່ອງນຳສຸກມາໃຫ້ໃນທຳຂອງຄະລືຫັດ
ຄຳນັ້ນເປັນເໝືອນຄຳຫຍາບ ສະເໝີດ້ວຍຜານໄຖທີ່ຮ້ອນສຳລັບເຮົາ

[໖໘] ໃນຄັ້ງນັ້ນ ເຮົາປະຕິເສດຢູ່
ສະຫາຍເຫຼົ່ານັ້ນໄດ້ຖາມເຖິງຄວາມປາຖະໜາຂອງເຮົາວ່າ
ທ່ານປາຖະໜາອັນໃດນໍ ເພື່ອນ
ຖ້າທ່ານບໍ່ບໍຣິໂພກກາມ

[໖໙] ເຮົາຜູ້ຕ້ອງການປະໂຫຍດແກ່ຕົນ ໄດ້ກ່າວແກ່ສະຫາຍ
ຜູ້ສະແຫວງຫາປະໂຫຍດເຫຼົ່ານັ້ນວ່າ
ເຮົາບໍ່ປາຖະໜາຄວາມເປັນຄະລືຫັດ
ເຮົາຍິນດີຢ່າງຍິ່ງໃນການອອກບວດ

[໔໐] ສະຫາຍເຫຼົ່ານັ້ນຟັງຄຳເຮົາແລ້ວ
ໄດ້ບອກແກ່ມານດາແລະບິດາ
ມານດາແລະບິດາໄດ້ກ່າວແນວນີ້ວ່າ
ລູກຜູ້ຈະເລີນ ແມ່ນເຮົາທັງ ໒ ກໍຈະບວດ

[໔໑] ມານດາແລະບິດາຂອງເຮົາທັງ ໒
ແລະນ້ອງຍິງຊາຍທັງ ໗ ຂອງເຮົາ
ລະຖິ້ມຊັບນັບບໍ່ຖ້ວນ
ແລ້ວເຂົ້າໄປສູ່ປ່າໃຫຍ່ ດັ່ງນີ້ແລ

**ພິງສະຈະຣິຍາທີ ໔ ຈົບ**

## ໕. ໂສນະນັນທະປັນດິຕະຈະຣິຍາ

### ວ່າດ້ວຍຈະຣິຍາຂອງໂສນະນັນທະບັນດິດ

[໔໒] ອີກເລື້ອງໜຶ່ງ ໃນການທີ່ເຮົາເກີດໃນຕະກູນມະຫາສານ
ເຊິ່ງປະເສີດສຸດ ຢູ່ໃນນະຄອນພົມວັດທະນະ

[໔໓] ໃນຄັ້ງນັ້ນ ເຮົາເຫັນສັດໂລກເປັນຜູ້ບອດຖືກຄວາມມືດຄອບງຳ
ຈິດຂອງເຮົາເບື່ອໜ່າຍຈາກພົບ
ເໝືອນຊ້າງທີ່ຖືກສັບດ້ວຍກຳລັງຂໍມີຄວາມສະລົດໃຈ
[໔໔] ເຮົາເຫັນຄວາມຊົ່ວຕ່າງ ໆ ຈຶ່ງຄິດແນວນີ້ ໃນການນັ້ນວ່າ
ເມື່ອໃດ ເຮົາຈຶ່ງຈະອອກໄປຈາກເຮືອນແລ້ວເຂົ້າປ່າໃຫຍ່ໄດ້
[໔໕] ແມ່ນໃນຄັ້ງນັ້ນ ພວກຍາດຕິພີ່ນ້ອງກໍເຊື້ອເຊີນເຮົາດ້ວຍການໂພຄະທັງຫຼາຍ
ເຮົາໄດ້ບອກຄວາມພໍໃຈແມ່ນແກ່ເຂົາເຫຼົ່ານັ້ນວ່າ
ຢ່າເຊື້ອເຊີນເຮົາດ້ວຍສິ່ງເຫຼົ່ານັ້ນເລີຍ
[໔໖] ນ້ອງຊາຍຂອງເຮົາເປັນບັນດິດຊື່ວ່າ ນັນທະ
ແມ່ນເຂົາກໍໄປຕາມເຮົາ ພໍໃຈການບັນພະຊາ

[໔໗] ແມ່ນໃນຄັ້ງນັ້ນ ເຮົາຄືໂສນະບັນດິດ ນັນທະບັນດິດ
ມານດາແລະບິດາທັງ ໒ ຂອງເຮົາ
ກໍລະຖິ້ມໂພຄະທັງຫຼາຍແລ້ວເຂົ້າປ່າໃຫຍ່ ດັ່ງນີ້ແລ

**ໂສນະນັນທະບັນດິດຈະຣິຍາທີ ໕ ຈົບ**

# ໖. ມູຄະປັກຂະຈະຣິຍາ

## ວ່າດ້ວຍພຣະຈະຣິຍາຂອງພຣະມູຄະປັກຂະກຸມານ

[໔໗] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພຣະໂອຣົດຂອງພຣະເຈົ້າກາສີ
ຊົນທັງຫຼາຍຮຽກເຮົາໂດຍຊື່ວ່າ ມູຄະປັກຂະກຸມານແດ່ ເຕມິຍະກຸມານແດ່

[໔໙] ໃນຄັ້ງນັ້ນ ນາງສະໜົມກຳນັນ ໑໖,໐໐໐ ນາງ ບໍ່ມີພຣະຣາດຊະໂອຣົດ
ໂດຍວັນຄືນລ່ວງໄປ ໆ ເຮົາເກີດຂຶ້ນພຽງຜູ້ດຽວ

[໕໐] ພຣະຣາດຊະບິດາຮັບສັ່ງໃຫ້ກັ້ງສະເວດຕະສັດ
ໃຫ້ລ້ຽງດູເຮົາຜູ້ເປັນບຸດສຸດທີ່ຮັກເຊິ່ງໄດ້ໂດຍຍາກ
ເປັນອະພິຊາຕະບຸດ ຊົງໄວ້ເຊິ່ງຄວາມຮຸ່ງເຮືອງ ເທິງບ່ອນນອນ

[໕໑] ໃນຄັ້ງນັ້ນ ເຮົານອນຫຼັບຢູ່ເທິງບ່ອນນອນອັນອ່ອນນຸ້ມ
ຕື່ນຂຶ້ນແລ້ວໄດ້ເຫັນສະເວດຕະສັດ ເຊິ່ງເປັນເຫດໃຫ້ເຮົາຕົກນະຮົກ

[໕໒] ຄວາມສະດຸ້ງຢ້ານກົວ ເກີດຂຶ້ນແລ້ວແກ່ເຮົາ
ພ້ອມກັບໄດ້ເຫັນສະເວດຕະສັດ ເຮົາເຖິງຄວາມຕັດສິນໃຈວ່າ
ເມື່ອໃດນໍ ເຮົາຈຶ່ງຈະເປື້ອງຣາດຊະສົມບັດນີ້ໄດ້

[໕໓] ເທວະດາຜູ້ເປັນສາຍເລືອດຂອງເຮົາມາກ່ອນ
ຜູ້ຕ້ອງການປະໂຫຍດຕໍ່ເຮົາ ເຫັນເຮົາປະສົບທຸກ
ຈຶ່ງແນະນຳເຮົາໃຫ້ປະກອບໃນເຫດ ໓ ປະການວ່າ

[໕໔] ທ່ານຈົ່ງຢ່າສະແດງຄວາມເປັນບັນດິດ
ຈົ່ງສະແດງຄວາມເປັນຄົນໂງ່ແກ່ຊົນທັງປວງ
ຊົນທັງໝົດກໍຈະດູໝິ່ນທ່ານ
ປະໂຫຍດຈັກສຳເລັດແກ່ທ່ານດ້ວຍອາການແນວນີ້

[໕໕] ເມື່ອເທວະດາກ່າວຢ່າງນີ້ແລ້ວ ເຮົາໄດ້ກ່າວດັ່ງນີ້ວ່າ
ເທວະດາ ຂ້າພະເຈົ້າຈະເຮັດຕາມຄຳທີ່ທ່ານກ່າວກັບເຮົາ
ທ່ານເປັນຜູ້ປາຖະໜາປະໂຫຍດ
ເປັນຜູ້ຕ້ອງການຄວາມເກື້ອກູນແກ່ເຮົາ

[໕໖] ເມື່ອເຮົາໄດ້ຟັງຄຳຂອງເທວະດານັ້ນແລ້ວ

ເໝືອນໄດ້ພົບຝັ່ງໃນສາຄອນ ຮ່າເຮີງ ຕື້ນຕັນໃຈ
ໄດ້ອະທິຖານອົງ ໓ ປະການ

[໘໗] ຄື ເຮົາເປັນຄົນໃບ້ ເປັນຄົນຫູໜວກ
ເປັນຄົນງ່ອຍເປ້ຍ ເວັ້ນຈາກຄະຕິ
ເຮົາອະທິຖານອົງ ໓ ປະການນີ້ຢູ່ ໑໖ ປີ

[໘໘] ໃນຄັ້ງນັ້ນ ເສນາບໍດີເປັນຕົ້ນກວດເບິ່ງມືຕີນລີ້ນ ແລະຊ່ອງຫູຂອງເຮົາແລ້ວ
ເຫັນຄວາມບໍ່ບົກຜ່ອງຂອງເຮົາກໍຕິຽນວ່າ ເປັນຄົນກາລະກິນີ

[໘໙] ແຕ່ນັ້ນ ຊາວຊົນນະບົດ ເສນາບໍດີ ແລະປຸໂຣຫິດທັງປວງ
ຮ່ວມໃຈກັນທັງໝົດ ດີໃຈການທີ່ຮັບສັ່ງໃຫ້ນຳໄປຖິ້ມ

[໙໐] ເຮົານັ້ນໄດ້ຟັງຄວາມປະສົງຂອງເສນາບໍດີເປັນຕົ້ນນັ້ນແລ້ວ
ຮ່າເຮີງ ຕື້ນຕັນໃຈວ່າ ເຮົາປະພຶດຕະບະມາເພື່ອປະໂຫຍດໃດ
ປະໂຫຍດນັ້ນສຳເລັດແລ້ວແກ່ເຮົາ

[໙໑] ຮາດຊະບຸຣຸດທັງຫຼາຍອາບນ້ຳໃຫ້ເຮົາ
ລູບທາດ້ວຍຂອງຫອມ ສວມຮາດຊະມົງກຸດຮາຊາພິເສກແລ້ວ
ໃຫ້ກັ້ງສະເວດຕະສັດກະທຳປະທັກຂິນນະຄອນ

[໙໒] ໃຫ້ກັ້ງໄວ້ ໗ ວັນ ພໍດວງອາທິດອຸໄທ
ນາຍສາຣະຖີກໍອຸ້ມເຮົາຂຶ້ນລົດ ເຂົ້າໄປສູ່ປ່າ

[໙໓] ນາຍສາຣະຖີຢຸດລົດໄວ້ ໃນໂອກາດໜຶ່ງ
ປ່ອຍລົດຫຼຽມມ້າພົ້ນມືກໍຂຸດຂຸມເພື່ອຈະຝັງເຮົາໃນແຜ່ນດິນສາ

[໙໔] ພຣະມະຫາກະສັດຊົງຄຸກຄາມການອະທິຖານ
ທີ່ເຮົາອະທິຖານໄວ້ດ້ວຍເຫດຕ່າງ ໆ
ແຕ່ເຮົາກໍບໍ່ທຳລາຍການອະທິຖານນັ້ນເດັດຂາດ
ຍ້ອນເຫດແຫ່ງພຣະໂພທິຍານເທົ່ານັ້ນ

[໙໕] ພຣະມານດາແລະພຣະບິດາຈະເປັນທີ່ໜ້າຮັງກຽດສຳລັບເຮົາກໍບໍ່ແມ່ນ
ຕົນຂອງເຮົາຈະເປັນທີ່ໜ້າຮັງກຽດກໍບໍ່ແມ່ນ

ແຕ່ຍ້ອນພຣະສັບພັນຍຸຕະຍານເປັນທີ່ຮັກຂອງເຮົາ
ຍ້ອນແນວນັ້ນ ເຮົາຈຶ່ງອະທິຖານອົງ ໘ ປະການນີ້

[໖໖] ເຮົາອະທິຖານອົງ ໘ ປະການນີ້ຢູ່ ໑໖ ປີ
ບຸກຄົນມີອະທິຖານສະເໝີເຮົາບໍ່ມີ
ນີ້ເປັນອະທິຖານປາຣະມີຂອງເຮົາ ດັ່ງນີ້ແລ

**ມູຄະປັກຂະຈະຣິຍາທີ ໖ ຈົບ**

## ໗. ກະປິລະຣາຊະຈະຣິຍາ

### ວ່າດ້ວຍຈະຣິຍາຂອງພະຍາວານອນ

[໖໗] ໃນການທີ່ເຮົາເປັນພະຍາວານອນ ຢູ່ ໃນຮ່ອມພູໃກ້ຝັ່ງແມ່ນ້ຳ
ໃນຄັ້ງນັ້ນ ເຮົາຖືກແຂ້ບຽດບຽນໄປໃສບໍ່ໄດ້

[໖໘] ເຮົາຢືນຢູ່ໃນ ໂອກາດໃດ ໂດດຈາກຝັ່ງນີ້ໄປຝັ່ງນັ້ນ
ແຂ້ເປັນສັດດຸຮ້າຍ ສະແດງຄວາມເປັນຕາຢ້ານຢູ່ໃນໂອກາດນັ້ນ

[໖໙] ແຂ້ນັ້ນກ່າວກັບເຮົາວ່າ ມາເທີ້ນ
ແມ່ນເຮົາກໍກ່າວກັບແຂ້ນັ້ນວ່າ ແມ່ນເຮົາກໍຈະໄປ ດັ່ງນີ້
ໂດດລົງຢຽບຫົວແຂ້ນັ້ນແລ້ວ ໄປຢືນຢູ່ທີ່ຝັ່ງນັ້ນ

[໗໐] ເຮົາບໍ່ໄດ້ເຮັດຕາມຄຳຂອງແຂ້ທີ່ກ່າວຫຼອກລວງນັ້ນກໍບໍ່ແມ່ນ
ບຸກຄົນມີສັດຈະສະເໝີເຮົາບໍ່ມີ ນີ້ເປັນສັດຈະປາຣະມີຂອງເຮົາ ດັ່ງນີ້ແລ

**ກະປິລະຣາຊະຈະຣິຍາທີ ໗ ຈົບ**

## ໘. ສັດຈະສະວະຫະຍະປັນດິຕະຈະຣິຍາ

### ວ່າດ້ວຍຈະຣິຍາຂອງດາບົດຜູ້ເປັນບັນດິດຊື່ວ່າ ສັດຈະ

[໗໑] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນດາບົດນາມວ່າສັດຈະ
ເຮົາຮັກສາສັດໂລກໄວ້ດ້ວຍຄຳສັດ ໄດ້ເຮັດໝູ່ຊົນໃຫ້ສາມັກຄີກັນ ດັ່ງນີ້ແລ

**ສັດຈະສະວະຫະຍະປັນດິຕະຈະຣິຍາທີ ໘ ຈົບ**

# ໗. ວັດຕະກະໂປຕະກະຈະຣິຍາ

## ວ່າດ້ວຍຈະຣິຍາຂອງລູກນົກຄຸ່ມ

[໗໔] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນລູກນົກຄຸ່ມ ຍັງອ່ອນ
ຂົນຍັງບໍ່ປົ່ງ ເປັນດັ່ງຕ່ອນຊີ້ນ ຢູ່ໃນຮັງ ໃນມະຄົດຊົນນະບົດ

[໗໕] ມານດາເອົາຈະງອຍປາກຄາບເຫຍື່ອມາລ້ຽງເຮົາ
ເຮົາເປັນຢູ່ດ້ວຍຜັດສະຂອງມານດາ
ກຳລັງກາຍຂອງເຮົາຍັງບໍ່ມີ

[໗໖] ໃນລະດູຮ້ອນທຸກ ໆ ປີ ມີໄຟປ່າໄໝ້ລຸກລາມມາ
ໄຟປ່າເປັນທາງດຳລຸກລາມມາໃກ້ເຮົາ

[໗໗] ໄຟກຳລັງໄໝ້ ມີແປວສ່ອງແສງ ສົ່ງສຽງດັງ
ກຳລັງລາມມາໃກ້ເຮົາໂດຍລຳດັບ

[໗໘] ມານດາແລະບິດາຂອງເຮົາຕົກໃຈ ສະດຸ້ງຢ້ານ
ຍ້ອນຢ້ານໄຟທີ່ໄໝ້ມາໂດຍໄວ
ຈຶ່ງຖິ້ມເຮົາໄວ້ໃນຮັງໜີເອົາຕົວລອດໄປ

[໗໗] ເຮົາຢຽດຕີນ ກາງປີກອອກຮູ້ວ່າ ກຳລັງກາຍຂອງເຮົາບໍ່ມີ
ເຮົານັ້ນໄປບໍ່ໄດ້ ຢູ່ໃນຮັງນັ້ນເອງ ຈຶ່ງຄິດແນວນີ້ໃນການນັ້ນວ່າ

[໗໙] ເມື່ອກ່ອນເຮົາສະດຸ້ງຫວາດຫວັ່ນ
ເພິ່ງເຂົ້າໄປຊ່ອນຕົວຢູ່ໃນລະຫວ່າງປີກຂອງມານດາແລະບິດາ
ບັດນີ້ ມານດາແລະບິດາຖິ້ມເຮົາໜີໄປສາແລ້ວ
ວັນນີ້ເຮົາຈະເຮັດແນວໃດ

[໗໙] ສີນຄຸນ ຄວາມສັດຄວາມສະອາດ
ແລະຄວາມອີດູ ຍັງມີຢູ່ໃນໂລກ
ດ້ວຍຄວາມສັດນັ້ນ ເຮົາຈັກເຮັດສັດຈະກິຣິຍາອັນປະເສີດ

[໘໐] ເຮົາຣະລຶກເຖິງພຣະພຸດທະເຈົ້າ ຜູ້ພິຊິດມານເຊິ່ງມີໃນກ່ອນ
ຄຳນຶງເຖິງກຳລັງພຣະທຳ ໄດ້ທຳສັດຈະກິຣິຍາ
ເພື່ອຝືນຄືກຳລັງຄວາມສັດວ່າ

[໗໑] ປີກຂອງເຮົາມີຢູ່ ແຕ່ບິນບໍ່ມີ ຕີນຂອງເຮົາມີຢູ່
ແຕ່ຍັງຍ່າງບໍ່ໄດ້ ມານດາແລະບິດາກໍພາກັນບິນອອກໄປແລ້ວ
ໄຟເອີຍ ຈົ່ງກັບໄປ (ຈົ່ງດັບມອດໄປສາ)

[໗໘] ພ້ອມກັບເມື່ອເຮົາເຮັດສັດຈະກິຣິຍາ
ແປວໄຟທີ່ລຸກສ່ອງແສງເວັ້ນທີ່ໄວ້ ໑໖ ກີດ
ເໝືອນແປວໄຟທີ່ຈຸ່ມນ້ຳ ບຸກຄົນມີສັດຈະສະເໝີເຮົາບໍ່ມີ
ນີ້ເປັນສັດຈະປາຣະມີຂອງເຮົາ ດັ່ງນີ້ແລ

**ວັດຕະກະໂປຕະກະຈະຣິຍາທີ ໙ ຈົບ**

## ໑໐. ມັດສະຣາຊະຈະຣິຍາ

**ວ່າດ້ວຍຈະຣິຍາຂອງພະຍາປາ**

[໗໙] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພະຍາປາຢູ່ໃນສະໃຫຍ່
ນ້ຳໃນສະແຫ້ງຂອດ ຍ້ອນແສງດວງອາທິດໃນລະດູຮ້ອນ

[໗໔] ຍາມນັ້ນ ກາ ແຮ້ງ ນົກກະສາ ນົກຕະກຸມ ແລະແຫຼວ
ມາຄອຍຖ້າຫາປາກິນທັງກາງເວັນແລະກາງຄືນ

[໗໕] ໃນຄັ້ງນັ້ນ ເຮົາກັບໝູ່ຍາດຕິພີ່ນ້ອງຖືກບຽດບຽນຈຶ່ງຄິດແນວນີ້ວ່າ
ໂດຍອຸບາຍອັນໃດນໍ ໝູ່ຍາດຕິພີ່ນ້ອງຈະເພິ່ງພົ້ນທຸກໄດ້

[໗໖] ເຮົາຄິດເຖິງເຫດແລະຜົນແລ້ວ
ໄດ້ເຫັນສັດຈະວ່າເປັນບ່ອນເພິ່ງໄດ້
ຈຶ່ງຕັ້ງຢູ່ໃນຄວາມສັດແລ້ວ
ເປື້ອງຄວາມພິນາດໃຫຍ່ຂອງໝູ່ຍາດຕິພີ່ນ້ອງນັ້ນໄດ້

[໗໗] ເຮົາຣະລຶກທຳຂອງສັດຕະບຸຣຸດ ຄິດເຖິງປະຣະມັດຖະທຳ
ໄດ້ທຳສັດຈະກິຣິຍາ
ເຊິ່ງເປັນທຳອັນຍັ່ງຍືນທ່ຽງແທ້ໃນໂລກ

[໗໗] ຕັ້ງແຕ່ເຮົາຈຳຄວາມໄດ້ ຕັ້ງແຕ່ເຮົາຮູ້ດຽງສາໄດ້ມາຈົນເຖິງບັດນີ້
ເຮົາບໍ່ຮູ້ສຶກວ່າຈິງໃຈບຽດບຽນສັດແມ່ນຕົວໜຶ່ງເລີຍ

[໗໙]　ດ້ວຍສັດຈະວາຈານີ້ ຂໍເມກຈົ່ງເຮັດຝົນຫ່າໃຫຍ່ໃຫ້ຕົກ
ເມກເອີຍ ທ່ານຈົ່ງຄຳຣາມ
ຈົ່ງເຮັດຂຸມຊັບຂອງກາໃຫ້ພິນາດໄປ
ທ່ານຈົ່ງເຮັດກາໃຫ້ຕອມຕົນດ້ວຍຄວາມໂສກ
ຈົ່ງປົດເປື້ອງຝູງປາຈາກຄວາມໂສກ

[໘໐]　ພ້ອມກັບເມື່ອເຮົາເຮັດສັດຈະອັນປະເສີດ
ເມກສົ່ງສຽງສະໜັ່ນນອງນັນ ເຮັດຝົນໃຫ້ຕົກ
ບຶດດຽວ ກໍເຕັມທັງບ່ອນໂນນແລະບ່ອນລຸ່ມ

[໘໑]　ເມື່ອເຮົາເຮັດສັດຈະອັນປະເສີດເຫັນປານນີ້
ອັນເປັນຄວາມພຽນອັນສູງສຸດ ອາໄສກຳລັງເດດຄວາມສັດ
ບັນດານຝົນຫ່າໃຫຍ່ໃຫ້ຕົກ ບຸກຄົນມີສັດຈະສະເໝີເຮົາບໍ່ມີ
ນີ້ເປັນສັດຈະປາຣະມີຂອງເຮົາ ດັ່ງນີ້ແລ

**ມັດສະຣາຊະຈະຣິຍາທີ ໑໐ ຈົບ**

## ໑໑. ກັນຫະທີປາຍະນະຈະຣິຍາ

### ວ່າດ້ວຍຈະຣິຍາຂອງກັນຫະທີປາຍະນະດາບົດ

[໘໒]　ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນລືສີນາມວ່າກັນຫະທີປາຍະນະ
ເຮົາບໍ່ຍິນດີປະພຶດພົມມະຈັນເກີນກວ່າ ໕໐ ປີ

[໘໓]　ໃຜ ໆ ຈະຮູ້ໃຈເຮົາທີ່ບໍ່ຍິນດີປະພຶດພົມມະຈັນນັ້ນຫາບໍ່ໄດ້
ແມ່ນເຮົາກໍບໍ່ບອກແກ່ໃຜ ໆ ວ່າ ຄວາມບໍ່ຍິນດີ
ແລະຄວາມຍິນດີມີໃນໃຈຂອງເຮົາ

[໘໔]　ສະຫາຍເພື່ອນພົມມະຈາຣີຂອງເຮົາຊື່ວ່າ ມັນທັບພະຍະ
ເປັນລືສີມີອານຸພາບຫຼາຍ
ປະກອບດ້ວຍບຸບພະກຳ (ກຳເກົ່າໃຫ້ຜົນ)
ຖືກຫຼາວສຽບ

[໘໕]　ເຮົາຊ່ວຍເຫຼືອປິ່ນປົວມັນທັບພະຍະດາບົດນັ້ນໃຫ້ຫາຍໂຣກແລ້ວ
ໄດ້ອຳລາກັບມາຍັງອາສົມຂອງເຮົາເອງ

[໙໖] ພານຜູ້ເປັນສະຫາຍຂອງເຮົາ ໄດ້ພາພະຣິຍາແລະບຸດ
ທັງ ໓ ຄົນພ້ອມໃຈກັນເປັນແຂກຂອງເຮົາ

[໙໗] ເຮົານັ່ງເຈຣະຈາປາໄສກັບສະຫາຍ
ແລະພັນລະຍາຂອງເຂົາຢູ່ໃນອາສົມຂອງຕົນ
ເດັກໂຍນລູກຂ່າງຫຼິ້ນຢູ່ ເຮັດໃຫ້ອະສໍຣະພິດໂກດແລ້ວ

[໙໘] ຄາວນັ້ນ ເດັກນັ້ນໃຊ້ມືຄວານຫາຕາມທາງທີ່ລູກຂ່າງໝຸນໄປ
ມືໄປຖືກຫົວອະສໍຣະພິດເຂົ້າ

[໙໙] ພໍໄປຖືກຫົວຂອງມັນ ງູກໍໂກດ
ມັນເຄືອງຈົນເຫຼືອຈະອົດກັ້ນອາໄສກຳລັງພິດ ໄດ້ກັດເດັກທັນທີ

[໑໐໐] ເດັກຖືກງູມີພິດກ້າກັດ ລົ້ມລົງຢູ່ພື້ນດິນ
ເຫດນັ້ນ ເຮົາເປັນຜູ້ໄດ້ຮັບທຸກ
ຫຼືວ່າທຸກນັ້ນເນື່ອງຈາກເຮົາ

[໑໐໑] ເຮົາໄດ້ປອບມານດາແລະບິດາຂອງເດັກນັ້ນ
ຜູ້ມີທຸກເສົ້າໂສກໃຫ້ເບົາໃຈແລ້ວ
ໄດ້ເຮັດສັດຈະກິຣິຍາອັນປະເສີດສຸດເທື່ອທຳອິດວ່າ

[໑໐໒] ເຮົາຜູ້ຕ້ອງການບຸນ ໄດ້ປະພຶດພົມມະຈັນ
ມີຈິດເຫຼື້ອມໃສຢູ່ພຽງ ໗ ວັນເທົ່ານັ້ນ
ຕໍ່ຈາກນັ້ນ ການປະພຶດຂອງເຮົາມີມາເກີນ ໕໐ ປີນີ້

[໑໐໓] ເຮົາບໍ່ປາຖະໜາເລີຍ ແຕ່ກໍຍັງປະພຶດຢູ່
ດ້ວຍສັດຈະນີ້ ຂໍຄວາມສະຫວັດດີຈົ່ງມີແກ່ເດັກນີ້
ພິດຈົ່ງຣະງັບ ຍັນຍະທັດຕະກຸມານຈົ່ງເປັນຢູ່ເທີ້ນ

[໑໐໔] ພ້ອມກັບເມື່ອເຮົາເຮັດສັດຈະກິຣິຍາ
ມານົບເຊິ່ງສັ່ນເຊນດ້ວຍກຳລັງພິດ
ກໍຮູ້ສຶກຕົວ ລຸກຂຶ້ນໄດ້ ແລະຫາຍໂຣກ
ບຸກຄົນມີສັດຈະສະເໝີເຮົາບໍ່ມີ
ນີ້ເປັນສັດຈະປາຣະມີຂອງເຮົາ ດັ່ງນີ້ແລ

**ກັນທະທີປາຍະນະຈະຣິຍາທີ ໑໑ ຈົບ**

# ໑໘. ສຸຕະໂສມະຈະຣິຍາ

## ວ່າດ້ວຍຈະຣິຍາຂອງພຣະເຈົ້າສຸຕະໂສມ

[໑໐໕] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພຣະເຈົ້າແຜ່ນດິນນາມວ່າສຸຕະໂສມ
ຖືກພຣະຍາໂປຣິສາດຈັບຕົວໄປໄດ້
ຣະລຶກເຖິງຄຳຜັດພັ້ນໄວ້ກັບພາມ (ໂປຣິສາດ)

[໑໐໖] ພຣະຍາໂປຣິສາດໃຊ້ເຊືອກຮ້ອຍຝາມືກະສັດ ໑໐໑ ພຣະອົງໄວ້ແລ້ວ
ເຮັດກະສັດເຫຼົ່ານັ້ນໃຫ້ເມື່ອຍລ້າແລ້ວ
ເມື່ອຕ້ອງການຈະບູຊາໃຫ້ສຳເລັດຈຶ່ງນຳເຮົາເຂົ້າໄປ

[໑໐៣] ພຣະຍາໂປຣິສາດໄດ້ຖາມເຮົາວ່າ
ທ່ານປາຖະໜາຈະໃຫ້ປ່ອຍແມ່ນບໍ
ຖ້າທ່ານຈະກັບມາຫາເຮົາ
ເຮົາຈັກເຮັດຕາມໃຈມັກຂອງທ່ານ

[໑໐៤] ເຮົາຮັບຄຳພຣະຍາໂປຣິສາດນັ້ນວ່າ
ການກັບມາຂອງເຮົາມີປັນຍາບໍ
ແລ້ວເຂົ້າໄປສູ່ນະຄອນທີ່ໜ້າອອນຊອນ
ມອບຣາດຊະສົມບັດແລ້ວ ໃນການນັ້ນ

[໑໐៩] ຍ້ອນເຮົາຣະລຶກເຖິງທຳຂອງສັດຕະບຸຣຸດ ເປັນຂອງເກົ່າ
ອັນພຣະຊິນນະເຈົ້າເປັນຕົ້ນເສບແລ້ວ
ໃຫ້ຊັບແກ່ພາມແລ້ວ
ຈຶ່ງເຂົ້າໄປຫາພຣະຍາໂປຣິສາດ

[໑໑໐] ໃນການກັບມາຍັງສຳນັກຂອງພຣະຍາໂປຣິສາດນັ້ນ
ເຮົາບໍ່ມີຄວາມສົງໄສວ່າຈັກຖືກຂ້າຫຼືບໍ່
ເຮົາຕາມຮັກສາສັດຈະວາຈາ ຍອມສະລະຊີວິດເຂົ້າໄປຫາພຣະຍາໂປຣິສາດ
ບຸກຄົນມີສັດຈະສະເໝີເຮົາບໍ່ມີ ນີ້ເປັນສັດຈະປາຣະມີຂອງເຮົາ ດັ່ງນີ້ແລ

**ສຸຕະໂສມະຈະຣິຍາທີ ໑໘ ຈົບ**

## ໑໓. ສຸວັນນະສາມະຈະຣິຍາ

### ວ່າດ້ວຍຈະຣິຍາຂອງພຣະສຸວັນນະສາມດາບົດ

[໑໑໑] ໃນການທີ່ເຮົາເປັນດາບົດຊື່ສາມະ ຖືກທ້າວສັກກະເຊື້ອເຊີນມາຢູ່ໃນປ່າ
ເຮົາກັບຣາດຊະສີແລະເສືອໂຄ່ງໃນປ່າໃຫຍ່
ຕ່າງນ້ອມເມດຕາເຂົ້າຫາກັນ
(ເຮົາເຂົ້າໃກ້ຣາດຊະສີແລະເສືອໂຄ່ງໃນປ່າໃຫຍ່ໄດ້ດ້ວຍເມດຕາ)

[໑໑໒] ເຮົາແວດລ້ອມດ້ວຍຣາດຊະສີ ເສືອໂຄ່ງ ເສືອເຫຼືອງ
ໝີ ຄວາຍ ກວາງ ຟານ ແລະໝູປ່າ ຢູ່ໃນປ່າໃຫຍ່

[໑໑໓] ສັດອັນໃດ ໆ ບໍ່ໄດ້ສະດຸ້ງຢ້ານເຮົາ
ແມ່ນເຮົາກໍບໍ່ໄດ້ຢ້ານສັດອັນໃດ ໆ
ຍ້ອນເຮົາມີກຳລັງເມດຕາຄ້ຳຈຸນ
ຈຶ່ງຍິນດີຢູ່ໃນປ່າ ໃນການນັ້ນ ດັ່ງນີ້ແລ

**ສຸວັນນະສາມະຈະຣິຍາທີ ໑໓ ຈົບ**

## ໑໔. ເອກະຣາຊະຈະຣິຍາ

### ວ່າດ້ວຍພຣະຈະຣິຍາຂອງພຣະເຈົ້າເອກກະຣາດ

[໑໑໔] ອີກເລື້ອງໜຶ່ງ ໃນການທີ່ເຮົາເປັນພຣະຣາຊາ
ຜາກົດນາມວ່າເອກກະຣາດ ໃນຄັ້ງນັ້ນ ເຮົາອະທິຖານສິນທີ່ບໍລິສຸດຍິ່ງ
ປົກຄອງແຜ່ນດິນໃຫຍ່

[໑໑໕] ສະມາທານກຸສົນກຳມະບົດ ໑໐ ປະການ
ປະພຶດໂດຍບໍ່ມີເສດ
ສົງເຄາະມະຫາຊົນດ້ວຍສັງຄະຫະວັດຖຸ ໔ ປະການ

[໑໑໖] ເມື່ອເຮົາເປັນຜູ້ບໍ່ຜະໝາດປະໂຫຍດໃນໂລກນີ້
ແລະປະໂຫຍດໃນໂລກໜ້າ ດ້ວຍອາການຢ່າງນີ້
ພຣະເຈົ້າໂກສົນພຣະນາມວ່າທັບພະເສນ ມາຊີງເອົານະຄອນຂອງເຮົາໄປ

[໑໑໗] ຊິງເຮັດຂ້າຣາດການ ຊາວນິຄົມ ພ້ອມດ້ວຍທະຫານ ຊາວຊົນນະບົດ
ໃຫ້ຢູ່ໃນເງື້ອມພຣະຫັດໝົດແລ້ວ ຕັດສັ່ງໃຫ້ຝັງເຮົາໃນຂຸມ

[໑໑໘] ເຮົາເຫັນໝູ່ອຳມາດທີ່ແຍ່ງຊິງຣາດຊະສົມບັດ
ທີ່ນັ່ງຄັ່ງພາຍໃນນະຄອນເຮົາໄປ ເໝືອນບຸດທີ່ຮັກ
ບຸກຄົນນີເມດຕາສະເໝີເຮົາບໍ່ມີ
ນີ້ເປັນເມດຕາປາຣະມີຂອງເຮົາ ດັ່ງນີ້ແລ

**ເອກະຣາຊະຈະຣິຍາທີ ໑໔ ຈົບ**

## ໑໕. ມະຫາໂລມະຫັງສະຈະຣິຍາ

**ວ່າດ້ວຍຈະຣິຍາຂອງມະຫາໂລມະຫັງສະບັນດິດ**

[໑໑໙] ເຮົານອນຢູ່ໃນປ່າຊ້າ ເອົາຊາກສົບເຊິ່ງມີແຕ່ກະດູກ ເຮັດເປັນໝອນໜຸນ
ເດັກຊາວບ້ານພວກໜຶ່ງ ພາກັນສະແດງອາການຫຍາບຊ້າດຸຮ້າຍມານັບການ

[໑໒໐] ອີກພວກໜຶ່ງຮ່າເຮີງດີໃຈ ພາກັນນຳຂອງຫອມ ດອກໄມ້ ອາຫານ
ແລະເຄື່ອງບັນນາການຕ່າງ ໆ ເປັນຈຳນວນຫຼາຍມາໃຫ້ເຮົາ

[໑໒໑] ພວກໃດນຳທຸກມາໃຫ້ເຮົາ ແລະພວກໃດນຳສຸກມາໃຫ້ເຮົາ
ເຮົາເປັນຜູ້ສະເໝີແກ່ເຂົາທັງໝົດ ບໍ່ມີຄວາມອີດູ ບໍ່ມີຄວາມໂກດ

[໑໒໒] ເຮົາເປັນຜູ້ວາງເສີຍໃນສຸກແລະທຸກ ໃນຍົດແລະຄວາມເສື່ອມຍົດ
ເປັນຜູ້ສະເໝີໃນສິ່ງທັງປວງ
ນີ້ເປັນອຸເປກຂາປາຣະມີຂອງເຮົາ ດັ່ງນີ້ແລ

**ມະຫາໂລມະຫັງສະຈະຣິຍາທີ ໑໕ ຈົບ**

**ຍຸທັນຊະຍະວັກທີ ໓ ຈົບ**

## ລວມຈະຣິຍາທີ່ມີໃນວັກນີ້ຄື

ເຮົາຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ໄດ້ປະພຶດຈະຣິຍາດັ່ງນີ້ ຄື

໑. ຍຸທັນຊະຍະຈະຣິຍາ

໒. ໂສມະນັດສະຈະຣິຍາ

໓. ອະໂຍຄະຣະຈະຣິຍາ

໔. ພິງສະຈະຣິຍາ

໕. ໂສນະນັນທະປັນດິຕະຈະຣິຍາ
໗. ກະປິລະຣາຊະຈະຣິຍາ
໙. ວັດຕະກະໂປຕະກະຈະຣິຍາ
໑໑. ກັນທະທີປາຍະນະຈະຣິຍາ
໑໓. ສຸວັນນະສາມະຈະຣິຍາ
໑໕. ມະຫາໂລມະຫັງສະຈະຣິຍາ
໖. ມູຄະປັກຂະຈະຣິຍາ
໘. ສັດຈະສະວະຫະຍະປັນດິຕະຈະຣິຍາ
໑໐. ມັດສະຣາຊະຈະຣິຍາ
໑໒. ສຸຕະໂສມະຈະຣິຍາ
໑໔. ເອກະຣາຊະຈະຣິຍາ

ໄດ້ສະເຫວີຍທຸກແລະສົມບັດຫຼາຍຢ່າງ
ເຮົາໄດ້ໃຫ້ທານທີ່ຄວນໃຫ້ ພໍ່າເພັງສິນໂດຍຫາເສດບໍ່ໄດ້
ເຖິງເນກຂຳມະປາຣະມີແລ້ວ ຈຶ່ງບັນລຸສຳໂພທິຍານອັນສູງສຸດ
ເຮົາສອບຖາມບັນດິດທັງຫຼາຍ ກະທຳຄວາມພຽນຢ່າງອຸກິດ
ເຖິງຂັນຕິປາຣະມີແລ້ວ ຈຶ່ງບັນລຸສຳໂພທິຍານອັນສູງສຸດ
ເຮົາກະທຳອະທິຖານຢ່າງໝັ້ນຄົງ ຕາມຮັກສາສັດຈະວາຈາ
ເຖິງເມດຕາປາຣະມີແລ້ວ ຈຶ່ງບັນລຸສຳໂພທິຍານອັນສູງສຸດ
ເຮົາເປັນຜູ້ມີຈິດສະເໝີໃນລາບແລະຄວາມເສື່ອມລາບ
ໃນຍົດແລະຄວາມເສື່ອມຍົດ ໃນຄວາມນັບຖືແລະການດູໝິ່ນທັງປວງແລ້ວ
ຈຶ່ງບັນລຸສຳໂພທິຍານອັນສູງສຸດ
ທ່ານທັງຫຼາຍຈົ່ງເຫັນຄວາມຂີ້ຄ້ານໂດຍຄວາມເປັນໄພ
ແລະເຫັນການເຣັດຄວາມພຽນໂດຍເປັນທາງກະເສມ
ແລ້ວຈົ່ງຜາຣົບຄວາມພຽນເທີ້ນ
ນີ້ເປັນຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ
ທ່ານທັງຫຼາຍຈົ່ງເຫັນຄວາມວິວາດໂດຍຄວາມເປັນໄພ
ແລະເຫັນຄວາມບໍ່ວິວາດໂດຍເປັນທາງກະເສມ
ແລ້ວຈົ່ງກ່າວວາຈາອ່ອນຫວານອັນສະໝັກສະໝານກັນເທີ້ນ
ນີ້ເປັນຄຳສັ່ງຂອງພຣະພຸດທະເຈົ້າທັງຫຼາຍ
ທ່ານທັງຫຼາຍຈົ່ງເຫັນຄວາມຜະໝາດໂດຍຄວາມເປັນໄພ
ແລະເຫັນຄວາມບໍ່ຜະໝາດໂດຍເປັນທາງກະເສມແລ້ວ
ຈົ່ງຈະເລີນມັກອັນປະກອບດ້ວຍອົງ ໘ ປະການເທີ້ນ
ນີ້ເປັນຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ

**ນິເທດແຫ່ງເນກຂຳມະປາຣະມີເປັນຕົ້ນ ຈົບ**

ຮູ້ວ່າພຣະຜູ້ມີພຣະພາກເຈົ້າ ເມື່ອຈະຊົງຍ້ອງຍໍບຸບຈະຣິຍາ

ຂອງພຣະອົງ ຈຶ່ງໄດ້ຕັດທຳປະຣິຍາຍຊື່ພຸດທາປະທານິຍະ
ດ້ວຍປະການດັ່ງນີ້ແລ

## ສະໂມທານະກະຖາ

### ສະຫຼຸບການພ່ຳເພັງປາຣະມີ ໓໐

ພຣະຜູ້ມີພຣະພາກເຈົ້າຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ ໄດ້ຕັດໄວ້ດັ່ງນີ້ວ່າ ການພ່ຳເພັງປາຣະມີອັນເປັນທຳເຄື່ອງບົ່ມພຣະໂພທິຍານເຫຼົ່ານີ້ ຈັດເປັນປາຣະມີ ໑໐ ອຸປະປາຣະມີ ໑໐ ແລະປະຣະມັດຖະປາຣະມີ ໑໐

ຄື ການພ່ຳເພັງທານໃນພົບທີ່ເປັນພຣະເຈົ້າສີວິຣາດ ຜູ້ປະເສີດເປັນທານປາຣະມີ ໑
ໃນພົບທີ່ເຮົາເປັນເວດສັນດອນແລະເວລາມະພາມເປັນທານະອຸປະປາຣະມີ ໒

ໃນພົບທີ່ເຮົາເປັນອະກິດຕິດາບົດອົດອາຫານນັ້ນ ເປັນທານະອຸປະປາຣະມີ ໃນພົບທີ່ເຮົາເປັນພະຍາໄກ່ປ່າ ສີລະວະນາຄະແລະພະຍາກະຕ່າຍ ເປັນທານະປະຣະມັດຖະປາຣະມີ ໓

ໃນພົບທີ່ເຮົາເປັນພະຍາວານອນ ຊ້າງສັດທັນແລະຊ້າງລ້ຽງມານດາ ເປັນສີນປາຣະມີ ໔

ການຮັກສາສີນໃນພົບທີ່ເຮົາເປັນຈຳເປີຍຍະນາຄະຣາຊະ ແລະພູຣິທັດຕະນາຄະຣາຊະເປັນສີລະອຸປະປາຣະມີ ໕
ໃນພົບທີ່ເຮົາເປັນສັງຂະປາລະບັນດິດເປັນສີລະປະຣະມັດຖະປາຣະມີ ໖

ໃນພົບທີ່ເຮົາເປັນຍຸທັນໄຊຍະກຸມານ ມະຫາໂຄວິນທະພາມ ຄົນລ້ຽງຊ້າງ ອະໂຍຄະຣະຣາດຊະໂອຣົດ ພັນລາຕິ ສຸວັນນະສາມ ມະຄະເທບ ແລະເນມິຣາດ ປາຣະມີເຫຼົ່ານີ້ເປັນອຸປະປາຣະມີ

ໃນພົບທີ່ເຮົາເປັນມະໂຫສົດ ຜູ້ເປັນຊັບຂອງຣັດ ກຸນທະລະ ຕັນທິລະ ແລະນິກາກະທາ ປາຣະມີເຫຼົ່ານີ້ເປັນປັນຍາອຸປະປາຣະມີ ໗

ໃນພົບທີ່ເຮົາເປັນວິທູນບັນດິດແລະສຸຣິຍະພາມ ມາຕັງຄະ ພາມ ຜູ້ເປັນສິດເກົ່າຂອງອາຈານ ປາຣະມີທັງ ໔ ນີ້ ເປັນປັນຍາປາຣະມີ ໘

ໃນພົບທີ່ເຮົາເປັນພຣະຣາຊາຜູ້ມີສິນ ມີຄວາມພຽນ
ເປັນຜູ້ກໍ່ເກີດສັດຕຸພັດຕະຊາດົກ ປາຣະມີນີ້ເປັນປັນຍາປະຣະມັດຖະປາຣະມີ ໙

ໃນພົບທີ່ເຮົາເປັນພຣະຣາຊາ ຜູ້ມີຄວາມບາກບັ່ນ
ເປັນວິຣິຍະປະຣະມັດຖະປາຣະມີ ໑໐

ໃນພົບທີ່ເຮົາເປັນທຳມະປາລະກຸມານເປັນຂັນຕິປາຣະມີ ໑໘
ໃນພົບທີ່ເຮົາເປັນທຳມິກະເທບພະບຸດ
ເຮັດສົງຄາມກັບອະທຳມິກະເທບພະບຸດ

ຮຽກວ່າຂັນຕິອຸປະປາຣະມີ ໑໓
ໃນພົບທີ່ເຮົາເປັນຂັນຕິວາທີດາບົດສະແຫວງຫາພຸດທະພູມ
ດ້ວຍການພໍ່າເພັງຂັນຕິປາຣະມີ
ໄດ້ເຮັດກຳທີ່ເຮັດໄດ້ຍາກເປັນຈຳນວນຫຼາຍ ນີ້ເປັນຂັນຕິປະຣະມັດຖະປາຣະມີ ໑໔

ໃນພົບທີ່ເຮົາເປັນສະສະບັນດິດ ນົກຄຸ່ມ ເຊິ່ງປະກາດຄຸນສັດຈະ
ເຮັດໄຟໃຫ້ດັບດ້ວຍສັດຈະ ນີ້ເປັນສັດຈະປາຣະມີ ໑໕
ໃນພົບທີ່ເຮົາເປັນປາຢູ່ໃນນ້ຳ ໄດ້ເຮັດສັດຈະຢ່າງສູງ
ເຮັດຝົນໃຫ້ຕົກຫ່າໃຫຍ່ ນີ້ເປັນສັດຈະປາຣະມີຂອງເຮົາ

ໃນພົບທີ່ເຮົາເປັນສຸປາຣະບັນດິດຜູ້ເປັນນັກປາດ
ຍັງເຮືອໃຫ້ຂ້າມມະຫາສະມຸດຈົນເຖິງຝັ່ງດ້ວຍສັດຈະ
ເປັນກັນທະທິປາຍະນະດາບົດ ຣະງັບພິດໄດ້ດ້ວຍສັດຈະ
ແລະເປັນວານອນຂ້າມກະແສແມ່ນ້ຳຄົງຄາໄດ້ດ້ວຍສັດຈະ

ນີ້ເປັນປາຣະມີຂອງພຣະສາດສະດາ ປາຣະມີນັ້ນເປັນອຸປະປາຣະມີ ໑໖
ໃນພົບທີ່ເປັນສຸຕະໂສມະຣາຊາ ຮັກສາສັດຈະຢ່າງສູງ
ຊ່ອຍປ່ອຍກະສັດ ໑໐໑ ນີ້ເປັນສັດຈະປະຣະມັດຖະປາຣະມີ ໑໗

ອັນໃດທີ່ຈະເປັນຄວາມພໍໃຈໄປກວ່າອະທິຖານ ນີ້ເປັນອະທິຖານປາຣະມີ ໑໘
ໃນພົບທີ່ເຮົາເປັນມາຕັງຄະ ຊະດົນແລະຊ້າງມາຕັງຄະ
ນີ້ເປັນອະທິຖານະອຸປະປາຣະມີ ໑໙

ໃນພົບທີ່ເຮົາເປັນມູຄະປັກຂະກຸມານເປັນອະທິຖານປະຣະມັດຖະປາຣະມີ ໒໐
ໃນພົບທີ່ເຮົາເປັນມະຫາກັນທະລືສີ ແລະພຣະເຈົ້າໂສທະນະ

ແລະປາຣະມີ ๘ ຢ່າງຄື
ໃນພົບທີ່ເຮົາເປັນພຣະເຈົ້າພົມມະທັດແລະສັນທິຕິນທະກະ
ທີ່ກ່າວມາແລ້ວເປັນເມດຕາປາຣະມີ ๘໑

ໃນພົບທີ່ເຮົາເປັນໂສນະນັນທະບັນດິດຜູ້ທຳຄວາມຮັກ
ປາຣະມີເຫຼົ່ານັ້ນເປັນເມດຕາອຸປະປາຣະມີ ๘๘
ໃນພົບທີ່ເຮົາເປັນພຣະເຈົ້າເອກກະຣາດ ເປັນປາຣະມີບໍ່ມີຂອງຜູ້ອື່ນເໝືອນ
ນີ້ເປັນເມດຕາປະຣະມັດຖະປາຣະມີ ๘໓

ໃນພົບທີ່ເຮົາເປັນນົກແຂກເຕົ້າ ๘ ເທື່ອ ເປັນອຸເປກຂາປາຣະມີ ๘໔
ໃນພົບທີ່ເຮົາເປັນໂລມະຫັງສະບັນດິດ ເປັນອຸເປກຂາປະຣະມັດຖະປາຣະມີ ๘໕

ປາຣະມີຂອງເຮົາ ໑໐ ປະການນີ້ ເປັນສ່ວນແຫ່ງພຣະໂພທິຍານອັນເລີດ
ປາຣະມີທີ່ເກີນກວ່າ ໑໐ ບໍ່ມີ ແລະປາຣະມີທີ່ຍ່ອນກວ່າ ໑໐ ກໍບໍ່ມີ
ເຮົາພ່ຳເພັງປາຣະມີທຸກຢ່າງ ບໍ່ຍິ່ງ ບໍ່ຍ່ອນ

**ເປັນປາຣະມີ ໑໐ ປະການດັ່ງນີ້ແລ**

**ສະໂມທານະກະຖາ ຈົບ**

**ຈະຣິຍາປິດົກ ຈົບບໍລິບູນ**